# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ၅໘

## ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໘

### ຂຸດທະກະນິກາຍ ອະປະທານ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໕໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໙ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໙ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສະຣະບານ

## ໑໔. ໂສພິຕະວັກ .......................................................................... ໔໕໙

**ໝວດວ່າດ້ວຍພຣະໂສພິຕະເປັນຕົ້ນ** .............................................................. ໔໕໙

## ໔໘. ທັດຖິວັກ ........................................................ ໓໓໘



## ໔໓. ອາລຳພະນະທາຍະກະວັກ ........................................................ ໓໔໗

## ໒໕. ຕູວະຣະທາຍິວັກ......................................................................... ໓໖໔

**ໝວດວ່າດ້ວຍພຣະຕູວະຣະທາຍິເປັນຕົ້ນ**........................................................... ໓໖໔

## ໔໘. ສຸວັນນະພິບໂພຫະນະວັກ ................................................ ໕໘໗

**ໝວດວ່າດ້ວຍການຖວາຍໝອນຄຳເປັນຕົ້ນ** ................................................ ໕໘໗

## ໓໒. ອາຣັກຂະທາຍະກະວັກ ................................................................ ໔໒໒

**ໝວດວ່າດ້ວຍພຣະອາຣັກຂະທາຍະກະເປັນຕົ້ນ** ........................................ ໔໒໒

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໘

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໘

## ຂຸດທະກະນິກາຍ ອະປະທານ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

# ໑. ພຸດທະວັກ

### ໝວດວ່າດ້ວຍພຣະພຸດທະເຈົ້າເປັນຕົ້ນ

## ໑. ພຸດທາປະທານ

### ພຣະປະຫວັດໃນອະດີດຊາດຂອງພຣະພຸດທະເຈົ້າ

[໑] ພຣະອານົນເຖຣະ ຜູ້ເປັນມຸນີຊາວແຄວ້ນວິເທຫະ
ນ້ອມກາຍລົງທູນຖາມພຣະຕະຖາຄົດເຈົ້າ
ຜູ້ປະທັບຢູ່ໃນພຣະເຊຕະວັນມະຫາວິຫານວ່າ
ໄດ້ຮູ້ມາວ່າ ພຣະສັບພັນຍູພຸດທະເຈົ້າມີຢູ່
ພຣະສັບພັນຍູພຸດທະເຈົ້າເຫຼົ່ານັ້ນຜູ້ເປັນນັກປາດ
ຊົງອຸບັດຂຶ້ນຍ້ອນເຫດອັນໃດ

[໒] ລໍາດັບນັ້ນ ພຣະສັບພັນຍູຜູ້ປະເສີດ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ຕັດກັບພຣະອານົນຜູ້ຈະເລີນ ດ້ວຍພຣະສຸຣະສຽງທີ່ມ່ວນວ່າ
ທີຣະຊົນເຫຼົ່າໃດໄດ້ສັ່ງສົມກຸສົນສົມພານໄວ້ໃນພຣະພຸດທະເຈົ້າອົງກ່ອນ ໆ
ຍັງບໍ່ໄດ້ຄວາມລຸດພົ້ນຈາກກິເລດໃນສາດສະໜາຂອງພຣະຊິນນະເຈົ້າທັງຫຼາຍ

[໓] ຍ້ອນມຸ້ງຕໍ່ສຳໂພທິຍານນັ້ນ
ທີ່ຣະຊິນຜູ້ມີປັນຍາແກ່ກ້າດີ
ຈຶ່ງໄດ້ບັນລຸຄວາມເປັນພຣະສັບພັນຍູ
ດ້ວຍອັດທະຍາໄສທີ່ເຂັ້ມແຂງແລະດ້ວຍອຳນາດແຫ່ງປັນຍາ

[໔] ເຖິງເຮົາກໍໄດ້ເປັນຜູ້ມີໃຈປາຖະໜາຈະເປັນພຣະພຸດທະເຈົ້າ
ໃນສຳນັກຂອງພຣະພຸດທະເຈົ້າອົງກ່ອນ ໆ ຫຼາຍພຣະອົງ
ພຣະພຸດທະເຈົ້າເຫຼົ່ານັ້ນຊົງເປັນພຣະທຳຣາຊາ ນັບບໍ່ຖ້ວນ

[໕] ຕໍ່ໄປນີ້ ຂໍໃຫ້ທ່ານທັງຫຼາຍຜູ້ມີໃຈມົດຈິດ
ຈົ່ງຟັງປະຫວັດໃນອະດີດຊາດຂອງພຣະພຸດທະເຈົ້າທັງຫຼາຍ
ພຣະພຸດທະເຈົ້າຜູ້ຊົງເປັນພຣະທຳຣາຊາ
ສົມບູນດ້ວຍປາຣະມີ ໓໐ ປະການນັບບໍ່ຖ້ວນ

[໖] ເຮົາຍົກນິ້ວມືທັງ ໑໐ ນິ້ວຂຶ້ນ
ນອບນ້ອມພຣະໂພທິຍານຂອງພຣະພຸດທະເຈົ້າຜູ້ປະເສີດສຸດ
ອະພິວາດພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ພ້ອມດ້ວຍພຣະສົງດ້ວຍຂະໜ່ອມ

[໗] ໃນພຸດທະເຂດ ມີຣັດຕະນະທີ່ຢູ່ໃນອາກາດ
ທີ່ຢູ່ເທິງພາກພື້ນດິນ ນັບຈຳນວນບໍ່ຖ້ວນຢູ່ເທົ່າໃດ
ເຮົາເພິ່ງນຶກນ້ອມນຳຣັດຕະນະເທົ່ານັ້ນທັງໝົດມາໄດ້

[໘] ໃນພື້ນທີ່ອັນເປັນເງິນນັ້ນ
ເຮົາໄດ້ເນຣະມິດຜາສາດແກ້ວຫຼາຍຮ້ອຍຊັ້ນ
ສູງຕະຫງ່ານຕາໂຊດຊ່ວງໃນທ້ອງຟ້າ

[໙] ມີເສົາວິຈິດງົດງາມ ມີຄ່າຫຼາຍ
ຕັ້ງຢູ່ຊອນລອນ ມີຂື່ເຮັດດ້ວຍຄຳ
(ຕິດຄູ່ຫ່ວງຄຳທີ່ຂື່ຫຼືສີຍົວ)
ປະດັບດ້ວຍນົກກະຣຽນແລະສັດ

[໑໐] ພື້ນຊັ້ນທຳອິດເຮັດດ້ວຍແກ້ວໄພທູນ
ງົດງາມດັ່ງກ້ອນເມກປາສະຈາກມົນທິນ

ມີຮູບຝູງປາແລະດອກບົວຢູ່ເດຍລະດາດ
ຍ່ອມງາມດ້ວຍພື້ນຄຳຢ່າງດີ

[໑໑] (ຢູ່ຜາສາດນັ້ນ) ພື້ນບາງຊັ້ນມີຮູບງ່າໄມ້ອ່ອນຊ້ອຍ
ມີສີເໝືອນສີແກ້ວປະພານ
ບາງຊັ້ນມີສີແດງສົດ ບາງຊັ້ນງົດງາມເປ່ງຣັດສະໝີດັ່ງສີແມງເຕົ່າຄຳ[໑]
ບາງຊັ້ນສະຫວ່າງສະໄຫວໄປທົ່ວທິດ

[໑໔] (ຢູ່ຜາສາດນັ້ນ) ແບ່ງພື້ນທີ່ເປັນໜ້າມຸກ
ຣະບຽງ ໜ້າຕ່າງ ໄວ້ຢ່າງດີ
ມີພວງອຸບະຫອມ[໒]ທີ່ໜ້າຣື່ນຣົມໃຈ
ຫ້ອຍຍ້ອຍຈາກວະໄລໄພທີ[໓] ແລະບານປະຕູຕາໜ່າງທັງ ໔ ດ້ານ

[໑໓] (ຢູ່ຜາສາດນັ້ນ) ປະກອບດ້ວຍເຮືອນຍອດຊັ້ນຢ້ຽມ
ປະດັບດ້ວຍຣັດຕະນະ ໗ ປະການ
ມີສີຂຽວ ສີເຫຼືອງ ສີແດງ ສີຂາວ ສີດຳລ້ວນ

[໑໔] (ຢູ່ຜາສາດນັ້ນ) ມີດອກປະທຸມຊູກ້ານບານສະພັ່ງ
ງົດງາມດ້ວຍຮູບໝູ່ເນື້ອຮ້າຍແລະຝູງນົກ
ເດຍລະດາດດ້ວຍດວງດາວພາວພາຍຣະຍິບຣະຍັບ
ປະດັບດ້ວຍຮູບດວງຈັນແລະດວງອາທິດ

[໑໕] (ຜາສາດນັ້ນ) ໃຊ້ຕາໜ່າງຄຳປົກຄຸມ
ຕິດຕາໜ່າງກະດິ່ງຄຳ ພວງດອກໄມ້ຄຳ ໜ້າຣື່ນຣົມໃຈ
ລົມພັດມາກະທົບເຂົ້າກໍເກີດສຽງດັ່ງກັງວານ

[໑໖] (ຢູ່ຜາສາດນັ້ນ) ຂົງທຸງທິວເຊິ່ງຍ້ອມດ້ວຍສີນານາຊະນິດ
ຄືທຸງສີຫົງສະບາດ ສີແດງ ສີເຫຼືອງ ສີຄຳຊົມພູນຸດ

[໑໗] (ຢູ່ຜາສາດນັ້ນ) ມີບ່ອນນອນຕ່າງ ໆ ງົດງາມ ເຫຼືອຄະນາ ຫຼາຍຮ້ອຍຊະນິດ
ເຮັດດ້ວຍແກ້ວຜຼຶກ ເງິນ ແກ້ວມະນີ ທັບທິມ ແກ້ວລາຍ
ປູດ້ວຍຜ້າແຄວັນກາສີເນື້ອລະອຽດອ່ອນ

[໑໘] ຜ້າຫົ່ມສີເຫຼືອງ ທໍດ້ວຍດ້າຍຂົນສັດ
ທໍດ້ວຍຜ້າເປືອກໄມ້ ທໍດ້ວຍຝ້າຍເມືອງຈີນ

ທໍດ້ວຍຝ້າຍເມືອງປັດຕຸນນະ
ເຄື່ອງປູຕ່າງ ໆ ທັງໝົດເຮົາອະທິຖານໃຈປູໄວ້

[໑໙] ແຕ່ລະຊັ້ນປະດັບດ້ວຍຊໍ່ຟ້າເຊິ່ງເຮັດດ້ວຍຣັດຕະນະ
ມີຄົນຢືນຖືປະທີບດວງແກ້ວສະຫວ່າງສະໄຫວຢູ່ຊອນລອນ

[໒໐] ມີເສົາຣະນຽດ (ເສົາປັກຊອນລອນຕະຫຼອດຮົ້ວ)
ແລະເສົາຄ້າຍຄໍາ ເສົາຄ້າຍຄໍາຊົມພູນຸດ ເສົາຄ້າຍໄມ້ແກ່ນ
(ແລະ) ເສົາຄ້າຍເງິນທີ່ງົດງາມ ຍ່ອມເຮັດຜາສາດນັ້ນໃຫ້ງົດງາມ

[໒໑] (ຢູ່ຜາສາດນັ້ນ) ມີບ່ອນຕໍ່ (ປ່ອງ) ຫຼາຍແຫ່ງຈັດໄວ້ຮຽບຮ້ອຍດີ
ມີບານປະຕູແລະລູກດານງົດງາມ ມີກະຖາງບົວຫຼວງ
ບົວຂາບຊອນລອນຢູ່ທັງ ໔ ດ້ານ

[໒໒] ເຮົາເນຣະມິດພຣະພຸດທະເຈົ້າຜູ້ຊົງເປັນຜູ້ນໍາສັດໂລກໃນອະດີດທຸກພຣະອົງ
ພ້ອມທັງພຣະສົງສາວົກດ້ວຍວັນນະແລະຮູບຕາມປົກກະຕິ

[໒໓] ພຣະພຸດທະເຈົ້າທຸກພຣະອົງພ້ອມດ້ວຍສາວົກ
ເປັນໝູ່ພຣະອະຣິຍະ ສະເດັດເຂົ້າໄປທາງປະຕູນັ້ນ
ປະທັບນັ່ງເທິງຕັ່ງຄໍາລ້ວນ

[໒໔] ພຣະພຸດທະເຈົ້າຜູ້ປະເສີດໃນໂລກ
ທັງທີ່ເປັນອະດີດແລະປັດຈຸບັນທຸກພຣະອົງ
ໄດ້ສະເດັດຂຶ້ນສູ່ຜາສາດຂອງເຮົາແລ້ວ

[໒໕] ພຣະປັດເຈກພຸດທະເຈົ້າຫຼາຍຮ້ອຍພຣະອົງ
ຜູ້ເປັນພຣະສະຍໍາພູ ຜູ້ບໍ່ຊົງພ່າຍແພ້
ທັງທີ່ເປັນອະດີດແລະປັດຈຸບັນທັງໝົດ
ໄດ້ສະເດັດຂຶ້ນສູ່ຜາສາດຂອງເຮົາແລ້ວ

[໒໖] ຕົ້ນກັນລະປະພຶກທິບແລະຕົ້ນກັນລະປະພຶກມະນຸດ ມີຫຼາຍລົ້ນ
ເຮົາໄດ້ນໍາຜ້າທຸກຢ່າງມາຈາກຕົ້ນກັນປະພຶກເຫຼົ່ານັ້ນ
ຕັດຫຍິບເປັນໄຕຣຈີວອນຖວາຍໃຫ້ນຸ່ງຫົ່ມ

[໒໗] ຂອງຫຍໍ້າ ຂອງສົ້ມ ຂອງຊິມ ນໍ້າປານະ

ລວມທັງອາຫານມີຢູ່ຢ່າງພຽບພ້ອມ
ເຮົາຖວາຍບັນຈຸຈົນເຕັມບາດແກ້ວມະນີລູກງາມທຸກລູກ

[໔໗] ໝູ່ພຣະອະຣິຍະເຫຼົ່ານັ້ນ ເປັນຜູ້ມິດຈິດຈາກກິເລດ
ຄອງຈີວອນຜ້າທິບສະເໝີກັນ
ອັນຂ້າພະເຈົ້ານິມົນສັນຈົນອີ່ມໜຳ ດ້ວຍນ້ຳຕານກ້ອນ
ນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍ ແລະເຂົ້າຢ່າງດີ

[໔໙] ທັງໝົດໄດ້ເຂົ້າໄປສູ່ຫ້ອງແກ້ວ
ເໝືອນໄກສອນຣາດຊະສີເຂົ້າໄປສູ່ຖ້ຳ

[໕໐] ສຳເລັດສີຫະໄສຍາດເທິງບ່ອນນອນມີຄ່າຫຼາຍ
ມີສະຕິສຳປະຊັນຍະ ລຸກຂຶ້ນແລ້ວ ນັ່ງຂັດສະມາທິເທິງບ່ອນນອນ

[໕໑] ເຊິ່ງເປັນອາລົມຂອງພຣະພຸດທະເຈົ້າທຸກພຣະອົງ
ແນບແໜ້ນດ້ວຍຄວາມຍິນດີໃນຊານ
ໝູ່ໜຶ່ງສະແດງທຳ ໝູ່ໜຶ່ງຍິນດີດ້ວຍລິດ

[໕໒] ໝູ່ໜຶ່ງເຂົ້າອັບປະນາຊານ
ໝູ່ໜຶ່ງຈະເລີນອະພິນຍາວະສີ
ສະແດງລິດໄດ້ຫຼາຍຮ້ອຍຫຼາຍພັນປະການ

[໕໓] ຝ່າຍພຣະພຸດທະເຈົ້າທັງຫຼາຍກໍຖາມພຣະພຸດທະເຈົ້າທັງຫຼາຍ
ເຖິງບັນຫາອັນເປັນວິໄສແຫ່ງພຣະສັບພັນຍຸຕະຍານ
ພຣະພຸດທະເຈົ້າເຫຼົ່ານັ້ນກໍຊົງຮູ້ແຈ້ງເຫດອັນເລິກເຊິ່ງລະອຽດອ່ອນດ້ວຍປັນຍາ

[໕໔] ສາວົກທັງຫຼາຍກໍທູນຖາມພຣະພຸດທະເຈົ້າທັງຫຼາຍ
ພຣະພຸດທະເຈົ້າທັງຫຼາຍກໍຕັດຖາມສາວົກທັງຫຼາຍ
ທັງພຣະພຸດທະເຈົ້າແລະສາວົກເຫຼົ່ານັ້ນຕ່າງກໍຖາມຕອບກັນແລະກັນ

[໕໕] ພຣະພຸດທະເຈົ້າ ພຣະປັດເຈກພຸດທະເຈົ້າ ແລະສາວົກຜູ້ປົບນິບັດເຫຼົ່ານັ້ນ
ຕ່າງຮື່ນຣົມຍິນດີໃນຜາສາດດ້ວຍຄວາມຍິນດີດ້ວຍປະການແນວນີ້

[໕໖] (ພຣະເຈົ້າຕິໂລກະວິໄຊຊົງດຳຣິວ່າ)
ເສດຕະສັດຕັ້ງຊ້ອນກັນ ມີຣັດສະໝີເປ່ງປັ່ງດັ່ງແກ້ວໄພທູນ

ຂໍໃຫ້ທຸກຄືນຈົ່ງກັ້ນເສດຕະສັດ ມີຕາໜ່າງຄຳຫ້ອຍເດຍລະດາດ
ປະດັບດ້ວຍຕາໜ່າງເງິນ
ແວດລ້ອມດ້ວຍຕາໜ່າງແກ້ວມຸກດາໄວ້ເໜືອຫົວຂ້າພະເຈົ້າ

[໓໗] ມີເພດານຜ້າຕິດດວງດາວຄຳມີແສງແວວວາວ
ມີພວງມາໄລຫ້ອຍຢູ່ທົ່ວງົດງາມຕະການຕາ
ເພດານຜ້າທັງໝົດ ຈົ່ງດາດຢູ່ເໜືອຫົວ

[໓໘] ສະທີ່ເດຍລະດາດດ້ວຍພວງມາໄລ
ງົດງາມດ້ວຍພວງຂອງຫອມ ມີພວງຜ້າຫ້ອຍເດຍລະດາດ
ປະດັບປະດາດ້ວຍພວງຣັດຕະນະ

[໓໙] ມີດອກໄມ້ຊອນລອນ ງົດງາມຫຼາຍ
ອົບດ້ວຍຂອງຫອມກິ່ນຟຸ້ງກະຈາຍໄປ
ໃຊ້ນິ້ວມືທັງ ໕ ເຈີມດ້ວຍຂອງຫອມ
ມຸງດ້ວຍຫຼັງຄາຄຳ

[໔໐] ທັງ ໔ ທິດ (ແຫ່ງຜາສາດ) ເດຍລະດາດດ້ວຍດອກປະທຸມແລະດອກອຸບົນ
ຜາກົດເປັນສີຄຳ ຫອມຟຸ້ງດ້ວຍລະອອງເກສອນດອກປະທຸມ

[໔໑] ຮອບ ໆ ຜາສາດ ຕົ້ນໄມ້ທຸກຕົ້ນຈົ່ງອອກດອກບານສະພັ່ງ
ດອກໄມ້ຫຼົ່ນເອງ ປິວໄປໂຮຍໃສ່ຜາສາດ

[໔໒] ໃກ້ ໆ ຜາສາດນັ້ນ ຂໍຝູງນົກຍູງຈົ່ງຣຳແພນ (ຫາງ)
ຝູງຫົງທິບຈົ່ງສົ່ງສຽງຮ້ອງ ຝູງນົກກາຣະເວກຈົ່ງຮ້ອງຂັບຂານ
ວິຫົກກໍຈົ່ງສົ່ງສຽງຂັບຂານຢູ່ຮອບ ໆ ຜາສາດ

[໔໓] ກອງທຸກຊະນິດຈົ່ງດັ່ງຂຶ້ນ ພິນທຸກຊະນິດຈົ່ງບັນເລງ
ເຄື່ອງສັງຄີຕະທຸກຊະນິດຈົ່ງບັນເລງຂັບກ່ອມຢູ່ຮອບ ໆ ຜາສາດ

[໔໔-໔໕] ຕະຫຼອດພຸດທະເຂດແລະໃນຈັກກະວານ
ຕໍ່ຈາກນັ້ນຈົ່ງມີບັນລັງຄຳຂະໜາດໃຫຍ່ ສະຫວ່າງແຈ້ງດ້ວຍຣັດສະໝີ
ບໍ່ມີປ່ອງວ່າງ ຂີບດ້ວຍຣັດຕະນະ ຕັ້ງຢູ່ (ຮອບ ໆ ຜາສາດ)
ຂໍຕົ້ນພຶກສາປະທີບ ຈົ່ງສ່ອງສະຫວ່າງ
ມີແສງໂຊດຊ່ວງຕິດຕໍ່ເປັນອັນດຽວກັນທັງ ໑໐,໐໐໐ ດວງ

[໔໖] ຍິງນັກຟ້ອນກໍຈົ່ງຟ້ອນ ຍິງນັກຮ້ອງກໍຈົ່ງຂັບຮ້ອງ
ໝູ່ນາງອັບປະສອນກໍຈົ່ງລ່າຍລຳ ສະນາມເຕັ້ນລຳຕ່າງ ໆ
ຈົ່ງຜາກົດຢູ່ຮອບ ໆ ຜາສາດ

[໔໗] ເຮົາ (ຜູ້ເປັນພຣະເຈົ້າຈັກກະພັດມີນາມວ່າຕິໂລກະວິໄຊໃນຄັ້ງນັ້ນ)
ສັ່ງໃຫ້ຍົກທຸງທຸກຊະນິດ ວິຈິດງົດງາມ ໕ ສີ
ໄວ້ເທິງປາຍໄມ້ ເທິງຈອມພູເຂົາ ແລະເທິງຈອມພູເຂົາສິເນຣຸ

[໔໘] ໝູ່ມະນຸດ ໝູ່ນາກ ໝູ່ຄົນທັບ ແລະໝູ່ເທວະດາທັງໝົດນັ້ນ
ຈົ່ງເຂົ້າມາປະນົມມືນອບນ້ອມແວດລ້ອມຜາສາດຂອງເຮົາ

[໔໙] ກຸສົນກຳໃດ ໆ ຄວນເພື່ອບັງເກີດໃນສະຫວັນຊັ້ນໄຕຣທິບ
ທີ່ຂ້າພະເຈົ້າເພິ່ງກະທຳດ້ວຍກາຍ ວາຈາ ໃຈ
ກຸສົນກຳນັ້ນທັງໝົດ ຂ້າພະເຈົ້າໄດ້ທຳແລ້ວ

[໕໐] ສັດເຫຼົ່າໃດມີສັນຍາກໍຕາມ
ແລະສັດເຫຼົ່າໃດບໍ່ມີສັນຍາກໍຕາມມີຢູ່
ຂໍສັດເຫຼົ່ານັ້ນທັງໝົດຈົ່ງເປັນຜູ້ມີສ່ວນສະເຫວີຍຜົນບຸນທີ່ເຮົາເຮັດແລ້ວ

[໕໑] ສັດເຫຼົ່າໃດຮູ້ວ່າເຮົາເຮັດບຸນ
ຂໍສັດເຫຼົ່ານັ້ນ ຈົ່ງມີສ່ວນສະເຫວີຍຜົນບຸນທີ່ເຮົາໃຫ້ແລ້ວ
ກໍໃນບັນດາສັດເຫຼົ່ານັ້ນ ສັດເຫຼົ່າໃດບໍ່ຮູ້
ຂໍເທວະດາຈົ່ງໄປປະກາດໃຫ້ສັດເຫຼົ່ານັ້ນຮູ້

[໕໒] ເຫຼົ່າສັດໃນໂລກຜູ້ອາໄສອາຫານລ້ຽງຊີວິດທຸກຈຳພວກ
ຂໍຈົ່ງໄດ້ໂພຊະນາຫານທີ່ໜ້າພໍໃຈ ຕາມເຈຕະນາຂອງເຮົາ

[໕໓] ເຮົາໃຫ້ທານດ້ວຍໃຈ ຍຶດຖືຄວາມເຫຼື້ອມໃສດ້ວຍໃຈ
ເຮົາໄດ້ບູຊາພຣະສຳມາສຳພຸດທະເຈົ້າທຸກພຣະອົງ
ພ້ອມທັງພຣະປັດເຈກພຸດທະເຈົ້າແລະສາວົກຂອງພຣະຊິນນະເຈົ້າແລ້ວ

[໕໔] ດ້ວຍກຳທີ່ເຮົາເຮັດໄວ້ດີແລ້ວນັ້ນ ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ເຮົາລະຮ່າງກາຍມະນຸດແລ້ວຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໕໕] ເຮົາຮູ້ຈັກແຕ່ພົບທັງ ໘

ຄືຄວາມເປັນເທວະດາຫຼືຄວາມເປັນມະນຸດ
ບໍ່ໄດ້ຮູ້ ຈັກຄະຕິອື່ນເລີຍ
ນີ້ເປັນຜົນແຫ່ງຄວາມປາຖະໜາດ້ວຍໃຈ

[໕໖] (ເມື່ອເຮົາເກີດເປັນເທວະດາ) ເຮົາກໍຍິ່ງໃຫຍ່ກວ່າພວກເທວະດາ
(ເມື່ອເຮົາເກີດເປັນມະນຸດ) ເຮົາກໍຍິ່ງໃຫຍ່ກວ່າພວກມະນຸດ
ເຮົາສົມບູນດ້ວຍຮູບລັກສະນະ ບໍ່ມີໃຜສະເໝີດ້ວຍປັນຍາ

[໕໗] ໂພຊະນະມີຣົດແຊບຫຼາຍຊະນິດ ຣັດຕະນະບໍ່ແມ່ນໜ້ອຍ
ຜ້າຊະນິດຕ່າງ ໆ ຈາກຟາກຟ້າ ຍ່ອມເຂົ້າມາຫາເຮົາທັນທີ

[໕໘] ເຮົາຢຽດມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ພັກສາຫານອັນເປັນທິບ (ອາຫານທິບ)
ຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໕໙] ເຮົາຢຽດມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ຣັດຕະນະທຸກຢ່າງຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໐] ເຮົາຢຽດມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ຂອງຫອມທຸກຢ່າງຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໑] ເຮົາຢຽດມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ຍານພາຫະນະທຸກຢ່າງຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໒] ເຮົາຢຽດມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ດອກໄມ້ທຸກຢ່າງຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໓] ເຮົາຢຽດມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ເຄື່ອງປະດັບທຸກຢ່າງຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໔] ເຮົາຍ່ຽງມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ຍິງສາວທັງມວນຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໕] ເຮົາຍ່ຽງມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ນ້ຳເຜິ້ງແລະນ້ຳຕານກ້ອນ ຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໖] ເຮົາຍ່ຽງມືໄປໃນບ່ອນໃດ ໆ ຈະເປັນເທິງພື້ນດິນ
ພູເຂົາ ອາກາດ ໃນນ້ຳ ແລະໃນປ່າ ກໍຕາມ
ຂອງຂົບຫຍ້ຳທຸກຢ່າງຈາກບ່ອນນັ້ນ ໆ ຍ່ອມເຂົ້າມາຫາເຮົາ

[໖໗] ເຮົາໃຫ້ທານຢ່າງດີແກ່ຄົນຂາດຊັບ
ຄົນເດີນທາງໄກ ຄົນຂໍທານ ແລະຄົນຫຼົງທາງ
ເພື່ອຕ້ອງການຈະບັນລຸສຳໂພທິຍານອັນປະເສີດ

[໖໘] ເຮົາເຮັດໃຫ້ພູເຂົາສີລາລ້ອນບັນລື
ເຮັດໃຫ້ພູເຂົາໝາທຶບດັງກ້ອງ
ເຮັດໃຫ້ມະນຸດໂລກພ້ອມທັງເທວະໂລກຣ່າເຣິງ
ຈະເປັນພຣະພຸດທະເຈົ້າໃນໂລກ

[໖໙] ທິດທັງ ໑໐ ໃນໂລກ ເມື່ອຄົນຍ່າງໄປ
ຍ່ອມບໍ່ມີບ່ອນສິ້ນສຸດ ໃນສ່ວນແຫ່ງທິດນັ້ນ
ພຸດທະເຂດກໍນັບຈຳນວນບໍ່ຖ້ວນ(ຄືກັນ)

[໗໐] ແສງສະຫວ່າງຕາມປົກກະຕິຂອງເຮົາ (ໃນສະໄໝເປັນພຣະເຈົ້າຈັກກະພັດ)
ຜາກົດເປ່ງລັງສີອອກມາເປັນຄູ່ ໆ
ຕາໜ່າງຣັດສະໝີມີຢູ່ໃນລະຫວ່າງນີ້ ແສງສະຫວ່າງມີຢ່າງໄພບູນ

[໗໑] ຂໍປະຊາຊົນທັງໝົດໃນໂລກທາດປະມານເທົ່ານີ້
ຈົ່ງເບິ່ງເຫັນເຮົາ ທັງໝົດຈົ່ງດີໃຈ ທັງໝົດຈົ່ງໄປຕາມເຮົາ

[໗໒] ເຮົາຕີກອງອຳມະຣິດ ມີສຽງມ່ວນກັງວານ
ຂໍປະຊາຊົນໃນລະຫວ່າງນີ້ ຈົ່ງຟັງສຽງທີ່ມ່ວນ (ຂອງເຮົາ)

[໗໖] ເມື່ອຕະຖາຄົດບັນດານເນກຂຶ້ມຄືພຣະທຳໃຫ້ຕົກລົງ
ຂໍຊົນທັງໝົດຈົ່ງເປັນຜູ້ບໍ່ມີອາສະວະ
ບັນດາຜູ້ທີ່ປະຊຸມກັນຢູ່ໃນບ່ອນນີ້
ຜູ້ມີຄຸນຕໍ່າສຸດ ຈົ່ງເປັນພຣະໂສດາບັນ

[໗໔] ເຮົາໃຫ້ທານທີ່ຄວນໃຫ້ແລ້ວ ພໍ່າເພັງສີນປາຣະມີຢ່າງເຕັມປ່ຽມ
ສຳເລັດເນກຂຳມະປາຣະມີແລ້ວບັນລຸສຳໂພທິຍານອັນສູງສຸດ

[໗໕] ເຮົາສອບຖາມບັນດິດທັງຫຼາຍ (ພໍ່າເພັງປັນຍາປາຣະມີແລ້ວ)
ພໍ່າເພັງວິຣິຍະປາຣະມີແລ້ວ
ສຳເລັດຂັນຕິປາຣະມີແລ້ວບັນລຸສຳໂພທິຍານອັນສູງສຸດ

[໗໖] ເຮົາພໍ່າເພັງອະທິຖານປາຣະມີແລ້ວ
ພໍ່າເພັງສັດຈະປາຣະມີແລ້ວ ສຳເລັດເມດຕາປາຣະມີແລ້ວ
ບັນລຸສຳໂພທິຍານອັນສູງສຸດ

[໗໗] ເຮົາມີໃຈສະໝໍ່າສະເໝີໃນອາລົມທັງປວງ
ຄືທັງໃນລາບ ໃນຄວາມເສື່ອມລາບ ໃນຄວາມສຸກ ໃນຄວາມທຸກ
ໃນການນັບຖື ແລະໃນການຖືກດູໝິ່ນ (ພໍ່າເພັງອຸເປກຂາປາຣະມີແລ້ວ)
ບັນລຸສຳໂພທິຍານອັນສູງສຸດ

[໗໘] ທ່ານທັງຫຼາຍຈົ່ງເຫັນຄວາມຂີ້ຄ້ານເປັນສິ່ງເປັນຕາຢ້ານ
ແຕ່ຈົ່ງເຫັນຄວາມພຽນເປັນສິ່ງປອດໄພ
ຈົ່ງພໍ່າເພັງພຽນກັນເທີ້ນ
ນີ້ເປັນຄຳສອນຂອງພຣະພຸດທະເຈົ້າ

[໗໙] ທ່ານທັງຫຼາຍຈົ່ງເຫັນການວິວາດກັນເປັນສິ່ງເປັນຕາຢ້ານ
ແຕ່ຈົ່ງເຫັນການບໍ່ວິວາດກັນເປັນສິ່ງປອດໄພ
ຈົ່ງສະໝັກສະໝານສາມັກຄີກັນ ເວົ້າຈາມ່ວນກັນເທີ້ນ
ນີ້ເປັນຄຳສອນຂອງພຣະພຸດທະເຈົ້າ

[໘໐] ທ່ານທັງຫຼາຍຈົ່ງເຫັນຄວາມຜະໝາດເປັນສິ່ງເປັນຕາຢ້ານ
ແຕ່ຈົ່ງເຫັນຄວາມບໍ່ຜະໝາດເປັນສິ່ງປອດໄພ
ຈົ່ງຈະເລີນມັກອັນປະກອບດ້ວຍອົງ ໘ ເທີ້ນ
ນີ້ເປັນຄຳສອນຂອງພຣະພຸດທະເຈົ້າ

[໗໑] ພຣະພຸດທະເຈົ້າແລະເຫຼົ່າພຣະອະຣະຫັນຈຳນວນຫຼາຍມາປະຊຸມພ້ອມກັນ
ທ່ານທັງຫຼາຍຈົ່ງຂາບໄຫວ້ພຣະພຸດທະເຈົ້າແລະເຫຼົ່າພຣະອະຣະຫັນເທີ້ນ

[໗໘] ຕາມທີ່ກ່າວມານີ້ ພຣະພຸດທະເຈົ້າທັງຫຼາຍເປັນອະຈິນໄຕຍ
ທຳຂອງພຣະພຸດທະເຈົ້າກໍເປັນອະຈິນໄຕຍ
ສຳລັບຜູ້ທີ່ເຫຼື້ອມໃສໃນອະຈິນໄຕຍ ຍ່ອມມີວິບາກເປັນອະຈິນໄຕຍ ດັ່ງນີ້ແລ

ໄດ້ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າເມື່ອຈະຊົງໃຫ້ພຣະອານົນເຖຣະຮູ້ພຸດທະຈະຣິດຂອງພຣະອົງຈຶ່ງໄດ້ຕັດທຳບັນລະຍາຍຊື່ວ່າພຸດທາປະທານິຍະ (ການປະກາດປະຫວັດໃນອະດີດຊາດຂອງພຣະພຸດທະເຈົ້າ) ດ້ວຍປະການແນວນີ້

**ພຸດທາປະທານ ຈົບ**

# ໔. ປັດເຈກພຸດທາປະທານ

## ພຣະປະຫວັດໃນອະດີດຊາດຂອງພຣະປັດເຈກພຸດທະເຈົ້າ

(ຕໍ່ໄປນີ້ ຂໍໃຫ້ທ່ານທັງຫຼາຍ ຈົ່ງຟັງປະຫວັດໃນອະດີດຊາດຂອງພຣະປັດເຈກພຸດທະເຈົ້າ)

[໗໓] ພຣະອານົນເຖຣະ ຜູ້ເປັນມຸນີຊາວແຄວ້ນວິເທຫະ
ນ້ອມກາຍລົງ ທູນຖາມພຣະຕະຖາຄົດເຈົ້າ
ຜູ້ປະທັບຢູ່ ໃນພຣະເຊຕະວັນມະຫາວິຫານວ່າ
ຂ້າແຕ່ພຣະທີຣະເຈົ້າ ໄດ້ຮູ້ວ່າ ພຣະປັດເຈກພຸດທະເຈົ້າມີຢູ່
ພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນຜູ້ເປັນນັກປາດ ອຸບັດຂຶ້ນຍ້ອນເຫດອັນໃດ

[໗໔] ລຳດັບນັ້ນ ພຣະສັບພັນຍູຜູ້ປະເສີດ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ຕັດກັບພຣະອານົນຜູ້ຈະເລີນດ້ວຍພຣະສຸຣະສຽງທີ່ມ່ວນວ່າ
ທີຣະຊົນເຫຼົ່າໃດໄດ້ສັ່ງສົມກຸສົນສົມພານໄວ້ໃນພຣະພຸດທະເຈົ້າອົງກ່ອນ ໆ
ຍັງບໍ່ໄດ້ຄວາມລຸດພົ້ນຈາກກິເລດໃນສາດສະໜາຂອງພຣະຊິນນະເຈົ້າທັງຫຼາຍ

[໗໕] ຍ້ອນມີຄວາມສະລົດໃຈນັ້ນແລເປັນໂຕນຳ
ທີຣະຊົນເຫຼົ່ານັ້ນຜູ້ມີປັນຍາແກ່ກ້າດີ ເຖິງຈະເວັ້ນຈາກພຣະພຸດທະເຈົ້າ
ກໍຍ່ອມບັນລຸປັດເຈກໂພທິຍານໄດ້ ແມ່ນດ້ວຍອາລົມພຽງໜ້ອຍໜຶ່ງ

[໗໖] ໃນໂລກທັງປວງ ຍົກເວັ້ນເຮົາສາແລ້ວ

ບໍ່ມີໃຜສະເໝີກັບພຣະປັດເຈກພຸດທະເຈົ້າໄດ້ເລີຍ
ເຮົາຈັກບອກຄຸນພຽງສັງເຂບນີ້ຂອງພຣະປັດເຈກພຸດທະເຈົ້າ
ຜູ້ເປັນມະຫາມຸນີເຫຼົ່ານັ້ນຢ່າງຊັດເຈນ

[໗໗] ທ່ານທຸກອົງເມື່ອປາຖະໜາພຣະນິບພານອັນເປັນໂອສົດວິເສດ
ມີໃຈຜ່ອງໃສດີແລ້ວ ກໍຈົ່ງຕັ້ງໃຈຟັງຄຳເວົ້າທີ່ມ່ວນ
ເໝືອນນ້ຳນ້ຳເຜີ້ງຫຍາດນ້ອຍ ໆ (ກ່ຽວກັບປະຫວັດ)
ຂອງພຣະປັດເຈກພຸດທະເຈົ້າ
ຜູ້ເປັນມະຫາລືສີ ຜູ້ຕັດສະຣູ້ໄດ້ເອງເທີ້ນ

[໗໘] ປະຫວັດໃນອະດີດ ການພະຍາກອນ ໂທດ
ເຫດປາສະຈາກຄວາມກຳໜັດອັນໃດ
ຂອງພຣະປັດເຈກພຸດທະເຈົ້າຜູ້ອຸບັດຂຶ້ນແຕ່ລະອົງ ໆ
ແລະພຣະປັດເຈກພຸດທະເຈົ້າທັງຫຼາຍໄດ້ບັນລຸພຣະໂພທິຍານດ້ວຍເຫດອັນໃດ

[໗໙] ພຣະປັດເຈກພຸດທະເຈົ້າທັງຫຼາຍມີການກຳນົດໝາຍ
ໃນວັດຖຸທີ່ໜ້າຮັກແພງວ່າປາສະຈາກຄວາມໜ້າຮັກແພງ
ມີຈິດຄາຍກຳໜັດໃນໂລກທີ່ມີສະພາວະໜ້າກຳໜັດ
ລະກິເລດທີ່ເປັນເຫດໃຫ້ລ້າຊ້າ ຊະນະທິດຖິທີ່ເປັນເຫດໃຫ້ດີ້ນຮົນແລ້ວ
ໄດ້ບັນລຸພຣະໂພທິຍານຍ້ອນເຫດອັນນັ້ນ ໆ ເອງ

[໙໐] ບຸກຄົນຄວນຍົກໂທດໃນສັດທຸກຈຳພວກ
ບໍ່ບຽດບຽນສັດໜຶ່ງສັດໃດໃນບັນດາສັດເຫຼົ່ານັ້ນ
ມີຈິດເມດຕາ ຫວັງປະໂຫຍດເກື້ອກູນ
ຈົ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໑] (ພຣະປັດເຈກພຸດທະເຈົ້າອົງໜຶ່ງກ່າວວ່າ)
ບຸກຄົນຍົກໂທດໃນສັດທຸກຈຳພວກ
ບໍ່ບຽດບຽນສັດໜຶ່ງສັດໃດໃນບັນດາສັດເຫຼົ່ານັ້ນ
ບໍ່ຕ້ອງການບຸດ (ແລ້ວ) ຈະເພິ່ງຕ້ອງການສະຫາຍໄປເຮັດຫຍັງນໍ?
ຈົ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໘] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ຄວາມຮັກຍ່ອມມີແກ່ຜູ້ມີຄວາມກ່ຽວຂ້ອງ

ທຸກນີ້ຍ່ອມເປັນໄປຕາມຄວາມຮັກ
ບຸກຄົນເມື່ອເພ່ງເຫັນໂທດອັນເກີດຈາກຄວາມຮັກ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໓] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ
ມີໃຈຜູກພັນ ຍ່ອມເຮັດປະໂຫຍດໃຫ້ເສື່ອມໄປໄດ້
ບຸກຄົນເມື່ອເພ່ງເຫັນໄພໃນຄວາມເຊີຍຊິດ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໔] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ກໍໄຜ່ກວ້າງໃຫຍ່ເກາະກ່ຽວກັນໄວ້ ສັນໃດ
ຄວາມຫ່ວງໃຍໃນບຸດແລະທາຣະ
ກໍກວ້າງໃຫຍ່ເກາະກ່ຽວກັນໄວ້ ສັນນັ້ນ
ບຸກຄົນເມື່ອບໍ່ກ່ຽວຂ້ອງເໝືອນໜໍ່ໄຜ່
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໕] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ເນື້ອໃນປ່າ ບໍ່ໄດ້ຖືກຜູກມັດໄວ້ຍ່ອມທ່ຽວຫາອາຫານໄດ້
ຕາມຄວາມພໍໃຈ ສັນໃດ
ວິນຍູຊົນເມື່ອເພ່ງເຫັນທຳທີ່ໃຫ້ເຖິງຄວາມເສຣີ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໖] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ໃນທ່າມກາງສະຫາຍ ຍ່ອມມີການປຶກສາກັນ
ໃນເລື້ອງບ່ອນຢູ່ ເລື້ອງການດຳຣົງຕົນ ເລື້ອງການໄປ ເລື້ອງການທ່ຽວຈາຣິກ
ບຸກຄົນເມື່ອເພ່ງການບວດທີ່ໃຫ້ເຖິງຄວາມເສຣີທີ່ພວກຄົນພານບໍ່ມຸ້ງຫວັງ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໗] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ໃນທ່າມກາງສະຫາຍຍ່ອມມີການຫຼິ້ນ ມີຄວາມຍິນດີ
ແລະໃນບຸດກໍຍ່ອມມີຄວາມຮັກອັນໄພບູນ
ບຸກຄົນເມື່ອຣັງກຽດຄວາມພັດພາກຈາກສິ່ງເປັນທີ່ຮັກ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໗] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງເປ່ງອຸທານວ່າ)
ພຣະປັດເຈກພຸດທະເຈົ້າແຜ່ເມດຕາໄປທັງ ໔ ທິດ ບໍ່ຂັດເຄືອງ
ຍິນດີດ້ວຍປັດໄຈຕາມມີຕາມໄດ້
ຄອບງຳອັນຕະລາຍທັງຫຼາຍແລະບໍ່ຫວາດສຽວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໙໘] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ແມ່ນບັນພະຊິດພວກໜຶ່ງແລະຄະລຶຫັດທີ່ກຳລັງຄອງເຮືອນ
ກໍສົງເຄາະຍາກ
ບຸກຄົນເພິ່ງເປັນຜູ້ຂວນຂວາຍໜ້ອຍທັງໃນຜູ້ອື່ນແລະໃນບຸດ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໐] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ພຣະປັດເຈກພຸດທະເຈົ້າຜູ້ກ້າຫານ
ປົງເຄື່ອງໝາຍຄະລຶຫັດແລ້ວ
ຕັດເຄື່ອງຜູກພັນຂອງຄະລຶຫັດແລ້ວ
ເໝືອນຕົ້ນທອງຫຼາງທີ່ໃບຮ່ວງຫຼົ່ນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໑] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ຖ້າບຸກຄົນເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນ ເປັນສາທຸວິຫາຣີ ເປັນນັກປາດ
ຄອບງຳອັນຕະລາຍທັງປວງໄດ້ແລ້ວ
ເພິ່ງມີໃຈແຊ່ມຊື່ນ ມີສະຕິ ທ່ຽວໄປກັບສະຫາຍນັ້ນເທີ້ນ

[໑໐໔] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນເປັນສາທຸວິຫາຣີ ເປັນນັກປາດ
ກໍເພິ່ງປະພຶດຢູ່ຜູ້ດຽວເທີ້ນ
ເໝືອນພຣະຣາຊາຊົງລະຖິ້ມແຄວັນທີ່ຊົງຊະນະແລ້ວ
ຊົງປະພຶດຢູ່ພຣະອົງດຽວ
ເໝືອນຊ້າງມາຕັງຄະລະຖິ້ມຝູງຢູ່ໂຕດຽວໃນປ່າ ສັນນັ້ນ

[໑໐໓] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)

ເຮົາສັນເສີນສະຫາຍສຳປະທາໂດຍແທ້
ບຸກຄົນຄວນຄົບສະຫາຍຜູ້ປະເສີດສຸດ (ຫຼື) ຜູ້ສະເໝີກັນ
ຖ້າບຸກຄົນບໍ່ໄດ້ສະຫາຍເຫຼົ່ານີ້
ເພິ່ງເປັນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໔] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ບຸກຄົນເຫັນກຳໄລຄຳ ໘ ວົງ ອັນສຸກໃສ
ທີ່ຊ່າງຄຳເຮັດສຳເລັດຢ່າງດີ ກະທົບກັນຢູ່ທີ່ແຂນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໕] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງເປ່ງອຸທານວ່າ)
ດ້ວຍອາການແນວນີ້ ການກ່າວວາຈາ
ຫຼືຄວາມກ່ຽວຂ້ອງກັບເພື່ອນ ເພິ່ງມີແກ່ເຮົາ
ບຸກຄົນເມື່ອເພ່ງເຫັນໄພນີ້ຕໍ່ໄປ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໖] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ຍ້ອນກາມທັງຫຼາຍ ສວຍງາມ ມີຣົດແຊບ
ໜ້າຣື່ນເຣິງໃຈ ຍົ່ວຍຸຈິດດ້ວຍອາລົມຫຼາຍຮູບແບບ
ບຸກຄົນເຫັນໂທດໃນກາມມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໗] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ຄຳວ່າ ກາມ ນີ້ ເປັນອັນຕະລາຍ ເປັນເໝືອນຝີ
ເປັນອຸປັດທະວະ ເປັນໂຣກ ເປັນເໝືອນລູກສອນ ເປັນໄພ
ບຸກຄົນເຫັນໄພນີ້ໃນກາມມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໘] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ບຸກຄົນເພິ່ງຄອບງຳໄພທັງປວງແມ່ນເຫຼົ່ານີ້ ຄື
ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ
ລົມ ແດດ ເຫຼືອດ ແລະສັດເລືອຄານ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໐໙] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ພຣະປັດເຈກພຸດທະເຈົ້າລະຖິ້ມໝູ່ ມີຂັນເກີດດີແລ້ວ
ມີດອກບົວ (ຄືທຳ) ເປັນຜູ້ຍິ່ງໃຫຍ່ຢູ່ໃນປ່າຕາມຄວາມພໍໃຈໄດ້
ເໝືອນນາກລະຖິ້ມຝູງແລ້ວຢູ່ໃນປ່າໄດ້ຕາມຄວາມພໍໃຈ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໐] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ບຸກຄົນພິຈາຣະນາຄຳເວົ້າຂອງພຣະປັດເຈກພຸດທະເຈົ້າ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດວ່າ
ບຸກຄົນສຳຜັດວິມຸດຕິໃດ ເຊິ່ງເກີດຂຶ້ນຕາມສະໄໝ
ວິມຸດຕິນັ້ນ ເປັນໄປບໍ່ໄດ້ສຳລັບບຸກຄົນ
ຜູ້ຍິນດີການຄຸກຄີດ້ວຍໝູ່ຄະນະ ດັ່ງນີ້ແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໑] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ປະພຶດລ່ວງທິດຖິອັນເປັນສັ້ງນໜາມ
ເຖິງນິຍາມ ໄດ້ສະເພາະມັກແລ້ວ
ເປັນຜູ້ມີຍານອັນເກີດຂຶ້ນແລ້ວ
ບໍ່ຕ້ອງໃຫ້ຜູ້ອື່ນແນະນຳ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໘] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ເປັນຜູ້ບໍ່ໂລບ ບໍ່ຫຼອກລວງ ບໍ່ກະຫາຍ
ບໍ່ມີຄວາມລົບຫຼູ່ ກຳຈັດສະພາວະ (ກິເລດເໝືອນນ້ຳຍ້ອມ)
ແລະໂມຫະໄດ້ແລ້ວ
ເປັນຜູ້ບໍ່ມີຄວາມຫວັງໃນໂລກທັງປວງ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໓] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ບຸກຄົນເພິ່ງລະເວັ້ນສະຫາຍຊົ່ວ
ຜູ້ບໍ່ເຫັນປະໂຫຍດ ຜູ້ຕັ້ງຢູ່ໃນທຳທີ່ຜິດ
ບໍ່ເພິ່ງຄົບຜູ້ຂວນຂວາຍ ແລະຜູ້ຜະໝາດດ້ວຍຕົນເອງ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໔]	(ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ບຸກຄົນເພິ່ງຄົບມິດຜູ້ໄດ້ສຶກສາຫຼາຍ ຊົງທຳ
ຜູ້ຍິ່ງໃຫຍ່ ມີປະຕິພານ ຮູ້ຈັກປະໂຫຍດແລ້ວ
ເພິ່ງກຳຈັດຄວາມສົງໄສໄດ້
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໕]	(ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ບໍ່ຊື່ນຊົມການຫຼິ້ນ
ຄວາມຍິນດີແລະຄວາມສຸກໃນໂລກ ບໍ່ໃສ່ໃຈ
ງົດເວັ້ນຈາກຖານະແຫ່ງການປະດັບຕົກແຕ່ງ ເວົ້າຄຳຈິງ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໖]	(ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ລະຖິ້ມບຸດ ພັນລະຍາ
ບິດາ ມານດາ ຊັບ ທັນຍະຊາດ
ໝູ່ກອງແລະກາມຕາມສ່ວນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໗]	(ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ກາມນີ້ເປັນເຄື່ອງຂ້ອງ
ມີຄວາມສຸກໜ້ອຍ
ໃນກາມນີ້ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ
ຜູ້ມີປັນຍາຮູ້ວ່າ ກາມນີ້ເປັນເໝືອນຂໍເກຼັກແຫຼມແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໘]	(ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ທຳລາຍສັງໂຍດແລ້ວ
ເໝືອນສັດນ້ຳທຳລາຍຕາໜ່າງ
ແລະເໝືອນໄຟໄໝ້ເຊື້ອມອດໝົດໄປບໍ່ກັບມາ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໑໙]	(ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ພິກຂຸເປັນຜູ້ບໍ່ສອດສ່າຍຈັກຂຸ
ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ

ຄຸ້ມຄອງອິນຊີ ຮັກສາໃຈໄດ້ແລ້ວ
ບໍ່ຊຸ່ມດ້ວຍກິເລດ ໄຟກິເລດບໍ່ໄດ້ເຜົາ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໐] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ປົງເຄື່ອງໝາຍຄະລືຫັດແລ້ວ
ຄອງຜ້າກາສະວະອອກບວດ
ເໝືອນຕົ້ນທອງຫຼາງມີໃບທຶບ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໑] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ບໍ່ທຳຄວາມຍິນດີໃນຣົດ ບໍ່ໂລເລ
ບໍ່ຕ້ອງລ້ຽງຄົນອື່ນ ທ່ຽວບິນທະບາດໄປຕາມລຳດັບຮ່ອມ
ມີໃຈບໍ່ຜູກພັນໃນຕະກູນຕ່າງ ໆ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໒] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ລະເຄື່ອງກັ້ນທາງໃຈ ໕ ປະການ
ຂະຈັດອຸປະກິເລດແຫ່ງຈິດທັງປວງໄດ້ແລ້ວ
ບໍ່ອີງອາໄສເຄື່ອງອາໄສຄືທິດຖິ
ຕັດຄວາມຮັກແລະຄວາມຊັງໄດ້ແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໓] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ລະສຸກ ແລະທຸກ
ໂສມະນັດ ໂທມະນັດ ກ່ອນ ໆ ໄດ້ແລ້ວ
ໄດ້ອຸເປກຂາແລະສະມະຖະອັນສະອາດແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໔] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ຕັ້ງຄວາມພຽນເພື່ອບັນລຸປະໂຫຍດຢ່າງຍິ່ງ
ມີຈິດບໍ່ທໍ້ທໍ້ ບໍ່ປະພຶດຂີ້ຄ້ານ
ມີຄວາມບາກບັ່ນໝັ້ນຄົງ ເຂົ້າເຖິງເຫື່ອແຮງແລະກຳລັງແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໕] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ຜູ້ບໍ່ລະການຫຼິບຫຼີກ ແລະຊານ
ປະພຶດທຳສົມຄວນແກ່ທຳເປັນນິດ
ພິຈາລະນາເຫັນໂທດໃນພົບແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໖] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ)ເມື່ອປາຖະໜາຄວາມສິ້ນຕັນຫາ
ບໍ່ຜະໝາດ ບໍ່ໂງ່ຈ້ຳ
ຄົງແກ່ຮຽນ ມີສະຕິ ຜູ້ມີສັງຂະຕະທຳ
ຜູ້ແນ່ນອນ ມີຄວາມມຸ້ງໝັ້ນ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໗] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ບໍ່ສະດຸ້ງຍ້ອນສຽງເໝືອນຣາດຊະສີ
ບໍ່ຕິດຕາໜ່າງເໝືອນລົມ
ບໍ່ປຽກນ້ຳເໝືອນບົວ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໘] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ພະຍາສີຫະຣາດມີແຂ້ວເປັນກຳລັງ ຂົ່ມຂີ່
ຄອບງຳເນື້ອທັງຫຼາຍທ່ຽວໄປ ສັນໃດ
ພຣະປັດເຈກພຸດທະເຈົ້າກໍມີປັນຍາເປັນກຳລັງ
ຄອບງຳບຸກຄົນທັງຫຼາຍດ້ວຍປັນຍາ
ໃຊ້ສອຍເສນາສະນະອັນສະຫງັດ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໙] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
(ພຣະປັດເຈກພຸດທະເຈົ້າ) ເສບອາໄສເມດຕາ
ກະລຸນາ ມຸທິຕາ ແລະອຸເປກຂາ ອັນເປັນວິມຸດຕິຕາມການ
ສັດໂລກທັງປວງບໍ່ໄດ້ກຽດຊັງ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໙໐] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)

(ພຣະປັດເຈກພຸດທະເຈົ້າ) ລະຣາຄະ ໂທສະ
ແລະ ໂມຫະ ທຳລາຍສັງໂຫຍດໄດ້ແລ້ວ
ບໍ່ສະດຸ້ງໃນເວລາສິ້ນຊີວິດ
ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໓໑] (ພຣະປັດເຈກພຸດທະເຈົ້າອີກອົງໜຶ່ງກ່າວວ່າ)
ທຸກວັນນີ້ ມິດທັງຫຼາຍມີປະໂຫຍດເປັນເຫດ
ຈຶ່ງຄົບແລະເສບດ້ວຍ ມິດທີ່ບໍ່ມຸ້ງປະໂຫຍດຫາໄດ້ຍາກ
ມະນຸດທັງຫຼາຍມີປັນຍາມຸ້ງປະໂຫຍດຕົນ ບໍ່ສະອາດ
ພຣະປັດເຈກພຸດທະເຈົ້າ ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໓໔] ພຣະປັດເຈກພຸດທະເຈົ້າທັງຫຼາຍ ມີສີນບໍລິສຸດ (ດ້ວຍປາຣິສຸດທິສີນ ໔)
ມີປັນຍາມົດຈົດດີ ມີຈິດຕັ້ງໝັ້ນ
ໝັ່ນປະກອບທຳເປັນເຄື່ອງຕື່ນ
ເຫັນແຈ້ງ (ໄຕຣລັກ) ເຫັນທຳວິເສດ
ຮູ້ຢູ່ໂດຍພິເສດເຊິ່ງອະຣິຍະທຳທີ່ປະກອບດ້ວຍອົງມັກແລະໂພດຊົງ

[໑໓໓] ທີຣະຊົນເຫຼົ່າໃດຈະເລີນສູນຍະຕະວິໂມກ ອະນິມິດຕະວິໂມກ
ແລະອັບປະນິຫິຕະວິໂມກແລ້ວ
ຍັງບໍ່ບັນລຸຄວາມເປັນສາວົກໃນສາດສະໜາພຣະຊິນນະເຈົ້າ
ທີຣະຊົນເຫຼົ່ານັ້ນຍ່ອມເປັນພຣະສະຍຳພູປັດເຈກຊິນນະເຈົ້າ

[໑໓໔] ພຣະປັດເຈກພຸດທະເຈົ້າທັງຫຼາຍມີທຳຍິ່ງໃຫຍ່
ມີທຳມະກາຍຫຼາຍ ມີຈິດເປັນອິດສະຫຼະ
ຂ້າມຫ້ວງແຫ່ງທຸກທັງມວນໄດ້ແລ້ວ ມີຈິດເບີກບານ
ມີປົກກະຕິເຫັນປະໂຫຍດຢ່າງຍິ່ງ ເໝືອນຣາດຊະສີ ເໝືອນນໍແຮດ

[໑໓໕] ພຣະປັດເຈກພຸດທະເຈົ້າເຫຼົ່ານີ້ມີອິນຊີສະງົບແລ້ວ ມີຈິດສະງົບແລ້ວ
ມີຈິດເປັນສະມາທິ ປະພຶດຕອບແທນ (ດ້ວຍຄວາມອີດູແລະຄວາມກະລຸນາ)
ໃນເຫຼົ່າສັດທີ່ຢູ່ຕາມພື້ນພິພົບ
ເໝືອນພຣະອາທິດສ່ອງສະຫວ່າງຢູ່ໃນໂລກນີ້
ແລະໃນໂລກໜ້າ ເກື້ອກູນສັດໂລກຢູ່ເປັນນິດ

[໑໓໖] ພຣະປັດເຈກພຸດທະເຈົ້າເຫຼົ່ານີ້ເປັນຜູ້ສູງສຸດໃນໝູ່ຊົນ

ລະເຄື່ອງກັ້ນທັງປວງໄດ້ແລ້ວ  ເປັນດວງປະທີບຂອງໂລກ
ມີຣັດສະໝີເຊັ່ນກັບປະກາຍແສງແຫ່ງຄຳແທ່ງ
ເປັນຜູ້ສົມຄວນຮັບທັກຂິນາຢ່າງດີຂອງຊາວໂລກຢ່າງແນ່ນອນ
ພຣະປັດເຈກພຸດທະເຈົ້າເຫຼົ່ານີ້ເປັນຜູ້ແນບແໜ້ນຢູ່ເປັນນິດ

[໑໖໗]    ຄຳເວົ້າທີ່ພຣະປັດເຈກພຸດທະເຈົ້າທັງຫຼາຍກ່າວໄວ້ດີແລ້ວ
ຍ່ອມແຜ່ໄປໃນໂລກພ້ອມທັງເທວະໂລກ  ຊົນພານເຫຼົ່າໃດໄດ້ຟັງແລ້ວ
ບໍ່ໃສ່ໃຈເຖິງຄຳທີ່ພຣະປັດເຈກພຸດທະເຈົ້າກ່າວໄວ້ດີແລ້ວແນວນັ້ນ
ຊົນພານເຫຼົ່ານັ້ນຍ່ອມແລ່ນໄປໃນກອງທຸກຊ້ຳແລ້ວຊ້ຳອີກ

[໑໖໘]    ຄຳເວົ້າທີ່ພຣະປັດເຈກພຸດທະເຈົ້າທັງຫຼາຍກ່າວໄວ້ດີແລ້ວ
ເປັນຄຳເວົ້າມ່ວນ  ເໝືອນນ້ຳເຜິ້ງຫຍາດນ້ອຍ ໆ ໄຫຼຍ້ອຍລົງສັນນັ້ນ
ຊົນເຫຼົ່າໃດໄດ້ຟັງແລ້ວປະຕິບັດເອົາແນວນັ້ນ
ຊົນເຫຼົ່ານັ້ນ  ເປັນຜູ້ເຫັນສັດຈະ  ມີປັນຍາ

[໑໖໙]    ຄາຖາທີ່ພຣະປັດເຈກພຸດທະເຈົ້າກ່າວໄວ້ແລ້ວ  ເປັນຄາຖາທີ່ໂອລານ
ຄຳເວົ້າເຫຼົ່ານັ້ນເປັນຄຳທີ່ພຣະສາກະຍະສີຫະຜູ້ສູງສຸດໃນນໍຣະຊົນ
ສະເດັດອອກບວດປະກາດໄວ້ແລ້ວເພື່ອໃຫ້ເວໄນຍະສັດໄດ້ຮູ້ທຳ

[໑໘໐]    ຄຳເວົ້າເຫຼົ່ານີ້  ທີ່ພຣະປັດເຈກພຸດທະເຈົ້າທັງຫຼາຍເຫຼົ່ານັ້ນ
ກ່າວໄວ້ແລ້ວເພື່ອອະນຸເຄາະສັດໂລກ  ເຊິ່ງພຣະສະຍຳພູຜູ້ສີຫະ  (ນຳມາ)
ປະກາດໄວ້ເພື່ອເພີ່ມພູນຄວາມສະລົດສັງເວດ
ຄວາມບໍ່ຄຸກຄີ  ແລະປັນຍາ

**ປັດເຈກພຸດທາປະທານ  ຈົບ**

# ၆. ເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເຖຣະ

## ໑. ສາຣີປຸດຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສາຣີບຸດເຖຣະ

(ພຣະອານົນເຖຣະກ່າວວ່າ) ຂໍທ່ານທັງຫຼາຍຈົ່ງຕັ້ງໃຈຟັງປະຫວັດໃນອະດີດ ຊາດຂອງພຣະເຖຣະທັງຫຼາຍ (ຕໍ່ໄປ)

(ພຣະສາຣີບຸດເຖຣະບັນລຸສາວົກປາຣະມີຍານແລ້ວໄດ້ອຸທານຂຶ້ນວ່າ)

[໑໔໑] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູເຂົາໜ່ວຍໜຶ່ງຊື່ລຳພະກະ
(ໃກ້ ໆ ພູເຂົາລຳພະກະນັ້ນ) ເຂົາສ້າງອາສົມ
ແລະສ້າງປັນນະສາລາໄວ້ຢ່າງດີເພື່ອຂ້າພະເຈົ້າ

[໑໔໘] ໃນບ່ອນບໍ່ໄກອາສົມຂອງຂ້າພະເຈົ້າ ມີແມ່ນ້ຳສາຍໜຶ່ງມີຝັ່ງຕື້ນ
ທ່ານ້ຳຮາບພຽງ ເປັນຕາອອນຊອນໃຈ
ມີຊາຍສະອາດກະຈັດກະຈາຍຢູ່ທົ່ວ

[໑໔၆] ໃນບ່ອນບໍ່ໄກອາສົມຂອງຂ້າພະເຈົ້ານັ້ນ
ມີແມ່ນ້ຳບໍ່ມີກ້ອນຫີນນ້ອຍ ໆ ບໍ່ມີເງື້ອມຢື່ນງ້ຳອອກມາ
ນ້ຳມີຣົດດີ ບໍ່ມີກິ່ນ ໄຫຼໄປ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໔໔] ໃນແມ່ນ້ຳ ມີຝູງແຂ້ ຝູງມັງກອນ
ຝູງຕະໂຂງ ແລະຝູງເຕົ່າ ແຫວກວ່າຍໄປມາ
ໃນແມ່ນ້ຳສາຍນັ້ນ ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໔໕] ຝູງປາສະຫຼາດ ຝູງປາກະບອກ
ຝູງປາສະຫວາຍ ຝູງປາເຄົ້າ ຝູງປາຕະພຽນ
ຝູງປານົກກະຈອກ ວ່າຍວຽນໄປມາ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໔໖]　ທີ່ຝັ່ງທັງ ໔ ຂອງແມ່ນ້ຳ ໝູ່ໄມ້ດອກ ຕົ້ນໄມ້ໃຫ້ໝາກ
ຫ້ອຍເດຍລະດາດຢູ່ທັງ ໔ ຝັ່ງ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໔໗]　ຕົ້ນໝາກມ່ວງ ຕົ້ນສາລະ ຕົ້ນໝາກເມົ່າ
ຕົ້ນແຄຝອຍ ຕົ້ນໄຮຍ້ອຍ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບຢູ່ຮອບ ໆ ອາສົມຂອງຂ້າພະເຈົ້າ

[໑໔໘]　ຕົ້ນຈຳປາ ຕົ້ນຊ້າງນ້າວ ຕົ້ນກະທຸ່ມ ຕົ້ນກາກະທິງ
ຕົ້ນບຸນນາກ ແລະຕົ້ນກາຣະເກດ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບຢູ່ຮອບ ໆ ອາສົມຂອງຂ້າພະເຈົ້າ

[໑໔໙]　ຕົ້ນລຳດວນ ຕົ້ນອະໂສກ ຕົ້ນກຸຫຼາບ
ມີດອກບານສະພັ່ງ ຕົ້ນປູ ແລະຕົ້ນໝາກກະລ່ຳຫຼວງ
ກໍມີດອກບານສະພັ່ງຢູ່ຮອບ ໆ ອາສົມຂອງຂ້າພະເຈົ້າ

[໑໕໐]　ຕົ້ນລຳຈຽກ ຕົ້ນກ້ວຍ ຕົ້ນພິກຸນ ແລະຕົ້ນມະລິຊ້ອນ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໕໑]　ຕົ້ນກັນນິກາ ຕົ້ນກັນນິກາເຂົາ
ຕົ້ນດູ່ ຕົ້ນອັນຊັນ ມີຫຼາຍລົ້ນ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໕໒]　ຕົ້ນບຸນນາກ ຕົ້ນບຸນນາກເຂົາ ຕົ້ນແຄຝອຍ
ມີດອກບານສະພັ່ງ ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໕໓]　ຕົ້ນຣາຊະພຶກ ຕົ້ນອັນຊັນຂຽວ
ຕົ້ນກະທຸ່ມ ແລະຕົ້ນພິກຸນ ຫຼາຍລົ້ນ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໑໕໔]　ຖົ່ວດຳ ຖົ່ວເຫຼືອງ ຕົ້ນກ້ວຍ

ຕົ້ນໝາກງົ່ວ ງອກງາມດ້ວຍນໍ້າຫອມ
ເປັນຝັກ ເປັນໝາກ (ເປັນຄຳ ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ)

[໑໕໕] (ໃນບຶງໃກ້ ໆ ອາສົມຂອງຂ້າພະເຈົ້າ) ປະທຸມບາງກໍກຳລັງມີດອກຈູມ
ບາງກໍມີເກສອນກຳລັງແຍ້ມ ບາງກໍມີເກສອນ (ໃນກີບ) ຮ່ວງຫຼົ່ນ
ບາງກໍມີດອກບານສະພັ່ງຢູ່ໃນບຶງ ໃນຄັ້ງນັ້ນ

[໑໕໖] ປະທຸມບາງກໍກຳລັງມີດອກຈູມ
ເຫງົ້າບົວເລືອໄປທົ່ວ ກໍກະຈັບມີໃບເດຍລະດາດ
ງົດງາມຢູ່ໃນບຶງ ໃນຄັ້ງນັ້ນ

[໑໕໗] ຕົ້ນຕາເສືອ ຕົ້ນຈົງກົນນີ ຕົ້ນອຸດຕະລີ ແລະຕົ້ນຊະບາ
ມີດອກບານສະພັ່ງສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ຢູ່ໃກ້ ໆ ບຶງ ໃນຄັ້ງນັ້ນ

[໑໕໘] ຝູງປາສະຫຼາດ ຝູງປາກະບອກ
ຝູງປາສະຫວາຍ ຝູງປາເຄົ້າ ຝູງປາຕະພຽນ
ຝູງປາສັງກຸລາ (ປາລູກດອກ) ແລະຝູງປາຄຳ
ອາໄສຢູ່ໃນບຶງ ໃນຄັ້ງນັ້ນ

[໑໕໙] (ໃກ້ ໆ ອາສົມຂອງຂ້າພະເຈົ້າ) ມີຝູງແຂ້ ຝູງຕະໂຂງ
ຝູງປາສະນາກ ຝູງຜີເສື້ອນໍ້າ (ຍັກຮ້າຍ) ຝູງງູຫຼາມ
ຝູງງູເຫຼືອມອາໄສຢູ່ໃນບຶງ ໃນຄັ້ງນັ້ນ

[໑໖໐] (ໃກ້ ໆ ອາສົມຂອງຂ້າພະເຈົ້າ) ມີຝູງນົກກາງແກ ຝູງນົກເປັດນໍ້າ
ຝູງນົກຈັກກະພາກ ຝູງນົກການໍ້າ ຝູງນົກກາເວົາ
ຝູງນົກແກ້ວ ແລະຝູງນົກສາລິກາ ອາໄສສະນັ້ນຫາກິນ

[໑໖໑] ຝູງນົກກວັກ (ໄກ່ເຖື່ອນ ໄກ່ປ່າ) ຝູງໄກ່ປ່າ
ຝູງນົກນາງນວນ ຝູງນົກຕ້ອຍຕີວິດ
ຝູງນົກແຂກເຕົ້າ ອາໄສສະນັ້ນຫາກິນ (ໃກ້ ໆ ອາສົມຂອງຂ້າພະເຈົ້າ)

[໑໖໔] ຝູງຫົງ ຝູງນົກກະຮຽນ ຝູງນົກຍູງ
ຝູງນົກກາເວົາ ຝູງໄກ່ງວງ ຝູງນົກຕັກຫອຍ
ຝູງນົກໂພຣະດົກ (ນົກກະຈອກ ນົກອອກ) ອາໄສສະນັ້ນຫາກິນ

[໑໖໓] ຝູງນົກແສກ (ນົກເຄົ້າແມວ ນົກທຶດທື) ຝູງນົກຫົວຂວານ
ຝູງນົກອອກຂາວ (ນົກເຂົາ) ຝູງນົກແຫຼວດຳ
ຝູງນົກການ້ຳ ຫຼາຍລົ້ນ ອາໄສສະນັ້ນຫາກິນ

[໑໖໔] ຝູງຟານ (ອີເກ້ງ) ຝູງໝູປ່າ ຝູງໝາຈິ້ງຈອກ
(ໝາປ່າ ໝາໃນ) ຝູງແຮດ ຝູງລະມັ່ງ
ຝູງເນື້ອຊາຍ ອາໄສສະນັ້ນຫາກິນ

[໑໖໕] ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ
ໝີ ໝາໃນ ເສືອດາວ
ຊ້າງຕະກູນມາຕັງຄະຕົກມັນ ໓ ແຫ່ງ (ບໍ່ທຳອັນຕະລາຍ)
ອາໄສສະນັ້ນຫາກິນ

[໑໖໖] ເຫຼົ່າກິນນະຣະ (ສັດເຄິ່ງຄົນເຄິ່ງນົກ) ຝູງວານອນ
ຄົນເຮັດວຽກໃນປ່າ ໝາໄລ່ເນື້ອ
ນາຍພານອາໄສສະນັ້ນຫາກິນ

[໑໖໗] ຕົ້ນໝາກພັບ ຕົ້ນໝາກຫາດ ຕົ້ນໝາກຊາງ
ຕົ້ນໝາກເມົ່າ ເປັນໝາກທຸກລະດູການ
ຢູ່ບໍ່ໄກອາສົມຂອງຂ້າພະເຈົ້າ

[໑໖໘] ຕົ້ນຄຳ° ຕົ້ນສົນ ຕົ້ນກະທຸ່ມ
ສະພັ່ງດ້ວຍໝາກມີຣົດຫວານ ອອກໝາກເປັນປະຈຳ
ຢູ່ບໍ່ໄກອາສົມຂອງຂ້າພະເຈົ້າ

[໑໖໙] ຕົ້ນສົ້ມມໍ ຕົ້ນໝາກຂາມປ້ອມ ຕົ້ນໝາກມ່ວງ ຕົ້ນຫວ້າ
ຕົ້ນສົ້ມມໍພິເພກ ຕົ້ນກະເບົາ ຕົ້ນຮົກຟ້າ
ຕົ້ນໝາກຕູມ ເຫຼົ່ານັ້ນ ອອກໝາກເປັນນິດ

[໑໗໐] ມັນເທດ ມັນອ້ອນ ມັນມີເສືອ ຫົວຫອມ ຫົວກະທຽມ
ຕົ້ນກະເມັງຕົ້ນຂັດມອນ
ມີຢູ່ດາດດື່ນໃກ້ ໆ ອາສົມຂອງຂ້າພະເຈົ້າ

[໑໗໑] ໃກ້ ໆ ອາສົມ (ຂອງຂ້າພະເຈົ້າ) ມີບຶງນ້ຳທີ່ບຸນກຳເນຣະມິດໄວ້ຢ່າງດີ
ມີນ້ຳໃສເຢັນສະນິດ ມີທ່ານ້ຳຮາບພຽງ ເປັນທີ່ໜ້າອອນຊອນໃຈ

[໑໗໔] (ສະນ້ຳເຫຼົ່ານັ້ນ) ເດຍລະດາດດ້ວຍດອກບົວຫຼວງ ດອກບົວຂາບ
ສະພັ່ງດ້ວຍບົວຂາວ ເດຍລະດາດດ້ວຍບົວເຜື່ອນ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ

[໑໗໓] ດັ່ງນັ້ນ ຂ້າພະເຈົ້າຢູ່ໃນອາສົມ
ເຊິ່ງສ້າງໄວ້ຢ່າງດີ ໜ້າຮື່ນຣົມ ໃນປ່າມີໄມ້ດອກຕົ້ນໄມ້ໃຫ້ໝາກຜົນ
ສົມບູນດ້ວຍອົງປະກອບທຸກຢ່າງ ດັ່ງກ່າວມານີ້

[໑໗໔] ຂ້າພະເຈົ້າເປັນດາບົດຊື່ສຸຣຸຈິ ມີສິນ ໆ
ສົມບູນດ້ວຍຂໍ້ວັດ ມີປົກກະຕິເພ່ງຊານ
ຍິນດີໃນຊານໃນການທຸກເມື່ອ
ສຳເລັດອະພິນຍາພະລະ ໕ ປະການ

[໑໗໕] ຂ້າພະເຈົ້າມີສິດ ໑,໐໘໔ ຄົນ ທັງໝົດນັ້ນ
ເປັນພາມ ມີຊາດຕະກູນ ມີຍົດ
ປົນນິບັດຂ້າພະເຈົ້າຢູ່

[໑໗໖] ສິດຂອງຂ້າພະເຈົ້າເຂົ້າໃຈໂຕບົດ (ຫຼັກໄວຍາກອນ)
ສະຫຼາດໃນການພະຍາກອນ ສຳເລັດວິຊາທຳນາຍລັກສະນະ
ວິຊາອິຕິຫາສະສາດ ແລະໄຕຣເພດອັນເປັນທຳຂອງຕົນ
ພ້ອມທັງວິຊານິຄັນຖຸສາດ ແລະວິຊາເກຕຸພະສາດ

[໑໗໗] ສິດຂອງຂ້າພະເຈົ້າສະຫຼາດໃນລາງບອກເຫດ
ໃນນິມິດ ແລະໃນລັກສະນະ
ເປັນຜູ້ສຶກສາດີແລ້ວໃນເລື້ອງດິນ
ໃນພາກພື້ນດິນ ແລະໃນອາກາດ

[໑໗໘] ສິດເຫຼົ່ານັ້ນເປັນຜູ້ມັກໜ້ອຍ
ມີປັນຍາຮັກສາຕົນ ບໍລິໂພກແຕ່ໜ້ອຍ ບໍ່ໂລບ
ສັນໂດດຕາມມີຕາມໄດ້ ປົນນິບັດຂ້າພະເຈົ້າຢູ່ທຸກເມື່ອ

[໑໗໙] ສິດຂອງຂ້າພະເຈົ້າມີປົກກະຕິເພ່ງຊານ ຍິນດີໃນຊານ
ເປັນນັກປາດ ມີຈິດສະຫງົບ ມີຈິດຕັ້ງໝັ້ນ
ປາຖະໜາຄວາມໝົດກັງວົນ ປົນນິບັດຂ້າພະເຈົ້າຢູ່ທຸກເມື່ອ

[໑໗໐] ສິດຂອງຂ້າພະເຈົ້າສຳເລັດອະພິນຍາ
ຍິນດີໃນອາຫານເຊິ່ງເປັນຂໍ້ປະຕິບັດຂອງບິດາ
ເຫາະໄປມາທາງອາກາດໄດ້
ເປັນນັກປາດ ປົນນິບັດຂ້າພະເຈົ້າຢູ່ທຸກເມື່ອ

[໑໗໑] ສິດຂອງຂ້າພະເຈົ້ານັ້ນ ສຳລວມທະວານທັງ ໖
ບໍ່ຫວັ່ນໄຫວ ຮັກສາອິນຊີ ແລະບໍ່ຄຸກຄີ
ເປັນນັກປາດ ຫາຜູ້ກະທົບກະທັ່ງໄດ້ຍາກ

[໑໗໒] ສິດຂອງຂ້າພະເຈົ້ານັ້ນ ຫາຜູ້ກະທົບກະທັ່ງໄດ້ຍາກ
ໃຫ້ເວລາຜ່ານໄປດ້ວຍການນັ່ງຂັດສະມາທິ
ການຢືນ ແລະການຈົງກົມ ຕະຫຼອດຄືນ

[໑໗໓] ສິດຂອງຂ້າພະເຈົ້າບໍ່ກຳໜັດໃນວັດຖຸທີ່ໜ້າກຳໜັດ
ບໍ່ຂັດເຄືອງໃນວັດຖຸທີ່ໜ້າຂັດເຄືອງ
ບໍ່ລຸ້ມຫຼົງໃນວັດຖຸທີ່ໜ້າລຸ້ມຫຼົງ ຫາຜູ້ກະທົບກະທັ່ງໄດ້ຍາກ

[໑໗໔] ສິດຂອງຂ້າພະເຈົ້ານັ້ນ ຫາຜູ້ກະທົບກະທັ່ງໄດ້ຍາກ
ດ້ວຍການແຂ່ງດີທົດລອງສະແດງລິດຢູ່ເປັນນິດ
ບັນດານໃຫ້ແຜ່ນດິນໄຫວໄດ້

[໑໗໕] ສິດຂອງຂ້າພະເຈົ້ານັ້ນ ຫາຜູ້ກະທົບກະທັ່ງໄດ້ຍາກ
ເມື່ອຈະຫຼິ້ນ ກໍຫຼິ້ນຊານ (ເຂົ້າຊານ)
ໄປນຳເອົາໝາກຫວ້າມາໄດ້

[໑໗໖] ສິດຂອງຂ້າພະເຈົ້ານັ້ນ ພວກໜຶ່ງໄປອະປະຣະໂຄຍານທະວີບ
ພວກໜຶ່ງໄປປຸບພະວິເທຫະທະວີບ ພວກໜຶ່ງໄປອຸດຕະຣະກຸຣຸທະວີບ

[໑໗໗] ສິດຂອງຂ້າພະເຈົ້ານັ້ນ ສົ່ງຫາບ (ບໍຣິຂານດາບົດ)
ໄປຂ້າງໜ້າ ສ່ວນຕົນເອງໄປພາຍຫຼັງ
ທ້ອງຟ້າຖືກດາບົດ ໑,໐໘໔ ຮູບ ປິດບັງໄວ້ແລ້ວ

[໑໗໘] ສິດຂອງຂ້າພະເຈົ້ານັ້ນ ພວກໜຶ່ງເຜົາ (ໝາກໄມ້ນ້ອຍໃຫຍ່ແລະຜັກ) ໄຟສັນ
ພວກໜຶ່ງບໍ່ເຜົາໄຟສັນດິບ ໆ ພວກໜຶ່ງກະເທາະເປືອກອອກສັນ

ພວກໜຶ່ງຕຳສັນ ພວກໜຶ່ງເອົາຫີນທຸບສັນ
ພວກໜຶ່ງສັນໝາກໄມ້ທີ່ຫຼົ່ນເອງ

[໑໗໙] ສິດຂອງຂ້າພະເຈົ້ານັ້ນ ຫາຜູ້ກະທົບກະທັ່ງໄດ້ຍາກ
ພວກໜຶ່ງຮັກຄວາມສະອາດລົງອາບນ້ຳທັງເຊົ້າທັງແລງ
ພວກໜຶ່ງຕັກນ້ຳອາບ

[໑໘໐] ສິດຂອງຂ້າພະເຈົ້າ (ປະພຶດວັດ)
ປ່ອຍເລັບມື ເລັບຕີນ ແລະຂົນຂີ້ແຮ້ຍາວ
ຂີ້ແຂ້ວເຂິ ຫົວເປື້ອນທຸລີ
ແຕ່ຫອມດ້ວຍກິ່ນສິນ ຫາຜູ້ກະທົບກະທັ່ງໄດ້ຍາກ

[໑໘໑] ດາບົດທັງຫຼາຍ ຜູ້ຊົງຊະດາ
ມີຕະບະແກ່ກ້າ ປະຊຸມກັນແຕ່ເຊົ້າແລ້ວ
ປະກາດລາບນ້ອຍ ລາບໃຫຍ່ໃຫ້ຮູ້ແລ້ວ ເຫາະໄປໃນທ້ອງຟ້າ

[໑໘໒] ເມື່ອດາບົດເຫຼົ່ານັ້ນເຫາະໄປ ສຽງດັງຍ່ອມສະພັດໄປ
ຫວຍເທບຍ່ອມຍິນດີ ຍ້ອນໄດ້ຍິນສຽງໜັງສັດ

[໑໘໓] ລືສີຜູ້ເຫາະໄປທາງອາກາດໄປສູ່ທິດນ້ອຍທິດໃຫຍ່
ລືສີເຫຼົ່ານັ້ນມີກຳລັງຂອງຕົນອຸບປະຖຳ ຈຶ່ງໄປໄດ້ຕາມປາຖະໜາ

[໑໘໔] ລືສີເຫຼົ່ານັ້ນທັງໝົດເຮັດແຜ່ນດິນໃຫ້ໄຫວ
ທ່ຽວໄປໃນອາກາດ ມີເດດແຜ່ໄປ
ໃຜ ໆ ບໍ່ອາດຂົ່ມໄດ້ ຜູ້ອື່ນບໍ່ອາດໃຫ້ຫວັ່ນໄຫວໄດ້
ດັ່ງສະມຸດສາຄອນທີ່ໃຜອື່ນໃຫ້ກະເພື່ອມບໍ່ໄດ້

[໑໘໕] ລືສີຜູ້ເປັນສິດຂອງຂ້າພະເຈົ້າ
ບາງພວກຢືນແລະຍ່າງຈົງກົມ ບາງພວກຖືການນັ່ງເປັນວັດ
ບາງພວກສັນໃບໄມ້ທີ່ຫຼົ່ນເອງ ຫາຜູ້ກະທົບກະທັ່ງໄດ້ຍາກ

[໑໘໖] ສິດຂອງຂ້າພະເຈົ້າເຫຼົ່ານັ້ນມີປົກກະຕິຢູ່ດ້ວຍການແຜ່ເມດຕາ
ສະແຫວງຫາປະໂຫຍດເກື້ອກູນແກ່ສັບພະສັດ
ບໍ່ຍົກຕົນ ບໍ່ຂົ່ມຜູ້ໃດ

[໑໙໗] ສິດຂອງຂ້າພະເຈົ້ານັ້ນບໍ່ສະດຸ້ງຢ້ານອັນໃດ
ເໝືອນຣາດຊະສີ ມີກຳລັງເໝືອນພະຍາຄົດຊະສານ
ຫາຜູ້ກະທົບກະທັ່ງໄດ້ຍາກ
ເໝືອນພະຍາເສືອໂຄ່ງ ຍ່ອມມາຢູ່ໃກ້ຂ້າພະເຈົ້າ

[໑໙໘] ພວກວິທະຍາທອນ ພວກເທວະດາ ນາກ
ຄົນທັນ ຜີເສືອນ້ຳ ກຸມພັນ ຫານົບ (ອະສູນ)
ຄຸດ ອາໄສສະນັ້ນຫາກິນ

[໑໙໙] ສິດຂອງຂ້າພະເຈົ້າເຫຼົ່ານັ້ນເກົ້າຊະດາ
ຄອນບໍຣິຂານ ນຸ່ງຫົ່ມໜັງສັດ
ທ່ຽວໄປໃນອາກາດໄດ້ທຸກຕົນ ອາໄສສະນັ້ນຫາກິນ

[໔໐໐] ຄັ້ງນັ້ນ ສິດເຫຼົ່ານັ້ນເປັນຜູ້ເໝາະສົມກັນແລະກັນ
ມີຄວາມເຄົາລົບຕໍ່ກັນແລະກັນ
ສິດ ໑,໐໘໔ ຄົນ ບໍ່ມີສຽງໄອສຽງຈາມເລີຍ

[໔໐໑] ສິດເຫຼົ່ານັ້ນຍ່າງເຂົ້າແຖວກັນ ງຽບສຽງ
ສັງລວມດີ ທັງໝົດເຂົ້າມາຂາບຂ້າພະເຈົ້າດ້ວຍຂະໜ່ອມ

[໔໐໒] ຂ້າພະເຈົ້າມີປົກກະຕິເຂົ້າຊານ ຍິນດີໃນຊານ
ຢູ່ໃນອາສົມແຫ່ງນັ້ນມີສິດເຫຼົ່ານັ້ນແວດລ້ອມ
ເຊິ່ງເປັນຜູ້ສະງົບ ມີຕະບະ

[໔໐໓] ອາສົມຂອງຂ້າພະເຈົ້າຫອມດ້ວຍກິ່ນ ໔ ຢ່າງ
ຄືກິ່ນສົບຂອງເຫຼົ່າລືສີແລະກິ່ນດອກໄມ້
ໝາກໄມ້ຂອງຕົ້ນໄມ້ທີ່ແຕກດອກອອກຜົນ

[໔໐໔] ຂ້າພະເຈົ້າບໍ່ຮູ້ຄືນແລະວັນ
ຄວາມບໍ່ພໍໃຈບໍ່ໄດ້ມີແກ່ຂ້າພະເຈົ້າ
ຂ້າພະເຈົ້າສັ່ງສອນສິດຂອງຕົນໄດ້ຄວາມຣ່າເຣີງຢ່າງຍິ່ງ

[໔໐໕] ເມື່ອດອກໄມ້ບານແລະໝາກໄມ້ສຸກ
ມີກິ່ນທິບຫອມຟຸ້ງໄປ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໔໐໖]	ຂ້າພະເຈົ້າອອກຈາກສະມາທິແລ້ວ
มີຄວາມພຽນເຜົາກິເລດ ມີປັນຍາຮັກສາຕົນ
ຄອນຫາບບໍຣິຂານ (ດາບົດ) ເຂົ້າປ່າໄປ

[໔໐໗]	ຄັ້ງນັ້ນ ຂ້າພະເຈົ້າໄດ້ສຶກສາຈົບຊຳນານ
ໃນລາງບອກເຫດ ໃນຄວາມຝັນແລະໃນລັກສະນະທັງຫຼາຍ
ຊົງຈຳບົດແຫ່ງມົນທີ່ແຜ່ຫຼາຍຢູ່

[໔໐໘]	ພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າອະໂນມະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອິງອາດກວ່ານໍຣະຊົນ
ຊົງປະສົງວິເວກ ຕັດສະຣູ້ເອງໂດຍຊອບ
ຈຶ່ງສະເດັດເຂົ້າໄປສູ່ປ່າຫິມະພານ

[໔໐໙]	ພຣະອົງຜູ້ເປັນມຸນີຜູ້ເລີດ
ຊົງປະກອບດ້ວຍພຣະກະລຸນາ ຜູ້ສູງສຸດແຫ່ງບຸຣຸດ
ສະເດັດເຖິງປ່າຫິມະພານແລ້ວປະທັບນັ່ງຂັດສະມາທິ

[໔໑໐]	ຂ້າພະເຈົ້າໄດ້ພົບເຫັນພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ຊົງມີແສງສະຫວ່າງເຈີດຈ້າ ໜ້າຣື່ນຣົມໃຈ
ຊົງຮຸ່ງເຮືອງດັ່ງດອກບົວຊຽວ
ເປັນເໝືອນແທ່ນບູຊາໄຟ ສະຫວ່າງເຈີດຈ້າ

[໔໑໑]	ຂ້າພະເຈົ້າໄດ້ພົບເຫັນພຣະອົງຜູ້ຊົງເປັນຜູ້ນຳສັດໂລກ
ຊົງຮຸ່ງເຮືອງເໝືອນຕົ້ນພຶກສາປະທີບ
ເໝືອນສາຍຟ້າສະຫວ່າງຈ້າກາງອາກາດ
ເໝືອນຕົ້ນພະຍາໄມ້ສາລະ ມີດອກບານສະພັ່ງຢູ່

[໔໑໒]	ພຣະຜູ້ມີພຣະພາກເຈົ້າພຣະອົງນີ້ຊົງເປັນຜູ້ປະເສີດ
ມີຄວາມພຽນຫຼາຍ ເປັນພຣະມຸນີຜູ້ທຳທີ່ສຸດທຸກໄດ້ແລ້ວ
ເວໄນຍະສັດໄດ້ອາໄສການພົບເຫັນນີ້ແລ້ວ
ຍ່ອມພົ້ນຈາກທຸກທັງປວງໄດ້

[໔໑໓]	ເມື່ອຂ້າພະເຈົ້າໄດ້ເຫັນພຣະອົງ ຜູ້ເປັນເທບຍິ່ງກວ່າເທບແລ້ວ
ຈຶ່ງໄດ້ກວດເບິ່ງລັກສະນະວ່າ ເປັນພຣະພຸດທະເຈົ້າຫຼືບໍ່ແມ່ນ
ດ້ວຍການຕັ້ງໃຈວ່າ ເຮົາຈະເບິ່ງພຣະຊິນນະເຈົ້າຜູ້ມີພຣະຈັກຂຸ

[໔໑໔] ຢູ່ພື້ນຝາພຣະບາດອັນປະເສີດຜາກົດມີກົງຈັກມີກຳເປັນພັນ
ຂ້າພະເຈົ້າໄດ້ເຫັນລັກສະນະທັງຫຼາຍຂອງພຣະອົງແລ້ວ
ຈຶ່ງເຖິງຄວາມແນ່ໃຈໃນພຣະຕະຖາຄົດເຈົ້າ

[໔໑໕] ຄັ້ງນັ້ນ ຂ້າພະເຈົ້າໄດ້ຈັບໄມ້ກວາດປັດກວາດສະຖານທີ່ນັ້ນແລ້ວ
ໄດ້ນຳດອກໄມ້ມາ ໗ ດອກ ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໑໖] ເມື່ອຂ້າພະເຈົ້າບູຊາພຣະພຸດທະເຈົ້າ ຜູ້ຂ້າມພົ້ນໂອຄະໄດ້ແລ້ວ
ບໍ່ມີອາສະວະ ພຣະອົງນັ້ນແລ້ວ
ຈຶ່ງຫົ່ມໜັງສັດບ່ຽງບ່າ
ນະມັດສະການພຣະອົງຜູ້ຊົງເປັນຜູ້ນຳສັດໂລກ

[໔໑໗] ພຣະສຳມາສຳພຸດທະເຈົ້າຜູ້ບໍ່ມີອາສະວະ
ປະທັບຢູ່ດ້ວຍພຣະຍານອັນໃດ
ຂ້າພະເຈົ້າຈັກປະກາດພຣະຍານອັນນັ້ນ
ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າກ່າວເທີ້ນ

[໔໑໘] (ດາບົດສຸຣຸຈິກ່າວຊົມເຊີຍພຣະຜູ້ມີພຣະພາກເຈົ້າອະໂນມະທັດສີວ່າ)
ຂ້າແຕ່ພຣະສະຍຳພູ ຜູ້ມີພຣະຄຸນຫາປະມານບໍ່ໄດ້
ຂໍພຣະອົງຈົ່ງຊົງຊ່ວຍສັດໂລກນີ້ໃຫ້ພົ້ນຈາກສັງສາຣະວັດເທີ້ນ
ສັດເຫຼົ່ານັ້ນອາໄສການພົບເຫັນພຣະອົງແລ້ວ
ຈະຂ້າມກະແສແຫ່ງຄວາມສົງໄສໄດ້

[໔໑໙] ພຣະອົງຊົງເປັນສາດສະດາ ເປັນຍອດ
ເປັນທຸງໄຊ ເປັນເສົາຫຼັກ ເປັນຈຸດມຸ້ງໝາຍ ເປັນບ່ອນເພິ່ງ
ເປັນເໝືອນດວງປະທີບຂອງເຫຼົ່າສັດ
ເປັນຜູ້ສູງສຸດແຫ່ງເທວະດາແລະມະນຸດທັງຫຼາຍ

[໔໒໐] ຂ້າແຕ່ພຣະສັບພັນຍູ
ນ້ຳໃນມະຫາສະມຸດສາມາດທີ່ຈະປະມານໄດ້ດ້ວຍມາດຕາຕວງ
ແຕ່ພຣະຍານຂອງພຣະອົງບໍ່ມີໃຜສາມາດຈະປະມານໄດ້ເລີຍ

[໔໒໑] ຂ້າແຕ່ພຣະສັບພັນຍູ
ແຜ່ນດິນຍັງສາມາດທີ່ຈະນຳມາວາງໄວ້ເທິງຕາຊັ່ງແລ້ວຊັ່ງເບິ່ງໄດ້
ແຕ່ພຣະຍານຂອງພຣະອົງ ບໍ່ມີໃຜສາມາດຈະຊັ່ງເບິ່ງໄດ້

[໔໔໘] ຂ້າແຕ່ພຣະສັບພັນຍູ
ອາກາດຍັງສາມາດທີ່ຈະໃຊ້ເຊືອກຫຼືນິ້ວມືແທກເບິ່ງໄດ້
ແຕ່ພຣະຍານຂອງພຣະອົງ ບໍ່ມີໃຜສາມາດຈະແທກເບິ່ງໄດ້

[໔໔໓] ນ້ຳໃນມະຫາສະມຸດທັງໝົດແລະແຜ່ນດິນທັງໝົດ
ບຸກຄົນກໍຍັງຂ້າມໄດ້ ແຕ່ພຣະພຸດທະຍານ
ບໍ່ຄວນໂດຍການນຳມາປຽບທຽບ

[໔໔໔] ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ຈິດຂອງສັດເຫຼົ່າໃດແລ່ນໄປໃນໂລກພ້ອມທັງເທວະໂລກ
ສັດຜູ້ມີຈິດເຫຼົ່ານັ້ນໄດ້ຢູ່ໃນຕາໜ່າງຄືຍານຂອງພຣະອົງ

[໔໔໕] ຂ້າແຕ່ພຣະສັບພັນຍູ
ພຣະອົງຊົງບັນລຸພຣະໂພທິຍານຢ່າງສູງສຸດທັງໝົດດ້ວຍພຣະຍານໃດ
ພຣະອົງຊົງຢ່ຳຍີອັນຍະເດຍຣະຖີທັງຫຼາຍດ້ວຍພຣະຍານນັ້ນ

[໔໔໖] (ພຣະເຖຣະທັງຫຼາຍຜູ້ເຮັດສັງຄາຍະນາກ່າວວ່າ)
ທ່ານສຸຣຸຈິດາບົດນັ້ນ ເມື່ອກ່າວຄາຖາເຫຼົ່ານີ້ແລ້ວ
ຈຶ່ງປູໜັງສັດນັ່ງລົງເທິງແຜ່ນດິນ

[໔໔໗] (ດາບົດສຸຣຸຈິນັ່ງຢູ່ ໃນບ່ອນນັ້ນແລ້ວກ່າວວ່າ)
ຜູ້ຄົນກ່າວກັນໃນບັດນີ້ວ່າ
ຂຸນເຂົາຢັ່ງລົງໃນຫ້ວງມະຫັນນົບ ໗໔,໐໐໐ ໂຍດ
ສູງຂຶ້ນໄປ ໗໔,໐໐໐ ໂຍດເຊັ່ນກັນ

[໔໔໗] ພູເຂົາສິເນຣຸກໍສູງສຸດເທົ່ານັ້ນ ພູເຂົາສິເນຣຸນັ້ນ
ທັງດ້ານຍາວ ທັງດ້ານກ້ວາງເຖິງພຽງນັ້ນ
ກໍຍັງຖືກບົດໃຫ້ລະອຽດເປັນແສນໂກດດ້ວຍການນັບ

[໔໔໙] ຂ້າແຕ່ພຣະສັບພັນຍູ ເມື່ອຕັ້ງຄະແນນໄວ້
ຜົງແຫ່ງພູເຂົາສິເນຣຸກໍຈະເພິ່ງໝົດສິ້ນໄປກ່ອນ
ແຕ່ພຣະຍານຂອງພຣະອົງ ບໍ່ມີໃຜສາມາດຈະນັບໄດ້

[໔໓໐] ຜູ້ໃດເພິ່ງເອົາຕາໜ່າງຕາຖີ່ ໆ ຂຶງລ້ອມນ້ຳໄວ້
ສັດນ້ຳທັງໝົດທີ່ມີຢູ່ກໍຈະເພິ່ງເຂົ້າໄປຢູ່ພາຍໃນຕາໜ່າງນັ້ນ ສັນໃດ

[໔໓໑] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ເດຍຣະຖີຫຼາກຫຼາຍບາງພວກກໍສັນນັ້ນຄືກັນ
ຍ່ອມເຂົ້າໄປສູ່ປ່າທຶບຄີທິດຖີ ຖືກຄວາມຍຶດຖືເຮັດໃຫ້ລຸ້ມຫຼົງ

[໔໓໔] ເດຍຣະຖີເຫຼົ່ານັ້ນເຂົ້າໄປພາຍໃນຕາໜ່າງ
ຍ້ອນພຣະຍານອັນບໍລິສຸດຂອງພຣະອົງ
ເຊິ່ງມີປົກກະຕິເຫັນສັບພະສິ່ງ ບໍ່ມີອັນໃດຂັດຂວາງ
ເດຍຣະຖີເຫຼົ່ານັ້ນບໍ່ລ່ວງເລີຍພຣະຍານຂອງພຣະອົງໄປໄດ້

[໔໓໓] ກໍສະໄໝນັ້ນ ພຣະຜູ້ມີພຣະພາກຊິນນະເຈົ້າພຣະນາມວ່າອະໂນມະທັດສີ
ຜູ້ມີພຣະຍົດຍິ່ງໃຫຍ່ ອອກຈາກສະມາທິແລ້ວກວດເບິ່ງທິດ

[໔໓໔] ພຣະສາວົກນາມວ່າ ນິສະພະ ຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າອະໂນມະທັດສີ
ຜູ້ເປັນມຸນີ ມີພິກຂຸ ໑໐໐,໐໐໐ ອົງ
ເປັນຜູ້ມີຈິດສະຫງົບ ຜູ້ຄົງທີ່ ແວດລ້ອມແລ້ວ

[໔໓໕] ຜູ້ສິ້ນອາສະວະແລ້ວ ຜູ້ບໍລິສຸດ ຜູ້ໄດ້ອະພິນຍາ ໖
ຜູ້ຄົງທີ່ ຮູ້ພຣະດຳຣິຂອງພຣະພຸດທະເຈົ້າແລ້ວ
ຈຶ່ງເຂົ້າເຝົ້າພຣະອົງຜູ້ຊົງເປັນຜູ້ນຳສັດໂລກ

[໔໓໖] ສາວົກເຫຼົ່ານັ້ນຢືນກາງອາກາດ ໃນບ່ອນໃກ້ພຣະຜູ້ມີພຣະພາກເຈົ້ານັ້ນ
ໄດ້ກະທຳປະທັກຂິນ ປະນົມມື
ນະມັດສະການແລ້ວລົງມາເຝົ້າ ໃນສຳນັກພຣະພຸດທະເຈົ້າ

[໔໓໗] ພຣະຜູ້ມີພຣະພາກຊິນນະເຈົ້າພຣະນາມວ່າອະໂນມະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວຊົງແຍ້ມພຣະໂອດໃຫ້ຜາກົດ
[໔໓໘] ພຣະສາວົກນາມວ່າ ວະຣຸນະ
ຜູ້ເປັນອຸປັດຖາກຂອງພຣະສາດສະດາພຣະນາມວ່າອະໂນມະທັດສີ
ຫົ່ມຜ້າບ່ຽງບ່າ ແລ້ວທູນຖາມພຣະອົງຜູ້ຊົງເປັນຜູ້ນຳສັດໂລກວ່າ
[໔໓໙] ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ອັນໃດນໍ
ເປັນເຫດໃຫ້ພຣະສາດສະດາຊົງແຍ້ມພຣະໂອດ
ທຳມະດາພຣະພຸດທະເຈົ້າທັງຫຼາຍນັ້ນຈະບໍ່ຊົງແຍ້ມພຣະໂອດ ໂດຍບໍ່ມີເຫດ

[๘๔๐] พระผู้มีพระพาກເຈົ້າພระນາມວ່າອະໂນມະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອີງອາດກວ່ານໍຣະຊົນ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ ໄດ້ຕັດພຣະຄາຖານີ້ວ່າ

[๘๔๑] ເຮົາຈັກພະຍາກອນດາບົດຜູ້ທີ່ໃຊ້ດອກໄມ້ບູຊາເຮົາ
ແລະຊົມເຊີຍຍານຂອງເຮົາເນືອງ ໆ
ຂໍທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[๘๔๒] ເທວະດາທັງປວງ ຮູ້ພຣະດຳຣັດຂອງພຣະພຸດທະເຈົ້າແລ້ວມາປະຊຸມກັນ
ເທວະດາເຫຼົ່ານັ້ນ ປະສົງຈະຟັງພຣະສັດທຳ
ຈິ່ງເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ

[๘๔๓] ໝູ່ເທວະດາຜູ້ມີລິດຫຼາຍທັງ ๑๐ ໂລກທາດເຫຼົ່ານັ້ນ
ປະສົງຈະຟັງພຣະສັດທຳຈິ່ງເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ

[๘๔๔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ) ກອງທັບ ๔ ເຫຼົ່າ
ຄື ພົນຊ້າງ ພົນມ້າ ພົນລົດ ພົນຍ່າງ
ຈັກແວດລ້ອມຜູ້ນີ້ເປັນນິດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[๘๔๕] ເຄື່ອງດົນຕີ ๖๐,๐๐๐ ຢ່າງ
ກອງທີ່ປະດັບຕົກແຕ່ງສວຍງາມ
ຈັກບຳຣຸງບຳເລີຜູ້ນີ້ເປັນນິດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[๘๔๖] ສະຕີສາວລ້ວນ ๑๖,๐๐๐ ນາງ ປະດັບຕົກແຕ່ງສວຍງາມ
ສວມໃສ່ຜ້າອາພອນຢ່າງງົດງາມ ຫ້ອຍຕຸ້ມຫູແກ້ວມະນີ

[๘๔๗] ມີໜ້າກົມໃຫຍ່ ມີປີກກະຕິຣ່າເຣີງ ຮູບຮ່າງງາມ
ແອວນ້ອຍແອວບາງ ຈັກແວດລ້ອມຜູ້ນີ້ເປັນນິດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[๘๔๘] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ๑๐๐,๐๐๐ ກັບ
ຈັກເປັນພຣະເຈົ້າຈັກກະພັດໃນແວ່ນແຄວ້ນ ๑,๐๐๐ ຊາດ

[๔๔๙] จັກເປັນຈອມເທບຄອງເທວະສົມບັດ ໑,໐໐໐ ຊາດ
จັກໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[๔๕๐] ເມື່ອພົບສຸດທ້າຍມາເຖິງ ຜູ້ນີ້ຈັກໄປເກີດເປັນມະນຸດ
ນາງພາມມະນີຊື່ສາຣີ ຈັກຖືພາ

[๔๕๑] ຜູ້ນີ້ຈັກຜາກົດນາມວ່າສາຣີບຸດ
ຕາມຊື່ແລະໂຄດຂອງມານດາ ຈັກເປັນຜູ້ມີປັນຍາຫຼັກແຫຼມ

[๔๕๒] ຈັກເປັນຜູ້ບໍ່ມີຄວາມກັງວົນ
ລະຖິ້ມຊັບປະມານ ๓๐ ໂກດແລ້ວອອກບວດ
ທ່ຽວສະແຫວງຫາທາງແຫ່ງຄວາມສະງົບທົ່ວແຜ່ນດິນນີ້

[๔๕๓] ໃນກັບທີນັບບໍ່ໄດ້ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[๔๕๔] ດາບົດນີ້ຈັກມີນາມວ່າສາຣີບຸດ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນອັກຄະຣະສາວົກຂອງພຣະສາດສະດາພຣະອົງນັ້ນ

[๔๕๕] ແມ່ນ້ຳພາຄີຣະຖີນີ້ໄຫຼມາຈາກພູເຂົາຫິມະພານ
ໄຫຼລົງສູ່ມະຫາສະມຸດ ເຮັດມະຫາສະມຸດໃຫ້ເຕັມ ສັນໃດ

[๔๕๖] ສາຣີບຸດນີ້ກໍສັນນັ້ນຄືກັນ
ຈັກເປັນຜູ້ສາມາດແກ່ກ້າໃນໄຕຣເພດ
ຈັກສຳເລັດປັນຍາປາຣະມີ ແລ້ວໃຫ້ໝູ່ສັດອີ່ມເອີບໄດ້

[๔๕๗] ຕັ້ງແຕ່ປ່າຫິມະພານຈົນເຖິງທະເລມີຫ້ວງນ້ຳກວ້າງໃຫຍ່
ໃນຊ່ວງລະຫວ່າງນີ້ ມີກອງຊາຍຢູ່ຂະໜາດເທົ່າໃດ
ຄິດໄລ່ນັບບໍ່ໄດ້

[๔๕๘] ແມ່ນກອງຊາຍຂະໜາດເທົ່ານັ້ນສາມາດຈະຄິດໄລ່ນັບໄດ້
ໂດຍບໍ່ມີເຫຼືອດ້ວຍການນັບວິທີໃດ
ແຕ່ປັນຍາຂອງສາຣີບຸດຈະມີບ່ອນສຸດໂດຍວິທີນັບນັ້ນ ໆ ກໍຫາບໍ່ໄດ້

[໔໕໙] ເມື່ອຕັ້ງຄະແນນໄວ້
ບັນດາຊາຍໃນແມ່ນ້ຳຄົງຄາກໍຈະເພິ່ງໝົດສິ້ນໄປ
ແຕ່ປັນຍາຂອງສາຣີບຸດບໍ່ໝົດສິ້ນໄປເລີຍ

[໔໖໐] ຄື້ນໃນມະຫາສະມຸດຄິດໄລ່ນັບບໍ່ໄດ້
ປັນຍາຂອງສາຣີບຸດ ຈັກບໍ່ມີບ່ອນສຸດແນວນັ້ນຄືກັນ

[໔໖໑] ສາຣີບຸດນັ້ນຈັກເຮັດໃຫ້ພຣະສຳມາສຳພຸດທະເຈົ້າ
ໂຄດົມສາກະຍະ ຜູ້ປະເສີດ ຊົງໂພດປານແລ້ວ
ສຳເລັດປັນຍາປາຣະມີເປັນອັກຄະຣະສາວົກ (ຂອງພຣະອົງ)

[໔໖໔] ສາຣີບຸດນັ້ນ ຈັກປະພຶດຕາມພຣະທຳມະຈັກ
ທີ່ພຣະຜູ້ມີພຣະພາກເຈົ້າຜູ້ສາກະຍະບຸດ
ຜູ້ຄົງທີ່ ຊົງປະກາດໄວ້ແລ້ວ
ບັນດານເມັດຝົນຄືທຳໃຫ້ຕົກລົງໂດຍຊອບ

[໔໖໓] ພຣະຜູ້ມີພຣະພາກເຈົ້າຜູ້ໂຄດົມສາກະຍະຜູ້ປະເສີດ
ຊົງຮູ້ຄວາມນັ້ນທັງໝົດແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸ
ຈັກຊົງຕັ້ງ (ສາຣີບຸດ) ໄວ້ໃນຕຳແໜ່ງອັກຄະຣະສາວົກ

[໔໖໔] ໂອນໍ ກຳທີ່ຂ້າພະເຈົ້າໄດ້ທຳບຸນຍາທິການ
ແດ່ພຣະສາດສະດາພຣະນາມວ່າອະໂນມະທັດສີແລ້ວ
ສຳເລັດປາຣະມີໃນຈຳນວນຄຸນທັງໝົດ
ຊື່ວ່າເປັນກຳທີ່ເຮັດໄວ້ດີແລ້ວນໍ

[໔໖໕] ກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນການທີ່ຈະກຳນົດຈຳນວນບໍ່ໄດ້
ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບສຸດທ້າຍນີ້
ຂ້າພະເຈົ້າລຸດພົ້ນດີແລ້ວ ເໝືອນຄວາມໄວຂອງລູກສອນທີ່ພົ້ນໄປຈາກຄັນທະນູ
ເຜົາກິເລດທັງຫຼາຍໄດ້ແລ້ວ

[໔໖໖] ຂ້າພະເຈົ້ານັ້ນ ເມື່ອທ່ຽວສະແຫວງຫາທາງ
ທີ່ບໍ່ຫວັ່ນໄຫວຄືນິບພານ ອັນປັດໄຈປຸງແຕ່ງບໍ່ໄດ້
ເລືອກເຟັ້ນເຈົ້າລັດທິທັງປວງຈຶ່ງວຽນວ່າຍຕາຍເກີດຢູ່ໃນພົບ

[໔໗໗] ຄົນເປັນໄຂ້ເພິ່ງສະແຫວງຫາຢາຮັກສາ
ເພິ່ງສະສົມຊັບທັງປວງໄວ້ເພື່ອພົ້ນຈາກຄວາມເຈັບໄຂ້ ສັນໃດ

[໔໗໘] ຂ້າພະເຈົ້າກໍສັນນັ້ນ ເມື່ອທ່ຽວສະແຫວງຫາທາງ
ຄືອະມະຕະນິບພານອັນປັດໄຈປຸງແຕ່ງບໍ່ໄດ້
ຈຶ່ງໄດ້ບວດເປັນລືສີ ໕໐໐ ຊາດ ຕິດຕໍ່ກັນ

[໔໗໙] ຂ້າພະເຈົ້າພຽບພ້ອມດ້ວຍຊະດາແລະພາຣະ (ບໍຣິຂານ)
ນຸ່ງຫົ່ມໜັງສັດ ສໍາເລັດອະພິນຍາ ໄດ້ໄປ (ເກີດ) ຍັງພົມມະໂລກ

[໔໘໐] ເວັ້ນສາດສະໜາຂອງພຣະຊິນນະເຈົ້າສາແລ້ວ
ກໍຫາຄວາມບໍລິສຸດໃນລັດທິພາຍນອກບໍ່ໄດ້
ເຫຼົ່າສັດຜູ້ມີປັນຍາຍ່ອມບໍລິສຸດໄດ້ໃນສາດສະໜາຂອງພຣະຊິນນະເຈົ້າ

[໔໘໑] ສິ່ງທີ່ສໍາເລັດດ້ວຍການເຮັດຂອງຕົນນັ້ນ
ບໍ່ເປັນດັ່ງທີ່ໄດ້ຍິນກັນຕໍ່ ໆ ມາວ່າ ເປັນແນວນີ້ ໆ
ຂ້າພະເຈົ້າເມື່ອສະແຫວງຫາທາງອັນປັດໄຈປຸງແຕ່ງບໍ່ໄດ້
ຈຶ່ງທ່ຽວໄປໃນລັດທິທີ່ຜິດ

[໔໘໔] ຄົນທີ່ຕ້ອງການແກ່ນໄມ້ຕັດຕົ້ນກ້ວຍແລ້ວຜ່າ
ກໍຈະບໍ່ເພິ່ງໄດ້ແກ່ນໄມ້ໃນຕົ້ນກ້ວຍນັ້ນ
ເຂົາຍ່ອມເປັນຜູ້ຂາດແກ່ນໄມ້ ສັນໃດ

[໔໘໓] ເຫຼົ່າເດຍຣະຖີທັງຫຼາຍໃນໂລກກໍສັນນັ້ນ
ມີທິດຖີຕ່າງກັນ ເຖິງຈະມີຈໍານວນຫຼາຍ
ກໍເປັນຜູ້ວ່າງເປົ່າຈາກນິບພານອັນປັດໄຈປຸງແຕ່ງບໍ່ໄດ້
ເໝືອນຕົ້ນກ້ວຍວ່າງເປົ່າຈາກແກ່ນໄມ້ ສັນນັ້ນ

[໔໘໔] ເມື່ອພົບສຸດທ້າຍມາເຖິງ ຂ້າພະເຈົ້າເກີດເປັນບຸດຂອງພາມ
ໄດ້ລະຖິ້ມໂພຄະສົມບັດຫຼວງຫຼາຍແລ້ວອອກບວດເປັນບັນພະຊິດ

**ພານະວານທີ ໑ ຈົບ**

[໔໘໕] (ພຣະສາຣີບຸດເຖຣະຂາບທູນວ່າ)
ຂ້າພຣະອົງຢູ່ໃນສໍານັກຂອງພາມນາມວ່າສັນໄຊ
ເຊິ່ງເປັນຜູ້ຄົງແກ່ຮຽນ ຊົງມົນ ຈົບໄຕຣເພດ

[໔໗໖] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ພາມນາມວ່າອັດສະຊິ
ສາວົກຂອງພຣະອົງ ເຊິ່ງຫາຜູ້ກະທົບກະທັ່ງໄດ້ຍາກ
ມີເດດແຜ່ໄປ ທ່ຽວບິນທະບາບໃນຄັ້ງນັ້ນ

[໔໗໗] ຂ້າພຣະອົງໄດ້ເຫັນທ່ານຜູ້ປະເສີດນັ້ນ ຜູ້ມີປັນຍາ
ເປັນມຸນີ ມີຈິດຕັ້ງໝັ້ນໃນຄວາມເປັນມຸນີ
ມີຈິດສະຫງົບ ເບີກບານ ເໝືອນດອກປະທຸມທີ່ແຍ້ມບານ

[໔໗໘] ຍ້ອນເຫັນທ່ານຜູ້ຝຶກຝົນດີແລ້ວ
ມີຈິດບໍລິສຸດ ອົງອາດ ປະເສີດ ມີຄວາມພຽນ
ຄວາມຄິດຂອງຂ້າພະເຈົ້າຈຶ່ງເກີດຂຶ້ນວ່າ
ທ່ານຜູ້ນີ້ຄົງຈະເປັນພຣະອະຣະຫັນ

[໔໗໙] ທ່ານຜູ້ນີ້ ເຄື່ອນໄຫວກິຣິຍາທ່າທາງໜ້າເຫຼື້ອມໃສ
ຮູບງາມ ສັງລວມດີ ຝຶກຝົນແລ້ວໃນອຸບາຍເຄື່ອງຝຶກຢ່າງສູງສຸດ
ຄົງຈະເປັນຜູ້ເຫັນທາງອຳມະຕະ

[໔໘໐] ທາງທີ່ດີ ເຮົາຄວນຈະຖາມທ່ານຜູ້ມີປະໂຫຍດຢ່າງສູງສຸດ
ຜູ້ມີຈິດຍິນດີ ຫາກທ່ານຖືກເຮົາຖາມແລ້ວຈັກຕອບ
ເຮົາກໍຈະຍ້ອນຖາມທ່ານອີກ ໃນຄັ້ງນັ້ນ

[໔໘໑] ຂ້າພຣະອົງໄດ້ຍ່າງນຳໄປຂ້າງຫຼັງທ່ານຜູ້ກຳລັງທ່ຽວບິນທະບາດ
ຖ້າຄອຍໂອກາດຢູ່ເພື່ອຈະສອບຖາມທາງອຳມະຕະ
[໔໘໒] ຈຶ່ງເຂົ້າໄປຫາທ່ານເຊິ່ງຢູ່ໃນລະຫວ່າງຖະໜົນແລ້ວຖາມວ່າ
ຂ້າແຕ່ທ່ານຜູ້ນິຣະທຸກ ຜູ້ມີຄວາມພຽນ
ທ່ານມີໂຄດຕະກູນແນວໃດ ເປັນສິດຂອງໃຜ
[໔໘໓] ທ່ານຖືກຂ້າພຣະອົງຖາມແລ້ວກໍບໍ່ເກງກົວ
ເປັນດັ່ງພະຍາໄກສອນຣາດຊະສີຕອບວ່າ
ທ່ານຜູ້ມີອາຍຸ ພຣະພຸດທະເຈົ້າສະເດັດອຸບັດຂຶ້ນແລ້ວໃນໂລກ
ອາດຕະມາເປັນສິດຂອງພຣະອົງ

[໔໘໔] (ຂ້າພຣະອົງໄດ້ຖາມຕໍ່ໄປວ່າ)
ຂ້າແຕ່ທ່ານຜູ້ມີຄວາມພຽນຫຼາຍ ທ່ານຜູ້ມີຍົດຍິ່ງໃຫຍ່ເກີດຕາມມາ
ສາສະນະທຳຂອງພຣະພຸດທະເຈົ້າຂອງທ່ານເປັນເຊັ່ນໃດ

ທ່ານຜູ້ຈະເລີນ ຂ້າພະເຈົ້າຂໍໂອກາດ
ຂໍທ່ານໂຜດບອກແກ່ຂ້າພະເຈົ້າດ້ວຍເທີ້ນ

[໔໗໕] ທ່ານຖືກຂ້າພຣະອົງຖາມແລ້ວ
ຈຶ່ງສະແດງບົດທຸກບົດທີ່ເລີກເຊິ່ງລະອຽດ
ສໍາລັບກໍາຈັດລູກສອນຄືຕັນຫາ
ສໍາລັບເປັນເຄື່ອງບັນເທົາທຸກທັງປວງວ່າ

[໔໗໖] ທໍາເຫຼົ່າໃດເກີດແຕ່ເຫດ
ພຣະຕະຖາຄົດຕັດເຫດແຫ່ງທໍາເຫຼົ່ານັ້ນ
ແລະຄວາມດັບແຫ່ງທໍາເຫຼົ່ານັ້ນ
ພຣະມະຫາສະມະນະມີປົກກະຕິຕັດສອນແນວນີ້

[໔໗໗] ເມື່ອພຣະອັດສະຊິເຖຣະແກ້ບັນຫາແລ້ວ
ຂ້າພຣະອົງນັ້ນໄດ້ບັນລຸຜົນທີ່ໜຶ່ງ (ໂສດາປັດຕິຜົນ)
ເປັນຜູ້ປາສະຈາກທຸລິຄືກິເລດ
ປາສະຈາກມົນທິນຄືກິເລດ ຍ້ອນໄດ້ຟັງຄໍາສອນຂອງພຣະຊິນນະເຈົ້າ

[໔໗໘] ຂ້າພຣະອົງໄດ້ຟັງຄໍາຂອງພຣະມຸນີແລ້ວ
ໄດ້ເຫັນທໍາອັນສູງສຸດ ຢັ່ງຮູ້ພຣະສັດທໍາຈຶ່ງໄດ້ກ່າວຄາຖານີ້ວ່າ

[໔໗໙] ຖ້າມີພຽງເທົ່ານັ້ນ ທໍານີ້ນັ້ນ (ທີ່ຂ້າພະເຈົ້າເພິ່ງບັນລຸ)
ທ່ານຮູ້ແຈ້ງທາງທີ່ບໍ່ເສົ້າໂສກ
ເຊິ່ງຂ້າພະເຈົ້າບໍ່ເຫັນແລ້ວ ລ່ວງເລີຍມາຫຼາຍໝື່ນກັບ

[໔໙໐] ຂ້າພະເຈົ້າເມື່ອສະແຫວງຫາທໍາ ໄດ້ທ່ຽວໄປໃນລັດທິທີ່ຜິດ
(ບັດນີ້)ໄດ້ບັນລຸຄວາມປະສົງນັ້ນແລ້ວ
ຈຶ່ງບໍ່ແມ່ນເວລາທີ່ຂ້າພະເຈົ້າຈະຜະໝາດ
[໔໙໑] ຂ້າພຣະອົງທີ່ພຣະອັດສະຊິເຖຣະໃຫ້ຍິນດີແລ້ວ
ບັນລຸທາງທີ່ບໍ່ຫວັ່ນໄຫວ ເມື່ອຈະໄປເສາະຫາສະຫາຍ
ຈຶ່ງໄດ້ໄປສູ່ອາສົມ
[໔໙໔] ສະຫາຍຂອງຂ້າພຣະອົງ ຜູ້ໄດ້ສຶກສາມາດີ
ພຽບພ້ອມດ້ວຍອິລິຍາບົດ ເຫັນຂ້າພຣະອົງແຕ່ໄກ
ຈຶ່ງໄດ້ກ່າວຄໍານີ້ວ່າ

[໘໙໓] ທ່ານມີໜ້າຕາຜ່ອງໃສ ຜາກົດດັ່ງວ່າຈະເປັນມຸນີ
ທ່ານໄດ້ບັນລຸອະມະຕະນິບພານຫຼືໄດ້ບັນລຸບົດຄືພຣະນິບພານອັນບໍ່ຈຸຕິ

[໘໙໔] ທ່ານເປັນຜູ້ສົມຄວນແກ່ຄວາມງາມ ເປັນເໝືອນຜູ້ຝຶກຝົນຕົນມາແລ້ວ
ເໝືອນຊ້າງຖືກແທງດ້ວຍຫອກ ບໍ່ຫວັ່ນໄຫວ
ພາມ ທ່ານເປັນຜູ້ມີການຝຶກຝົນມາດີ
ຈຶ່ງສະງົບຣະງັບແລ້ວ ໃນທາງເປັນທີ່ຝຶກ

[໘໙໕] ຂ້າພຣະອົງຕອບວ່າ ຂ້າພະເຈົ້າໄດ້ບັນລຸອະມະຕະທຳ
ເຊິ່ງເປັນເຄື່ອງບັນເທົາລູກສອນຄືຄວາມເສົ້າໂສກແລ້ວ
ເຖິງໂຕທ່ານກໍຈະບັນລຸອະມະຕະທຳນັ້ນໄດ້
ພວກເຮົາໄປເຝົ້າພຣະພຸດທະເຈົ້າກັນເທີ້ນ

[໘໙໖] ສະຫາຍນັ້ນອັນຂ້າພຣະອົງໃຫ້ສຶກສາຢ່າງດີແລ້ວ
ຈຶ່ງຮັບຄຳວ່າ ດີແລ້ວ ແລ້ວໄດ້ຈູງມືກັນມາຍັງສຳນັກຂອງພຣະອົງ

[໘໙໗] ຂ້າແຕ່ພຣະອົງຜູ້ສາກະຍະບຸດ ຂ້າພຣະອົງທັງ ໒
ຈັກບວດໃນສຳນັກຂອງພຣະອົງ
ອາໄສຄຳສອນຂອງພຣະອົງຢູ່ຢ່າງຜູ້ບໍ່ມີອາສະວະ

[໘໙໘] ທ່ານໂກລິຕະເປັນຜູ້ເລີດດ້ວຍລິດ ຂ້າພຣະອົງເລີດດ້ວຍປັນຍາ
ຂ້າພຣະອົງທັງ ໒ ຈະຮ່ວມມືກັນເຮັດສາດສະໜາໃຫ້ງົດງາມ

[໘໙໙] (ເມື່ອກ່ອນ) ຂ້າພຣະອົງມີຄວາມດຳຣິຍັງບໍ່ເຖິງທີ່ສຸດ
ຈຶ່ງໄດ້ທ່ຽວໄປໃນລັດທິທີ່ຜິດ
(ແຕ່ບັດນີ້)ຍ້ອນໄດ້ອາໄສທັດສະນະຂອງພຣະອົງ
ຄວາມດຳຣິຂອງຂ້າພຣະອົງຈຶ່ງເຕັມ

[໙໐໐] ໝູ່ໄມ້ເກີດເທິງແຜ່ນດິນຍ່ອມແຍ້ມບານໃນລະດູການ
ກິ່ນທິບຫອມອົບອວນໄປເຮັດໃຫ້ສັບພະສັດຍິນດີ (ສັນໃດ)

[໙໐໑] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຜູ້ເປັນສາກະຍະບຸດ ມີພຣະຍົດຍິ່ງໃຫຍ່
ຂ້າພຣະອົງກໍສັນນັ້ນຄືກັນ

ດຳຣົງຢູ່ໃນສາດສະໜາຂອງພຣະອົງແລ້ວ
ຍ່ອມສະແຫວງຫາການເວລາເພື່ອຈະແຍ້ມບານ

[໓໐໔] ຂ້າພຣະອົງສະແຫວງຫາດອກໄມ້ຄືວິມຸດຕິ
ເຊິ່ງເປັນເຫດລຸດພົ້ນຈາກການວຽນວ່າຍຕາຍເກີດຢູ່ໃນພົບ
ໃຫ້ສັບພະສັດຍິນດີດ້ວຍການໄດ້ດອກໄມ້ຄືວິມຸດຕິ

[໓໐໓] ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ ຕະຫຼອດພຸດທະເຂດ
ຍົກເວັ້ນພຣະສຳມາສຳພຸດທະເຈົ້າຜູ້ເປັນມະຫາມຸນີແລ້ວ
ກໍບໍ່ມີໃຜຈະມີປັນຍາເໝືອນກັບຂ້າພຣະອົງຜູ້ເປັນບຸດຂອງພຣະອົງເລີຍ

[໓໐໔] ສິດແລະຊຸມນຸມຊົນຂອງພຣະອົງທີ່ພຣະອົງຊົງແນະນຳດີແລ້ວ
ໃຫ້ສຶກສາດີແລ້ວ ຝຶກຝົນໃນອຸບາຍເຄື່ອງຝຶກອັນສູງສຸດ
ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໐໕] ທ່ານເຫຼົ່ານັ້ນມີປົກກະຕິເຂົ້າຊານ ຍິນດີໃນຊານ
ເປັນນັກປາດ ມີຈິດສະງົບ ມີຈິດຕັ້ງໝັ້ນ ເປັນມຸນີ
ສົມບູນດ້ວຍຄວາມເປັນມຸນີ ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໐໖] ທ່ານເຫຼົ່ານັ້ນມັກໜ້ອຍ ມີປັນຍາຮັກສາຕົນ
ເປັນນັກປາດ ສັນອາຫານແຕ່ໜ້ອຍ ບໍ່ໂລບ
ສັນໂດດຕາມມີຕາມໄດ້ ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໐໗] ທ່ານເຫຼົ່ານັ້ນຖືການຢູ່ປ່າເປັນວັດ ຍິນດີໃນທຸດົງ
ເຂົ້າຊານ ໃຊ້ຈີວອນເສົ້າໝອງ ຍິນດີຍິ່ງໃນຄວາມສະຫງັດ
ເປັນນັກປາດ ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໐໘] ທ່ານເຫຼົ່ານັ້ນເປັນຜູ້ປະຕິບັດ (ພຽບພ້ອມດ້ວຍມັກ)
ດຳຣົງຢູ່ໃນຜົນ ແລະເປັນພຣະເສຂະພຽບພ້ອມດ້ວຍຜົນ
ມຸ້ງຫວັງປະໂຫຍດຢ່າງສູງສຸດ (ຄືພຣະນິບພານ)
ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໐໙] ທ່ານເຫຼົ່ານັ້ນທັງທີ່ເປັນພຣະໂສດາບັນ ທັງທີ່ເປັນພຣະສະກະທາຄາມີ
ທັງທີ່ເປັນພຣະອະນາຄາມີ ແລະທີ່ເປັນພຣະອະຣະຫັນ
ເປັນຜູ້ປາສະຈາກມົນທິນ (ຄືກິເລດ) ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໑໐] ສາວົກຂອງພຣະອົງຈຳນວນຫຼາຍ
ສະຫຼາດໃນສະຕິປັດຖານ ຍິນດີໃນການຈະເລີນໂພດຊົງ
ທຸກທ່ານແວດລ້ອມພຣະອົງຢູ່ທຸກເມື່ອ

[໓໑໑] ທ່ານເຫຼົ່ານັ້ນສະຫຼາດໃນອິດທິບາດ ຍິນດີໃນການຈະເລີນສະມາທິ
ໝັ່ນປະກອບສຳມັບປະທານ ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໑໒] ທ່ານເຫຼົ່ານັ້ນໄດ້ວິດຊາ ໓ ໄດ້ອະພິນຍາ ໖
ເຖິງຄວາມສຳເລັດແຫ່ງລິດ
ເຖິງຄວາມສຳເລັດແຫ່ງປັນຍາ
ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໑໓] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ສິດຂອງພຣະອົງເປັນເຊັ່ນນີ້
ເປັນຜູ້ສຶກສາດີແລ້ວ ຫາຜູ້ກະທົບກະທັ່ງໄດ້ຍາກ
ມີເດດແຜ່ໄປ ແວດລ້ອມພຣະອົງຢູ່ທຸກເມື່ອ

[໓໑໔] ພຣະອົງມີສິດເຫຼົ່ານັ້ນແວດລ້ອມ
ຜູ້ສັງລວມແລ້ວ ຜູ້ມີຕະບະ ເປັນຜູ້ບໍ່ເກງກົວດັ່ງຣາດຊະສີ
ຍ່ອມຊົງງົດງາມດັ່ງດວງຈັນ

[໓໑໕] ຕົ້ນໄມ້ເກີດເທິງແຜ່ນດິນຍ່ອມງອກງາມໄພບູນເທິງແຜ່ນດິນ
ຕົ້ນໄມ້ເຫຼົ່ານັ້ນຍ່ອມອອກໜ່ວຍ (ໂດຍລຳດັບ)

[໓໑໖] ຂ້າແຕ່ພຣະອົງຜູ້ສາກະຍະບຸດ ມີພຣະຍົດຍິ່ງໃຫຍ່
ພຣະອົງຊົງເປັນເຊັ່ນກັບແຜ່ນດິນ ສິດ (ເປັນເຊັ່ນກັບຕົ້ນໄມ້)
ດຳຣົງຢູ່ໃນສາດສະໜາຂອງພຣະອົງແລ້ວ ຍ່ອມໄດ້ຜົນເປັນອຳມະຕະ

[໓໑໗] ແມ່ນ້ຳສິນທຸ ແມ່ນ້ຳສະຣັດສະວະດີ ແມ່ນ້ຳຈັນທະພາຄາ
ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳສະຣະພູ ແລະແມ່ນ້ຳມະຮີ
[໓໑໘] ເມື່ອແມ່ນ້ຳຫຼາຍສາຍນັ້ນໄຫຼໄປ(ເຖິງທະເລ)ທະເລຍ່ອມຮອງຮັບໄວ້
ແມ່ນ້ຳເຫຼົ່ານັ້ນຍ່ອມລະຊື່ເດີມ ຜາກົດຊື່ວ່າທະເລ ສັນໃດ

[໓໑໙] ວັນນະທັງ ໔ ເຫຼົ່ານີ້ກໍສັນນັ້ນ
ມາບວດໃນສຳນັກຂອງພຣະອົງແລ້ວ
ກໍຍ່ອມລະຊື່ເດີມ ຜາກົດຊື່ວ່າພຸດທະບຸດ

[໑໔໐] ດວງຈັນປາສະຈາກມົນທິນໂຄຈອນຢູ່ໃນອາກາດ
ມີແສງຮຸ່ງເຮືອງຍິ່ງກວ່າໝູ່ດາວໃນໂລກທັງໝົດ ສັນໃດ

[໑໔໑] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ພຣະອົງກໍສັນນັ້ນຄືກັນ ມີສິດແວດລ້ອມ
ກໍຍ່ອມຮຸ່ງເຮືອງຍິ່ງກວ່າເທວະດາແລະມະນຸດເຫຼົ່ານັ້ນທັງໝົດໃນການທຸກເມື່ອ

[໑໔໒] ຄື້ນເກີດຂຶ້ນໃນນ້ຳເລິກຍ່ອມບໍ່ລ່ວງເລີຍລົ້ນຝັ່ງໄປໄດ້
ຄື້ນເຫຼົ່ານັ້ນກະທົບຝັ່ງເປັນຣະລອກ
ກະຈາຍຫາຍໄປໝົດ ສັນໃດ

[໑໔໓] ເດຍຣະຖີທັງຫຼາຍໃນໂລກກໍສັນນັ້ນ
ມີທິດຖີຕ່າງກັນ ເປັນຊົນຈຳນວນຫຼາຍ
ພວກເຂົາຕ້ອງການຈະກ່າວທຳ
ແຕ່ກໍບໍ່ລ່ວງເລີຍພຣະອົງຜູ້ເປັນມຸນີໄປໄດ້

[໑໔໔] ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ ກໍຖ້າເດຍຣະຖີເຫຼົ່ານັ້ນ
ເຂົ້າມາຫາພຣະອົງດ້ວຍຄວາມປະສົງຈະຄັດຄ້ານ
ເມື່ອມາເຖິງສຳນັກຂອງພຣະອົງແລ້ວ ກໍຈະກາຍເປັນຈຸນໄປ

[໑໔໕] ດອກໂກມຸດ ດອກບົວເຜື່ອນ ຈຳນວນຫຼາຍ
ເກີດໃນນ້ຳແລ້ວຕິດຢູ່ກັບນ້ຳແລະເປືອກຕົມ ສັນໃດ

[໑໔໖] ເຫຼົ່າສັດຈຳນວນຫຼາຍກໍສັນນັ້ນ ເກີດມາໃນໂລກແລ້ວ
ຖືກຣາຄະແລະໂທສະບຽດບຽນ ຍ່ອມງອກງາມ (ໃນວັດຕະສົງສານ)
ເໝືອນດອກໂກມຸດງອກງາມໃນເປືອກຕົມ ສັນນັ້ນ

[໑໔໗] ດອກບົວຫຼວງເກີດໃນນ້ຳ ງົດງາມຢູ່ກາງນ້ຳ
(ແຕ່) ດອກບົວຫຼວງນັ້ນຍັງຄົງບໍລິສຸດ ບໍ່ຕິດຢູ່ກັບນ້ຳ ສັນໃດ

[໑໔໘] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ພຣະອົງກໍຊົງເປັນສັນນັ້ນ
ເປັນມະຫາມຸນີ ເກີດມາແລ້ວໃນໂລກ (ແຕ່) ບໍ່ຊົງຕິດຢູ່ກັບໂລກ
ເໝືອນດອກບົວຫຼວງບໍ່ຕິດຢູ່ກັບນ້ຳ ສັນນັ້ນ

[໑໔໙] ດອກໄມ້ຫຼາຍຊະນິດທີ່ເກີດໃນນ້ຳ

ຍ່ອມແຍ້ມບານໃນເດືອນ ໑໔ ບໍ່ລ່ວງເລີຍເດືອນ ໑໔ ນັ້ນໄປ
ຍ້ອນເດືອນ ໑໔ ນັ້ນເປັນການສະໄໝທີ່ດອກໄມ້ຈະບານ ສັນໃດ

[໓໓໐] ຂ້າແຕ່ພຣະອົງຜູ້ສາກະຍະບຸດ ພຣະອົງກໍເປັນຜູ້ແຍ້ມບານແລ້ວ ສັນນັ້ນ
ເຫຼົ່າສິດຂອງພຣະອົງກໍເປັນຜູ້ແຍ້ມບານແລ້ວດ້ວຍວິມຸດຕິ
ບໍ່ລ່ວງເລີຍຄຳສັ່ງສອນຂອງພຣະອົງໄປໄດ້
ເໝືອນດອກບົວຫຼວງເຊິ່ງແຍ້ມບານດ້ວຍນ້ຳ
ບໍ່ລ່ວງເລີຍການສະໄໝເປັນທີ່ແຍ້ມບານໄປໄດ້ ສັນນັ້ນ

[໓໓໑] ຕົ້ນພະຍາໄມ້ສາລະອອກດອກບານສະພັ່ງ
ສົ່ງກິ່ນຫອມອົບອວນໄປຄ້າຍກິ່ນທິບ
ແວດລ້ອມດ້ວຍໄມ້ສາລະຊະນິດອື່ນ ຍ່ອມງົດງາມ ສັນໃດ

[໓໓໒] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ພຣະອົງກໍສັນນັ້ນຄືກັນ
ຊົງແຍ້ມບານດ້ວຍພຣະພຸດທະຍານ ມີໝູ່ພິກຂຸແວດລ້ອມ
ຍ່ອມງົດງາມ ເໝືອນພະຍາໄມ້ສາລະ ສັນນັ້ນ

[໓໓໓] ປຽບເໝືອນພູເຂົາສິລາລ້ວນຊື່ຫິມະວາ
ເປັນພູເຂົາທີ່ມີໂອສົດສຳລັບສັບພະສັດ
ເປັນບ່ອນຢູ່ຂອງພວກນາກ ອະສູນ ແລະເທວະດາທັງຫຼາຍ

[໓໓໔] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ພຣະອົງກໍຊົງເປັນສັນນັ້ນ
ຊົງເປັນເໝືອນໂອສົດຂອງສັບພະສັດ ຊົງໄດ້ວິດຊາ ໓
ໄດ້ອະພິນຍາ ໖ ເຖິງຄວາມສຳເລັດແຫ່ງລິດ

[໓໓໕] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຜູ້ທີ່ພຣະອົງຊົງພຣະກະລຸນາພ່ຳສອນແລ້ວນັ້ນ
ຍ່ອມຍິນດີໃນທຳ ຢູ່ໃນສາດສະໜາຂອງພຣະອົງ

[໓໓໖] ຣາດຊະສີຜູ້ເປັນພະຍາເນື້ອບົກອອກຈາກຖ້ຳທີ່ອາໄສແລ້ວ
ຫຼຽວເບິ່ງທິດທັງ ໔ ຈຶ່ງບັນລືສີຫະນາດ ໓ ຄັ້ງ

[໓໓໗] ເມື່ອຣາດຊະສີຜູ້ພະຍາເນື້ອຄຳຣາມ
ສັດທັງປວງຍ່ອມສະດຸ້ງຢ້ານ ອັນທີ່ຈິງ ຊາດຣາດຊະສີນີ້
ຍ່ອມເຮັດໃຫ້ເຫຼົ່າສັດສະດຸ້ງຢ້ານທຸກເມື່ອ ສັນໃດ

[໓໓໗] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ເມື່ອພຣະອົງຊົງບັນລືຢູ່
ພື້ນພະສຸທານີ້ຍ່ອມຫວັ່ນໄຫວ ເຫຼົ່າສັດຜູ້ຄວນຕັດສະຣູ້ກໍຍ່ອມຕັດສະຣູ້
ເຫຼົ່າສັດຜູ້ຢູ່ໃນໝູ່ມານຍ່ອມສະດຸ້ງ ສັນນັ້ນ

[໓໓໙] ຂ້າແຕ່ພຣະມະຫາມຸນີ ເມື່ອພຣະອົງຊົງບັນລືຢູ່
ເຫຼົ່າເດຍຣະຖີທັງປວງຍ່ອມສະດຸ້ງ ເໝືອນຝູງກາ ຝູງແຫຼວບິນກະເຈີງໄປ
ເໝືອນຝູງສັດແຕກກະເຈີງໄປຍ້ອນຣາດຊະສີຜູ້ເປັນພະຍາເນື້ອ ສັນນັ້ນ

[໓໔໐] ເຫຼົ່າຄະນາຈານບາງພວກປະຊາຊົນຮຽກກັນວ່າ ເປັນສາດສະດາໃນໂລກ
ທ່ານເຫຼົ່ານັ້ນຍ່ອມສະແດງທຳທີ່ສືບ ໆ ກັນມາແກ່ຊຸມນຸມຊົນ

[໓໔໑] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ແຕ່ພຣະອົງບໍ່ເປັນແນວນັ້ນເລີຍ
ເມື່ອຊົງຕັດສະຣູ້ສັດຈະທັງຫຼາຍດ້ວຍພຣະອົງເອງແລ້ວ
ຈຶ່ງຊົງສະແດງໂພທິປັກຂິຍະທຳທັງມວນແກ່ເຫຼົ່າສັດ

[໓໔໒] ພຣະອົງຊົງຮູ້ອັດທະຍາໄສແລະອະນຸໄສ
ຊົງຮູ້ວ່າອິນຊີມີກຳລັງແກ່ກ້າແລະບໍ່ແກ່ກ້າ
ຊົງຮູ້ບຸກຄົນສົມຄວນແລະບໍ່ສົມຄວນ
ຈຶ່ງຊົງບັນລືເໝືອນມະຫາເມກ

[໓໔໓] ເພື່ອຈະຊົງຕັດຄວາມສົງໄສຂອງຊຸມນຸມຊົນທີ່ຈະເພິ່ງນັ່ງຮອບຈັກກະວານ
ຜູ້ມີທິດຖິຕ່າງກັນ ມີຄວາມຄິດຕ່າງກັນ

[໓໔໔] ພຣະອົງຜູ້ເປັນມຸນີຊົງຮູ້ຈິດຂອງເຫຼົ່າສັດທັງປວງ
ຊົງສະຫຼາດໃນຂໍ້ອຸປະມາ ຕັດແກ້ບັນຫາຂໍ້ດຽວເທົ່ານັ້ນ
ກໍຊົງຕັດຄວາມສົງໄສຂອງເຫຼົ່າສັດສາໄດ້

[໓໔໕] ພື້ນແຜ່ນດິນເພິ່ງເຕັມດ້ວຍມະນຸດຜູ້ເຊັ່ນກັບຈອກແໜ
ພວກເຂົາທັງໝົດເພິ່ງປະຄອງອັນຊະລີ
ປະກາດຄຸນຂອງພຣະອົງ ຜູ້ຊົງເປັນຜູ້ນຳສັດໂລກ

[໓໔໖] ອີກຢ່າງໜຶ່ງ ເທວະດາແລະມະນຸດເຫຼົ່ານັ້ນ
ເມື່ອປະກາດຄຸນຢູ່ຕະຫຼອດກັບໜຶ່ງ
ເພິ່ງປະກາດຄຸນໂດຍປະການຕ່າງ ໆ

ກໍຍັງບໍ່ສາມາດຈະປະກາດຄຸນໃຫ້ສິ້ນສຸດໄດ້
ພຣະຕະຖາຄົດເຈົ້າມີພຣະຄຸນຫາປະມານບໍ່ໄດ້

[໓໔໗] ກໍຂ້າພຣະອົງສັນເສີນພຣະຊິນນະເຈົ້າດ້ວຍກຳລັງຂອງຕົນແນວໃດ
ເຫຼົ່າເທວະດາແລະມະນຸດເມື່ອສັນເສີນຢູ່ຕະຫຼອດໂກດກັບ
ກໍເພິ່ງສັນເສີນແນວນັ້ນຄືກັນ

[໓໔໘] ກໍຖ້າໃຜ ໆ ຈະເປັນເທວະດາ ຫຼືມະນຸດກໍຕາມ
ໄດ້ສຶກສາມາເປັນຢ່າງດີແລ້ວ ຈະເພິ່ງກຳນົດເພື່ອຈະປະມານ (ຄຸນ)
ຜູ້ນັ້ນຈະເພິ່ງໄດ້ຮັບຄວາມລຳບາກຊື່ໆ

[໓໔໙] ຂ້າແຕ່ພຣະອົງຜູ້ສາກະຍະບຸດ ມີພຣະຍົດຍິ່ງໃຫຍ່
ຂ້າພຣະອົງດຳຣົງຢູ່ໃນສາດສະໜາຂອງພຣະອົງແລ້ວ
ສຳເລັດປັນຍາປາຣະມີຢູ່ຢ່າງຜູ້ບໍ່ມີອາສະວະ

[໓໕໐] ຂ້າພຣະອົງຈະຍ່ຳຍີເຫຼົ່າເດຍຣະຖີ
ວັນນີ້ ຂ້າພຣະອົງເປັນຈອມທັບທຳໃນສາດສະໜາຂອງພຣະສາກະຍະບຸດ
ປະກາດສາດສະໜາຂອງພຣະຊິນນະເຈົ້າ

[໓໕໑] ກໍາທີ່ຂ້າພຣະອົງໄດ້ເຮັດໄວ້ໃນການທີ່ຈະກຳນົດຈຳນວນບໍ່ໄດ້
ສະແດງຜົນແກ່ຂ້າພຣະອົງແລ້ວໃນອັດຕະພາບສຸດທ້າຍນີ້
ຂ້າພຣະອົງລຸດພົ້ນດີແລ້ວ ເໝືອນກຳລັງລູກສອນລຸດພົ້ນໄປຈາກແລ່ງ
ເຜົາກິເລດຂອງຂ້າພຣະອົງໄດ້ແລ້ວ

[໓໕໒] ມະນຸດຄົນໃດຄົນໜຶ່ງເພິ່ງທູນຂອງໜັກໄວ້ເທິງຫົວຕະຫຼອດເວລາ
ເຂົາຕ້ອງລຳບາກຍ້ອນຂອງໜັກ
ເປັນຜູ້ເຕັມໄປດ້ວຍຂອງໜັກທັງຫຼາຍ

[໓໕໓] ຂ້າພຣະອົງຖືກໄຟ ໓ ກອງ ເຜົາໄໝ້ຢູ່
ເປັນຜູ້ເຕັມໄປດ້ວຍຂອງໜັກຄືພົບ ໂດຍປະການນັ້ນ
ທ່ອງທ່ຽວໄປແລ້ວໃນພົບທັງຫຼາຍ
ພູເຂົາສິເນຣຸອັນບຸກຄົນລົກຂຶ້ນແລ້ວ ສັນໃດ

[໓໕໔] ກໍພາຣະອັນໜັກຂ້າພຣະອົງຍົກລົງແລ້ວ
ພົບທັງຫຼາຍຂ້າພຣະອົງກໍເພີກໄດ້ແລ້ວ ສັນນັ້ນ

ກິດທີ່ຄວນເຮັດທັງໝົດ° ໃນສາດສະໜາຂອງພຣະອົງຜູ້ສາກະຍະບຸດ
ຂ້າພຣະອົງກໍໄດ້ເຮັດສຳເລັດແລ້ວ

[໓໘໘] ຕະຫຼອດພຸດທະເຂດຍົກເວັ້ນພຣະຜູ້ມີພຣະພາກເຈົ້າຜູ້ສາກະຍະ ຜູ້ປະເສີດ
ຂ້າພຣະອົງເປັນຜູ້ເລີດດ້ວຍປັນຍາ ບໍ່ມີຜູ້ຄືກັບຂ້າພຣະອົງ

[໓໘໖] ຂ້າພຣະອົງເປັນຜູ້ສະຫຼາດໃນສະມາທິ ເຖິງຄວາມສຳເລັດແຫ່ງລິດ
ວັນນີ້ ເມື່ອຕ້ອງການຈະເນຣະມິດຄົນ ໑,໐໐໐ ຄົນກໍໄດ້

[໓໘໗] ພຣະຜູ້ມີພຣະພາກເຈົ້າຜູ້ເປັນມະຫາມຸນີ
ເປັນຜູ້ຊຳນານໃນອະນຸປຸບພະວິຫານທຳ
ຕັດສອນແກ່ຂ້າພຣະອົງ ນິໂຣທະສະມາບັດເປັນບ່ອນນອນຂອງຂ້າພຣະອົງ

[໓໘໙] ຂ້າພຣະອົງມີທິບພະຈັກຂຸບໍລິສຸດມົດຈົດ
ຂ້າພຣະອົງເປັນຜູ້ສະຫຼາດໃນສະມາທິ ໝັ່ນປະກອບໃນສຳມັບປະທານ
ຍິນດີໃນການຈະເລີນໂພດຊົງ

[໓໘໙] ຂ້າພຣະອົງໄດ້ເຮັດກິດທຸກຢ່າງທີ່ສາວົກຈະເພິ່ງບັນລຸແລ້ວ
ຍົກເວັ້ນພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນບ່ອນເພິ່ງຂອງສັດໂລກສາແລ້ວ
ບໍ່ມີຜູ້ເຊັ່ນກັບຂ້າພຣະອົງ

[໓໖໐] ຂ້າພຣະອົງເປັນຜູ້ສະຫຼາດໃນສະມາບັດ
ໄດ້ຊານແລະວິໂມກ ທັນທີ ຍິນດີໃນການຈະເລີນໂພດຊົງ
ເປັນຜູ້ບັນລຸສາວົກປາຣະມີຍານ

[໓໖໑] ຂ້າພຣະອົງເປັນຄົນມີຄາຣະວະຢ່າງສູງສຸດ
ຍ້ອນໄດ້ບັນລຸສາວົກປາຣະມີຍານດ້ວຍຄວາມຮູ້
ຂ້າພຣະອົງມີຈິດອະນຸເຄາະເພື່ອນສະພົມມະຈາຣີດ້ວຍສັດທາທຸກເມື່ອ

[໓໖໒] ຂ້າພຣະອົງລະຖິ້ມຄວາມຖືໂຕແລະຄວາມຈອງຫອງແລ້ວ
ເໝືອນງູຖືກຖອນແຂ້ວສາແລ້ວ[໑] (ຫຼື) ເໝືອນງົວອຸສະພະໂຕເຂົາຫັກສາແລ້ວ
ເຂົ້າຫາໝູ່ຄະນະດ້ວຍຄວາມເຄົາລົບໜັກແໜ້ນ

[໓໖໓] ຫາກປັນຍາຂອງຂ້າພຣະອົງຈະເພິ່ງມີຮູບຮ່າງ
ປັນຍາຂອງຂ້າພຣະອົງກໍຈະຕ້ອງສະເໝີກັບພຣະເຈົ້າແຜ່ນດິນທັງຫຼາຍ

ນີ້ເປັນຜົນຂອງການຊົມເຊີຍພຣະຍານຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າອະໂນມະທັດສີ

[໓໒໔] ຂ້າພຣະອົງປະພຶດຕາມໂດຍຊອບເຊິ່ງພຣະທຳມະຈັກ
ນີ້ເປັນຜົນຂອງການຊົມເຊີຍພຣະຍານ

[໓໒໕] ບຸກຄົນຜູ້ມີຄວາມປາຖະໜາຊົ່ວຊາມ ເປັນຄົນຂີ້ຄ້ານ
ລະຄວາມພຽນ ມີການສຶກສາໜ້ອຍ ບໍ່ມີມາຣະຍາດ
ຢ່າໄດ້ມາສະມາຄົມກັບຂ້າພຣະອົງໃນທີ່ໃດ ໆ ບໍ່ວ່າເວລາໃດເລີຍ

[໓໒໒] ສ່ວນບຸກຄົນຜູ້ມີການສຶກສາຫຼາຍ ມີປັນຍາ
ມີຈິດຕັ້ງໝັ້ນດີໃນສິນທັງຫຼາຍ ໝັ່ນປະກອບຄວາມສະງົບທາງໃຈ
ຂໍຈົ່ງມາດຳຣົງຢູ່ເທິງຫົວຂອງຂ້າພຣະອົງເທີ້ນ

[໓໒໗] (ເມື່ອພຣະສາຣີບຸດເຖຣະຈະຊັກຊວນພິກຂຸອື່ນ ໆ
ໃນຄຸນສົມບັດນັ້ນ ຈຶ່ງກ່າວວ່າ)
ເຫດນັ້ນ ຂ້າພະເຈົ້າຈຶ່ງກ່າວກັບທ່ານທັງຫຼາຍ
ຂໍຄວາມຈະເລີນຈົ່ງມີແກ່ທ່ານທັງຫຼາຍ
ຕາມຈຳນວນທີ່ມາປະຊຸມກັນ ໃນບ່ອນນີ້
ຂໍທ່ານທັງຫຼາຍຈົ່ງເປັນຜູ້ມັກໜ້ອຍ ສັນໂດດ
ຍິນດີໃຫ້ທານທຸກເມື່ອເທີ້ນ

[໓໒໘] ຂ້າພະເຈົ້າພົບສາວົກອົງໃດກ່ອນແລ້ວ
ໄດ້ເປັນຜູ້ປາສະຈາກທຸລິຄົກິເລດ ປາສະຈາກມົນທິນຄືກິເລດ
ສາວົກອົງນັ້ນມີນາມວ່າອັດສະຊິ ເປັນນັກປາດ
ເປັນອາຈານຂອງຂ້າພະເຈົ້າ

[໓໒໙] ຂ້າພະເຈົ້າເປັນສາວົກຂອງພຣະອັດສະຊິເຖຣະນັ້ນ
ວັນນີ້ ຂ້າພະເຈົ້າໄດ້ເປັນທຳເສນາບໍດີເຖິງຄວາມສຳເລັດໃນຄຸນທັງປວງ
ຈຶ່ງຢູ່ຢ່າງຜູ້ບໍ່ມີອາສະວະ

[໓໗໐] ພຣະສາວົກອົງໃດຊື່ວ່າອັດສະຊິ ເປັນອາຈານຂອງຂ້າພະເຈົ້າ
ຢູ່ໃນທິດໃດ ຂ້າພະເຈົ້າຈະນອນອວ່າຍຫົວໄປທາງທິດນັ້ນ

[໓໗໑] ພຣະຜູ້ມີພຣະພາກເຈົ້າຜູ້ໂຄດົມສາກະຍະຜູ້ປະເສີດ
ຊົງຣະລຶກເຖິງກຳຂອງຂ້າພະເຈົ້າແລ້ວ

ປະທັບນັ່ງທ່າມກາງໝູ່ພິກຂຸ
ຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງອັກຄະຣະສາວົກ

[໓໗໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ຢູ່ຢ່າງອິດສະຫຼະ

[໓໗໕] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວນໍ
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ

[໓໗໔] ຄຸນວິເສດເຫຼົ່ານີ້ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສາຣີບຸດເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສາຣີປຸດຕະເຖຣາປະທານທີ ໑ ຈົບ**

## ໔. ມະຫາໂມກຄັນລານະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມະຫາໂມກຄັນລານະເຖຣະ

(ພຣະມະຫາໂມກຄັນລານະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າອະໂນມະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ
ມີໝູ່ເທວະດາຫ້ອມລ້ອມປະທັບຢູ່ທີ່ພູເຂົາຫິມະພານ

[໓໗໖] ຄັ້ງນັ້ນ ຂ້າພະເຈົ້າເກີດເປັນພະຍານາກມີນາມວ່າວະຣຸນະ
ເນຣະມິດຮູບໄດ້ຕາມທີ່ຕ້ອງການ ສະແດງລິດໄດ້ຕ່າງ ໆ
ອາໄສຢູ່ໃນທະເລໃຫຍ່

[໓໗໗] ຂ້າພະເຈົ້າລະໝູ່ນາກເຊິ່ງເປັນບໍລິວານປະຈຳ ໃຫ້ເຮີ່ມບັນເລງດົນຕີ

ໃນຄັ້ງນັ້ນ ໝູ່ນາງນາກແວດລ້ອມພຣະສຳມາສຳພຸດທະເຈົ້າແລ້ວ
ພາກັນປະໂຄມດົນຕີ

[໖໗໗] ເມື່ອດົນຕີປະໂຄມຢູ່ ເຫຼົ່າເທວະດາກໍປະໂຄມດົນຕີ
ພຣະພຸດທະເຈົ້າໄດ້ຊົງສະດັບສຽງດົນຕີຂອງທັງ ໔ ຝ່າຍແລ້ວກໍຊົງຮູ້

[໖໗໘] ຂ້າພະເຈົ້ານິມົນພຣະສຳມາສຳພຸດທະເຈົ້າ ແລ້ວເຂົ້າໄປສູ່ພົບຂອງຕົນ
ປູອາສະນະ ແລ້ວຈຶ່ງຂາບທູນເວລາ

[໖໗໐] ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ມີພຣະຂີນາສົບ ໑,໐໐໐ ອົງ ແວດລ້ອມ (ຊົງເປ່ງຣັດສະໝີ)
ເຮັດທິດທັງປວງໃຫ້ສະຫວ່າງສະໄຫວ ສະເດັດເຂົ້າໄປສູ່ພົບຂອງຂ້າພະເຈົ້າ

[໖໗໑] ຄັ້ງນັ້ນ ຂ້າພະເຈົ້າອັງຄາດພຣະຜູ້ມີພຣະພາກເຈົ້າ
ຜູ້ມີຄວາມພຽນຫຼາຍ ຜູ້ເປັນເທບຍິ່ງກວ່າເທບ ຜູ້ອົງອາດກວ່ານໍຣະຊົນ
ແລະໝູ່ພິກຂຸໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ

[໖໗໒] ພຣະຜູ້ມີພຣະພາກເຈົ້າຜູ້ຊົງມີຄວາມພຽນຫຼາຍ
ຜູ້ເປັນພຣະສະຍຳພູ ເປັນບຸກຄົນຜູ້ເລີດ ຊົງອະນຸໂມທະນາແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໗໓] ບຸກຄົນໃດໄດ້ບູຊາພຣະສົງ ແລະໄດ້ບູຊາພຣະພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ບຸກຄົນນັ້ນຈັກໄປເກີດໃນເທວະໂລກ

[໖໗໔] ຈັກຄອງເທວະສົມບັດ ໗໗ ຊາດ
ຈັກເປັນພຣະເຈົ້າແຜ່ນດິນຄອງແຜ່ນດິນ ໑໐໗ ຊາດ

[໖໗໕] ແລະຈັກເປັນພຣະເຈົ້າຈັກກະພັດ ໕໕ ຊາດ
ໂພຄະສົມບັດນັບຈຳນວນບໍ່ຖ້ວນ ຈັກເກີດຂຶ້ນແກ່ເຂົາໃນຂະນະນັ້ນ
[໖໗໖] ໃນກັບທີ່ນັບບໍ່ໄດ້ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ
[໖໗໗] ເຂົາຈຸຕິຈາກນະຣົກແລ້ວຈັກມາເກີດເປັນມະນຸດ
ເປັນບຸດຂອງພາມມີນາມວ່າໂກລິຕະ

[໓໗໗] ພາຍຫຼັງ ເຂົາຖືກກຸສົນມູນຕັກເຕືອນແລ້ວ
ຈັກບວດເປັນສາວິກອົງທີ ໔ ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໓໗໘] ເປັນຜູ້ພໍ່າເພັງພຽນ ມີໃຈເດັດດ່ຽວ (ເພື່ອນິບພານ)
ເຖິງຄວາມສຳເລັດແຫ່ງລິດ
ກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໓໘໐] (ພຣະເຖຣະເມື່ອກ່າວຄຳພະຍາກອນທີ່ຕົນໄດ້ຮັບແລ້ວ
ເມື່ອຈະປະກາດຄວາມປະພຶດຊົ່ວຈຶ່ງກ່າວວ່າ)
ຂ້າພະເຈົ້າຄຸກຄີມິດຊົ່ວ ຕົກຢູ່ໃນອຳນາດການຣາຄະ
ມີໃຈຄຽດ ໄດ້ຂ້າມານດາແລະບິດາສາແລ້ວ

[໓໘໑] ຂ້າພະເຈົ້າເກີດໃນກຳເນີດໃດ ໆ ຄື ຈະເປັນນະຣົກຫຼືມະນຸດກໍຕາມ
ຍ້ອນເປັນຜູ້ຫຼາຍດ້ວຍຄວາມຊົ່ວ ຂ້າພະເຈົ້າຈຶ່ງຖືກທຸບຫົວຕາຍ

[໓໘໔] ນີ້ເປັນກຳຄັ້ງສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ກຳເຊັ່ນນີ້ຈັກຜາກົດແກ່ຂ້າພະເຈົ້າໃນເວລາຈະຕາຍແມ່ນໃນຊາດນີ້

[໓໘໓] ຂ້າພະເຈົ້າໝັ່ນປະກອບຄວາມສະຫງັດ ຍິນດີໃນການຈະເລີນສະມາທິ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໓໘໔] (ເມື່ອພຣະເຖຣະຈະປະກາດຜົນແຫ່ງຄວາມປະພຶດໃນກ່ອນຈຶ່ງກ່າວວ່າ)
ຂ້າພະເຈົ້າເຖິງຄວາມສຳເລັດແຫ່ງລິດ ເພິ່ງໃຊ້ນິ້ວໂປ້ຕີນຂ້າງຊ້າຍ
ເຂ່ຍແຜ່ນດິນເຊິ່ງທັງເລິກທັງໜາທີ່ຫາສິ່ງກຳຈັດໄດ້ຍາກ ໃຫ້ສັ່ນໄຫວໄດ້

[໓໘໕] ຂ້າພະເຈົ້າບໍ່ເຫັນອັດສະມິມານະ (ຖືໂຕວ່າເປັນນັ້ນເປັນນີ້)
ຂ້າພະເຈົ້າບໍ່ມີຄວາມຖືໂຕ
ຂ້າພະເຈົ້າກະທຳຈິດໃຫ້ມີຄວາມເຄົາລົບ ແມ່ນກະທັ່ງສາມະເນນ

[໓໘໖] ໃນກັບທີນັບບໍ່ໄດ້ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ພໍ່າເພັງກຳໃດໄວ້
ຂ້າພະເຈົ້າໄດ້ບັນລຸເຖິງພູມນັ້ນແລ້ວບັນລຸຄວາມສິ້ນອາສະວະ

[໓໘໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະຫາໂມກຄັນລານະເຖຣະໄດ້ພາສິດຄາຖາເຫຼົ່ານີ້ໄວ້ ດ້ວຍປະການແນວນີ້

**ມະຫາໂມກຄັນລານະເຖຣາປະທານທີ ໘ ຈົບ**

## ໙. ມະຫາກັດສະປະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມະຫາກັດສະປະເຖຣະ

(ພຣະມະຫາກັດສະປະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໙໗] ປະຊາຊົນພາກັນທຳການບູຊາພຣະຜູ້ມີພຣະພາກເຈົ້າ
ຜູ້ສາດສະດາພຣະນາມວ່າປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່
ໃນເມື່ອພຣະອົງຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ໄດ້ສະເດັດດັບຂັນທະປະຣິນິບພານແລ້ວ

[໓໙໙] ໝູ່ຊົນມີຈິດຮ່າເຣີງ ບັນເທີງເບີກບານ ທຳການບູຊາ
ເມື່ອໝູ່ຊົນນັ້ນເກີດຄວາມສັງເວດ ແຕ່ຂ້າພະເຈົ້າເກີດຄວາມປີຕິຍິນດີ

[໔໐໐] ຂ້າພະເຈົ້າໄດ້ເຊີນຍາດມິດມາປະຊຸມກັນແລ້ວໄດ້ກ່າວຄຳນີ້ວ່າ
ພຣະຜູ້ມີພຣະພາກເຈົ້າຜູ້ມີຄວາມພຽນຫຼາຍໄດ້ປະຣິນິບພານແລ້ວ
ຂໍເຊີນພວກເຮົາມາທຳການບູຊາເທີ້ນ

[໔໐໑] ຍາດມິດຂອງຂ້າພະເຈົ້າເຫຼົ່ານັ້ນຮັບຄຳແລ້ວ
ກໍເຮັດໃຫ້ຂ້າພະເຈົ້າເກີດຄວາມຮ່າເຣີງເປັນຢ່າງຍິ່ງວ່າ
ພວກເຮົາຈັກທຳການສັ່ງສົມບຸນ
ໃນພຣະພຸດທະເຈົ້າຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ

[໔໐໒] ຂ້າພະເຈົ້າໄດ້ຊ່ວຍກັນສ້າງອັກຄິຍະເຈດີ
ເປັນເຈດີທີ່ສ້າງຢ່າງດີ ສູງ ໑໐໐ ສອກ ກ້ວາງ ໑໕໐ ສອກ
ເປັນດັ່ງວິມານສູງສຽດຟ້າ ສັ່ງສົມບຸນໄວ້ແລ້ວ

[໔໐໓] ຂ້າພະເຈົ້າເມື່ອສ້າງອັກຄິຍະເຈດີ ເຊິ່ງງົດງາມດ້ວຍແນວແຖ່ງຕົ້ນຕານ
ໄວ້ໃກ້ສະຖານທີ່ບ່ອນເຮັດວຽກບູຊາເຈດີນັ້ນແລ້ວ
ທຳຈິດຂອງຕົນໃຫ້ເຫຼື້ອມໃສ ບູຊາເຈດີອັນສູງສຸດ

[໔໐໔] ພຣະເຈດີນັ້ນຮຸ່ງເຮືອງຢູ່ (ດ້ວຍຣັດຕະນະທັງ ໗)
ເໝືອນກອງໄຟລຸກສະຫວ່າງແຈ້ງຢູ່ ສ່ອງສະຫວ່າງທົ່ວທັງ ໔ ທິດ
ເໝືອນຕົ້ນພະຍາໄມ້ສາລະອອກດອກບານສະພັ່ງ
ແລະເໝືອນສາຍຮຸ້ງໃນອາກາດ

[໔໐໕] ຂ້າພະເຈົ້າກະທຳຈິດໃຫ້ເຫຼື້ອມໃສໃນຫ້ອງບັນຈຸພຣະບໍຣົມສາຣີຣິກະທາດນັ້ນ
ສ້າງກຸສົນຫຼວງຫຼາຍແລ້ວຣະລຶກເຖິງບຸບພະກຳແລ້ວ
ຈຶ່ງໄປເກີດໃນສະຫວັນຊັ້ນໄຕຣທິບ

[໔໐໖] ຂ້າພະເຈົ້າອະທິຖານຍານທິບທຽມດ້ວຍມ້າສິນທົບ ໑,໐໐໐ ໂຕ
ວິມານຂອງຂ້າພະເຈົ້າ ສູງຕະຫງ່ານ ໗ ຊັ້ນ

[໔໐໗] (ໃນວິມານນັ້ນ) ມີເຮືອນຍອດ ໑,໐໐໐ ຫຼັງ ເຮັດດ້ວຍຄຳລ້ວນ
ຮຸ່ງເຮືອງດ້ວຍເດດຂອງຕົນ ສ່ອງສະຫວ່າງທົ່ວທຸກທິດ

[໔໐໘] ຄັ້ງນັ້ນ ມີສາລາໜ້າມຸກເຮັດດ້ວຍແກ້ວທັບທິມແມ່ນເຫຼົ່າອື່ນຢູ່
ສາລາໜ້າມຸກແມ່ນເຫຼົ່ານັ້ນມີຣັດສະໝີໂຊດຊ່ວງອ້ອມຮອບທັງ ໔ ທິດ

[໔໐໙] ເຮືອນຍອດເຊິ່ງເກີດຂຶ້ນດ້ວຍບຸນກຳ
ທີ່ບຸນກຳເນຣະມິດໄວ້ຢ່າງດີ
ເຮັດດ້ວຍແກ້ວມະນີ ໂຊດຊ່ວງໂດຍຮອບທົ່ວທຸກທິດ

[໔໑໐] ແສງສະຫວ່າງແຫ່ງເຮືອນຍອດເຊິ່ງໂຊດຊ່ວງຢູ່ເຫຼົ່ານັ້ນໄດ້ສະຫວ່າງເຈີດຈ້າ
ຂ້າພະເຈົ້າປົກຄອງເທວະດາທັງປວງ ນີ້ເປັນຜົນແຫ່ງບຸນກຳ

[໔໑໑] ໃນກັບທີ ໖໐,໐໐໐ (ນັບແຕ່ກັບນີ້ໄປ)
ຂ້າພະເຈົ້າເປັນກະສັດນາມວ່າອຸບພິດທະ ມີໄຊຊະນະ
ມີທະວີບທັງ ໔ ເປັນຂອບເຂດ ຄອງແຜ່ນດິນ

[໔໑໒] ໃນພັດທະຣະກັບກໍຢ່າງນັ້ນຄືກັນ
ຂ້າພະເຈົ້າໄດ້ເກີດເປັນພຣະເຈົ້າຈັກກະພັດ ຜູ້ມີພະລານຸພາບຫຼາຍ
ຍິນດີພໍໃຈໃນກຳຂອງຕົນ ເຖິງ ໓໐ ຊາດ

[໔໑໓] ຂ້າພະເຈົ້າເປັນໃຫຍ່ໃນທະວີບທັງ ໔
ສົມບູນດ້ວຍຣັດຕະນະ ໗ ປະການ

ໃນເວລາເປັນພຣະເຈົ້າຈັກກະພັດນັ້ນ
ຜາສາດຂອງຂ້າພະເຈົ້າສູງຕະຫງ່ານດັ່ງສາຍຮຸ້ງ

[໔໑໔] ຜາສາດນັ້ນຍາວ ໘໔ ໂຍດ ກວ້າງ ໑໘ ໂຍດ
ມີນະຄອນຊື່ວ່າຣຳມະກະ ມີກຳແພງແລະຄ້າຍໝັ້ນຄົງ

[໔໑໕] ນະຄອນນັ້ນ ມີກຳແພງແລະຄ້າຍຍາວ ໕໐໐ ໂຍດ
ກວ້າງ ໘໕໐ ໂຍດ ມີໝູ່ຊົນເດຍລະດາດຂວັກໄຂວ່
ດັ່ງເມືອງສະຫວັນຊັ້ນໄຕຣທິບ

[໔໑໖] ເຂັມ ໘໕ ເຫຼັ້ມທີ່ໃສ່ໄວ້ໃນກ່ອງເຂັມແລ້ວ
ຍ່ອມກະທົບກັນແລະກັນ ບຽດສຽດກັນເປັນນິດ ສັນໃດ

[໔໑໗] ແມ່ນນະຄອນຂອງຂ້າພະເຈົ້າກໍສັນນັ້ນ
ເດຍລະດາດເຕັມໄປດ້ວຍຊ້າງ ມ້າ ແລະລົດ
ມີມະນຸດ ຂວັກໄຂວ່ໜ້າຣື່ນຣົມ ເປັນນະຄອນອັນອຸດົມ

[໔໑໘] ຂ້າພະເຈົ້າ ດື່ມ ກິນ ຢູ່ໃນນະຄອນນັ້ນ ແລ້ວກັບໄປເກີດເປັນເທວະດາອີກ
ໃນພົບສຸດທ້າຍ ກຸສົນສົມບັດໄດ້ມີແກ່ຂ້າພະເຈົ້າ

[໔໑໙] ຂ້າພະເຈົ້າເກີດໃນຕະກູນພາມ ສະສົມຣັດຕະນະໄວ້ເປັນຈຳນວນຫຼາຍ
ສະລະຊັບ ໘໐ ໂກດ ແລ້ວອອກບວດ

[໔໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະຫາກັດສະປະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມະຫາກັດສະປະເຖຣາປະທານທີ ໓ ຈົບ**

## ໔ ອະນຸຣຸດທະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະນຸຣຸດທະເຖຣະ

(ພຣະອະນຸຣຸດທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘໑] ຂ້າພະເຈົ້າໄດ້ພົບເຫັນພຣະຜູ້ມີພຣະພາກເຈົ້າພຣະນາມວ່າສຸເມທະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ
ຜູ້ຊົງເປັນຜູ້ນໍາສັດໂລກ ສະເດັດຫຼີບຫຼີກຢູ່

[໔໘໒] ຂ້າພະເຈົ້າເຂົ້າເຝົ້າພຣະສໍາມາສໍາພຸດທະເຈົ້າພຣະນາມວ່າສຸເມທະ
ຜູ້ຊົງເປັນຜູ້ນໍາສັດໂລກ ໄດ້ປະຄອງອັນຊະລີ
ທູນອ້ອນວອນພຣະພຸດທະເຈົ້າຜູ້ປະເສີດທີ່ສຸດວ່າ

[໔໘໓] ຂ້າແຕ່ພຣະອົງຜູ້ຊົງມີຄວາມພຽນຫຼາຍ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ຂໍພຣະອົງຊົງອະນຸເຄາະຂ້າພຣະອົງດ້ວຍເທີ້ນ
ຂ້າພຣະອົງຈະຖວາຍປະທີບແດ່ພຣະອົງ ຜູ້ເຂົ້າຊານຢູ່ທີ່ເຫງົ້າຕົ້ນໄມ້

[໔໘໔] ພຣະສະຍໍາພູທີຣະເຈົ້າ ຊົງເປັນຜູ້ປະເສີດ
ກວ່າເຈົ້າລັດທິທັງຫຼາຍ ພຣະອົງນັ້ນຊົງຮັບແລ້ວ
ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເຈາະຕົ້ນໄມ້ປະກອບປະທີບຍົນ

[໔໘໕] ຂ້າພະເຈົ້າໄດ້ມອບຖວາຍໄສ້ຕະກຽງ ໑,໐໐໐ ໄສ້
ແດ່ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງໂລກ
ດວງປະທີບທັງຫຼາຍລຸກສະຫວ່າງແຈ້ງຢູ່ຕະຫຼອດ ໗ ວັນແລ້ວກໍດັບໄປເອງ

[໔໘໖] ດ້ວຍຈິດທີ່ເຫຼື້ອມໃສນັ້ນແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວໄດ້ໄປເກີດໃນວິມານ

[໔໘໗] ເມື່ອຂ້າພະເຈົ້າເກີດເປັນເທວະດາ
ວິມານທີ່ກໍາເນຣະມິດໄວ້ດີແລ້ວ ຍ່ອມຮຸ່ງເຮື່ອງຮອບດ້ານ
ນີ້ເປັນຜົນແຫ່ງການຖວາຍປະທີບ

[໔໘໘] ຄັ້ງນັ້ນ ຂ້າພະເຈົ້າຮຸ່ງເຮື່ອງທົ່ວຕະຫຼອດໜຶ່ງໂຍດໂດຍຮອບ
ຍ່ອມປົກຄອງເທວະດາທັງປວງ
ນີ້ເປັນຜົນແຫ່ງການຖວາຍປະທີບ

[໔໘໙] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຢູ່ເຖິງ ໓໐ ກັບ
ບໍ່ວ່າຈະເປັນໃຜກໍດູໝິ່ນຂ້າພະເຈົ້າບໍ່ໄດ້
ນີ້ເປັນຜົນແຫ່ງການຖວາຍປະທີບ

[໔໓໐] ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໘໗ ຊາດ
ແລະໃນຄັ້ງນັ້ນ ຂ້າພະເຈົ້າເບິ່ງເຫັນໄດ້ຕະຫຼອດໜຶ່ງໂຍດ
ໂດຍຮອບທັງກາງເວັນແລະກາງຄືນ

[໔໓໑] ຂ້າພະເຈົ້າໄດ້ຕາທິບ ຍ່ອມເບິ່ງເຫັນໄດ້ຕະຫຼອດ ໑,໐໐໐ ຈັກກະວານ
ດ້ວຍຍານໃນສາດສະໜາຂອງພຣະສາດສະດາ
ນີ້ເປັນຜົນແຫ່ງການຖວາຍດວງປະທີບ

[໔໓໒] ໃນກັບທີ ໓໐,໐໐໐ ນັບຈາກກັບນີ້ໄປ
ມີພຣະສຳມາສຳພຸດທະເຈົ້າພຣະນາມວ່າສຸເມທະ
ຂ້າພະເຈົ້າມີຈິດຜ່ອງໃສ ໄດ້ຖວາຍດວງປະທີບແດ່ພຣະອົງ

[໔໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອະນຸຣຸດທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະນຸຣຸດທະເຖຣາປະທານທີ ໔ ຈົບ**

## ໕. ປຸນນະມັນຕານີປຸດຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປຸນນະມັນຕານີບຸດເຖຣະ

(ພຣະປຸນນະມັນຕານີບຸດເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓໔] ຂ້າພະເຈົ້າເປັນພາມຜູ້ຄົງແກ່ຮຽນ ຊົງມົນ
ຈົບໄຕຣເພດ ຫ້ອມລ້ອມດ້ວຍສິດທັງຫຼາຍແລ້ວ
ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຜູ້ສູງສຸດແຫ່ງນໍຣະຊົນ
[໔໓໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ຊົງເປັນມະຫາມຸນີ ໄດ້ປະກາດກຳຂອງຂ້າພະເຈົ້າໂດຍຫຍໍ້

[໔໓໖] ຂ້າພະເຈົ້າໄດ້ຟັງທຳນັ້ນແລ້ວ ຈຶ່ງຖວາຍອະພິວາດພຣະສາດສະດາ
ປະຄອງອັນຊະລີ ອວ່າຍໜ້າຫຼີກໄປທາງທິດໃຕ້

[໔໓໗] ຂ້າພະເຈົ້າໄດ້ຟັງທຳມາໂດຍຫຍໍ້ແລ້ວສະແດງໄດ້ໂດຍພິດສະດານ
ສິດທຸກຄົນຕ່າງພໍໃຈຟັງຂ້າພະເຈົ້າກ່າວຢູ່
ແລ້ວບັນເທົາທິດຖິຂອງຕົນ
ຕ່າງກະທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ

[໔໓໘] ແມ່ນໂດຍຫຍໍ້ຂ້າພະເຈົ້າກໍສະແດງໄດ້ ໂດຍພິດສະດານກໍສະແດງໄດ້ຄືກັນ
ເປັນຜູ້ມີຄວາມຮູ້ໃນໄນຍະແຫ່ງພຣະອະພິທຳ
ເປັນຜູ້ສະຫຼາດໃນກະຖາວັດຖຸປະກອນຢ່າງມົດຈົດ
ໃຫ້ປວງຊົນໄດ້ຮູ້ແຈ້ງຊັດແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໔໓໙] ໃນກັບທີ ໕໐໐ ນັບຈາກພັດທະຣະກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດຜູ້ມີຊື່ສຽງເຖິງ ໔ ຊາດ
ສົມບູນດ້ວຍຣັດຕະນະ ໗ ປະການ ຊົງເປັນໃຫຍ່ໃນທະວີບທັງ ໔

[໔໔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້
ໄດ້ຮູ້ວ່າ ທ່ານພຣະປຸນນະມັນຕານີບຸດເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸນນະມັນຕານີປຸດຕະເຖຣາປະທານທີ ໕ ຈົບ**

## ໖. ອຸປາລິເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸປາລິເຖຣະ

(ພຣະອຸປາລິເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔໑] ຂ້າພະເຈົ້າເປັນພາມມີນາມວ່າສຸຊາຕະ
ໃນນະຄອນຫົງສະວະດີ ມີກອງຊັບ ໘໐ ໂກດ
ມີຊັບແລະເຂົ້າເປືອກເປັນຈຳນວນຫຼາຍ

[໔໔໒] ເປັນຜູ້ຄົງແກ່ຮຽນ ຊົງມົນ
ຈົບໄຕຣເພດ ສຳເລັດໃນຄຳພີພະຍາກອນລັກສະນະ
ຄຳພີອິຕິຫາສະ ແລະໄຕຣເພດ ອັນເປັນທຳຂອງຕົນ

[໔໔໓] ຄັ້ງນັ້ນ ເຫຼົ່າປະຣິພາຊິກຜູ້ມີຜົມປອຍຄຽວ
ສາວົກຂອງພຣະພຸດທະເຈົ້າຜູ້ເປັນເຊື້ອສາຍແຫ່ງພຣະອາທິດ
ແລະເຫຼົ່າດາບົດຜູ້ທ່ຽວສັນຈອນ
ພາກັນທ່ອງທ່ຽວໄປເທິງພື້ນແຜ່ນດິນ

[໔໔໔] ແມ່ນພວກເຂົາກໍພາກັນຫ້ອມລ້ອມຂ້າພະເຈົ້າ
ດ້ວຍສຳຄັນວ່າ ເປັນພາມ ມີຊື່ສຽງ
ຊົນຈຳນວນຫຼາຍພາກັນບູຊາຂ້າພະເຈົ້າ ແຕ່ຂ້າພະເຈົ້າບໍ່ບູຊາໃຜ

[໔໔໕] ຄັ້ງນັ້ນ ຂ້າພະເຈົ້າບໍ່ເຫັນຜູ້ໃດວ່າເປັນຜູ້ທີ່ຄວນບູຊາ ຈຶ່ງຖືໂຕຫຼາຍ
ພຣະຊິນນະເຈົ້າຍັງບໍ່ສະເດັດອຸບັດຂຶ້ນມາຕາບໃດ
ຄຳວ່າ ພຸດທະ ກໍຍັງບໍ່ມີຕາບນັ້ນ

[໔໔໖] ເມື່ອວັນຄືນລ່ວງໄປ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະ
ຊົງເປັນຜູ້ນຳ ຜູ້ມີພຣະຈັກຂຸ
ສະເດັດອຸບັດຂຶ້ນມາບັນເທົາຄວາມມືດທັງປວງໃນໂລກ

[໔໔໗] ເມື່ອສາດສະໜາແຜ່ໄປກວ້າງຂວາງ ມີທ່ານຜູ້ຮູ້ຫຼາຍແລະເປັນປຶກແຜ່ນ
ຄັ້ງນັ້ນ ພຣະພຸດທະເຈົ້າໄດ້ສະເດັດເຂົ້າໄປໃນນະຄອນຫົງສາວະດີ

[໔໔໘] ຄັ້ງນັ້ນ ພຣະພຸດທະເຈົ້າຜູ້ມີພຣະຈັກຂຸພຣະອົງນັ້ນ
ໄດ້ຊົງສະແດງທຳເປັນປະໂຫຍດແກ່ພຣະບິດາ
ມີຊຸມນຸມຊົນຢູ່ໂດຍຮອບຕະຫຼອດໜຶ່ງໂຍດ ຕາມເວລານັ້ນ

[໔໔໙] ຄັ້ງນັ້ນ ສຸນັນທະດາບົດໄດ້ຮັບສົມມຸດຈາກໝູ່ຊົນ (ວ່າເປັນເລີດ)
ໄດ້ໃຊ້ດອກໄມ້ບັງແດດທົ່ວພຸດທະບໍລິສັດ

[໔໕໐] ເມື່ອພຣະພຸດທະເຈົ້າຊົງປະກາດສັດຈະ ໔
ຢູ່ມົນດົບດອກໄມ້ທີ່ງົດງາມ
ເຫຼົ່າສັດປະມານ ໑໐໐,໐໐໐ ໂກດໄດ້ບັນລຸທຳ

[໔໕໑] ພຣະພຸດທະເຈົ້າຊົງບັນດານຫຍາດຝົນຄືພຣະທຳ
ໃຫ້ຕົກລົງຕະຫຼອດທັງ ໗ ຄືນ ໗ ວັນ
ພໍເຖິງວັນທີ ໘ ພຣະຊິນນະເຈົ້າກໍໄດ້ຊົງພະຍາກອນສຸນັນທະດາບົດ ວ່າ

[໔໕໒] ທ່ານຜູ້ນີ້ ເມື່ອວຽນວ່າຍຕາຍເກີດໃນເທວະໂລກຫຼືມະນຸດໂລກ
ກໍຈັກເປັນຜູ້ປະເສີດກວ່າຜູ້ອື່ນທັງໝົດ
ຈັກວຽນວ່າຍຕາຍເກີດໃນພົບທັງຫຼາຍ

[໔໕໓] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາຊົງພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດຈັກອຸບັດຂຶ້ນໃນໂລກ

[໔໕໔] ທ່ານຜູ້ນີ້ຈັກເປັນບຸດຂອງນາງມັນຕານີ ມີນາມວ່າປຸນນະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໔໕໕] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າ
ຊົງພະຍາກອນສຸນັນທະດາບົດແນວນີ້ແລ້ວ
ເຮັດໃຫ້ປະຊາຊົນທັງປວງຣ່າເຣີງ ຊົງສະແດງກຳລັງຂອງພຣະອົງ

[໔໕໖] ຄັ້ງນັ້ນ ປະຊາຊົນປະນົມມືໄຫວ້ສຸນັນທະດາບົດ
ແຕ່ສຸນັນທະດາບົດ ເມື່ອເຮັດສັກກາຣະໃນພຣະພຸດທະເຈົ້າແລ້ວ
ກໍໄດ້ຊຳຣະຄະຕິ (ກຳເນີດ) ຂອງຕົນໃຫ້ບໍລິສຸດບົດຈົດ

[໔໕໗] ຍ້ອນຂ້າພະເຈົ້າໄດ້ຟັງພຣະດຳຣັດຂອງພຣະມຸນີ ໃນບ່ອນນັ້ນ
ຈຶ່ງໄດ້ມີຄວາມດຳຣິວ່າ ເຮົາຈັກສັ່ງສົມບຸນ
ໂດຍປະການທີ່ຈະໄດ້ພົບພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໔໕໘] ເມື່ອຂ້າພະເຈົ້າຄິດແນວນີ້ແລ້ວ ກໍຄິດເຖິງກິດທີ່ເຮົາຄວນເຮັດວ່າ
ເຮົາຈະພ່ຳເພັງບຸນກຳອັນໃດ ໃນເນື້ອນາບຸນທີ່ປະເສີດນີ້

[໔໕໙] ໃນບັນດາພິກຂຸຜູ້ເປັນນັກສູດທັງໝົດໃນສາດສະໜາ
ພິກຂຸອົງນີ້ເປັນນັກສູດອົງໜຶ່ງ
ໄດ້ຮັບແຕ່ງຕັ້ງເປັນຜູ້ເລີດໃນທາງວິໄນ
ຕຳແໜ່ງນັ້ນຂ້າພະເຈົ້າປາຖະໜາແລ້ວ

[໔໖໐] ໂພຄະສົມບັດຂອງຂ້າພະເຈົ້ານີ້ນັບປະມານບໍ່ໄດ້
ປຽບດັ່ງຫ້ວງນ້ຳທີ່ບໍ່ມີອັນໃດ ໆ ເຮັດໃຫ້ກະເພື່ອມໄດ້ (ນັບບໍ່ໄດ້)
ຂ້າພະເຈົ້າໄດ້ຈ່າຍໂພຄະສົມບັດນັ້ນສ້າງອາຣາມຖວາຍພຣະພຸດທະເຈົ້າ

[໔໖໑] ຂ້າພະເຈົ້າຈ່າຍຊັບໜຶ່ງແສນຊື້ສວນຊື່ວ່າໂສພະນະ
ດ້ານທິດຕາເວັນອອກນະຄອນ ສ້າງໃຫ້ເປັນສັງຄາຣາມ

[໔໖໒] ຂ້າພະເຈົ້າໄດ້ສ້າງເຮືອນຍອດ ຜາສາດ ມົນດົບ
ເຮືອນໂລ້ນ ຖໍ້າ ແລະທີ່ຈົງກົມໄວ້ໃນສັງຄາຣາມຢ່າງດີ

[໔໖໓] ຂ້າພະເຈົ້າໄດ້ສ້າງເຮືອນໄຟ ໂຮງໄຟ
ໂຮງນໍ້າ ແລະຫ້ອງອາບນໍ້າ ຖວາຍແດ່ໝູ່ພິກຂຸ

[໔໖໔] ຂ້າພະເຈົ້າໄດ້ຖວາຍຕັ່ງນອນ ຕັ່ງນັ່ງ
ພາຊະນະສຳລັບໃຊ້ສອຍ ຄົນວັດ ແລະເພສັດນັ້ນຄົບທຸກຢ່າງ

[໔໖໕] ຂ້າພະເຈົ້າໄດ້ຈັດຕັ້ງອາຮັກຂາໄວ້ ໃຫ້ສ້າງກຳແພງຢ່າງໝັ້ນຄົງ
ດ້ວຍຫວັງວ່າ ໃຜ ໆ ຢ່າໄດ້ລົບກວນອາຣາມແຫ່ງນັ້ນ
ຂອງທ່ານຜູ້ມີຈິດສະງົບ ຜູ້ຄົງທີ່ເລີຍ

[໔໖໖] ຂ້າພະເຈົ້າໄດ້ຈ່າຍຊັບໜຶ່ງແສນສ້າງບ່ອນຢູ່ໄວ້ໃນສັງຄາຣາມ
ເມື່ອໃຫ້ສ້າງສຳເລັດສົມບູນແລ້ວ ຈຶ່ງນ້ອມຖວາຍພຣະສຳມາສຳພຸດທະເຈົ້າວ່າ

[໔໖໗] ຂ້າແຕ່ ພຣະມຸນີ ຂ້າພຣະອົງສ້າງອາຣາມສຳເລັດຮຽບຮ້ອຍແລ້ວ
ຂໍພຣະອົງຊົງຮັບເທີ້ນ ຂ້າແຕ່ ພຣະທີຣະເຈົ້າຜູ້ມີພຣະຈັກຂຸ
ຂ້າພຣະອົງຂໍມອບຖວາຍແດ່ພຣະອົງ ຂໍພຣະອົງຊົງຮັບເທີ້ນ

[໔໖໘] ພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ ຊົງເປັນຜູ້ນຳ
ຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ ຈຶ່ງຊົງຮັບໄວ້

[໔໖໙] ຂ້າພະເຈົ້າຮູ້ການຮັບຂອງພຣະສັບພັນຍູ
ຜູ້ສະແຫວງຫາພຣະຄຸນອັນຍິ່ງໃຫຍ່
ຈຶ່ງກະກຽມໂພຊະນາຫານແລ້ວ ໄປຂາບທູນພັດຕະການ

[໔໗໐] ເມື່ອຂ້າພະເຈົ້າຂາບທູນພັດຕະການແລ້ວ
ພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ ຜູ້ຊົງເປັນຜູ້ນຳ
ພ້ອມດ້ວຍພຣະຂີນາສົບ ໑,໐໐໐ ອົງ
ໄດ້ສະເດັດມາສູ່ອາຣາມຂອງຂ້າພະເຈົ້າ

[໘໗໑] ຂ້າພະເຈົ້າຮູ້ເວລາທີ່ພຣະອົງປະທັບນັ່ງຮຽບຮ້ອຍແລ້ວ
ຈຶ່ງອັງຄາດໃຫ້ອີ່ມໜຳ
ຮູ້ເວລາທີ່ສະເຫວີຍສຳເລັດຮຽບຮ້ອຍແລ້ວ ຈຶ່ງໄດ້ຂາບທູນຄຳນີ້ວ່າ

[໘໗໘] ອາຣາມຊື່ໂສພະນະ ຂ້າພຣະອົງຈ່າຍຊັບໜຶ່ງແສນຊື້ມາ
ໄດ້ສ້າງຈົນສຳເລັດຮຽບຮ້ອຍ ດ້ວຍຊັບຈຳນວນເທົ່ານັ້ນເຊັ່ນກັນ
ຂ້າແຕ່ພຣະມຸນີ ຂໍພຣະອົງຊົງຮັບເທີ້ນ

[໘໗໓] ດ້ວຍການຖວາຍພຣະອາຣາມແຫ່ງນີ້ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ເມື່ອຂ້າພຣະອົງບັງເກີດໃນພົບ
ຂໍຈົ່ງໄດ້ສິ່ງທີ່ຂ້າພຣະອົງປາຖະໜາເທີ້ນ

[໘໗໔] ພຣະສຳມາສຳພຸດທະເຈົ້າຊົງຮັບສັງຄາຣາມ
ທີ່ຂ້າພະເຈົ້າສ້າງສຳເລັດຮຽບຮ້ອຍແລ້ວ
ປະທັບນັ່ງທ່າມກາງໝູ່ພິກຂຸແລ້ວ ໄດ້ຕັດພຣະດຳຣັດນີ້ວ່າ

[໘໗໕] ເຮົາຈັກພະຍາກອນຜູ້ທີ່ໄດ້ຖວາຍສັງຄາຣາມ
ເຊິ່ງສ້າງ (ກຸດຕິ ບ່ອນຫຼິບຫຼີກ ມົນດົບ ຜາສາດ ເຮືອນໂລ້ນ ແລະກຳແພງເປັນຕົ້ນ)
ສຳເລັດຮຽບຮ້ອຍແລ້ວແດ່ພຣະພຸດທະເຈົ້າ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໘໗໖] ກອງທັບ ໔ ເຫຼົ່າ ຄື ພົນຊ້າງ ພົນມ້າ
ພົນລົດ ແລະພົນຍ່າງ ຈະແວດລ້ອມຜູ້ນີ້ເປັນນິດ
ນີ້ເປັນຜົນແຫ່ງການຖວາຍສັງຄາຣາມ

[໘໗໗] ເຄື່ອງດົນຕີ ໖໐,໐໐໐ ຢ່າງ
ກອງທີ່ປະດັບຕົກແຕ່ງສວຍງາມ ຈະແວດລ້ອມຜູ້ນີ້ເປັນນິດ
ນີ້ເປັນຜົນແຫ່ງການຖວາຍສັງຄາຣາມ

[໘໗໘] ສາວໄວລຸ້ນ ໘໖,໐໐໐ ນາງ ຜູ້ປະດັບຕົກແຕ່ງສວຍງາມ
ສວມໃສ່ຜ້າອາພອນຢ່າງງົດງາມ ຫ້ອຍຕຸ້ມຫູແກ້ວມະນີ

[໘໗໙] ມີໜ້າກົມໂຕ ມີປີກກະຕິຣ່າເຣິງ ຮູບຮ່າງງາມ
ແອວນ້ອຍແອວບາງ ຈັກແວດລ້ອມຜູ້ນີ້ເປັນນິດ
ນີ້ເປັນຜົນແຫ່ງການຖວາຍສັງຄາຣາມ

[໔໗໐] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ຈັກເປັນຈອມເທບຄອງເທວະສົມບັດ ໑,໐໐໐ ຊາດ

[໔໗໑] ຈັກໄດ້ສິ່ງຂອງທຸກຢ່າງທີ່ທ້າວເທວະຣາດຈະເພິ່ງໄດ້
ເປັນຜູ້ມີໂພຄະຊັບບໍ່ຮູ້ຈັກຂາດ ຄອງເທວະສົມບັດ

[໔໗໒] ຈັກເປັນພຣະເຈົ້າຈັກກະພັດໃນແວ່ນແຄວ້ນ ໑,໐໐໐ ຊາດ
ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໔໗໓] ໃນກັບທີ ໑໐໐,໐໐໐ ກັບ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໗໔] ທ່ານຜູ້ນີ້ຈັກມີນາມວ່າອຸປາລີ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໔໗໕] ຈັກເຖິງຄວາມສຳເລັດໃນວິໄນ ເປັນຜູ້ສະຫຼາດໃນຖານະແລະບໍ່ແມ່ນຖານະ
ດຳຣົງສາດສະໜາຂອງພຣະຊິນນະເຈົ້າໄວ້ໄດ້ ຢູ່ຢ່າງຜູ້ບໍ່ມີອາສະວະ

[໔໗໖] ພຣະຜູ້ມີພຣະພາກເຈົ້າຜູ້ໂຄດົມສາກະຍະຜູ້ປະເສີດ
ຊົງຮູ້ຄວາມນັ້ນທັງໝົດແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸ
ຈັກຊົງຕັ້ງ (ອຸປາລີ) ໄວ້ໃນເອຕະທັກຄະ

[໔໗໗] ຂ້າພຣະອົງປາຖະໜາສາດສະໜາຂອງພຣະອົງ
ເລີ່ມຕົ້ນຕັ້ງແຕ່ (ຫຼາຍແສນ) ກັບທີ່ນັບບໍ່ໄດ້
ຂ້າພຣະອົງໄດ້ບັນລຸປະໂຫຍດນັ້ນ
ທັງໄດ້ບັນລຸຄວາມສິ້ນສັງໂຍດທັງປວງຕາມລຳດັບ

[໔໗໘] ຄົນຖືກຄຸກຄາມດ້ວຍພຣະຣາດຊະອາຍາ
ຖືກສຽບໄວ້ທີ່ຫຼາວແລ້ວ ບໍ່ໄດ້ຄວາມສຳຣານທີ່ຫຼາວ
ຕ້ອງການແຕ່ຈະລຸດພົ້ນໄປຢ່າງດຽວ ສັນໃດ
[໔໗໙] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຂ້າພຣະອົງກໍສັນນັ້ນຄືກັນ

ຖືກຄຸກຄາມດ້ວຍອາດຍາຄືພົບ ຖືກສຽບໄວ້ທີ່ຫຼາວຄືກຳ
ຖືກເວທະນາຄືຄວາມກະຫາຍບີບຄັ້ນແລ້ວ

[໔໙໐] ບໍ່ປະສົບຄວາມສຳຣານໃນພົບ
ຖືກໄຟ ໓ ກອງ ແຜດເຜົາຢູ່ ສະແຫວງຫາອຸບາຍລອດພົ້ນ
ເໝືອນຄົນສະແຫວງຫາອຸບາຍລອດພົ້ນຈາກພຣະຣາດຊະອາຍາ ສັນນັ້ນ

[໔໙໑] ຄົນດື່ມຢາພິດ ຖືກຢາພິດບີບຄັ້ນ
ເຂົາຈຶ່ງສະແຫວງຫາຢາກຳຈັດຢາພິດ

[໔໙໒] ເມື່ອສະແຫວງຫາ ຈຶ່ງໄດ້ພົບຢາກຳຈັດຢາພິດ
ດື່ມຢານັ້ນແລ້ວກໍມີຄວາມສຸກ ຍ້ອນລອດພົ້ນຈາກຢາພິດ ສັນໃດ

[໔໙໓] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຂ້າພຣະອົງກໍເປັນເໝືອນຄົນຖືກຢາພິດທຳຮ້າຍ
ຖືກອະວິດຊາບີບຄັ້ນ ຈຶ່ງສະແຫວງຫາຢາຄືພຣະສັດທຳ

[໔໙໔] ເມື່ອສະແຫວງຫາຢາຄືພຣະທຳກໍໄດ້ພົບສາດສະໜາຂອງພຣະສາກະຍະ
ສາດສະໜານັ້ນເປັນຢາຊັ້ນເລີດກວ່າຢາທຸກຂະໜານ
ສຳລັບບັນເທົາລູກສອນທຸກຊະນິດ

[໔໙໕] ຂ້າພຣະອົງດື່ມທຳໂອສົດແລ້ວກໍຖອນພິດໄດ້ທັງໝົດ
ຂ້າພຣະອົງໄດ້ສຳຜັດພຣະນິບພານ ເຊິ່ງບໍ່ແກ່ ບໍ່ຕາຍ
ເປັນພາວະເຢັນສະນິດ

[໔໙໖] ຄົນຖືກຜີຄຸກຄາມ ຖືກຜີສິງບີບຄັ້ນ
ເພິ່ງສະແຫວງຫາໝໍຜີ ເພື່ອລອດພົ້ນຈາກຜີ
[໔໙໗] ເມື່ອສະແຫວງຫາ ກໍໄດ້ພົບໝໍຜີຜູ້ສະຫຼາດໃນວິຊາໄລ່ຜີ
ໝໍຜີນັ້ນຈຶ່ງຂັບໄລ່ຜີໃຫ້ຄົນນັ້ນ
ແລະເຮັດຜີພ້ອມທັງຕົ້ນເຫດໃຫ້ພິນາດ ສັນໃດ

[໔໙໘] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຂ້າພຣະອົງກໍສັນນັ້ນຄືກັນ
ຖືກຜີຄືຄວາມມືດ (ຄືກິເລດ) ບຽດບຽນ
ຈຶ່ງສະແຫວງຫາແສງສະຫວ່າງຄືຍານເພື່ອລອດພົ້ນຈາກຄວາມມືດ

[໔໙໙] ຕໍ່ມາ ຂ້າພຣະອົງໄດ້ພົບພຣະສາກະຍະມຸນີຜູ້ຊໍາຣະຄວາມມືດຄືກິເລດ
ພຣະສາກະຍະມຸນີນັ້ນ ຊົງບັນເທົາຄວາມມືດໃຫ້ຂ້າພຣະອົງ
ເໝືອນໝໍຜີຂັບໄລ່ຜີໄປ ສັນນັ້ນ

[໕໐໐] ຂ້າພຣະອົງໄດ້ຕັດກະແສການວຽນວ່າຍຕາຍເກີດແລ້ວ
ຫ້າມກະແສແຫ່ງຕັນຫາໄດ້ ຖອນພົບຂຶ້ນໄດ້ໝົດສິ້ນ
ເໝືອນໝໍຜີຂັບໄລ່ຜີໄປພ້ອມທັງຕົ້ນເຫດ ສັນນັ້ນ

[໕໐໑] ພະຍາຄຸດເວີ່ນລົງຈັບນາກເຊິ່ງເປັນພັກສາຂອງຕົນ
ຍ່ອມເຮັດນ້ຳໃນສະໃຫຍ່ໃຫ້ກະເພື່ອມເຖິງ ໑໐໐ ໂຍດ ໂດຍຮອບ

[໕໐໒] ເມື່ອພະຍາຄຸດນັ້ນຈັບນາກໄດ້ແລ້ວ ບຽດບຽນນາກ ໃຫ້ຫ້ອຍຫົວລົງ
ມັນຈັບນາກພາບິນໄປໄດ້ຕາມຄວາມປາຖະໜາ ສັນໃດ

[໕໐໓] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຂ້າພຣະອົງກໍເໝືອນພະຍາຄຸດທີ່ມີພະລັງ
ສະແຫວງຫາອະສັງຂະຕະທໍາ ໄດ້ຊໍາຣະໂທດທັງຫຼາຍແລ້ວ

[໕໐໔] ຂ້າພຣະອົງໄດ້ເຫັນທໍາອັນປະເສີດ
ຈຶ່ງຍຶດຖືເອົາສັນຕິບົດ ອັນປະເສີດນີ້ຢູ່
ເໝືອນພະຍາຄຸດຈັບນາກໄປ ສັນນັ້ນ

[໕໐໕] ເຄືອເຂົາຊື່ອາສາວະດີ ເກີດໃນສວນຈິດລະດາແລ້ວ
ລ່ວງໄປ ໑,໐໐໐ ປີ ເຄືອເຂົານັ້ນຈຶ່ງຈະເກີດເປັນໝາກ ໆ ໜຶ່ງ

[໕໐໖] ເທບທັງຫຼາຍ ເຂົ້າໄປນັ່ງເຝົ້າເຄືອເຂົາຊື່ອາສາວະດີນັ້ນ
ເມື່ອການລະນານຈຶ່ງຈະມີໝາກຜົນຈັກເທື່ອໜຶ່ງ
ເຄືອເຂົາຊື່ອາສາວະດີນັ້ນເປັນເຄືອເຂົາຊັ້ນສູງສຸດ
ເປັນທີ່ຮັກແພງຂອງເຫຼົ່າເທວະດາແນວນີ້

[໕໐໗] ນັບໄດ້ ໑໐໐,໐໐໐ ປີ (ນັບຈາກກັບນີ້ໄປ)
ຂ້າພຣະອົງຈຶ່ງຈະໄດ້ປົນນິບັດພຣະມຸນີນັ້ນນອບນ້ອມທັງເຊົ້າແລງ
ເໝືອນເຫຼົ່າເທວະດາໄດ້ເຂົ້າໄປເຝົ້າເຄືອເຂົາຊື່ອາສາວະດີທັງເຊົ້າແລງ ສັນນັ້ນ

[໕໐໗] ການປິນນິບັດ (ພຣະພຸດທະເຈົ້າ) ບໍ່ເປັນໝັນ (ເປົ່າວ່າງປະໂຫຍດ)
ແລະການນອບນ້ອມກໍບໍ່ເປົ່າວ່າງປະໂຫຍດ
ເຖິງຂ້າພຣະອົງຈະມາຈາກບ່ອນໄກ
ຂະນະກໍບໍ່ໄດ້ລ່ວງເລີຍຂ້າພຣະອົງໄປ

[໕໐໙] ຂ້າພຣະອົງຄົ້ນຫາການຖືປະຕິສົນທິໃນພົບກໍບໍ່ເຫັນ
ຍ້ອນຂ້າພຣະອົງບໍ່ມີອຸປະທິ ລຸດພົ້ນແລ້ວ (ຈາກກິເລດທັງປວງ)
ມີຈິດສະງົບຣະງັບທ່ຽວໄປ

[໕໑໐] ທໍາມະດາດອກປະທຸມ ພໍໄດ້ສໍາຜັດແສງດວງອາທິດ
ກໍແຍ້ມບານທຸກເມື່ອ ສັນໃດ
ຂ້າແຕ່ພຣະອົງຜູ້ຊົງມີຄວາມພຽນຫຼາຍ
ຂ້າພຣະອົງກໍສັນນັ້ນ ບານແລ້ວ (ຄືສໍາເລັດມັກຜົນນິບພານ)
ຍ້ອນຣັດສະໝີແຫ່ງພຣະພຸດທະເຈົ້າ

[໕໑໑] ໃນກໍາເນີດນົກຍາງ ຍ່ອມບໍ່ມີນົກຍາງໂຕຜູ້ໃນການທຸກເມື່ອ
ເມື່ອເມກຝົນຄໍາຣົນ (ເມື່ອຟ້າຮ້ອງ)
ນົກຍາງໂຕແມ່ຈຶ່ງຈະຖືພາໄດ້ ໃນການທັງປວງ

[໕໑໒] ນົກຍາງໂຕແມ່ເຫຼົ່ານັ້ນຈະຖືພາຢູ່ດົນ
ຕາບເທົ່າທີ່ເມກຝົນຍັງບໍ່ຄໍາຣາມ
ພວກມັນຈະພົ້ນຈາກພາຣະ (ຈະອອກໄຂ່)
ໄດ້ກໍຕໍ່ເມື່ອເມກຝົນຕົກລົງມາ ສັນໃດ

[໕໑໓] ຂ້າພຣະອົງກໍສັນນັ້ນ ເມື່ອພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຊົງຄໍາຣົນດ້ວຍເມກຝົນຄືພຣະທໍາ
ກໍໄດ້ຖືພາຄືທໍາ ດ້ວຍສຽງແຫ່ງເມກຝົນຄືທໍາ

[໕໑໔] ໃຊ້ເວລາຕັ້ງ ໑໐໐,໐໐໐ ກັບ
ຂ້າພຣະອົງ ຈຶ່ງຈະໄດ້ຖືພາຄືບຸນ
ຂ້າພຣະອົງຍັງບໍ່ພົ້ນຈາກພາຣະ
ຕາບເທົ່າທີ່ເມກຝົນຄືພຣະທໍາຍັງບໍ່ຄໍາຣົນ

[໕໑໕] ຂ້າແຕ່ພຣະສາກະຍະມຸນີ ພຣະອົງຊົງຄໍາຣົນ

ດ້ວຍເມກຝົນຄືພຣະທຳໃນນະຄອນກະບິນລະພັດທີ່ໜ້າຮື່ນຣົມໃນການໃດ
ໃນການນັ້ນຂ້າພຣະອົງກໍຈະພົ້ນຈາກພາຣະ

[໕໑໖] ທຳແມ່ນນັ້ນ ຄື ສູນຍະຕະວິໂມກ ອະນິມິດຕະວິໂມກ
ອັບປະນິຫິຕະວິໂມກ ແລະຜົນ ໔ ທັງປວງ
ຂ້າພຣະອົງກໍໄດ້ບັນລຸແລ້ວ

**ພານະວານທີ ໔ ຈົບ**

[໕໑໗] ຂ້າພຣະອົງປາຖະໜາຄຳສອນຂອງພຣະອົງນານຈົນນັບກັບບໍ່ໄດ້
ຂ້າພຣະອົງໄດ້ບັນລຸປະໂຫຍດນັ້ນແລ້ວ
ທັງໄດ້ສັນຕິບົດ ອັນປະເສີດຕາມລຳດັບ

[໕໑໘] ຂ້າພຣະອົງເຖິງຄວາມສຳເລັດໃນວິໄນ
ເປັນເໝືອນພິກຂຸຜູ້ສະແຫວງຄຸນຜູ້ມີຊື່ສຽງ
ບໍ່ມີພິກຂຸອົງອື່ນຈະສະເໝີເໝືອນຂ້າພຣະອົງ
ຂ້າພຣະອົງຊົງຈຳຄຳສັ່ງສອນໄວ້ໄດ້

[໕໑໙] ໃນວິໄນປິດົກທັງໝົດນີ້ ຄື ໃນວິໄນ ໃນຂັນທະກະ
ໃນປະຣິດເສດ ໕ (ຄື ໃນສັງຄາທິເສດ ໕ ໝວດ
ແລະປາຈິດຕີ ໕ ໝວດ)
ໃນໝວດທີ ໕໌ ຂ້າພຣະອົງບໍ່ມີຄວາມສົງໄສອັກຂະຣະ (ຄືສະຣະ)
ຫຼືແມ່ນໃນພະຍັນຊະນະເລີຍ

[໕໒໐] ຂ້າພຣະອົງສະຫຼາດໃນວິທີຂົ່ມ ໃນການກະທຳຄືນ
ໃນຖານະທີ່ຄວນແລະຖານະທີ່ບໍ່ຄວນ
ໃນການຮຽກພິກຂຸຜູ້ຖືກລົງໂທດກັບເຂົ້າໝູ່
ແລະໃນການຊ່ວຍໃຫ້ພິກຂຸອອກຈາກອາບັດ
ເຖິງຄວາມສຳເລັດໃນການກະທຳທາງວິໄນກຳທຸກຢ່າງ

[໕໒໑] ຂ້າພຣະອົງຕັ້ງບົດໄວ້ໃນວິໄນແລະຂັນທະກະ ແລະຂະຫຍາຍອຸພະໂຕວິພັງ
ຮຽກ (ພິກຂຸຜູ້ຖືກລົງໂທດ) ກັບເຂົ້າໝູ່ໂດຍກິດ (ໜ້າທີ່)

[໕໒໒] ຂ້າພຣະອົງເປັນຜູ້ສະຫຼາດໃນນິຣຸດຕິສາດ
ແລະສະຫຼາດໃນປະໂຫຍດແລະສິ່ງບໍ່ແມ່ນປະໂຫຍດ

ສິ່ງທີ່ຂ້າພຣະອົງບໍ່ຮູ້ບໍ່ມີ
ຂ້າພຣະອົງເປັນຜູ້ເລີດຜູ້ໜຶ່ງໃນສາດສະໜາຂອງພຣະສາດສະດາ

[໕໘໓] ໃນວັນນີ້ ຂ້າພຣະອົງເບິ່ງເຫັນຮູບຄະດີ
ບັນເທົາຄວາມສົງໄສໄດ້ທຸກຢ່າງ ໃນສາດສະໜາຂອງພຣະສາກະຍະບຸດ
ຕັດຄວາມລັງເລໄດ້ໝົດສິ້ນ

[໕໘໔] ຂ້າພຣະອົງເປັນຜູ້ສະຫຼາດໃນຖານະທັງປວງ ຄື ບົດໜ້າ
ບົດຫຼັງ ອັກຂະຣະ ພະຍັນຊະນະ ຄຳເລີ່ມຕົ້ນ ແລະຄຳລົງທ້າຍ

[໕໘໕] ເໝືອນຢ່າງພຣະຣາຊາຜູ້ມີພະລັງ
ຊົງຈັບພົນຂອງພຣະຣາຊາຜູ້ເປັນປໍລະປັກ
ໃຫ້ເດືອດຮ້ອນ ຊະນະສົງຄາມແລ້ວ ຮັບສັ່ງໃຫ້ສ້າງນະຄອນໄວ້ໃນບ່ອນນັ້ນ

[໕໘໖] ເພິ່ງຮັບສັ່ງໃຫ້ສ້າງກຳແພງ ຮັບສັ່ງໃຫ້ຂຸດຄູຮອບ ຕັ້ງເສົາຣະນຽດ
ສ້າງຊຸ້ມປະຕູ ສ້າງປ້ອມຕ່າງ ໆ ໄວ້ໃນນະຄອນ ເປັນຈຳນວນຫຼາຍ

[໕໘໗] ເພິ່ງຮັບສັ່ງໃຫ້ສ້າງຖະໜົນສີ່ແຍກ ທາງແຍກ
ຮ້ານຕະຫຼາດ ຈັດສັນໄວ້ເປັນຢ່າງດີ
ສ້າງສານສະຖິດຍຸດຕິທຳເປັນທີ່ຕັດສິນຄະດີຄວາມໄວ້ໃນນະຄອນນັ້ນ

[໕໘໘] ເພື່ອປ້ອງກັນສັດຕູຣາດຊະສັດຕູ ເພື່ອຈະຮູ້ປ່ອງທາງ (ດີຮ້າຍ)
ເພື່ອດູແລຮັກສາກຳລັງພົນ ພຣະຣາຊາເຈົ້ານະຄອນນັ້ນ
ຈຶ່ງຊົງແຕ່ງຕັ້ງແມ່ທັບໄວ້

[໕໘໙] ເພື່ອຮັກສາສິ່ງຂອງ ພຣະອົງຈຶ່ງຊົງແຕ່ງຕັ້ງຄົນທີ່ສະຫຼາດ
ໃນການເກັບຮັກສາສິ່ງຂອງ ໃຫ້ເປັນຜູ້ຮັກສາສິ່ງຂອງ
ດ້ວຍຕັ້ງພຣະທະໄທວ່າ ສິ່ງຂອງຂອງເຮົາຢ່າເສຍຫາຍໄປເລີຍ

[໕໙໐] ຜູ້ໃດສະໜັກສະໝານກັບພຣະຣາຊາ
ແລະປາຖະໜາຄວາມຈະເລີນຮຸ່ງເຮືອງແກ່ພຣະຣາຊາ
ພຣະຣາຊາຍ່ອມມອບໜ້າທີ່ແກ່ຜູ້ນັ້ນ
ເພື່ອປະຕິບັດຕອບແທນຕໍ່ມິດ

[໕໙໑] ພຣະຣາຊາພຣະອົງນັ້ນ ຍ່ອມຊົງແຕ່ງຕັ້ງຜູ້ທີ່ສະຫຼາດໃນລາງບອກເຫດ

ໃນນິມິດແລະໃນລັກສະນະ
ຜູ້ຄົງແກ່ຮຽນ ຜູ້ຊົງມົນ ໄວ້ໃນຕຳແໜ່ງປຸໂຣຫິດ

[໕໓໔] ພຣະຣາຊາພຣະອົງນັ້ນຊົງສົມບູນດ້ວຍອົງປະກອບເຫຼົ່ານີ້
ພະສົກນິກອນຈຶ່ງຂະໜານພຣະນາມວ່າກະສັດ
ເຫຼົ່າອຳມາດຈຶ່ງຖວາຍການອາຣັກຂາພຣະຣາຊາທຸກເມື່ອ
ເໝືອນນົກຈັກກະພາກເຝົ້າຮັກສານົກຜູ້ປະສົບທຸກ

[໕໓໓] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ພຣະອົງກໍສັນນັ້ນຄືກັນ
ເປັນເໝືອນກະສັດ ຜູ້ຂະຈັດຂ້າເສິກສັດຕູໄດ້ແລ້ວ
ຊາວໂລກພ້ອມທັງເທວະໂລກຈຶ່ງຂະໜານພຣະນາມວ່າທຳຣາຊາ

[໕໓໔] ພຣະອົງຊົງຜາບເຫຼົ່າເດຍຣະຖີ
ຊົງກຳຈັດມານພ້ອມທັງເສນາມານ
ຊົງຂະຈັດຄວາມມືດມົນອົນທະການແລ້ວ ໄດ້ຊົງສ້າງນະຄອນຄືພຣະທຳໄວ້

[໕໓໕] ຂ້າແຕ່ພຣະອົງຜູ້ມີຄວາມພຽນ ໃນນະຄອນຄືພຣະທຳນັ້ນ
ພຣະອົງມີສີນເປັນປາການ ມີພຣະຍານເປັນຊຸ້ມປະຕູ
ມີສັດທາເປັນເສົາຣະນຽດ ແລະມີຄວາມສັງວອນເປັນນາຍປະຕູ

[໕໓໖] ຂ້າແຕ່ພຣະມຸນີ ພຣະອົງມີສະຕິປັດຖານເປັນປ້ອມ
ມີພຣະປັນຍາເປັນຊຸມທາງ
ມີອິດທິບາດເປັນຖະໜົນສີ່ແຍກ
ທຳວິຖີ ພຣະອົງກໍຊົງສ້າງໄວ້ດີແລ້ວ

[໕໓໗] ພຣະອົງມີພຣະວິໄນ ພຣະສູດ ພຣະອະພິທຳ
ແລະພຣະພຸດທະພົດມີອົງ ៩ ແມ່ນທັງມວນ
ນີ້ເປັນທຳສະພາ

[໕໓໘] ພຣະອົງມີສູນຍະຕະວິຫານທຳ (ທຳເປັນເຄື່ອງຢູ່ອັນວ່າງ)
ອະນິມິດຕະວິຫານທຳ (ທຳເປັນເຄື່ອງຢູ່ບໍ່ມີນິມິດ)
ອັບປະນິຫິຕະວິຫານທຳ (ທຳເປັນເຄື່ອງຢູ່ບໍ່ມີຄວາມຕັ້ງປາຖະໜາ)
ອາເນນຊະວິຫານທຳ (ທຳເປັນເຄື່ອງຢູ່ບໍ່ຫວັ່ນໄຫວ)
ນິໂຣດວິຫານທຳ (ທຳເປັນເຄື່ອງຢູ່ຄືຄວາມດັບ) ນີ້ເປັນທຳກຸດຕິ

[໕໓໙]　　ພຣະເຖຣະຜູ້ເລີດດ້ວຍປັນຍາ ທີ່ຊົງແຕ່ງຕັ້ງໄວ້
ສະຫຼາດໃນປະຕິພານ ມີນາມວ່າສາຣີບຸດ
ເປັນຈອມທັບທຳຂອງພຣະອົງ

[໕໔໐]　　ຂ້າແຕ່ພຣະມຸນີ ພຣະເຖຣະຜູ້ສະຫຼາດໃນຈຸຕິແລະປະຕິສົນທິ
ເຖິງຄວາມສຳເລັດແຫ່ງລິດ ມີນາມວ່າໂກລິຕະ (ໂມກຄັນລານະ)
ເປັນປຸໂຣຫິດຂອງພຣະອົງ

[໕໔໑]　　ຂ້າແຕ່ພຣະມຸນີ ພຣະເຖຣະຜູ້ດຳຣົງວົງເກົ່າແກ່
ມີເດດແຜ່ໄປ ຫາຜູ້ກະທົບກະທັ່ງໄດ້ຍາກ
ເປັນຜູ້ເລີດດ້ວຍທຸດົງຄຸນ (ມີນາມວ່າກັດສະປະ) ເປັນຜູ້ພິພາກສາຂອງພຣະອົງ

[໕໔໒]　　ຂ້າແຕ່ ພຣະມຸນີ ພຣະເຖຣະຜູ້ເປັນພະຫູສູດ ຜູ້ຊົງທຳ
ເປັນຜູ້ເລີດກວ່າພິກຂຸຜູ້ສູດສາທະຍາຍທຸກອົງ ໃນສາດສະໜາ
ມີນາມວ່າອານົນ ເປັນຜູ້ຮັກສາທຳຂອງພຣະອົງ

[໕໔໓]　　ພຣະຜູ້ມີພຣະພາກເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຊົງລະພຣະເຖຣະເຫຼົ່ານີ້ທຸກອົງ
ຊົງມຸ້ງສະຍ້ອນຂ້າພຣະອົງ ແລ້ວຊົງປະທານການພິຈາລະນາວິໄນ
ເຊິ່ງບັນດິດຜູ້ຮູ້ສະແດງໄວ້ແລ້ວແກ່ຂ້າພຣະອົງ

[໕໔໔]　　ສາວົກຂອງພຣະພຸດທະອົງ ບາງອົງໄຕ່ຖາມບັນຫາໃນວິໄນ
ໃນບັນຫາທີ່ຖາມມານັ້ນ ຂ້າພຣະອົງບໍ່ຕ້ອງຄິດ (ລັງເລ)
ຍ່ອມອະທິບາຍບັນຫານັ້ນໄດ້ເລີຍ

[໕໔໕]　　ຂ້າແຕ່ ພຣະມະຫາມຸນີຕະຫຼອດພຸດທະເຂດ ຍົກເວັ້ນພຣະອົງ
ໃນພຣະວິໄນບໍ່ມີໃຜຜູ້ເຊັ່ນກັບຂ້າພຣະອົງ
ຜູ້ທີ່ຍິ່ງກວ່າຈັກມີມາແຕ່ໃສ
[໕໔໖]　　ພຣະຜູ້ມີພຣະພາກເຈົ້າຜູ້ໂຄດົມ ປະທັບນັ່ງໃນທ່າມກາງພິກຂຸສົງແລ້ວ
ບັນລືແນວນີ້ວ່າ ຜູ້ສະເໝີກັບອຸປາລີໃນພຣະວິໄນ
ແລະໃນຂັນທະກະ (ຄືໃນມະຫາວັກ ຈູລະວັກແລະປະຣິວາຣະ) ບໍ່ມີ
[໕໔໗]　　ສຳລັບທ່ານຜູ້ເຫັນພຣະວິໄນເປັນຫຼັກສຳຄັນ
ນະວັງຄະສັດຖຸສາດ ເທົ່າທີ່ພຣະພຸດທະເຈົ້າຕັດໄວ້
ທັງໝົດພຣະສາດສະດາຕັດໄວ້ໃນວິໄນ

[໕໔໗] ພຣະຜູ້ມີພຣະພາກເຈົ້າຜູ້ໂຄດົມສາກະຍະຜູ້ປະເສີດ
ຊົງຣະລຶກເຖິງກຳຂອງຂ້າພຣະອົງ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຊົງແຕ່ງຕັ້ງຂ້າພຣະອົງໄວ້ໃນຕຳແໜ່ງເອຕະທັກຄະ

[໕໔໙] ຂ້າພຣະອົງໄດ້ປາຖະໜາຕຳແໜ່ງນີ້ນານນັບໄດ້ ໑໐໐,໐໐໐ ກັບ
ຂ້າພຣະອົງໄດ້ບັນລຸປະໂຫຍດນັ້ນແລ້ວ ເຖິງຄວາມສຳເລັດໃນວິໄນ

[໕໕໐] ເມື່ອກ່ອນ ຂ້າພຣະອົງເປັນຊ່າງກັນບົກ (ຊ່າງຕັດຜົມ)
ເປັນຜູ້ເຮັດໃຫ້ເຈົ້າສາກະຍະທັງຫຼາຍເກີດຄວາມເພີດເພີນ
ໄດ້ລະຊາດກຳເນີດນັ້ນແລ້ວມາເປັນບຸດ
ຂອງພຣະສຳມາສຳພຸດທະເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕໕໑] ໃນກັບທີ ໘ ນັບຈາກພັດທະຣະກັບນີ້ໄປ
ໄດ້ມີກະສັດພຣະນາມວ່າ ອັນຊະສະ
ຊົງເດຊານຸພາບຫາບ່ອນສຸດບໍ່ໄດ້
ຊົງຍົດຫາປະມານບໍ່ໄດ້
ເປັນພຣະເຈົ້າແຜ່ນດິນມີພຣະຣາດຊະຊັບຫຼາຍ

[໕໕໘] ຂ້າພຣະອົງໄດ້ເປັນຂັດຕິຍະກຸມານມີນາມວ່າຈັນທະນະ
ເປັນໂອຣົດຂອງພຣະຣາຊາພຣະອົງນັ້ນ
ເປັນຄົນມີກິຣິຍາແຂງກະດ້າງ
ຍ້ອນຄວາມມົວເມົາໃນຊາດຕະກູນ ໃນຍົດ ແລະໃນໂພຄະ

[໕໕໙] ຊ້າງຕະກູນມາຕັງຄະ ໑໐໐,໐໐໐ ເຊືອກ
ຕົກມັນ ໓ ແຫ່ງປະດັບດ້ວຍເຄື່ອງປະດັບທຸກຢ່າງ
ແວດລ້ອມຂ້າພຣະອົງຢູ່ທຸກເມື່ອ

[໕໕໔] ຄັ້ງນັ້ນ ຂ້າພຣະອົງມີກຳລັງພົນຂອງຕົນຫ້ອມລ້ອມ
ຕ້ອງການຈະປະພາດອຸທະຍານ
ຈຶ່ງຊົງຊ້າງຊື່ສິຣິກະອອກຈາກນະຄອນໄປ

[໕໕໕] ພຣະສຳພຸດທະເຈົ້າ ພຣະນາມວ່າເທວະລະ
ຜູ້ພຽບພ້ອມດ້ວຍຈະຣະນະ ຄຸ້ມຄອງທະວານ
ສຳລວມດ້ວຍດີ ສະເດັດມາຂ້າງໜ້າຂອງຂ້າພຣະອົງ

[໕໕໖] ຄັ້ງນັ້ນ ຂ້າພຣະອົງໄດ້ໄສຊ້າງສີຣິກະໄປ
ຈະໃຫ້ທຳຮ້າຍພຣະພຸດທະເຈົ້າ
ຍ້ອນເຫດນັ້ນ ຊ້າງນັ້ນເໝືອນເກີດຄວາມໂກດຍົກຕີນບໍ່ຂຶ້ນ

[໕໕໗] ຂ້າພຣະອົງເຫັນຊ້າງເສຍໃຈ ຈຶ່ງໂກດພຣະພຸດທະເຈົ້າ
ບຽດບຽນພຣະສຳມາສຳພຸດທະເຈົ້າແລ້ວໄດ້ໄປອຸທະຍານ

[໕໕໘] ຍ້ອນການຈະໃຫ້ຊ້າງທຳຮ້າຍນັ້ນເປັນເຫດ
ຂ້າພຣະອົງຈຶ່ງບໍ່ໄດ້ປະສົບຄວາມສຳຣານ
ຫົວເປັນເໝືອນມີໄຟລຸກສະຫວ່າງແຈ້ງຢູ່
ຂ້າພຣະອົງຖືກຄວາມຮ້ອນຮົນເຜົາໄໝ້ຢູ່ ເໝືອນປາຕິດເບັດ

[໕໕໙] ແຜ່ນດິນເຊິ່ງມີສະມຸດສາຄອນເປັນບ່ອນສຸດ
ຍ່ອມຜາກົດແກ່ຂ້າພຣະອົງເປັນເໝືອນໄຟລຸກຖ້ວມ
ຂ້າພຣະອົງໄດ້ເຂົ້າເຝົ້າພຣະຣາດຊະບິດາແລ້ວຂາບທູນຄຳນີ້ວ່າ

[໕໖໐] ຂ້ານ້ອຍໄດ້ທຳຮ້າຍພຣະພຸດທະເຈົ້າ
ຜູ້ເປັນພຣະສະຍຳພູພຣະອົງໃດ
ຜູ້ເປັນດັ່ງອະສໍຣະພິດທີ່ຖືກເຮັດໃຫ້ໂກດ
ດັ່ງກອງໄຟທີ່ລາມມາ ດັ່ງຊ້າງພາຍໂຕຕົກມັນ

[໕໖໑] ພຣະພຸດທະຊິນນະເຈົ້າ ຜູ້ມີຕະບະແກ່ກ້າ ຖືກຂ້າພຣະອົງຣຸກຣານ
ພວກເຮົາຊາວເມືອງທັງປວງຈັກພິນາດ
ພວກເຮົາຈັກຂໍຂະມາພຣະມຸນີນັ້ນ

[໕໖໒] ຫາກພວກເຮົາຈັກບໍ່ຂໍຂະມາພຣະອົງ (ພຣະສຳມາສຳພຸດທະເຈົ້າ)
ຜູ້ຝຶກຕົນແລ້ວ ຜູ້ມີຈິດຕັ້ງໝັ້ນ
ແວ່ນແຄວ້ນຂອງເຮົາຈັກພິນາດພາຍໃນວັນທີ ໗

[໕໖໓] ພຣະເຈົ້າສຸເມຂະລະຣາຊະ ພຣະເຈົ້າໂກສິຍະຣາດ
ພຣະເຈົ້າສິກຄະວະຣາດ ພຣະເຈົ້າສັດຕະກະຣາດເຫຼົ່ານັ້ນພ້ອມເສນາ
ໄດ້ຣຸກຣານທ່ານລືສີທັງຫຼາຍແລ້ວ ໄດ້ເຖິງຄວາມທຸກຍາກ

[໕໖໔] ທ່ານລືສີທັງຫຼາຍ ຜູ້ສັງລວມແລ້ວ
ປະພຶດປະເສີດ ຍ່ອມໂກດໃນການໃດ

ໃນການນັ້ນຍ່ອມເຮັດມະນຸດໂລກພ້ອມທັງເທວະໂລກ
ທ້ອງທະເລ ແລະພູເຂົາ ໃຫ້ພິນາດໄປ

[໕໖໕] ຂ້າພຣະອົງຈຶ່ງສັ່ງໃຫ້ປະຊາຊົນມາປະຊຸມກັນໃນພື້ນທີ່
ປະມານ ໖,໐໐໐ ໂຍດ ເພື່ອຕ້ອງການຈະສະແດງໂທດ
ຈຶ່ງເຂົ້າໄປຫາພຣະສະຍຳພູພຸດທະເຈົ້າ

[໕໖໖] ປະຊາຊົນ (ພ້ອມທັງຂ້າພຣະອົງ) ທັງໝົດ
ມີຜ້າປຽກ ຫົວປຽກ ປະນົມມື
ພາກັນໝອບລົງແທບພຣະຍຸຄົນບາດຂອງພຣະສະຍຳພູພຸດທະເຈົ້າ
ແລ້ວໄດ້ຂາບຮຽນຄຳນີ້ວ່າ

[໕໖໗] ຂ້າແຕ່ທ່ານຜູ້ມີຄວາມພຽນຫຼາຍ ຂໍພຣະຜູ້ເປັນເຈົ້າໂຜດຍົກໂທດເທີ້ນ
ປະຊາຊົນອ້ອນວອນພຣະຜູ້ເປັນເຈົ້າ
ຂໍພຣະຜູ້ເປັນເຈົ້າໂຜດຊ່ວຍບັນເທົາຄວາມຮ້ອນຮົນ
ແລະຂໍພຣະຜູ້ເປັນເຈົ້າຢ່າໄດ້ເຮັດແວ່ນແຄວ້ນໃຫ້ພິນາດເລີຍ

[໕໖໘] ມວນມະນຸດພ້ອມທັງເທວະດາ ທານົບ ແລະຣາກສົດ
ຈະເພິ່ງເອົາຄ້ອນເຫຼັກທຸບຫົວຂອງຂ້າພຣະອົງ ໃນການທຸກເມື່ອ

[໕໖໙] (ພຣະພຸດທະເຈົ້າຕັດວ່າ)
ໄຟຍ່ອມບໍ່ເກີດໃນນ້ຳ ພືດຍ່ອມບໍ່ງອກເທິງແຜ່ນຫີນ
ກິມິຊາດ ຍ່ອມບໍ່ເກີດໃນຢາພິດ ສັນໃດ
ຄວາມໂກດຍ່ອມບໍ່ເກີດໃນພຣະພຸດທະເຈົ້າ ສັນນັ້ນ

[໕໗໐] ແຜ່ນດິນບໍ່ຫວັ່ນໄຫວ ສັນໃດ
ພຣະພຸດທະເຈົ້າຜູ້ໃດ ກໍເຮັດໃຫ້ກຳເຣີບບໍ່ໄດ້ ສັນນັ້ນ
ທະເລປະມານບໍ່ໄດ້ ສັນໃດ
ພຣະພຸດທະເຈົ້າມີພຣະຄຸນປະມານບໍ່ໄດ້ ສັນນັ້ນ
ແລະອາກາດບໍ່ມີບ່ອນສຸດ ສັນໃດ
ພຣະພຸດທະເຈົ້າມີພຣະຄຸນບໍ່ມີບ່ອນສຸດ ສັນນັ້ນ

[໕໗໑] ພຣະພຸດທະເຈົ້າທັງຫຼາຍຝຶກຝົນຕົນແລ້ວ
ມີຄວາມພຽນຫຼາຍ ມີການງົດໂທດໃຫ້ແກ່ຜູ້ອື່ນ ແລະມີຕະບະ

ທ່ານຜູ້ມີຄວາມອົດທົນແລະມີການອົດໂທດໃຫ້ແກ່ຜູ້ອື່ນ
ຈະບໍ່ມີການລ່ວງອຳນາດອະຄະຕິ

[໕ໆ໔] ພຣະສຳມາສຳພຸດທະເຈົ້າເມື່ອກ່າວດັ່ງນີ້ແລ້ວໄດ້ບັນເທົາຄວາມຮ້ອນຮົນ
ເຫາະຂຶ້ນໄປເທິງທ້ອງຟ້າ ຕໍ່ໜ້າມະຫາຊົນ ໃນຄັ້ງນັ້ນ

[໕ໆ໖] ຂ້າແຕ່ພຣະອົງຜູ້ມີຄວາມພຽນ
ຍ້ອນກຳນັ້ນ ຂ້າພຣະອົງຈຶ່ງໄດ້ເຂົ້າເຖິງພາວະທີ່ຊົ່ວຊາມ
ລ່ວງເລີຍຊາດນັ້ນມາເຂົ້າສູ່ນະຄອນ (ຄືນິບພານ) ເຊິ່ງບໍ່ມີໄພ

[໕ໆ໔] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ແມ່ນໃນຄັ້ງນັ້ນ
ພຣະສະຍຳພູພຸດທະເຈົ້າເຫັນຂ້າພຣະອົງຖືກໄຟແຜດເຜົາຢູ່
(ແຕ່) ດຳຣົງຢູ່ດ້ວຍດີ ຈຶ່ງຊົງບັນເທົາຄວາມຮ້ອນຮົນໃຫ້
ຂ້າພະເຈົ້າຈຶ່ງທູນຂໍພຣະສະຍຳພູງົດໂທດໃຫ້

[໕ໆ໕] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ ແມ່ນໃນວັນນີ້
ພຣະຜູ້ມີພຣະພາກເຈົ້າຊົງຊ່ວຍຂ້າພຣະອົງຜູ້ຖືກໄຟ ໓ ກອງແຜດເຜົາຢູ່
ໃຫ້ເຖິງພາວະສະງົບເຢັນ ແລະຊົງຊ່ວຍດັບໄຟ ໓ ກອງໃຫ້ແລ້ວ

[໕ໆ໖] ຂໍໃຫ້ທ່ານທັງຫຼາຍຜູ້ງ່ຽງໂສຕະສະດັບ ຈົ່ງຕັ້ງໃຈຟັງຂ້າພະເຈົ້າກ່າວ
ຂ້າພະເຈົ້າຈະບອກປະໂຫຍດແກ່ທ່ານທັງຫຼາຍ
ໂດຍປະການທີ່ຂ້າພະເຈົ້າໄດ້ເຫັນບົດແຫ່ງທຳມາແລ້ວ

[໕ໆໆ] ຂ້າພະເຈົ້າໄດ້ດູໝິ່ນພຣະສະຍຳພູພຸດທະເຈົ້າພຣະອົງນັ້ນ
ຜູ້ມີຈິດສະງົບ ມີຈິດຕັ້ງໝັ້ນ
ຍ້ອນກຳນັ້ນ ໃນປັດຈຸບັນນີ້
ຈຶ່ງມາເກີດໃນຊາດຕະກູນຕ່ຳ

[໕ໆ໘] ທ່ານທັງຫຼາຍຢ່າໄດ້ພາດໂອກາດນີ້ໄປເລີຍ
ຍ້ອນເຫຼົ່າສັດຜູ້ລ່ວງເລີຍໂອກາດນີ້ໄປຍ່ອມເສົ້າໂສກ
ຂໍທ່ານທັງຫຼາຍເພິ່ງພະຍາຍາມໃນປະໂຫຍດຕົນເທີ້ນ
ໂອກາດຂອງທ່ານທັງຫຼາຍຈົ່ງເຮັດໃຫ້ສຳເລັດເທີ້ນ

[໕ໆ໙] ພຣະຜູ້ມີພຣະພາກເຈົ້າຕັດບອກຢາສຳຣອກແກ່ບຸກຄົນບາງພວກ
ຢາຖ່າຍແກ່ບຸກຄົນບາງພວກ ຢາພິດຮ້າຍແຮງແກ່ບຸກຄົນບາງພວກ
ແລະຢາຮັກສາແກ່ບຸກຄົນບາງພວກ

[໕໗໐] ຄືພຣະຜູ້ມີພຣະພາກເຈົ້າ ຕັດບອກຢາສຳຣອກແກ່ບຸກຄົນຜູ້ປະຕິບັດ
ຕັດບອກຢາຖ່າຍແກ່ບຸກຄົນຜູ້ດຳຣົງຢູ່ໃນຜົນ
ຕັດບອກຢາຮັກສາໂຣກແກ່ບຸກຄົນຜູ້ໄດ້ຜົນແລ້ວ
ຕັດບອກບຸນຍະເຂດແກ່ບຸກຄົນຜູ້ສະແຫວງບຸນ

[໕໗໑] ຕັດບອກຢາພິດຮ້າຍແຮງ (ຄືບາບອະກຸສົນ)
ແກ່ບຸກຄົນຜູ້ເປັນຂ້າເສິກຕໍ່ສາດສະໜາ
ຢາພິດຮ້າຍແຮງຍ່ອມແຜດເຜົານໍຣະຊົນນັ້ນ
ເໝືອນອະສໍຣະພິດຮ້າຍ ສັນນັ້ນ

[໕໗໒] ຢາພິດຮ້າຍແຮງທີ່ບຸກຄົນດື່ມແລ້ວພຽງຄັ້ງດຽວ
ກໍຍ່ອມເຮັດໃຫ້ເສຍຊີວິດໄດ້ ບຸກຄົນເຮັດຜິດຕໍ່ສາດສະໜາແລ້ວ
ຍ່ອມຖືກແຜດເຜົານັບເປັນກັບ

[໕໗໓] ພຣະອົງຊົງຊ່ວຍສັດໂລກພ້ອມທັງເທວະໂລກໃຫ້ຂ້າມພົ້ນ (ສັງສາຣະວັດ)
ດ້ວຍຂັນຕິ ດ້ວຍຄວາມບໍ່ບຽດບຽນ
ແລະດ້ວຍຈິດປະກອບດ້ວຍເມດຕາ
ຍ້ອນເຫດນັ້ນ ພຣະພຸດທະເຈົ້າເຫຼົ່ານັ້ນ
ເປັນຜູ້ອັນທ່ານທັງຫຼາຍໂກດເຄືອງບໍ່ໄດ້

[໕໗໔] ພຣະພຸດທະເຈົ້າທັງຫຼາຍຊົງເປັນເຊັ່ນພື້ນປະຖະພີ
ບໍ່ຊົງຕິດຂ້ອງໃນລາບ ໃນຄວາມເສື່ອມລາບ
ໃນຄວາມສັນເສີນ ໃນຄວາມຖືກດູໝິ່ນ
ຍ້ອນເຫດນັ້ນ ພຣະພຸດທະເຈົ້າເຫຼົ່ານັ້ນ
ເປັນຜູ້ອັນທ່ານທັງຫຼາຍໂກດເຄືອງບໍ່ໄດ້

[໕໗໕] ພຣະມຸນີຊົງມີພຣະຫະໄທສະໝໍ່າສະເໝີໃນສັດທັງປວງ ຄື ໃນພຣະເທວະທັດ
ນາຍຂະມັງທະນູ ໂຈນອົງຄຸລິມານ ພຣະຣາຫຸນ ແລະຊ້າງທະນະບານ

[໕໗໖] ພຣະພຸດທະເຈົ້າທັງຫຼາຍເຫຼົ່ານັ້ນ
ບໍ່ມີຄວາມແຄ້ນເຄືອງ ບໍ່ມີຄວາມກຳໜັດ
ເຫດນັ້ນ ພຣະພຸດທະເຈົ້າຈຶ່ງຊົງມີພຣະຫະໄທສະໝໍ່າສະເໝີໃນຊົນທັງໝົດ
ຄືໃນນາຍຂະມັງທະນູ ແລະໃນພຣະໂອຣົດ

[໕໗໗] ທ່ານທັງຫຼາຍໄດ້ພົບຜ້າກາສະວະອັນເປັນທຸງໄຊຂອງພຣະລືສີ
ເຊິ່ງເປື້ອນຄູດ ຖືກຖີ້ມໄວ້ຢູ່ຫົນທາງ
ກໍເພິ່ງປະນົມມືເໜືອຫົວແລ້ວໄຫວ້ເທີ້ນ

[໕໗໘] ພຣະພຸດທະເຈົ້າເຫຼົ່າໃດທັງອະດີດ ປັດຈຸບັນ ແລະອະນາຄົດ
ພຣະພຸດທະເຈົ້າເຫຼົ່ານັ້ນ ຍ່ອມບໍລິສຸດໄດ້ດ້ວຍທຸງໄຊນີ້
ຍ້ອນເຫດນັ້ນ ຈຶ່ງຄວນນອບນ້ອມພຣະພຸດທະເຈົ້າເຫຼົ່ານັ້ນ

[໕໗໙] ຂ້າພະເຈົ້າຊົງຈຳວິໄນທີ່ດີງາມ
ເຊັ່ນກັບອົງແທນພຣະສາດສະດາໄວ້ດ້ວຍຫົວໃຈ
ຂ້າພະເຈົ້ານະມັດສະການວິໄນຢູ່ໃນການທັງປວງ

[໕໘໐] ວິໄນເປັນບ່ອນອາໄສຂອງຂ້າພະເຈົ້າ ເປັນບ່ອນຍືນ ຍ່າງຂອງຂ້າພະເຈົ້າ
ຂ້າພະເຈົ້າສຳເລັດການຢູ່ໃນວິໄນ ວິໄນເປັນອາລົມຂອງຂ້າພະເຈົ້າ

[໕໘໑] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ພິກຂຸຊື່ອຸປາລີເຖິງຄວາມສຳເລັດໃນວິໄນ
ເປັນຜູ້ສະຫຼາດໃນວິທີຣະງັບອະທິກອນ
ຂໍຖວາຍບັງຄົມພຣະຍຸຄົນບາດຂອງພຣະສາດສະດາ

[໕໘໒] ຂ້າພະເຈົ້ານັ້ນ ທ່ຽວໄປຈາກໝູ່ບ້ານສູ່ໝູ່ບ້ານ ຈາກເມືອງສູ່ເມືອງ
ນະມັດສະການຢູ່ເຊິ່ງພຣະສຳມາສຳພຸດທະເຈົ້າ ແລະພຣະທຳເຊິ່ງເປັນທຳດີ

[໕໘໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໕໘໔] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ

[໕໘໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸປາລີເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸປາລີເຖຣາປະທານທີ ៧ ຈົບ**

## ໑. ອັນຍາໂກນທັນຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອັນຍາໂກນທັນຍະເຖຣະ

(ພຣະອັນຍາໂກນທັນຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໙໒] ຂ້າພະເຈົ້າໄດ້ພົບເຫັນພຣະສຳມາສຳພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຊຶ່ງເປັນຜູ້ນຳໂດຍວິເສດ
ຜູ້ເຖິງພຸດທະພູມແລ້ວ ເປັນຄັ້ງທຳອິດ

[໕໙໑] ຍັກຈຳນວນເທົ່າທີ່ມີທັງໝົດ ມາປະຊຸມທີ່ຕົ້ນໂພ
ປະນົມມືໄຫວ້ແວດລ້ອມພຣະສຳມາສຳພຸດທະເຈົ້າ

[໕໙໘] ເທວະດາທັງໝົດນັ້ນມີໃຈຍິນດີທ່ຽວໄປໃນອາກາດ
ປ່າວປະກາດວ່າ ພຣະພຸດທະເຈົ້າພຣະອົງນີ້
ຊົງບັນເທົາຄວາມມືດມົນອົນທະການ
ບັນລຸ (ອະນຸດຕະຣະສຳມາສຳໂພທິຍານ)

[໕໙໙] ເທວະດາເຫຼົ່ານັ້ນມີຄວາມຮ່າເຣິງ ປ່າວປະກາດບັນລືລັ່ນໄປວ່າ
ພວກເຮົາຈັກເຜົາກິເລດທັງຫຼາຍໃຫ້ໄດ້
ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໖໐໐] ຂ້າພະເຈົ້າຮູ້ຈາກຄຳເວົ້າຂອງເຫຼົ່າເທວະດາທີ່ເປ່ງອອກມາດ້ວຍວາຈາ
ແລ້ວມີຈິດຮ່າເຣິງ ເບີກບານ ໄດ້ຖວາຍພິກສາຄັ້ງທຳອິດ

[໖໐໑] ພຣະສາດສະດາຜູ້ປະເສີດໃນໂລກ ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າ
ປະທັບນັ່ງໃນທ່າມກາງໝູ່ເທວະດາ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໐໔] ເຮົາອອກບວດໄດ້ ໗ ວັນແລ້ວ ຈຶ່ງໄດ້ບັນລຸພຣະໂພທິຍານ
ພັດຕາຫານທີ່ຖວາຍເປັນຄັ້ງທຳອິດນີ້
ເປັນສິ່ງທີ່ຊ່ວຍອັດຕະພາບຂອງເຮົາຜູ້ປະພຶດພົມມະຈັນໃຫ້ເປັນໄປໄດ້

[ຜ໐໓] ເຮົາຈັກພະຍາກອນເທບພະບຸດທີ່ຈາກສະຫວັນຊັ້ນດຸສິດມາໃນບ່ອນນີ້
ນ້ອມພິກສາຫານເຂົ້າມາຖວາຍແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[ຜ໐໔] ເທບພະບຸດນັ້ນຈັກຄອງເທວະສົມບັດປະມານ ໓໐,໐໐໐ ກັບ
ຄອງສະຫວັນຊັ້ນໄຕຣທິບ ປົກຄອງເທວະດາທັງປວງ

[ຜ໐໕] ເມື່ອຈຸຕິຈາກເທວະໂລກແລ້ວ
ຈັກໄປເກີດເປັນມະນຸດເປັນພຣະເຈົ້າຈັກກະພັດ
ຄອງຣາດຊະສົມບັດໃນໂລກມະນຸດນັ້ນ ໑,໐໐໐ ຊາດ

[ຜ໐໖] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[ຜ໐໗] ເທບພະບຸດນັ້ນ ເມື່ອຈຸຕິຈາກສະຫວັນຊັ້ນຕາວະຕິງສາແລ້ວ
ໄປເກີດເປັນມະນຸດ ອອກບວດປະຕິບັດຢູ່ ໖ ປີ

[ຜ໐໘] ໃນປີທີ່ ໗ ພຣະພຸດທະເຈົ້າຈັກຊົງປະກາດສັດຈະ
ພິກຂຸມີນາມວ່າໂກນທັນຍະ ເຮັດໃຫ້ແຈ້ງເປັນອົງທຳອິດ

[ຜ໐໙] ພຣະໂພທິສັດອອກບວດ
ຂ້າພະເຈົ້າກໍອອກບວດຕາມພໍ່າເພັງຄວາມພຽນຢ່າງດີ
ຂ້າພະເຈົ້າບວດເປັນບັນພະຊິດ ເພື່ອຕ້ອງການຈະເຜົາກິເລດທັງຫຼາຍ

[ຜ໑໐] ພຣະພຸດທະເຈົ້າຜູ້ຊົງຮູ້ສິ່ງທັງປວງ ໃນໂລກພ້ອມທັງເທວະໂລກ
ໄດ້ສະເດັດໄປສູ່ປ່າໃຫຍ່
ຊົງລັ່ນອະມະຕະເພຣີດ້ວຍໂສດາປັດຕິມັກຄະຍານ
ທີ່ຂ້າພະເຈົ້າເຮັດໃຫ້ແຈ້ງແລ້ວນີ້

[ຜ໑໑] ບັດນີ້ ຂ້າພະເຈົ້ານັ້ນໄດ້ບັນລຸອະມະຕະບົດ ສະງົບ ປະເສີດ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[ຜ໑໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອັນຍາໂກນທັນຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັນຍາໂກນທັນຍະເຖຣາປະທານທີ ໗ ຈົບ**

## ໘. ປິນໂທລະພາຣະທະວາຊະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປິນໂທລະພາຣະທະວາຊະເຖຣະ

(ພຣະປິນໂທລະພາຣະທະວາຊະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໑໓] ຄັ້ງນັ້ນ ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ເປັນພຣະສະຍຳພູ ຊົງເປັນບຸກຄົນຜູ້ເລີດ
ປະທັບຢູ່ເທິງພູເຂົາຈິດທະຣະກູດ ເບື້ອງໜ້າພູເຂົາຫິມະພານ

[໖໑໔] ຂ້າພະເຈົ້າໄດ້ເກີດເປັນພະຍາເສືອ ບໍ່ມີຄວາມຢ້ານກົວ
ສາມາດແລ່ນໄປໄດ້ທັງ ໔ ທິດ ຢູ່ໃນບ່ອນນັ້ນ
ເຊິ່ງສັດຈຳນວນຫຼາຍໄດ້ຟັງສຽງແລ້ວຍ່ອມເກງກົວ

[໖໑໕] ຂ້າພະເຈົ້າໄດ້ຄາບດອກປະທຸມທີ່ບານດີແລ້ວ
ເຂົ້າເຝົ້າພຣະພຸດທະເຈົ້າ ຜູ້ອົງອາດກວ່ານໍຣະຊົນ
ໄດ້ບູຊາພຣະພຸດທະເຈົ້າ ຜູ້ສະເດັດອອກຈາກສະມາທິ

[໖໑໖] ຄັ້ງນັ້ນ ຂ້າພະເຈົ້າໄດ້ນະມັດສະການພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດ ຜູ້ສູງສຸດແຫ່ງນໍຣະຊົນ ໃນທິດທັງ ໔
ກະທຳຈິດຂອງຕົນໃຫ້ເຫຼື້ອມໃສ ໄດ້ບັນລືສີຫະນາດ

[໖໑໗] ພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບນັ່ງເທິງອາສະນະຂອງພຣະອົງ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໑໘] ເທວະດາທັງປວງ ພໍຮູ້ພຣະດຳຣັດຂອງພຣະພຸດທະເຈົ້າແລ້ວ
ກໍມາປະຊຸມກັນດ້ວຍຄິດວ່າ
ພຣະພຸດທະເຈົ້າຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍສະເດັດມາແລ້ວ
ພວກເຮົາຈັກຟັງທຳຂອງພຣະອົງ

[໖໑໙] ພຣະພຸດທະເຈົ້າຜູ້ເປັນພຣະມະຫາມຸນີ
ຜູ້ຊຶ່ງເປັນຜູ້ນຳສັດໂລກ ຊຶ່ງເຫັນການໄກ
ຊຶ່ງປະກາດສຽງຂອງຂ້າພະເຈົ້າຂ້າງໜ້າຂອງເທວະດາ
ແລະມະນຸດເຫຼົ່ານັ້ນຜູ້ມີຄວາມຮ່າເຣິງວ່າ

[໖໘໐] ເຮົາຈັກພະຍາກອນຜູ້ທີ່ໄດ້ຖວາຍດອກປະທຸມນີ້ແລະໄດ້ບັນລືສີຫະນາດ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໖໘໑] ໃນກັບທີ ໗ ນັບຈາກກັບນີ້ໄປ
ຜູ້ນັ້ນຈັກເກີດເປັນພຣະເຈົ້າຈັກກະພັດ
ສົມບູນດ້ວຍຣັດຕະນະ ໗ ປະການ ເປັນໃຫຍ່ໃນທະວີບທັງ ໔

[໖໘໒] ຈັກຄອງຄວາມເປັນໃຫຍ່ໃນແຜ່ນດິນເຖິງ ໖໔ ຊາດ
ຈັກເປັນພຣະເຈົ້າຈັກກະພັດພຣະນາມວ່າປະທຸມຕາມໂຄດ
ມີພະລານຸພາບຫຼາຍ

[໖໘໓] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄຕົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໖໘໔] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄຕົມພຣະອົງນັ້ນ
ຊຶ່ງປະກາດທຳວິໄນ ຜູ້ນີ້ຈັກເກີດເປັນບຸດຂອງພາມ
ອອກຈາກຕະກູນພາມແລ້ວບວດໃນຂະນະນັ້ນ

[໖໘໕] ເຂົາມີຈິດເດັດດ່ຽວເພື່ອພ່ຳເພັງພຽນ
ເປັນຜູ້ສະງົບຣະງັບ ບໍ່ມີອຸປະທິ
ກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໖໘໖] ໃນເສນາສະນະທີ່ສະຫງັດ ເວັ້ນຈາກຜູ້ຄົນ ເດຍລະດາດດ້ວຍເນື້ອຮ້າຍ
ເຂົາກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໖໘໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະປິນໂທລະພາຣະທະວາຊະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປິນໂທລະພາຣະທະວາຊະເຖຣາປະທານທີ ໗ ຈົບ**

## ໙. ຂະທິຣະວະນິຍະເຣວະຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຂະທິຣະວະນິຍະເຣວະຕະເຖຣະ

(ພຣະຂະທິຣະວະນິຍະເຣວະຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໖໔໗] ແມ່ນ້ຳພາຄີຣະຖີ ໄຫຼມາຈາກພູເຂົາຫິມະພານ
ຂ້າພະເຈົ້າເກີດເປັນນາຍເຮືອ ຢູ່ທີ່ທ່ານ້ຳບໍ່ຮາບພຽງ
ພາຄົນສົ່ງຂ້າມຟາກຈາກຝັ່ງນັ້ນມາຝັ່ງນີ້

[໖໔໙] ພຣະສຳມາສຳພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງເປັນຜູ້ນຳ ຜູ້ສູງສຸດແຫ່ງເທວະດາແລະມະນຸດທັງຫຼາຍ
ພ້ອມກັບພຣະຂີນາສົບ ໑໐໐,໐໐໐ ອົງ
ຜູ້ໄດ້ວະສີ ຈັກຂ້າມກະແສແມ່ນ້ຳຄົງຄາ

[໖໕໐] ຂ້າພະເຈົ້າໄດ້ນຳເຮືອມາຈອດລວມກັນໄວ້ຈຳນວນຫຼາຍ
ແລ້ວຈັດປະທຸນທີ່ນາຍຊ່າງປະກອບຢ່າງດີໄວ້ເທິງເຮືອ
ຕ້ອນຮັບພຣະສຳມາສຳພຸດທະເຈົ້າຜູ້ອົງອາດກວ່ານໍຣະຊົນ

[໖໕໑] ພຣະສຳມາສຳພຸດທະເຈົ້າຜູ້ສາດສະດາໄດ້ສະເດັດມາຂຶ້ນເຮືອນັ້ນແລ້ວ
ປະທັບຢູ່ທ່າມກາງນ້ຳ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໕໔] ນາຍເຮືອທີ່ໄດ້ພາພຣະສຳມາສຳພຸດທະເຈົ້າ
ແລະພຣະສົງຜູ້ບໍ່ມີອາສະວະສົ່ງຂ້າມຟາກ
ຈັກຣື່ນຣົມຢູ່ໃນເທວະໂລກດ້ວຍຈິດທີ່ເຫຼື້ອມໃສນັ້ນ

[໖໕໕] ວິມານທີ່ບຸນກຳຕົກແຕ່ງໄວ້ຢ່າງດີ
ມີສັນຖານເໝືອນເຮືອ ຈັກເກີດຂຶ້ນແກ່ທ່ານ
ຈັກມີຫຼັງຄາດອກໄມ້ກັ້ນຢູ່ໃນອາກາດທຸກເມື່ອ

[໖໓໔] ໃນກັບທີ ໕໗ ນາຍເຮືອຜູ້ນີ້
ຈັກເປັນພຣະເຈົ້າຈັກກະພັດພຣະນາມວ່າຕາຍະນະ
ເປັນໃຫຍ່ ມີໄຊຊະນະໃນທະວີບທັງ ໔

[໖໓໕] ໃນກັບທີ ໕໗ (ນັບຈາກກັບນີ້ໄປ)
ຈັກເກີດເປັນກະສັດພຣະນາມວ່າຈຳພະກະ
ມີພະລານຸພາບຫຼາຍ ຈັກຮຸ່ງເຮື່ອງດັ່ງດວງອາທິດອຸໄທ

[໖໓໖] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໖໓໗] ນາຍເຮືອຜູ້ນີ້ຈຸຕິຈາກສະຫວັນຊັ້ນໄຕຣທິບແລ້ວຈັກໄປເກີດເປັນມະນຸດ
ເປັນບຸດຂອງພາມມີນາມວ່າເຣວະຕະ ຕາມໂຄດ

[໖໓໘] ເຂົາຖືກກຸສົນມູນຕັກເຕືອນແລ້ວ
ຈັກອອກຈາກເຮືອນໄປບວດໃນສາດສະໜາ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໖໓໙] ຫຼັງຈາກບວດແລ້ວ ເຂົາຈັກປະກອບຄວາມພຽນ ຈະເລີນວິປັດສະນາ
ກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໖໔໐] ຂ້າພະເຈົ້າມີຄວາມພຽນສຳລັບນຳພາທຸຣະ
ເປັນຄວາມພຽນທີ່ນຳມາເຊິ່ງທຳເປັນແດນກະເສມຈາກໂຍຄະ
ຂ້າພະເຈົ້າຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໖໔໑] ກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນ ໑໐໐,໐໐໐ ກັບ
ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບສຸດທ້າຍນີ້
ຂ້າພະເຈົ້າລຸດພົ້ນດີແລ້ວເໝືອນຄວາມໄວແຫ່ງລູກສອນພົ້ນໄປຈາກແລ່ງ
ເຜົາກິເລດທັງຫຼາຍໄດ້ແລ້ວ

[໖໔໘] ແຕ່ນັ້ນ ພຣະມຸນີຜູ້ມີພຣະປັນຍາຫຼາຍ
ຊຶ່ງເຖິງທີ່ສຸດແຫ່ງໂລກ (ຄືເຖິງຄວາມສິ້ນທຸກ)
ໄດ້ທອດພຣະເນດເຫັນຂ້າພະເຈົ້າຜູ້ຍິນດີໃນປ່າ
ຈຶ່ງຊົງຕັ້ງຂ້າພະເຈົ້າວ່າ ເປັນຜູ້ເລີດກວ່າພິກຂຸຜູ້ຢູ່ປ່າເປັນວັດ

[໖໘໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະຂະທິຣະວະນິຍະເຣວະຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຂະທິຣະວະນິຍະເຣວະຕະເຖຣາປະທານທີ ໙ ຈົບ**

## ໑໐. ອານັນທະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອານົນເຖຣະ

(ພຣະອານົນເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໘໔] ພຣະມະຫາມຸນີພຣະນາມວ່າປະທຸມຸດຕະຣະ
ສະເດັດອອກຈາກປະຕູອາຣາມແລ້ວ
ຊົງບັນດານຝົນຄືອະມະຕະທໍາໃຫ້ຕົກ ໃຫ້ມະຫາຊົນສະງົບເຢັນແລ້ວ

[໖໘໕] ພຣະຂີນາສົບ ໑໐໐,໐໐໐ ອົງເຫຼົ່ານັ້ນ
ຜູ້ເປັນນັກປາດສໍາເລັດອະພິນຍາ ໖ ມີລິດຫຼາຍ
ແວດລ້ອມພຣະສໍາມາສໍາພຸດທະເຈົ້າ ເໝືອນເງົາຕິດຕາມພຣະອົງ

[໖໘໖] ຂ້າພະເຈົ້າໄດ້ນັ່ງກັ້ງສະເວດຕະສັດອັນປະເສີດເລີດຢູ່ເທິງຄໍຊ້າງ
ຍ້ອນໄດ້ເຫັນພຣະສໍາມາສໍາພຸດທະເຈົ້າຜູ້ມີພຣະຮູບງົດງາມ
ຂ້າພະເຈົ້າຈຶ່ງເກີດຄວາມປິຕິຍິນດີ

[໖໘໗] ຂ້າພະເຈົ້າຈຶ່ງລົງຈາກຄໍຊ້າງແລ້ວເຂົ້າເຝົ້າ
ພຣະສໍາມາສໍາພຸດທະເຈົ້າ ຜູ້ອົງອາດກວ່ານໍຣະຊົນ
ຂ້າພະເຈົ້າໄດ້ກັ້ງສັດແກ້ວຂອງຂ້າພະເຈົ້າ
ຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໖໘໘] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງສະແຫວງຫາຄຸນຍິ່ງໃຫຍ່ ຊົງຮູ້ຄວາມດໍາຣິຂອງຂ້າພະເຈົ້າ
ຈຶ່ງຊົງພັກການສະແດງທໍາກະຖາໄວ້ແລ້ວໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໘໙] ເຮົາຈັກພະຍາກອນຣາດຊະກຸມານ

ຜູ້ທີ່ໄດ້ກັ້ງສັດອັນປະດັບດ້ວຍເຄື່ອງອະລັງການຄຳນັ້ນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໓໕໐] ຣາດຊະກຸນມານນີ້ຈຸຕິຈາກມະນຸດໂລກນີ້ແລ້ວ
ຈັກໄປຄອງສະຫວັນຊັ້ນດຸສິດ
ມີເຫຼົ່ານາງເທບອັບປະສອນຫ້ອມລ້ອມສະເຫວີຍສົມບັດ

[໓໕໑] ຈັກຄອງເທວະສົມບັດ ໓໔ ຊາດ
ຈັກເປັນພຣະເຈົ້າແຜ່ນດິນຄອງແຜ່ນດິນ ໑໐໗ ຊາດ

[໓໕໔] ຈັກເປັນພຣະເຈົ້າຈັກກະພັດ ໕໗ ຊາດ
ຈັກຄອງຄວາມເປັນພຣະເຈົ້າປະເທດຣາດອັນໄພບູນໃນແຜ່ນດິນ

[໓໕໓] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດໃນໂລກ

[໓໕໔] ຣາດຊະກຸມານນີ້ຈັກເປັນພຣະຍາດພີ່ນ້ອງຂອງພຣະສຳມາສຳພຸດທະເຈົ້າ
ຜູ້ເປັນທຸງໄຊແຫ່ງສາກະຍະຕະກູນ ມີນາມວ່າອານົນ
ເປັນອຸປັດຖາກຂອງພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໓໕໕] ມີຄວາມພຽນ ມີປັນຍາຮັກສາຕົນ ສະຫຼຽວສະຫຼາດໃນພາຫຸສັດຈະ
ປະພຶດຖ່ອມຕົນ ບໍ່ແຂງກະດ້າງ
ເປັນຜູ້ຊົງໄວ້ເຊິ່ງປາຖະທັງປວງ

[໓໕໖] ພຣະອານົນນັ້ນມີຈິດເດັດດ່ຽວພ່ຳເພັງພຽນ
ເປັນຜູ້ສະງົບຣະງັບ ບໍ່ມີອຸປະທິ
ກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໓໕໗] ຊ້າງກຸນຊອນເກີດໃນປ່າ ເປັນຊ້າງຕະກູນມາຕັງຄະ
ເສື່ອມກຳລັງເມື່ອອາຍຸ ໖໐ ປີ ຕົກມັນ ໓ ແຫ່ງ
ມີງາງາມ ຄວນເປັນຣາດຊະພາຫະນະ ສັນໃດ
[໓໕໘] ແມ່ນບັນດິດຫຼາຍແສນອົງກໍສັນນັ້ນ ມີລິດຫຼາຍ
ທັງໝົດເປັນພຣະອະຣະຫັນຜູ້ປະເສີດຂອງພຣະພຸດທະເຈົ້າຜູ້ປະເສີດ
ທ່ານເຫຼົ່ານັ້ນບໍ່ເປັນແນວນັ້ນ ໃນການຕັດສິນໃຈ

[໗໕໗] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສມີໃຈຍິນດີນອບນ້ອມ
ທັງໃນປະຖົມຍາມ ມັດຊິມະຍາມ ແລະປັດສິມຍາມ
ເປັນອຸປັດຖາກພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໗໗໐] ຂ້າພະເຈົ້າມີຄວາມພຽນ ມີປັນຍາຮັກສາຕົນ ມີສະຕິສໍາປະຊັນຍະ
ບັນລຸໂສດາປັດຕິຜົນ ສະຫຼຽວສະຫຼາດໃນເສຂະພູມ

[໗໗໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສ້າງກໍາໃດໄວ້
ຂ້າພະເຈົ້າໄດ້ບັນລຸເຖິງພູມແຫ່ງກໍານັ້ນແລ້ວ
ສັດທາທີ່ຕັ້ງໝັ້ນແລ້ວມີຜົນຫຼາຍ

[໗໗໒] ການທີ່ຂ້າພະເຈົ້າໄດ້ມາໃນສໍານັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໗໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອານົນເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອານັນທະເຖຣາປະທານທີ ໑໐ ຈົບ**

**ອຸປາທານ ພຸດທະວັກທີ ໑ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ພຸດທາປະທານ
໒. ປັດເຈກພຸດທາປະທານ
໓. ສາຣີປຸດຕະເຖຣາປະທານ
໔. ມະຫາໂມກຄັນລານະເຖຣາປະທານ
໕. ມະຫາກັດສະປະເຖຣາປະທານ
໖. ອະນຸຣຸດທະເຖຣາປະທານ
໗. ປຸນນະມັນຕານີປຸດຕະເຖຣາປະທານ
໘. ອຸປາລີເຖຣາປະທານ
໙. ອັນຍາໂກນທັນຍະເຖຣາປະທານ
໑໐. ປິນໂທລະພາຣະທະວາຊະເຖຣາປະທານ
໑໑. ຂະທິຣະວະນິຍະເຣວະຕະເຖຣາປະທານ
໑໒. ອານັນທະເຖຣາປະທານ

ຮິບໂຮມຄາຖາໄວ້ທັງໝົດໄດ້ ໗໕໐ ຄາຖາ

# ໘. ສີຫາສະນິຍະວັກ

## ໝວດວ່າດ້ວຍການຖວາຍບັນລັງທີ່ປະທັບເປັນຕົ້ນ

## ໑. ສີຫາສະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສີຫາສະນະທາຍະກະເຖຣະ

(ພຣະສີຫາສະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ ສະເດັດດັບຂັນທະປະຣິນິບພານແລ້ວ
ເມື່ອປາພົດ ແຜ່ກວ້າງອອກໄປ
ເມື່ອສາດສະໜາອັນມະຫາຊົນຮູ້ກັນແລ້ວ

[໒] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີໄດ້ສ້າງພຣະບັນລັງ
ເມື່ອສ້າງສຳເລັດແລ້ວໄດ້ເຮັດຕັ່ງສຳລັບຮອງພຣະບາດຖວາຍ

[໓] ໃນລະດູຝົນ ຂ້າພະເຈົ້າໄດ້ສ້າງເຮືອນຄຸມເທິງພຣະບັນລັງນັ້ນ
ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າຈຶ່ງໄດ້ໄປບັງເກີດໃນສະຫວັນຊັ້ນດຸສິດ

[໔] ບຸນກຳໄດ້ສ້າງວິມານຍາວ ໒໔ ໂຍດ
ກວ້າງ ໑໔ ໂຍດໄວ້ຢ່າງດີໃນຂະນະນັ້ນເພື່ອຂ້າພະເຈົ້າ

[໕] ນາງເທບກັນຍາ ໗,໐໐໐ ນາງ ແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ
ບຸນກຳໄດ້ເນຣະມິດບັນລັງຄຳໄວ້ຢ່າງດີໃນວິມານ

[໖] ຍານຄືຊ້າງ ຍານຄືມ້າ ເຊິ່ງເປັນຍານທິບ
ໄດ້ຮັບການຈັດກຽມໄວ້ແລ້ວ
ຜາສາດແລະວໍກໍບັງເກີດຂຶ້ນຕາມຕ້ອງການ

[໗] ບັນລັງແກ້ວມະນີແລະບັນລັງໄມ້ແກ່ນຊະນິດອື່ນອີກຈຳນວນຫຼາຍ
ທັງໝົດບັງເກີດຂຶ້ນເພື່ອຂ້າພະເຈົ້າ
ນີ້ເປັນຜົນຂອງການຖວາຍພຣະບັນລັງ

[๗] ຂ້າພະເຈົ້າສຸບເກີບເຊິ່ງເຮັດດ້ວຍຄໍາ
ເງິນ ແກ້ວຜະລຶກ ແລະແກ້ວໄພທູນ
ນີ້ເປັນຜົນຂອງການຖວາຍຕັ່ງສໍາລັບຮອງພຣະບາດ

[໙] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກໍາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງບຸນກໍາ

[໑໐] ໃນກັບທີ ໑໖ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໖ ຊາດ
ມີພຣະນາມວ່າອິນທະ
ໃນກັບທີ ໑໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໖ ຊາດ
ມີພຣະນາມວ່າສຸມະນະ

[໑໑] ໃນກັບທີ ໑໐ ຖ້ວນນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໖ ຊາດ
ມີພຣະນາມວ່າວະຣຸນະ
ສົມບູນດ້ວຍຣັດຕະນະ ໗ ປະການ ຊົງເປັນໃຫຍ່ໃນທະວີບທັງ ໔

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານສີຫາສະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ສີຫາສະນະທາຍະກະເຖຣາປະທານທີ ໑ ຈົບ**

## ໔. ເອກະຖໍາພິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະຖໍາພິກະເຖຣະ

(ພຣະເອກະຖໍາພິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓]　　ພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ມີຄະນະອຸປາສິກາໝູ່ໃຫຍ່ ແລະອຸປາສິກາເຫຼົ່ານັ້ນ
ເຖິງພຣະພຸດທະເຈົ້າວ່າເປັນບ່ອນເພິ່ງ ເຊື່ອຟັງພຣະຕະຖາຄົດ

[໑໔]　　ອຸປາສິກາທັງໝົດມາປະຊຸມເປັກສາຫາຣືກັນ
ຈະສ້າງສາລາໂຮງສັນຖວາຍພຣະສາດສະດາ
ແຕ່ຍັງຫາເສົາອີກໜຶ່ງຕົ້ນບໍ່ໄດ້
ຈຶ່ງທ່ຽວສະແຫວງຫາໃນປ່າໃຫຍ່

[໑໕]　　ຂ້າພະເຈົ້າໄດ້ພົບອຸປາສິກາເຫຼົ່ານັ້ນໃນປ່າ
ຈຶ່ງເຂົ້າໄປຫາຄະນະອຸປາສິກາແລ້ວຍົກມືໄຫວ້
ໄດ້ສອບຖາມຄະນະອຸປາສິກາໃນຄັ້ງນັ້ນ

[໑໖]　　ໝູ່ອຸປາສິກາຜູ້ມີສີນທີ່ຂ້າພະເຈົ້າຖາມໄດ້ຊີ້ແຈ່ງໃຫ້ຂ້າພະເຈົ້າຮູ້ວ່າ
ພວກເຮົາຕ້ອງການຈະສ້າງສາລາໂຮງສັນ
ແຕ່ຍັງຫາເສົາອີກໜຶ່ງຕົ້ນບໍ່ໄດ້

[໑໗]　　(ຂ້າພະເຈົ້າຈຶ່ງກ່າວວ່າ) ທ່ານທັງຫຼາຍ
ຈົ່ງໃຫ້ເສົາຕົ້ນໜຶ່ງ (ເປັນພາຣະ) ຂອງຂ້າພະເຈົ້າ
ຂ້າພະເຈົ້າຈັກຖວາຍພຣະສາດສະດາ ຂ້າພະເຈົ້າຈັກນຳເສົາມາໃຫ້
ທ່ານທັງຫຼາຍບໍ່ຕ້ອງຂວນຂວາຍດອກ

[໑໘]　　ອຸປາສິກາເຫຼົ່ານັ້ນເຫຼື້ອມໃສ ພໍໃຈ
ໃຫ້ເສົາແກ່ຂ້າພະເຈົ້າ ແລ້ວກັບຈາກບ່ອນນັ້ນໄປເຮືອນຂອງຕົນ

[໑໙]　　ເມື່ອຄະນະອຸປາສິກາໄປໄດ້ບໍ່ດົນ
ຂ້າພະເຈົ້າຈຶ່ງໄດ້ຖວາຍເສົາ ມີຈິດຣ່າເຣີງ ເບີກບານ
ໄດ້ຍົກເສົານັ້ນ ເປັນຕົ້ນທີ່ໜຶ່ງ

[໔໐]　　ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າໄດ້ເກີດໃນວິມານ
ວິມານຂອງຂ້າພະເຈົ້າສູງຕະຫງ່ານເຖິງ ໗ ຊັ້ນ

[໔໑]　　ເມື່ອກອງຕີດັ່ງກະຫຶ່ມຢູ່
ຂ້າພະເຈົ້າໄດ້ຮັບການບຳລຸງຢູ່ທຸກເມື່ອ
ໃນກັບທີ ໕໕ ຂ້າພະເຈົ້າໄດ້ເປັນພຣະຣາຊາມີນາມວ່າຍະໂສທະຣະ

[໔໔]　　ແມ່ນໃນສະຖານທີ່ນັ້ນ ວິມານຂອງຂ້າພະເຈົ້າກໍສູງຕະຫງ່ານເຖິງ ໗ ຊັ້ນ
ປະກອບດ້ວຍເຮືອນຍອດຢ່າງດີ ມີເສົາຕົ້ນດຽວເປັນຕາອອນຊອນໃຈ

[໔໓]　　ໃນກັບທີ ໔໑ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເກີດເປັນກະສັດມີນາມວ່າອຸເທນະ
ແມ່ນໃນສະຖານທີ່ນັ້ນ ວິມານຂອງຂ້າພະເຈົ້າກໍສູງຕະຫງ່ານເຖິງ ໗ ຊັ້ນ

[໔໔]　　ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ຂ້າພະເຈົ້າກໍໄດ້ສະເຫວີຍຄວາມສຸກນັ້ນທັງໝົດ
ນີ້ເປັນຜົນແຫ່ງການຖວາຍເສົາຕົ້ນໜຶ່ງ

[໔໕]　　ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເສົາໄວ້ ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເສົາຕົ້ນໜຶ່ງ

[໔໖]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະຖຳພິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະຖຳພິກະເຖຣາປະທານທີ ໔ ຈົບ**

## ໖. ນັນທະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນັນທະເຖຣະ

(ພຣະນັນທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗]　　ຂ້າພະເຈົ້າໄດ້ຖວາຍຜ້າເປືອກໄມ້ແດ່ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າປະທຸມຸດຕະຣະ ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່
ຜູ້ເປັນພຣະສະຍຳພູ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

[໔໘]　　ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳເຊິ່ງຮຸ່ງເຮືອງສູງສຸດ

ຊຶ່ງພະຍາກອນຂ້າພະເຈົ້ານັ້ນວ່າ
ດ້ວຍການຖວາຍຜ້ານີ້ ທ່ານຈັກເປັນຜູ້ມີຜິວພັນດັ່ງຄຳ

[໔໙] ທ່ານຈັກໄດ້ສະເຫວີຍສົມບັດທັງ ໔
ຖືກກຸສົນມູນຕັກເຕືອນແລ້ວ
ຈັກໄປເກີດເປັນພຣະອະນຸຊາ
ຂອງພຣະຜູ້ມີພຣະພາກເຈົ້າຊຶ່ງພຣະນາມວ່າໂຄດົມ

[໕໐] ທ່ານມີປົກກະຕິສຸກສະບາຍຖືກຣາຄະເຮັດໃຫ້ກຳໜັດ
ປະກອບດ້ວຍຄວາມກຳໜັດໃນການມະຖຸນ
ຖືກພຣະພຸດທະເຈົ້າຊຶ່ງຕັກເຕືອນແລ້ວວ່າ
ຍ້ອນເຫດນັ້ນທ່ານຈັກບວດບໍ

[໕໑] ທ່ານເມື່ອອອກບວດໃນສາດສະໜາ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມນັ້ນ
ຖືກກຸສົນມູນຕັກເຕືອນແລ້ວ
ກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໕໔] ໃນກັບທີ ໑,໑໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ມີພຣະນາມວ່າເຈລະ
ໃນກັບທີ ໖໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ພຣະນາມວ່າອຸປະເຈລະ
[໕໕] ໃນກັບທີ ໑,໐໐໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ມີພຣະນາມວ່າເຈລະ
ສົມບູນດ້ວຍຣັດຕະນະ ໗ ປະການ ຊຶ່ງເປັນໃຫຍ່ໃນທະວີບທັງ ໔
[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນັນທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນັນທະເຖຣາປະທານທີ ៦ ຈົບ**

# ໔. ຈູລະປັນຖະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈູລະປັນຖະກະເຖຣະ

(ພຣະຈູລະປັນຖະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ສົມຄວນຮັບເຄື່ອງບູຊາ ພຣະອົງສະເດັດຫຼີກອອກຈາກໝູ່ຄະນະ
ໄປອາໄສຢູ່ທີ່ພູເຂົາຫິມະພານ ໃນຄັ້ງນັ້ນ

[໓໖] ຄັ້ງນັ້ນ ແມ່ນຂ້າພະເຈົ້າກໍຢູ່ໃນອາສົມໃກ້ພູເຂົາຫິມະພານ
ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຜູ້ມີຄວາມພຽນຫຼາຍ
ຜູ້ຊົງເປັນຜູ້ນຳສັດໂລກ ເຊິ່ງສະເດັດມາບໍ່ດົນ

[໓໗] ຂ້າພະເຈົ້າຖືຄັນຮົ່ມດອກໄມ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ
ຜູ້ອົງອາດກວ່ານໍຣະຊົນ ຂ້າພະເຈົ້າໄດ້ທຳອັນຕະລາຍ (ລົບກວນສະມາທິ)
ຕໍ່ພຣະຜູ້ມີພຣະພາກເຈົ້າຜູ້ກຳລັງເຂົ້າສະມາທິ

[໓໘] ຂ້າພະເຈົ້າໃຊ້ມືທັງ ໒ ປະຄອງຄັນຮົ່ມດອກໄມ້ແລ້ວ
ໄດ້ຖວາຍພຣະຜູ້ມີພຣະພາກເຈົ້າ
ພຣະຜູ້ມີພຣະພາກເຈົ້າມະຫາມຸນີພຣະນາມວ່າປະທຸມຸດຕະຣະຊົງຮັບແລ້ວ

[໓໙] ເທວະດາເຫຼົ່ານັ້ນທັງໝົດມີໃຈຍິນດີ
ພາກັນເຂົ້າໄປສູ່ປ່າຫິມະພານ ສົ່ງສຽງສາທຸການວ່າ
ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ ຈັກຊົງອະນຸໂມທະນາ

[໔໐] ເມື່ອແລ້ວ ເທວະດາເຫຼົ່ານັ້ນ
ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຜູ້ສູງສຸດແຫ່ງນໍຣະຊົນ
ຂະນະເມື່ອຂ້າພະເຈົ້າກັ້ງຮົ່ມດອກບົວຊັ້ນດີເລີດຢູ່ໃນອາກາດ

[໔໑] (ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະຣະຕັດວ່າ)
ເຮົາຈັກພະຍາກອນດາບົດຜູ້ທີ່ປະຄອງຮົ່ມດອກບົວຮ້ອຍກີບຖວາຍເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວ

[໔໒] ດາບົດນີ້ຈັກຄອງເທວະສົມບັດ ໒໕ ກັບ
ຈັກເປັນພຣະເຈົ້າຈັກກະພັດ ໓໔ ຊາດ

[໔໓] ເຂົາວຽນວ່າຍຕາຍເກີດຢູ່ໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ໃນກຳເນີດນັ້ນດອກບົວກໍຈັກກັ້ງຢູ່ເບື້ອງເທິງເຂົາຜູ້ນັ່ງຫຼືຢືນຢູ່ກາງແຈ້ງ

[໔໔] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໕] ເມື່ອພຣະສາດສະດາຊົງປະກາດທຳວິໄນແລ້ວ
ດາບົດນີ້ຈັກເກີດເປັນມະນຸດ
ເປັນຜູ້ສູງສຸດໃນການແປງກາຍໄດ້ດັ່ງໃຈນຶກ

[໔໖] ຈັກມີຊາຍໜຸ່ມສອງອ້າຍນ້ອງຊື່ວ່າປັນຖະກະ ທັງ ໔ ຄົນ
ເມື່ອໄດ້ບັນລຸປະໂຫຍດຢ່າງສູງສຸດແລ້ວ
ຈັກເຮັດໃຫ້ສາດສະໜາຮຸ່ງເຮືອງ

[໔໗] ຂ້າພະເຈົ້ານັ້ນອາຍຸໄດ້ ໑໘ ປີ ບວດເປັນບັນພະຊິດ
ຍັງບໍ່ສຳເລັດຄຸນວິເສດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າຜູ້ສາກະຍະບຸດ

[໔໘] ຂ້າພະເຈົ້າໂງ່ຈ້າ ຍ້ອນເຄີຍດູໝິ່ນຜູ້ອື່ນ
ພຣະອ້າຍຈຶ່ງຂັບໄລ່ຂ້າພະເຈົ້າວ່າຈົ່ງກັບໄປບ້ານຂອງຕົນດຽວນີ້

[໔໙] ຂ້າພະເຈົ້ານັ້ນຖືກຂັບໄລ່ແລ້ວເສຍໃຈ
ຢືນຢູ່ທີ່ຊຸ້ມປະຕູສັງຄາຣາມ
ໝົດອາໄລໃນຄວາມເປັນສະມະນະ

[໕໐] ລຳດັບນັ້ນ ພຣະສາດສະດາໄດ້ສະເດັດມາຍັງສະຖານທີ່ນັ້ນ
ຊົງລູບຫົວຂ້າພະເຈົ້າ ຊົງຈູງແຂນຂ້າພະເຈົ້າພາເຂົ້າສູ່ສັງຄາຣາມ

[໕໑] ພຣະສາດສະດາໄດ້ປະທານຜ້າສຳລັບເຊັດຕີນໃຫ້ຂ້າພະເຈົ້າ
ດ້ວຍຄວາມອະນຸເຄາະແລ້ວຕັດວ່າ
ທ່ານຈົ່ງອະທິຖານຜ້າສະອາດແນວນີ້
ຂ້າພະເຈົ້າໄດ້ອະທິຖານ ໃນທີ່ສົມຄວນ

[໕໔] ຂ້າພະເຈົ້າໃຊ້ມືທັງ ໔ ຈັບຜ້າຜືນນັ້ນແລ້ວຣະລຶກເຖິງດອກບົວ

ຈິດຂອງຂ້າພະເຈົ້າກໍນ້ອມໄປໃນດອກບົວນັ້ນ
ຂ້າພະເຈົ້າຈຶ່ງໄດ້ບັນລຸອະຣະຫັນຕະຜົນ

[໕໓] ຂ້າພະເຈົ້າເຖິງຄວາມສຳເລັດໃນການແປງກາຍທັງຫຼາຍ
ໄດ້ດັ່ງໃຈນຶກໃນທີ່ທຸກສະຖານ
ກໍານົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຈູລະປັນຖະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈູລະປັນຖະກະເຖຣາປະທານທີ ໔ ຈົບ**

# ໕. ປີລິນທະວັດສະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປີລິນທະວັດສະເຖຣະ

(ພຣະປີລິນທະວັດສະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໕] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າສຸເມທະ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ຊົງເປັນບຸກຄົນຜູ້ເລີດ
ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີໄດ້ກະທຳການບູຊາພຣະສະຖູບ

[໕໖] ໃນສະມາຄົມນັ້ນ ພຣະຂີນາສົບເຫຼົ່າໃດຜູ້ໄດ້ອະພິນຍາ ໖ ມີລິດຫຼາຍ
ຂ້າພະເຈົ້າໄດ້ນິມົນພຣະຂີນາສົບເຫຼົ່ານັ້ນມາ
ແລ້ວກະທຳສັງຄະພັດຖວາຍ ໃນສະມາຄົມນັ້ນ

[໕໗] ຄັ້ງນັ້ນ ມີພິກຂຸອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າສຸເມທະ ພິກຂຸນັ້ນກໍມີນາມວ່າສຸເມທະ
ໄດ້ອະນຸໂມທະນາ ໃນຄັ້ງນັ້ນ

[໕໘] ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າໄດ້ເກີດໃນວິມານ
ນາງອັບປະສອນ ໘໖,໐໐໐ ນາງ ຣື່ນຣົມກັບຂ້າພະເຈົ້າ

[໕໙] ນາງອັບປະສອນເຫຼົ່ານັ້ນ ປະພຶດຕາມຄວາມຕ້ອງການ
ຂອງຂ້າພະເຈົ້າທຸກຢ່າງ
ໃນທຸກສະໄໝ ຂ້າພະເຈົ້າກໍໄດ້ປົກຄອງເທວະດາເຫຼົ່າອື່ນ
ນີ້ເປັນຜົນແຫ່ງບຸນກຳ

[໖໐] ໃນກັບທີ ໘໕ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເກີດເປັນພຣະເຈົ້າຈັກກະພັດພຣະນາມວ່າວະຣຸນະ
ມີໂພຊະນາຫານສະອາດໃນຄັ້ງນັ້ນ

[໖໑] ມະນຸດເຫຼົ່ານັ້ນບໍ່ຕ້ອງຫວ່ານພືດ ບໍ່ຕ້ອງນຳໄຖໄປນາ
ບໍລິໂພກເຂົ້າສາລີທີ່ບໍ່ຕ້ອງຫຸງດ້ວຍຟືນ

[໖໒] ຂ້າພະເຈົ້າເມື່ອຄອງຣາດຊະສົມບັດໃນອັດຕະພາບນັ້ນ
ໄດ້ໄປເກີດເປັນເທວະດາອີກ
ແມ່ນໃນຄັ້ງນັ້ນ ໂພຄະສົມບັດເຊັ່ນນີ້ກໍໄດ້ບັງເກີດແກ່ຂ້າພະເຈົ້າ

[໖໓] ສັດທັງປວງທັງທີ່ເປັນມິດຫຼືບໍ່ແມ່ນມິດ
ຍ່ອມບໍ່ບຽດບຽນຂ້າພະເຈົ້າ
ຂ້າພະເຈົ້າເປັນທີ່ຮັກຂອງສັດທັງປວງ
ນີ້ເປັນຜົນແຫ່ງບຸນກຳ

[໖໔] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການລູບທາຂອງຫອມ

[໖໕] ໃນພັດທະຣະກັບນີ້ ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໑ ຊາດ
ເປັນໃຫຍ່ກວ່າຊົນ ເປັນຜູ້ມີພະລານຸພາບຫຼາຍ

[໖໖] ຂ້າພະເຈົ້ານັ້ນ ຕັ້ງໝັ້ນໃນສີນ ໕
ໄດ້ພາໝູ່ຊົນຈຳນວນຫຼາຍໃຫ້ເຖິງສຸກຄະຕິ
ໄດ້ເປັນທີ່ຮັກຂອງເທວະດາທັງຫຼາຍ

[໖໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປິລິນທະວັດສະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປິລິນທະວັດສະເຖຣາປະທານທີ ໕ ຈົບ**

# ໖. ຣາຫຸນເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຣາຫຸນເຖຣະ

(ພຣະຣາຫຸນເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໙] ຂ້າພະເຈົ້າໄດ້ປູແກ້ວເທິງຜາສາດ ໗ ຊັ້ນ
ຖວາຍແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໖໑] ພຣະຜູ້ມີພຣະພາກເຈົ້າມະຫາມຸນີ
ຜູ້ເປັນໃຫຍ່ແຫ່ງເທວະດາແລະມະນຸດ ຊົງອົງອາດກວ່ານໍຣະຊົນ
ຄັບຄັ່ງໄປດ້ວຍພຣະຂີນາສົບ ໑,໐໐໐ ອົງ
ໄດ້ສະເດັດເຂົ້າໄປສູ່ພຣະຄັນທະກຸດຕີ

[໗໐] ພຣະສາດສະດາຜູ້ຊົງເປັນເທບຍິ່ງກວ່າເທບ
ຊົງອົງອາດກວ່ານໍຣະຊົນ ຊົງຍັງພຣະຄັນທະກຸດຕີໃຫ້ຮຸ່ງເຮືອງ
ປະທັບຢືນໃນທ່າມກາງໝູ່ພິກຊຸໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໗໑] ເຮົາຈັກພະຍາກອນອຸປາສົກຜູ້ເຮັດບ່ອນນອນນີ້ໃຫ້ໂຊດຊ່ວງແລ້ວ
ເໝືອນແວ່ນແກ້ວທີ່ປູໄວ້ຢ່າງດີ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໗໘] ຜາສາດຄຳ ຜາສາດເງິນ ຫຼືຜາສາດແກ້ວໄພທູນ
ແນວໃດແນວໜຶ່ງ ທີ່ໜ້າພໍໃຈ
ຈັກບັງເກີດແກ່ອຸປາສົກນັ້ນ

[໗໓] ອຸປາສົກນັ້ນຈັກເປັນຈອມເທບ ຄອງເທວະສົມບັດ ໖໔ ຊາດ
ຈັກເປັນພຣະເຈົ້າຈັກກະພັດຕິດຕໍ່ກັນ ໑,໐໐໐ ຊາດ

[໗໔] ໃນກັບທີ ໘໑ (ນັບຈາກກັບນີ້ໄປ)

ອຸປາສິການັ້ນຈັກເປັນພຣະເຈົ້າຈັກກະພັດພຣະນາມວ່າວິມະລະ
ເປັນໃຫຍ່ມີໄຊຊະນະໃນທະວີບທັງ ໔

[໗໕] ມີນະຄອນນາມວ່າເຣນຸວະດີ
ຍາວ ໖໐໐ ໂຍດ ສີ່ຫຼ່ຽມຈະຕຸຣັດ

[໗໖] ມີຜາສາດຊື່ວ່າສຸທັດສະນະ ວິດສຸກຳເທບພະບຸດເນຣະມິດໃຫ້
ປະກອບດ້ວຍເຮືອນຍອດຢ່າງດີ
ປະດັບປະດາດ້ວຍຣັດຕະນະ ໗ ປະການ

[໗໗] ນະຄອນນັ້ນບໍ່ສະຫງັດຈາກສຽງ ໑໐ ປະການ
ເດຍລະດາດດ້ວຍພວກວິທະຍາທອນ
ຈັກເປັນເໝືອນເມືອງສຸທັດສະນະຂອງເຫຼົ່າເທວະດາ

[໗໘] ພໍເມື່ອພຣະອາທິດຂຶ້ນ ນະຄອນນັ້ນກໍເປ່ງຣັດສະໝີ
ນະຄອນນັ້ນຮຸ່ງເຮື່ອງເປັນນິດ ແຜ່ອອກໄປ ໘ ໂຍດ ໂດຍຮອບ

[໗໙] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໘໐] ອຸປາສິການັ້ນຖືກກຸສົນມູນຕັກເຕືອນແລ້ວຈັກຈຸຕິຈາກສະຫວັນຊັ້ນດຸສິດ
ເກີດເປັນພຣະໂອຣົດຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໘໑] ຖ້າຫາກເຂົາຈະເພິ່ງຢູ່ຄອງເຮືອນກໍຈະເພິ່ງໄດ້ເປັນພຣະເຈົ້າຈັກກະພັດ
ແຕ່ຂໍ້ທີ່ເຂົາຜູ້ຄົງທີ່ ຈະຍິນດີໃນການຢູ່ຄອງເຮືອນນັ້ນ
ບໍ່ແມ່ນຖານະທີ່ຈະເປັນໄດ້ (ເປັນໄປບໍ່ໄດ້)

[໘໔] ເຂົາຈັກຕ້ອງອອກຈາກເຮືອນໄປບວດ ມີຂໍ້ວັດອັນດີ
ຈັກສຳເລັດເປັນພຣະອະຣະຫັນໂດຍນາມວ່າຣາຫຸນ

[໘໖] ພຣະຣາຫຸນເປັນຜູ້ມີປັນຍາຮັກສາຕົນ ສົມບູນດ້ວຍສິນ
ເໝືອນນົກຕ້ອຍຕີວິດຮັກສາໜ່ວຍໄຂ່ ເໝືອນຈາມະຣີຮັກສາຂົນຫາງ
ພຣະມະຫາມຸນີໄດ້ຊົງເຫັນເຮົາແລ້ວ

[໘໔] ຂ້າພະເຈົ້າຮູ້ທົ່ວເຖິງທຳຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ຍິນດີຢູ່ໃນສາດສະໜາ
ກໍານົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໗
ແລະອະພິນຍາ ໒ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຣາທຸນເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຣາທຸນເຖຣາປະທານທີ ໖ ຈົບ**

# ໗. ອຸປະເສນະວັງຄັນຕະປຸດຕະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸປະເສນະວັງຄັນຕະບຸດເຖຣະ

(ພຣະອຸປະເສນະວັງຄັນຕະບຸດເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໒] ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ
ຜູ້ສູງສຸດແຫ່ງນໍຣະຊົນພຣະອົງນັ້ນ
ປະທັບນັ່ງຢູ່ໃນ ເງີບພູ

[໗໗] ຄັ້ງນັ້ນ ຂ້າພະເຈົ້າໄດ້ເຫັນດອກກັນນິກາກໍາລັງບານ
ຈຶ່ງເດັດກ້ານດອກກັນນິການັ້ນມາປະດັບຄັນຮົ່ມແລ້ວ
ບູຊາພຣະພຸດທະເຈົ້າ

[໗໘] ຂ້າພະເຈົ້າໄດ້ຖວາຍອາຫານບິນທະບາດ ເປັນເຂົ້າສຸກຊັ້ນພິເສດ
ຈັດວ່າເປັນໂພຊະນະຊັ້ນດີ ໄດ້ນິມົນສະມະນະ ໗ ອົງ
ເປັນ ໘ ອົງລວມທັງພຣະພຸດທະເຈົ້າ ໃຫ້ສັນ ໃນສະຖານທີ່ວິເວກນັ້ນ

[໗໙] ພຣະຜູ້ມີພຣະພາກເຈົ້າຜູ້ຊົງມີຄວາມພຽນຫຼາຍ
ຜູ້ເປັນພຣະສະຍໍາພູ ຊົງເປັນບຸກຄົນຜູ້ເລີດ ຊົງອະນຸໂມທະນາວ່າ
ດ້ວຍການຖວາຍຄັນຮົ່ມແລະການຖວາຍເຂົ້າສຸກຊັ້ນດີນີ້

[໘໐] ດ້ວຍຈິດທີ່ເຫຼື້ອມໃສນັ້ນ ທ່ານຈັກໄດ້ສະເຫວີຍສົມບັດ
ເຂົາຈັກເປັນຈອມເທບ ຄອງເທວະສົມບັດ ໓໒ ຊາດ

[໘໑] ຈັກເປັນພຣະເຈົ້າຈັກກະພັດ ໘໑ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໘໒] ເຫຼົ່າບັນດິດ ຮຽກຜູ້ມີປັນຍາເໝືອນແຜ່ນດິນ
ມີປັນຍາດີວ່າສຸເມທະ
ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ຜູ້ນັ້ນຈັກສົມພົບໃນຣາດຊະສະກູນໂອກກາກະຣາດ

[໘໓] ຜູ້ນັ້ນຈັກເປັນພຣະພຸດທະເຈົ້າພຣະນາມວ່າໂຄດົມ ຕາມພຣະໂຄດ
ເມື່ອສາດສະໜາຮຸ່ງເຮືອງຢູ່ ເຂົາຈັກໄປເກີດເປັນມະນຸດ

[໘໔] ຈັກມີນາມວ່າອຸປະເສນະ ເປັນສາວົກຂອງພຣະສາດສະດາ
ຈັກດຳຣົງຢູ່ໃນຕຳແໜ່ງອັນເລີດ
ຍ້ອນເປັນຜູ້ເຮັດໃຫ້ປະຊາຊົນຮອບດ້ານເຫຼື້ອມໃສ

[໘໕] ອັດຕະພາບສຸດທ້າຍຂອງຂ້າພະເຈົ້າຍັງເປັນໄປຢູ່
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຊະນະມານພ້ອມທັງພາຫະນະ (ຄືເສນາມານ) ແລ້ວ
ຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍຢູ່

[໘໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອຸປະເສນະວັງຄັນຕະບຸດເຖຣະໄດ້ພາສິດຄາຖາເຫຼົ່ານີ້ໄວ້ດ້ວຍປະການແນວນີ້

**ອຸປະເສນະວັງຄັນຕະປຸດຕະເຖຣາປະທານທີ ໗ ຈົບ**

**ພານະວານທີ ໑ ຈົບ**

## ໘. ຣັດຖະປາລະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຣັດຖະບານເຖຣະ

(ພຣະຣັດຖະບານເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໗] ຊ້າງເຊື້ອກປະເສີດ
ມີງາງອນງາມ ຄວນເປັນພຣະຣາດຊະພາຫະນະ
ຂ້າພະເຈົ້າຖວາຍແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໙໘] ຊ້າງນັ້ນ ເຂົາກັ້ນສະເວດຕະສັດໃຫ້ງົດງາມ
ພ້ອມທັງໝໍຂະມັງເວດ ພ້ອມທັງນາຍຄວານຊ້າງ
ຂ້າພະເຈົ້າໃຫ້ຕີຣາຄາຊ້າງພ້ອມທັງສິ່ງຂອງນັ້ນທັງໝົດແລ້ວ
ໄດ້ໃຫ້ສ້າງສັງຄາຣາມຖວາຍ

[໙໙] ຂ້າພະເຈົ້າໄດ້ໃຫ້ສ້າງຜາສາດ ໕໔,໐໐໐ ຫຼັງ (ໄວ້ພາຍໃນວັດ)
ໄດ້ພ່ຳເພັງທານດັ່ງຫ້ວງນ້ຳໃຫຍ່ແລ້ວມອບຖວາຍແດ່ພຣະຜູ້ມີພຣະພາກເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໐໐] ພຣະຜູ້ມີພຣະພາກເຈົ້າຜູ້ມີຄວາມພຽນຫຼາຍ ຜູ້ເປັນພຣະສະຍຳພູ
ຊົງເປັນບຸກຄົນຜູ້ເລີດ ຊົງອະນຸໂມທະນາ
ສະແດງອະມະຕະບົດໃຫ້ຊົນທັງປວງຣ່າເຣີງຢູ່

[໑໐໑] ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳເຊິ່ງຮຸ່ງເຮືອງສູງສຸດ
ຊົງປະກາດຜົນບຸນທີ່ຂ້າພະເຈົ້າເຮັດແລ້ວນັ້ນໃຫ້ຜາກົດໂດຍພິເສດ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໐໒] ທ່ານຜູ້ນີ້ໄດ້ໃຫ້ສ້າງຜາສາດ ໕໔,໐໐໐ ຫຼັງ
ເຮົາຈັກກ່າວວິບາກ ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໐໓] ຜູ້ນີ້ຈັກມີເຮືອນຍອດ ໑໘,໐໐໐ ຫຼັງ ແລະເຮືອນຍອດເຫຼົ່ານັ້ນ
ສ້າງດ້ວຍຄຳລ້ວນ ບັງເກີດໃນວິມານສູງສຸດ

[໑໐໔] ຜູ້ນີ້ຈັກເປັນຈອມເທບຄອງເທວະສົມບັດ ໕໐ ຊາດ
ແລະຈັກເປັນພຣະເຈົ້າຈັກກະພັດ ໕໘ ຊາດ

[໑໐໕] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໐໖] ຜູ້ນີ້ຖືກກຸສົນມູນຕັກເຕືອນແລ້ວຈັກຈຸຕິຈາກເທວະໂລກ
ໄປບັງເກີດໃນຕະກູນທີ່ຈະເລີນ ມີໂພຄະສົມບັດຫຼາຍ ໃນຂະນະນັ້ນ

[໑໐໗] ພາຍຫຼັງ ເຂົາຖືກກຸສົນມູນຕັກເຕືອນແລ້ວຈັກບວດ
ມີນາມວ່າຣັດຖະບານ ເປັນສາວົກຂອງພຣະສາດສະດາ

[໑໐໘] ເຂົາມີຈິດເດັດດ່ຽວເພື່ອພ່ຳເພັງພຽນ
ເປັນຜູ້ສະງົບຣະງັບ ບໍ່ມີອຸປະທິ
ກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໑໐໙] ຂ້າພະເຈົ້າລຸກຂຶ້ນແລ້ວສະລະໂພຄະສົມບັດອອກບວດ
ຂ້າພະເຈົ້າບໍ່ມີຄວາມຮັກໃນໂພຄະສົມບັດ ເໝືອນໃນກ້ອນນ້ຳລາຍ

[໑໑໐] ຂ້າພະເຈົ້າມີຄວາມພຽນສຳລັບນຳພາທຸຣະ
ເປັນຄວາມພຽນທີ່ນຳມາເຊິ່ງທຳເປັນແດນກະເສມຈາກໂຍຄະ
ຂ້າພະເຈົ້າຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໑໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະຣັດຖບານເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຣັດຖະປາລະເຖຣາປະທານທີ ໘ ຈົບ**

## ໙. ໂສປາກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂສປາກະເຖຣະ

(ພຣະໂສປາກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑໔] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ໄດ້ສະເດັດມາຍັງສຳນັກຂອງຂ້າພະເຈົ້າ
ຜູ້ກຳລັງທຳຄວາມສະອາດເງີບພູຢູ່ທີ່ພູເຂົາສູງໜ່ວຍປະເສີດ

[໑໑໕] ຂ້າພະເຈົ້າເຫັນພຣະພຸດທະເຈົ້າສະເດັດເຂົ້າມາ

ໄດ້ປູເຄື່ອງປູຖວາຍອາສະນະດອກໄມ້
ແດ່ພຣະພຸດທະເຈົ້າຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໑໑໔] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ຜູ້ຊົງເປັນຜູ້ນຳສັດໂລກ ໄດ້ປະທັບນັ່ງເທິງອາສະນະດອກໄມ້ແລ້ວ
ຊົງຮູ້ຄະຕິຂອງຂ້າພະເຈົ້າແລ້ວຕັດເຖິງສະພາວະບໍ່ທ່ຽງວ່າ

[໑໑໕] ສັງຂານທັງຫຼາຍບໍ່ທ່ຽງນໍ ມີຄວາມເກີດຂຶ້ນ
ແລະຄວາມເສື່ອມໄປເປັນທຳມະດາ ເກີດຂຶ້ນແລ້ວຍ່ອມດັບໄປ
ຄວາມເຂົ້າໄປສະງົບສັງຂານເຫຼົ່ານັ້ນໆເປັນຄວາມສຸກ

[໑໑໖] ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ສິ່ງທັງປວງ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ ຊົງເປັນນັກປາດ
ເມື່ອຕັດດັ່ງນີ້ແລ້ວໄດ້ສະເດັດເຫາະຂຶ້ນໄປເທິງທ້ອງຟ້າດັ່ງພະຍາຫົງ

[໑໑໗] ຂ້າພະເຈົ້າລະທິດຖິຂອງຕົນແລ້ວ ຈະເລີນອະນິດຈະສັນຍາ
(ກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)
ເມື່ອຈະເລີນອະນິດຈະສັນຍາໄດ້ວັນດຽວ ກໍສິ້ນຊີວິດ ໃນບ່ອນນັ້ນເອງ

[໑໑໘] ຂ້າພະເຈົ້າສະເຫວີຍສົມບັດທັງ ໒ ແລ້ວ ຖືກກຸສົນມູນຕັກເຕືອນ
ມາເຖິງພົບສຸດທ້າຍໄດ້ເກີດໃນຕະກູນພໍ່ຄົວ

[໑໑໙] ຂ້າພະເຈົ້າອອກຈາກເຮືອນບວດເປັນບັນພະຊິດ
ມີອາຍຸ ໗ ຂວບກໍໄດ້ບັນລຸອະຣະຫັນຕະຜົນ

[໑໒໐] ຂ້າພະເຈົ້າພໍ່າເພັງພຽນມີຈິດເດັດດ່ຽວ ຕັ້ງໝັ້ນຢູ່ໃນສິນດ້ວຍດີ
ໃຫ້ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດຍິ່ງຊົງພໍພຣະທະໄທແລ້ວໄດ້ອຸປະສົມບົດ

[໑໒໑] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍອາສະນະດອກໄມ້

[໑໒໒] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຈະເລີນສັນຍາໄວ້ຄັ້ງນັ້ນ ເມື່ອຈະເລີນສັນຍານັ້ນຢູ່
ຂ້າພະເຈົ້າໄດ້ບັນລຸຄວາມສິ້ນອາສະວະແລ້ວ

[໑໘໓]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
	ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂສປາກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂສປາກະເຖຣາປະທານທີ ໙ ຈົບ**

# ໑໐. ສຸມັງຄະລະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸມັງຄະລະເຖຣະ

(ພຣະສຸມັງຄະລະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘໔]	ຂ້າພະເຈົ້າປະສົງຈະຖວາຍເຄື່ອງບູຊາສັກກາຣະ
	ຈຶ່ງໃຫ້ຈັດກຽມໂພຊະນາຫານ
	ຢືນຕ້ອນຮັບພາມທັງຫຼາຍຢູ່ທີ່ໂຮງກວ້າງໃຫຍ່

[໑໘໕]	ຄັ້ງນັ້ນ ຂ້າພະເຈົ້າໄດ້ເຫັນພຣະຜູ້ມີພຣະພາກສຳມາສຳພຸດທະເຈົ້າ
	ພຣະນາມວ່າປິຍະທັດສີ ຜູ້ມີພຣະຍົດຍິ່ງໃຫຍ່
	ຜູ້ຊົງແນະນຳສັດໂລກທັງປວງໂດຍວິເສດ
	ຜູ້ເປັນພຣະສະຍຳພູ ຊົງເປັນບຸກຄົນຜູ້ເລີດ

[໑໘໖]	ຜູ້ໂຊດຊ່ວງ ມີໝູ່ສາວົກຫ້ອມລ້ອມ
	ຮຸ່ງເຮືອງດັ່ງດວງອາທິດສະເດັດພຸດທະດຳເນີນໄປທີ່ຖະໜົນ

[໑໘໗]	ຂ້າພະເຈົ້າຈຶ່ງປະຄອງອັນຊະລີ ທຳຈິດຂອງຕົນໃຫ້ເຫຼື້ອມໃສ
	ທູນນິມົນດ້ວຍໃຈເທົ່ານັ້ນວ່າ
	ຂໍເຊີນພຣະມະຫາມຸນີສະເດັດມາເທີ້ນ

[໑໘໘]	ພຣະສາດສະດາຜູ້ປະເສີດໃນໂລກ
	ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ
	ໄດ້ສະເດັດມາຍັງປະຕູເຮືອນຂອງຂ້າພະເຈົ້າ
	ພ້ອມກັບພຣະຂີນາສົບ ໑,໐໐໐ ອົງ

[໑໘໙]	ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ

ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຜູ້ສູງສຸດແຫ່ງບຸຣຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂໍເຊີນສະເດັດຂຶ້ນຜາສາດ
ປະທັບນັ່ງເທິງອາສະນະສູງສຸດເທີ້ນ ຂ້ານ້ອຍ

[໑໓໐] ພຣະຜູ້ມີພຣະພາກເຈົ້າຜູ້ຊົງຝຶກພຣະອົງແລ້ວ ມີບໍລິວານທີ່ຝຶກແລ້ວ ຊົງຂ້າມພົ້ນແລ້ວ ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດຂຶ້ນຜາສາດແລ້ວ ປະທັບນັ່ງເທິງອາສະນະທີ່ປະເສີດ

[໑໓໑] ອາມິດໃດທີ່ຂ້າພະເຈົ້າຈັດກຽມໄວ້ ມີຢູ່ໃນເຮືອນຕົນ ຂ້າພະເຈົ້າເປັນຜູ້ເຫຼື້ອມໃສໄດ້ຖວາຍອາມິດນັ້ນ ແດ່ພຣະພຸດທະເຈົ້າດ້ວຍມືທັງ ໘ ຂອງຕົນ

[໑໓໘] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ເກີດໂສມະນັດ ຈຶ່ງປະນົມມື ນອບນ້ອມພຣະພຸດທະເຈົ້າຜູ້ປະເສີດທີ່ສຸດວ່າ ໂອນໍ ພຣະພຸດທະເຈົ້າຍິ່ງໃຫຍ່ແທ້ນໍ

[໑໓໓] ບັນດາພຣະອະຣິຍະບຸກຄົນ ໘ ຜູ້ນັ່ງສັນຢູ່ ມີພຣະຂີນາສົບຈຳນວນຫຼາຍ ນີ້ຄື ອານຸພາບຂອງພຣະອົງ ຂ້າພຣະອົງຂໍເຖິງພຣະອົງວ່າເປັນສະຣະນະ

[໑໓໔] ແລະພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປິຍະທັດສີ ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໓໕] ເຮົາຈັກພະຍາກອນຜູ້ທີ່ໄດ້ນິມົນພຣະສົງຜູ້ຊື່ຕົງ ມີຈິດໝັ້ນຄົງ ແລະ ພຣະຕະຖາຄົດສຳມາສຳພຸດທະເຈົ້າໃຫ້ສັນ ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໓໖] ຜູ້ນັ້ນຈັກຄອງເທວະສົມບັດ ໔໗ ຊາດ ເຂົາຈັກພໍໃຈກຳຂອງຕົນ ຮື່ນຣົມຢູ່ໃນເທວະໂລກ

[໑໓໗] ຜູ້ນັ້ນ ຈັກເກີດເປັນພຣະເຈົ້າຈັກກະພັດ ໑໘ ຊາດ ຈັກເປັນພຣະເຈົ້າແຜ່ນດິນຄອງແຜ່ນດິນ ໕໐໐ ຊາດ

[໑໓໗] ກິເລດທັງຫຼາຍ ອັນຂ້າພະເຈົ້າເຂົ້າໄປສູ່ປ່າດົງທຶບ
ບ່ອນເສືອໂຄ່ງອາໄສຢູ່ ຕັ້ງຄວາມພຽນ ເຜົາໄດ້ແລ້ວ

[໑໓໙] ໃນກັບທີ ໑໑໗ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພັດຕາທານ

[໑໔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸມັງຄະລະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸມັງຄະລະເຖຣາປະທານທີ ໑໐ ຈົບ**

**ສີຫາສະນິຍະວັກທີ ໘ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສີຫາສະນະທາຍະກະເຖຣາປະທານ
໒. ນັນທະເຖຣາປະທານ
໓. ປິລິນທະວັດສະເຖຣາປະທານ
໔. ອຸປະເສນະວັງຄັນຕະປຸດຕະເຖຣາປະທານ
໕. ໂສປາກະເຖຣາປະທານ
໖. ເອກະຖຳພິກະເຖຣາປະທານ
໗. ຈູລະປັນຖະກະເຖຣາປະທານ
໘. ຣາຫຸນເຖຣາປະທານ
໙. ຣັດຖະປາລະເຖຣາປະທານ
໑໐. ສຸມັງຄະລະເຖຣາປະທານ

**ໃນວັກທີ ໘ ມີ ໑໐ ເລື້ອງເທົ່ານັ້ນ**

**ໃນວັກນີ້ທ່ານປະກາດຄາຖາໄວ້ ໑໓໗ ຄາຖາ**

# ៣. ສຸພູຕິວັກ

## ໝວດວ່າດ້ວຍພຣະສຸພູຕິເປັນຕົ້ນ

## ໑. ສຸພູຕິເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸພູຕິເຖຣະ

(ພຣະສຸພູຕິເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ວ່າ ນິສະພະ
ເຂົາສ້າງອາສົມ ແລະ ບັນນະສາລາໄວ້ຢ່າງດີເພື່ອຂ້າພະເຈົ້າ

[໒] ຄັ້ງນັ້ນ ຂ້າພະເຈົ້າເປັນຊະດິນມີນາມວ່າ ໂກສິຍະ
ມີຕະບະແກ່ກ້າ ຜູ້ດຽວ ບໍ່ມີເພື່ອນ ຢູ່ທີ່ພູເຂົາ ນິສະພະ

[໓] ຄັ້ງນັ້ນ ຂ້າພະເຈົ້າບໍ່ໄດ້ເກັບໝາກໄມ້ ເຫງົ້າ ແລະໃບໄມ້ ມາກິນ
ໃນຄັ້ງນັ້ນ ຂ້າພະເຈົ້າອາໄສໃບໄມ້ເປັນຕົ້ນທີ່ຫຼົ່ນເອງເທົ່ານັ້ນລ້ຽງຊີວິດ

[໔] ຂ້າພະເຈົ້າ ແມ່ນເຖິງຈະສະລະຊີວິດກໍບໍ່ເຮັດອາຊີວະໃຫ້ກຳເຮີບ
ຍ່ອມທຳຈິດຂອງຕົນໃຫ້ຍິນດີ ງົດເວັ້ນການສະແຫວງຫາທີ່ບໍ່ສົມຄວນສາ

[໕] ເມື່ອໃດຈິດຂອງຂ້າພະເຈົ້າເກີດຄວາມກຳໜັດ
ເມື່ອນັ້ນ ຂ້າພະເຈົ້າຍ່ອມພິຈາລະນາດ້ວຍຕົນເອງ
ຂ້າພະເຈົ້າມີໃຈເດັດດ່ຽວຂົ່ມຈິດນັ້ນສາວ່າ

[໖] ເຈົ້າກຳໜັດໃນອາລົມທີ່ຊວນໃຫ້ກຳໜັດ
ຂັດເຄືອງໃນອາລົມທີ່ຊວນໃຫ້ຂັດເຄືອງ
ແລະຫຼົງໃນອາລົມທີ່ຊວນໃຫ້ຫຼົງ
ຍ້ອນແນວນັ້ນ ເຈົ້າຈົ່ງອອກຈາກປ່າໄປສາເທີ້ນ

[໗] ບ່ອນຢູ່ແຫ່ງນີ້ເປັນບ່ອນຢູ່ຂອງທ່ານຜູ້ບໍລິສຸດ ປາສະຈາກມົນທິນ ມີຕະບະ
ເຈົ້າຢ່າປະທຸດສະຮ້າຍຜູ້ບໍລິສຸດເລີຍ ຈົ່ງອອກຈາກປ່າໄປສາເທີ້ນ

[໘] ເຈົ້າຈັກເປັນຜູ້ຄອງເຮືອນໄດ້ບຸດໃນການໃດ

ໃນການນັ້ນເຈົ້າຢ່າໄດ້ຜິດພາດແມ່ນທັງ ໔ ຢ່າງນັ້ນເລີຍ
ຈຶ່ງອອກຈາກປ່າໄປສາເທີ້ນ

[໙] ຟືນເຜົາສົບ ໃຊ້ເຮັດກິດອັນໃດໃນບ່ອນໃດ ກໍບໍ່ໄດ້
ໄມ້ນັ້ນເຂົາບໍ່ໄດ້ຖືກັນວ່າ ເປັນໄມ້ໃນບ້ານຫຼືເປັນໄມ້ໃນປ່າ
ແລະບໍ່ໄດ້ຖືກັນວ່າ ເປັນໄມ້ຕາມປົກກະຕິ ສັນໃດ

[໑໐] ເຈົ້າກໍສັນນັ້ນ ປຽບເໝືອນຟືນເຜົາສົບ
ບໍ່ແມ່ນຄະລືຫັດ ທັງບໍ່ແມ່ນສະມະນະ
ວັນນີ້ ເຈົ້າພົ້ນຈາກພາວະທັງ ໔ ຈຶ່ງອອກຈາກປ່ານີ້ໄປສາເທີ້ນ

[໑໑] ຂໍ້ນີ້ເພິ່ງມີແກ່ເຈົ້າແດ່ບໍ
ໃຜຈະຮູ້ຂໍ້ນີ້ຂອງເຈົ້າ ໃຜຈະນຳທຸຣະຂອງເຈົ້າໄປໂດຍໄວ
ຍ້ອນເຈົ້າຫຼາຍໄປດ້ວຍຄວາມຂີ້ຄ້ານ

[໑໔] ວິນຍູຊົນຈັກຮັງກຽດເຈົ້າ
ເໝືອນຊາວເມືອງຮັງກຽດຂອງບໍ່ສະອາດສັນນັ້ນ
ລືສີທັງຫຼາຍ ຈັກດຶງເຈົ້າມາຕັກເຕືອນທຸກເມື່ອ

[໑໓] ວິນຍູຊົນຈັກປະຈານເຈົ້າວ່າ ລ່ວງລະເມີດສາດສະໜາ
ກໍເຈົ້າເມື່ອບໍ່ໄດ້ການຢູ່ຮ່ວມ ຈັກເປັນຢູ່ແນວໃດ

[໑໔] ຊ້າງມີກຳລັງ ເຂົ້າໄປຫາຊ້າງກຸນຊອນເຊິ່ງຕົກມັນ ໓ ແຫ່ງ
ເກີດໃນຕະກູນຊ້າງມາຕັງຄະ ເສື່ອມກຳລັງໃນເວລາມີອາຍຸ ໖໐ ປີ
ແລ້ວຖືກຂັບອອກຈາກຝູງ

[໑໕] ມັນຖືກຂັບອອກຈາກຝູງແລ້ວ ຫາຄວາມສຸກສຳຣານບໍ່ໄດ້
ເປັນສັດມີທຸກ ເສົ້າໃຈ ຊຶບເຊົາ ສັ່ນເຊັນຢູ່ ສັນໃດ

[໑໖] ຊະດິນທັງຫຼາຍ ຈັກຂັບເຈົ້າຜູ້ມີປັນຍາຊາມອອກ
ເຈົ້າຖືກຊະດິນເຫຼົ່ານັ້ນຂັບອອກແລ້ວ
ຈັກຫາຄວາມສຸກສຳຣານບໍ່ໄດ້ ສັນນັ້ນຄືກັນ
[໑໗] ເຈົ້າຖືກລູກສອນຄືຄວາມເສົ້າໂສກສຽບແລ້ວ
ທັງກາງເວັນແລະກາງຄືນ ຈັກຖືກຄວາມຮ້ອນຮົນແຜດເຜົາ
ເໝືອນຊ້າງຖືກຂັບອອກຈາກຝູງ ສັນນັ້ນ

[໑໗] ຄຳປອມ ຍ່ອມໃຊ້ບໍ່ໄດ້ໃນບ່ອນໃດ ສັນໃດ
ເຈົ້າເສື່ອມແລ້ວຈາກສິນກໍຈັກໃຊ້ໃນບ່ອນໃດ ບໍ່ໄດ້ ສັນນັ້ນ

[໑໙] ແມ່ນເຈົ້າຢູ່ຄອງເຮືອນ ຈັກເປັນຢູ່ໄດ້ແນວໃດ
ຊັບທັງທີ່ເປັນຂອງມານດາ ແລະ ບິດາຂອງເຈົ້າທີ່ເກັບໄວ້ກໍບໍ່ມີ

[໔໐] ເຈົ້າຈັກຕ້ອງເຮັດວຽກງານຂອງຕົນ ຕ້ອງອາບເຫື່ອຕາງນ້ຳ
ຈັກເປັນຢູ່ໃນເຮືອນແນວນີ້ ເປັນການດີແກ່ເຈົ້າທີ່ຈະບໍ່ມັກມັນ

[໔໑] ຂ້າພະເຈົ້າຫ້າມໃຈທີ່ໝັກໝົມດ້ວຍສັງກິເລດແນວນີ້ໃນບ່ອນນັ້ນ
ໄດ້ກ່າວທຳກະຖາຕ່າງ ໆ ຫ້າມຈິດຈາກຄວາມຊົ່ວ

[໔໒] ເມື່ອຂ້າພະເຈົ້າເປັນຢູ່ດ້ວຍຄວາມບໍ່ຜະໝາດແນວນີ້
ຂ້າພະເຈົ້າຢູ່ໃນປ່າໃຫຍ່ລ່ວງເລີຍມາ ໓໐,໐໐໐ ປີ

[໔໓] ພຣະສຳມາສຳພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຊົງເຫັນຂ້າພະເຈົ້າຜູ້ຍິນດີໃນຄວາມບໍ່ປະໝາດ
ຜູ້ສະແຫວງຫາປະໂຫຍດຢ່າງສູງສຸດ
ຈຶ່ງສະເດັດມາຍັງສຳນັກຂອງຂ້າພະເຈົ້າ

[໔໔] ຄັ້ງນັ້ນ ພຣະພຸດທະເຈົ້າຜູ້ມີພຣະຣັດສະໝີດັ່ງສີຄຳຊົມພູນຸດ
ປະມານບໍ່ໄດ້ ບໍ່ມີໃຜປຽບໄດ້ ບໍ່ມີໃຜສະເໝີດ້ວຍພຣະຮູບ
ສະເດັດຈົງກົມຢູ່ໃນອາກາດ

[໔໕] ຄັ້ງນັ້ນ ພຣະພຸດທະເຈົ້າບໍ່ມີໃຜສະເໝີດ້ວຍພຣະຍານ
ສະເດັດຈົງກົມຢູ່ໃນອາກາດ ດັ່ງຕົ້ນພະຍາໄມ້ສາລະມີດອກບານສະພັ່ງ
ເໝືອນສາຍຟ້າໃນກີບເມກ

[໔໖] ຄັ້ງນັ້ນ ພຣະອົງສະເດັດຈົງກົມຢູ່ໃນອາກາດ
ດັ່ງພະຍາຣາດຊະສີຜູ້ບໍ່ຢ້ານ
ເໝືອນພະຍາຊ້າງຄືກຄະນອງ
ເໝືອນພະຍາເສືອໂຄ່ງຜູ້ບໍ່ເກງກົວສິ່ງໃດ ສັນນັ້ນ

[໔໗] ຄັ້ງນັ້ນ ພຣະພຸດທະເຈົ້າຜູ້ມີພຣະຣັດສະໝີດັ່ງແທ່ງຄຳສີສຸກ
ເໝືອນຖ່ານໄຟໄມ້ແຄນ

ມີພຣະຣັດສະໝີໂຊດຊ່ວງດັ່ງແກ້ວມະນີ
ສະເດັດຈົງກົມຢູ່ໃນອາກາດ

[໔໗] ຄັ້ງນັ້ນ ພຣະພຸດທະເຈົ້າຜູ້ມີພຣະຣັດສະໝີ
ເໝືອນພູເຂົາໄກລາດທີ່ບໍລິສຸດ
ເໝືອນດວງຈັນໃນວັນເພັງ
ເໝືອນດວງອາທິດໃນເວລາທ່ຽງວັນ ສະເດັດຈົງກົມຢູ່ໃນອາກາດ

[໔໙] ຄັ້ງນັ້ນ ຂ້າພະເຈົ້າໄດ້ເຫັນພຣະອົງ
ສະເດັດຈົງກົມຢູ່ໃນທ້ອງຟ້າ
ຈຶ່ງຄິດແນວນີ້ວ່າ ຜູ້ນີ້ເປັນເທວະດາຫຼືມະນຸດ

[໕໐] ນໍຣະຊົນເຊັ່ນນີ້ເຮົາບໍ່ເຄີຍໄດ້ຟັງ ຫຼື ໄດ້ເຫັນໃນແຜ່ນດິນ
ໂອນໍ ບົດມົນກໍມີຢູ່ ຜູ້ນີ້ຈັກເປັນພຣະສາດສະດາ

[໕໑] ເມື່ອຂ້າພະເຈົ້າຄິດແນວນີ້ແລ້ວ ໄດ້ທຳຈິດຂອງຕົນໃຫ້ເຫຼື້ອມໃສ
ຮີບໂຮມດອກໄມ້ແລະຂອງຫອມຕ່າງ ໆ ໄວ້ໃນຄັ້ງນັ້ນ

[໕໔] ຂ້າພະເຈົ້າໄດ້ປູອາສະນະດອກໄມ້
ເຊິ່ງວິຈິດດີເປັນທີ່ຮື່ນຣົມໃຈແລ້ວ
ໄດ້ກ່າວຄຳນີ້ກັບພຣະພຸດທະເຈົ້າຜູ້ເລີດກວ່າ ສາຣະຖີຜູ້ຝຶກນໍຣະຊົນ ວ່າ

[໕໕] ຂ້າແຕ່ພຣະອົງຜູ້ມີຄວາມພຽນ
ອາສະນະນີ້ສົມຄວນແກ່ພຣະອົງ ຂ້າພຣະອົງຈັດຖວາຍໄວ້ແລ້ວ
ຂໍພຣະອົງ ເມື່ອຈະທຳຈິດຂອງຂ້າພຣະອົງໃຫ້ຣ່າເຣິງ
ໂຜດປະທັບນັ່ງເທິງອາສະນະດອກໄມ້ນີ້ດ້ວຍເທີ້ນ

[໕໔] ພຣະຜູ້ມີພຣະພາກພຸດທະເຈົ້າ ເປັນເໝືອນພະຍາໄກສອນ ຜູ້ບໍ່ເກງກົວ
ປະທັບນັ່ງເທິງອາສະນະດອກໄມ້ອັນປະເສີດນັ້ນຕະຫຼອດ ໗ ຄືນ ໗ ວັນ

[໕໕] ຂ້າພະເຈົ້າໄດ້ຢືນນະມັດສະການພຣະອົງຢູ່ຕະຫຼອດ ໗ ຄືນ ໗ ວັນ
ພຣະສາດສະດາຜູ້ປະເສີດໃນໂລກ ສະເດັດອອກຈາກສະມາທິແລ້ວ
ເມື່ອຈະຊົງພະຍາກອນກຳຂອງຂ້າພະເຈົ້າໄດ້ຕັດພຣະດຳຣັດນີ້ວ່າ
[໕໖] ບັນດາພາວະນາທັງຫຼາຍ ທ່ານຈົ່ງຈະເລີນພຸດທານຸດສະຕິທີ່ປະເສີດ
ເມື່ອຈະເລີນພຸດທານຸດສະຕິນີ້ແລ້ວ ຈັກເຮັດໃຈໃຫ້ບໍລິບູນໄດ້

[໓໗] ທ່ານຈັກຮື່ນຮົມໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ຈັກເປັນຈອມເທບ ຄອງເທວະສົມບັດ ໗໐ ຊາດ
ຈັກເປັນພຣະເຈົ້າຈັກກະພັດໃນແວ່ນແຄວ້ນ ໑,໐໐໐ ຊາດ

[໓໘] ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຈັກໄດ້ສະເຫວີຍສົມບັດນັ້ນທັງໝົດ
ນີ້ເປັນຜົນແຫ່ງການຈະເລີນພຸດທານຸດສະຕິ

[໓໙] ທ່ານເມື່ອວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຈັກໄດ້ໂພຄະສົມບັດເປັນຈຳນວນຫຼາຍ ຄວາມຂາດໃນໂພຄະຂອງທ່ານຈະບໍ່ມີ
ນີ້ເປັນຜົນແຫ່ງການຈະເລີນພຸດທານຸດສະຕິ

[໔໐] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໑] ທ່ານຈັກສະລະຊັບປະມານ ໗໐ ໂກດ
ລວມທັງທາດແລະກຳມະກອນຈຳນວນຫຼາຍແລ້ວ
ບວດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໔໒] ທ່ານຈັກໃຫ້ພຣະສຳມາສຳພຸດທະເຈົ້າພຣະນາມວ່າໂຄດົມສາກະຍະ
ຜູ້ປະເສີດ ຊົງພໍພຣະທະໄທແລ້ວ
ເປັນສາວົກມີນາມວ່າສຸພູຕິ ຂອງພຣະສາດສະດາ

[໔໓] ພຣະສາດສະດາພຣະນາມວ່າໂຄດົມ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຈັກຊົງແຕ່ງຕັ້ງທ່ານວ່າເປັນຜູ້ເລີດໃນ ໒ ຕຳແໜ່ງ
ຄືໃນພຣະທັກຂິໄນຍະບຸກຄົນຜູ້ມີຄຸນ
ແລະໃນຄວາມເປັນຜູ້ມີທຳເຄື່ອງຢູ່ເຊິ່ງບໍ່ມີຂ້າເສິກ

[໔໔] ພຣະສຳມາສຳພຸດທະເຈົ້າຜູ້ເປັນຜູ້ນຳເຊິ່ງຮຸ່ງເຮືອງສູງສຸດ
ຜູ້ເປັນນັກປາດ ເມື່ອຕັດດັ່ງນີ້ແລ້ວ
ໄດ້ສະເດັດເຫາະຂຶ້ນໄປສູ່ນະພາກາດເໝືອນພະຍາຫົງໃນທ້ອງຟ້າສັນນັ້ນ

[໔໕] ຂ້າພະເຈົ້າ ເຊິ່ງພຣະຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ຊົງພ່ຳສອນແລ້ວ

ນອບນ້ອມພຣະຕະຖາຄົດເຈົ້າແລ້ວມີຈິດເບີກບານ
ຈະເລີນພຸດທານຸດສະຕິອັນປະເສີດທຸກເມື່ອ

[໔໖] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍການຕັ້ງເຈຕະນາໄວ້ພັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໗] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດ ໗໐ ຊາດ
ແລະໄດ້ເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໔໘] ຂ້າພະເຈົ້າໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຂ້າພະເຈົ້າໄດ້ສະເຫວີຍສົມບັດຢ່າງດີນັບບໍ່ຖ້ວນ
ນີ້ເປັນຜົນແຫ່ງການຈະເລີນພຸດທານຸດສະຕິ

[໔໙] ຂ້າພະເຈົ້າເມື່ອວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຈະໄດ້ໂພຄະສົມບັດເປັນຈຳນວນຫຼາຍ
ຄວາມບົກຜ່ອງໃນໂພຄະຂອງຂ້າພະເຈົ້າບໍ່ມີເລີຍ
ນີ້ເປັນຜົນແຫ່ງການຈະເລີນພຸດທານຸດສະຕິ

[໕໐] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຈະເລີນພຸດທານຸດສະຕິ

[໕໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸພູຕິເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

## ໔. ອຸປະວານະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸປະວານະເຖຣະ

(ພຣະອຸປະວານະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໒] ພຣະສຳພຸດທະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຮຸ່ງເຮື່ອງດັ່ງກອງໄຟ ສະເດັດດັບຂັນທະປະຣິນິບພານແລ້ວ

[໕໓] ມະຫາຊົນມາປະຊຸມກັນບູຊາພຣະຕະຖາຄົດ
ສ້າງຈິຕະກາທານຢ່າງງົດງາມແລ້ວຊ່ວຍກັນຍົກສະຣີຣະຂຶ້ນວາງໄວ້

[໕໔] ຊົນເຫຼົ່ານັ້ນທັງໝົດພ້ອມທັງເທວະດາແລະມະນຸດ
ກະທຳພຣະສະຣີຣະກິດແລ້ວໄດ້ຮິບໂຮມພຣະທາດ
ພາກັນສ້າງພຣະພຸດທະສະຖູບໄວ້ ໃນບ່ອນນັ້ນ

[໕໕] ສະຖູບຊັ້ນທີ ໑ ເຮັດດ້ວຍຄຳ
ຊັ້ນທີ ໒ ເຮັດດ້ວຍແກ້ວມະນີ ຊັ້ນທີ ໓ ເຮັດດ້ວຍເງິນ
ຊັ້ນທີ ໔ ເຮັດດ້ວຍແກ້ວຜຼຶກ

[໕໖] ທີ່ພຣະສະຖູບນັ້ນ ຊັ້ນທີ ໕ ເຮັດດ້ວຍແກ້ວທັບທິມ
ຊັ້ນທີ ໖ ເຮັດດ້ວຍແກ້ວລາຍ ຊັ້ນເທິງເຮັດດ້ວຍຣັດຕະນະທຸກຢ່າງ

[໕໗] ຮ່າງຮ້ານເຮັດດ້ວຍແກ້ວມະນີ ແທ່ນໄພທີເຮັດດ້ວຍຣັດຕະນະ
ພຣະສະຖູບເຮັດດ້ວຍຄຳລ້ວນສູງ ໑ ໂຍດ

[໕໘] ຄັ້ງນັ້ນ ໝູ່ເທວະດາໄດ້ມາຮ່ວມປະຊຸມເປິກສາກັນໃນບ່ອນນັ້ນວ່າ
ແມ່ນພວກເຮົາກໍຈັກສ້າງພຣະສະຖູບຖວາຍພຣະໂລກະນາດຜູ້ຄົງທີ່ແດ່

[໕໙] ພຣະສາຣີຣິກະທາດ ບໍ່ແຍກກັນ ຄືລວມເປັນກຸ່ມກ້ອນດຽວກັນ
ພວກເຮົາຈັກສ້າງພຣະສະຖູບຄອບໄວ້ທີ່ພຣະພຸດທະສະຖູບນີ້

[໖໐] ໝູ່ເທວະດາໄດ້ຂະຫຍາຍພຣະສະຖູບ
ໃຫ້ສູງຂຶ້ນໄປອີກໜຶ່ງໂຍດດ້ວຍແກ້ວ ໗ ປະການ
ພຣະສະຖູບນັ້ນຈຶ່ງມີຄວາມສູງ ໒ ໂຍດ
ເຊິ່ງສ່ອງແສງສະຫວ່າງຂະຈັດຄວາມມືດໄດ້

[໖໑] ພວກນາກໄດ້ມາຮ່ວມປະຊຸມເປິກສາກັນ ໃນບ່ອນນີ້ວ່າ
ມະນຸດແລະເທວະດາເຫຼົ່ານັ້ນໄດ້ສ້າງພຣະພຸດທະສະຖູບແລ້ວ

[໖໒] ພວກເຮົາຢ່າໄດ້ຜະໝາດເລີຍ

ພວກມະນຸດກັບເທວະດາບໍ່ຜະໝາດກັນແລ້ວ
ແມ່ນພວກເຮົາກໍຈັກສ້າງພຣະສະຖູບຖວາຍພຣະໂລກະນາດຜູ້ຄົງທີ່ແດ່

[໖໓] ພວກນາກເຫຼົ່ານັ້ນ ພາກັນຮິບໂຮມແກ້ວອິນທະນິນ
ແກ້ວມະຫານິນ ແລະແກ້ວມະນີໂຊດ ຊ່ອຍກັນປະດັບພຣະພຸດທະສະຖູບໄວ້

[໖໔] ພຣະພຸດທະເຈດີປະມານເທົ່ານັ້ນ
ສ້າງດ້ວຍແກ້ວມະນີລ້ວນສູງ ໓ ໂຍດ
ສ່ອງແສງສະຫວ່າງສະໄຫວໃນເວລານັ້ນ

[໖໕] ຝູງຄຸດໄດ້ມາຮ່ວມປະຊຸມເປີກສາກັນໃນຄັ້ງນັ້ນວ່າ
ມະນຸດ ເທວະດາ ແລະນາກເຫຼົ່ານັ້ນໄດ້ສ້າງພຣະພຸດທະສະຖູບແລ້ວ

[໖໖] ພວກເຮົາຢ່າໄດ້ຜະໝາດເລີຍ
ພວກມະນຸດພ້ອມເທວະດາບໍ່ປະໝາດກັນແລ້ວ
ແມ່ນພວກເຮົາກໍຈັກສ້າງພຣະສະຖູບຖວາຍພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ຜູ້ຄົງທີ່ແດ່

[໖໗] ຝູງຄຸດແມ່ນເຫຼົ່ານັ້ນໄດ້ສ້າງພຣະສະຖູບ
ສຳເລັດດ້ວຍແກ້ວມະນີລ້ວນ ແລະຜ້າຄຸມກໍຄືກັນ
ໄດ້ສ້າງພຣະພຸດທະເຈດີຕໍ່ຂຶ້ນໄປໃຫ້ສູງອີກ ໑ ໂຍດ

[໖໘] ພຣະພຸດທະສະຖູບສູງຂຶ້ນໄປ ໔ ໂຍດ
ຮຸ່ງເຮືອງຢູ່ ສ່ອງທິດທັງປວງໃຫ້ສະຫວ່າງສະໄຫວ
ເໝືອນດວງອາທິດອຸໄທ ສັນນັ້ນ

[໖໙] ຄັ້ງນັ້ນ ພວກກຸມພັນໄດ້ມາຮ່ວມປະຊຸມເປີກສາກັນວ່າ
ພວກມະນຸດ ເທວະດາ ນາກແລະຄຸດກໍເປັນຄືກັນໝົດ
ຕ່າງກໍໄດ້ພາກັນສ້າງພຣະສະຖູບທີ່ອຸດົມ
ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໗໐] ພວກເຮົາຢ່າໄດ້ຜະໝາດເລີຍ
ພວກມະນຸດພ້ອມເທວະດາບໍ່ຜະໝາດກັນແລ້ວ
ເຖິງພວກເຮົາກໍຈັກສ້າງພຣະສະຖູບບູຊາພຣະໂລກະນາດ ຜູ້ຄົງທີ່ແດ່
ຈັກໃຊ້ຮັດຕະນະທັງຫຼາຍປະດັບພຣະພຸດທະເຈດີໃຫ້ກວ້າງອອກໄປ

[ກ໑]　　ພວກກຸມພັນແມ່ນເຫຼົ່ານັ້ນ
ໄດ້ຂະຫຍາຍພຣະພຸດທະເຈດີໃຫ້ກວ້າງອອກໄປອີກ ໑ ໂຍດ
ໃນຄັ້ງນັ້ນ ພຣະສະຖູບສູງຂຶ້ນໄປເປັນ ៥ ໂຍດ ສະຫວ່າງສະໄຫວຢູ່

[ກ໘]　　ຄັ້ງນັ້ນ ພວກຍັກໄດ້ມາຮ່ວມປະຊຸມເປີກສາກັນ ໃນບ່ອນນັ້ນວ່າ
ພວກມະນຸດ ເທວະດາ ນາກ ກຸມພັນ ແລະຄຸດ

[ກ໙]　　ຕ່າງໄດ້ພາກັນສ້າງສະຖູບທີ່ປະເສີດທີ່ສຸດ
ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພວກເຮົາຢ່າໄດ້ຜະໝາດເລີຍ
ພວກມະນຸດພ້ອມເທວະດາບໍ່ຜະໝາດກັນແລ້ວ

[ກ໔]　　ແມ່ນພວກເຮົາກໍຈັກສ້າງພຣະສະຖູບບູຊາພຣະໂລກະນາດ ຜູ້ຄົງທີ່ດ້ວຍ
ນຳແກ້ວຜຶກມາປະດັບພຣະພຸດທະເຈດີໃຫ້ກວ້າງອອກໄປອີກ

[ກ໕]　　ຍັກແມ່ນເຫຼົ່ານັ້ນໄດ້ຂະຫຍາຍພຣະພຸດທະເຈດີ
ໃຫ້ກວ້າງອອກໄປອີກ ໑ ໂຍດ
ຄັ້ງນັ້ນ ພຣະສະຖູບສູງຂຶ້ນໄປເປັນ ໖ ໂຍດ ສະຫວ່າງສະໄຫວຢູ່

[ກ໖]　　ຄັ້ງນັ້ນ ພວກຄົນທັບມາຮ່ວມປະຊຸມເປີກສາກັນວ່າ
ພວກມະນຸດ ເທວະດາ ນາກ ຄຸດ ກຸມພັນ ແລະຍັກກໍຄືກັນ

[ກກ]　　ພວກເຂົາທັງໝົດໄດ້ພາກັນສ້າງພຣະພຸດທະສະຖູບແລ້ວ
ໃນເລື້ອງພຣະສະຖູບນີ້ ພວກເຮົາຍັງບໍ່ໄດ້ສ້າງເລີຍ
ແມ່ນພວກເຮົາກໍຈັກສ້າງພຣະສະຖູບບູຊາພຣະໂລກະນາດ ຜູ້ຄົງທີ່ດ້ວຍ

[ກ຿]　　ຄັ້ງນັ້ນ ພວກຄົນທັບເຫຼົ່ານັ້ນ
ໄດ້ສ້າງແທ່ນໄພທີ ກ ແຫ່ງ ຈົນເຖິງທາງຢ່າງ
ພວກຄົນທັບສ້າງພຣະສະຖູບດ້ວຍຄຳລ້ວນ

[ກ໙]　　ໃນຄັ້ງນັ້ນ ພຣະສະຖູບສູງຂຶ້ນໄປເປັນ ກ ໂຍດ
ສ່ອງແສງສະຫວ່າງສະໄຫວ ຈົນບໍ່ຮູ້ກາງຄືນຫຼືກາງເວັນ
ຍ້ອນມີແສງສະຫວ່າງຕະຫຼອດເວລາ

[຿໐]　　ດວງຈັນແລະດວງອາທິດພ້ອມທັງດວງດາວ

ຄອບງຳຣັດສະໝີຂອງພຣະສະຖູບນັ້ນບໍ່ໄດ້
ໃນທີ່ປະມານ ໑໐໐ ໂຍດໂດຍຮອບ ແມ່ນປະທີບກໍບໍ່ໂຊດຊ່ວງ

[໗໑] ໂດຍການນັ້ນ ມະນຸດພວກໃດພວກໜຶ່ງຈະບູຊາພຣະສະຖູບ
ພວກເຂົາບໍ່ຕ້ອງຂຶ້ນພຣະສະຖູບ ພຽງໂຍນເຄື່ອງສັກກາຣະຂຶ້ນໄປເທິງອາກາດ

[໗໒] ຍັກຕົນໜຶ່ງຊື່ວ່າອະພິສຳມະຕະ ທີ່ພວກເທວະດາແຕ່ງຕັ້ງໄວ້
ຄອຍຖ້າຮັບທຸງຫຼືພວງດອກໄມ້ໄປບູຊາໃຫ້ຍິ່ງຂຶ້ນ

[໗໓] ຊົນເຫຼົ່ານັ້ນເບິ່ງບໍ່ເຫັນຍັກຕົນນັ້ນ
ເຫັນແຕ່ພວງດອກໄມ້ຂອງຍັກທີ່ລອຍໄປຢູ່
ເມື່ອເຫັນເຊັ່ນນີ້ແລ້ວຈຶ່ງໄປ ມະນຸດທັງໝົດຍ່ອມໄປເກີດໃນສຸກຄະຕິ

[໗໔] ພວກມະນຸດທີ່ບໍ່ເຊື່ອໃນຄຳສອນ
ແລະພວກທີ່ເຫຼື້ອມໃສໃນສາດສະໜາ
ມີຄວາມຕ້ອງການຈະເຫັນປາຕິຫານ ຈຶ່ງພາກັນບູຊາພຣະສະຖູບ

[໗໕] ຄັ້ງນັ້ນ ຂ້າພະເຈົ້າເປັນລູກຈ້າງຢູ່ໃນນະຄອນຫົງສະວະດີ
ເຫັນຊົນພາກັນຣື່ນເຣີງບັນເທີງໃຈ ຈຶ່ງຄິດແນວນີ້ໃນຄັ້ງນັ້ນວ່າ

[໗໖] ຊຸມຊົນເຫຼົ່ານີ້ ພາກັນດີໃຈ ບໍ່ອິ່ມເຖິງສັກກາຣະທີ່ຄວນເຮັດ
ເຊິ່ງຜາກົດທີ່ເຮືອນແຫ່ງພຣະທາດຂອງພຣະຜູ້ມີພຣະພາກເຈົ້າຜູ້ຍິ່ງໃຫຍ່

[໗໗] ແມ່ນເຮົາກໍຈັກເຮັດສັກກາຣະແດ່ພຣະໂລກະນາດ ຜູ້ຄົງທີ່
ຈັກເປັນທຳທາຍາດຂອງພຣະອົງໃນອະນາຄົດ

[໗໘] ຂ້າພະເຈົ້າ ຈຶ່ງເອົາຜ້າຫົ່ມຂອງຂ້າພະເຈົ້າທີ່ຊ່າງຍ້ອມຊັກໄວ້ຢ່າງດີ
ແຂວນໄວ້ຢູ່ປາຍໄມ້ໄຜ່ ແລ້ວຍົກເປັນທຸງໄວ້ໃນທ້ອງຟ້າ

[໗໙] ຍັກອະພິສຳມະຕະຈັບທຸງຂອງຂ້າພະເຈົ້ານຳໄປໃນທ້ອງຟ້າ
ຂ້າພະເຈົ້າເຫັນແຕ່ທຸງຖືກລົມສະບັດໄດ້ເຮັດໃຫ້ເກີດຄວາມຣ່າເຣີງຢ່າງຍິ່ງ

[໘໐] ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນທຸງນັ້ນແລ້ວ
ເຂົ້າໄປຫາພິກຂຸຜູ້ເປັນສະມະນະອົງໜຶ່ງ
ອະພິວາດທ່ານແລ້ວໄດ້ສອບຖາມເຖິງຜົນໃນການຖວາຍທຸງ

[໙໑] ພິກຂຸອົງນັ້ນ ກ່າວເຖິງການທີ່ຂ້າພະເຈົ້າ
ເກີດຄວາມອິ່ມເອີບໃຈໃນການຖວາຍທຸງໃຫ້ຂ້າພະເຈົ້າຟັງວ່າ
ທ່ານຈັກໄດ້ສະເຫວີຍວິບາກແຫ່ງການຖວາຍທຸງນັ້ນໃນການທຸກເມື່ອ

[໙໒] ກອງທັບ ໔ ເຫຼົ່າ
ຄືພົນຊ້າງ ພົນມ້າ ພົນລົດ ແລະພົນຍ່າງ
ຈັກແວດລ້ອມທ່ານເປັນນິດ
ນີ້ເປັນຜົນແຫ່ງການຖວາຍທຸງ

[໙໓] ເຄື່ອງດົນຕີ ໖໐,໐໐໐ ຢ່າງ
ກອງທີ່ປະດັບຕົກແຕ່ງຢ່າງສວຍງາມ ແວດລ້ອມທ່ານເປັນນິດ
ນີ້ເປັນຜົນແຫ່ງການຖວາຍທຸງ

[໙໔] ສາວໄວລຸ້ນ ໘໖,໐໐໐ ນາງ
ລ້ວນປະດັບຕົກແຕ່ງຢ່າງສວຍງາມ
ສວມໃສ່ຜ້າອາພອນອັນງົດງາມ ຫ້ອຍຕຸ້ມຫູແກ້ວມະນີ

[໙໕] ມີຕາມົນໃຫຍ່ ມີປີກກະຕິຣ່າເຣີງ ຮູບຮ່າງງາມ ແອວນ້ອຍແອວບາງ
ຈັກແວດລ້ອມທ່ານເປັນນິດ
ນີ້ເປັນຜົນແຫ່ງການຖວາຍທຸງ

[໙໖] ທ່ານຈັກຣື່ນຣົມໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ຈັກເກີດເປັນຈອມເທບຄອງເທວະສົມບັດ ໘໐ ຊາດ

[໙໗] ຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໙໘] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໙໙] ທ່ານຈຸຕິຈາກເທວະໂລກແລ້ວ ຖືກກຸສົນມູນຕັກເຕືອນ
ປະກອບດ້ວຍບຸນກໍາ
ຈັກເກີດເປັນບຸດຂອງພາມ

[໑໐໐] ທ່ານຈັກລະສົມບັດປະມານ ໗໐ ໂກດ
ທັງທາດ ແລະ ກຳມະກອນຈຳນວນຫຼາຍ
ບວດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໑໐໑] ທ່ານຈັກໃຫ້ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ໂຄດົມສາກະຍະ
ຜູ້ປະເສີດ ຊົງພໍພຣະທະໄທແລ້ວ
ເປັນສາວົກມີນາມວ່າອຸປະວານະ ຂອງພຣະສາດສະດາ

[໑໐໒] ກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນກັບທີ ໑໐໐,໐໐໐
ໄດ້ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບນີ້
ຂ້າພະເຈົ້າພົ້ນດີແລ້ວ (ຈາກກິເລດ)
ເໝືອນຄວາມໄວແຫ່ງລູກສອນທີ່ລຸດຈາກແລ່ງໄປດີແລ້ວ ສັນນັ້ນ
ເຜົາກິເລດທັງຫຼາຍໄດ້ແລ້ວ

[໑໐໓] ເມື່ອຂ້າພະເຈົ້າເປັນພຣະເຈົ້າຈັກກະພັດ
ເປັນໃຫຍ່ໃນທະວີບທັງ ໔
ທຸງທັງຫຼາຍຈັກຕັ້ງຂຶ້ນຮອບ ຕະຫຼອດ ໓ ໂຍດ ໃນການທຸກເມື່ອ

[໑໐໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍທຸງ

[໑໐໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸປະວານະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸປະວານະເຖຣາປະທານທີ ໔ ຈົບ**

# ๙. ຕິສະຣະນະຄະມະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິສະຣະນະຄົມນິຍະເຖຣະ

(ພຣະຕິສະຣະນະຄົມນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໖] ຂ້າພະເຈົ້າເປັນຄົນລ້ຽງດູມານດາ ແລະບິດາຢູ່ໃນນະຄອນຈັນທະວະດີ
ມານດາແລະບິດາຂອງຂ້າພະເຈົ້າເປັນຄົນຕາບອດ
ຂ້າພະເຈົ້າລ້ຽງດູທ່ານທັງ ໒ ຢູ່ໃນຄັ້ງນັ້ນ

[໑໐໗] ຄັ້ງນັ້ນ ຂ້າພະເຈົ້ານັ່ງຢູ່ໃນບ່ອນສະຫງັດຈຶ່ງຄິດແນວນີ້ວ່າ
ເຮົາລ້ຽງດູມານດາແລະບິດາຢູ່ ຈຶ່ງບໍ່ໄດ້ບວດ

[໑໐໘] ມວນມະນຸດຖືກຄວາມມືດມົນອົນທະການປິດບັງໄວ້ແລ້ວ
ຖືກໄຟ ๓ ກອງແຜດເຜົາຢູ່
ເມື່ອເກີດຄວາມເປັນເຊັ່ນນີ້ຂຶ້ນແລ້ວ ບໍ່ມີໃຜຈະເປັນຜູ້ແນະນຳ

[໑໐໙] ບັດນີ້ ພຣະພຸດທະເຈົ້າສະເດັດອຸບັດຂຶ້ນແລ້ວໃນໂລກ
ປະກາດຄຳສັ່ງສອນໃຫ້ຮຸ່ງເຮືອງ
ສັດຜູ້ຕ້ອງການບຸນອາດເພື່ອຈະຖອນຕົນຂຶ້ນໄດ້

[໑໑໐] ຂ້າພະເຈົ້າຮັບສະຣະນະ ๓ ແລ້ວ ຮັກສາໃຫ້ບໍລິບູນ
ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າຈຶ່ງພົ້ນທຸກຄະຕິໄດ້

[໑໑໑] ຂ້າພະເຈົ້າໄດ້ເຂົ້າໄປຫາສະມະນະນາມວ່າ ນິສະພະ
ຜູ້ເປັນອັກຄະຣະສາວົກຂອງພຣະພຸດທະເຈົ້າແລ້ວຮັບສະຣະນະຄົມ

[໑໑໒] ຄັ້ງນັ້ນ ເຫຼົ່າສັດມີອາຍຸປະມານ ໑໐໐,໐໐໐ ປີ
ຂ້າພະເຈົ້າ ໄດ້ຮັກສາສະຣະນະຄົມໃຫ້ບໍລິບູນຕະຫຼອດຣະຍະເວລາເທົ່ານັ້ນ

[໑໑๓] ເມື່ອຈິດດວງສຸດທ້າຍກຳລັງເປັນໄປຢູ່
ຂ້າພະເຈົ້າຣະລຶກເຖິງສະຣະນະຄົມນັ້ນໄດ້ແລ້ວ
ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າ ຈຶ່ງໄດ້ໄປເກີດເທິງສະຫວັນຊັ້ນຕາວະຕິງສາ

[໑໑໔] ເມື່ອຂ້າພະເຈົ້າຢູ່ໃນເທວະໂລກໄດ້ປະກອບແຕ່ບຸນກໍາ
ໄປເຖິງພູມປະເທດໃດ ໆ
ຍ່ອມໄດ້ເຫດ ໘ ປະການ ໃນພູມປະເທດນັ້ນ ໆ

[໑໑໕] ຄື (໑) ຂ້າພະເຈົ້າໄດ້ຮັບການບູຊາທຸກທິດ
(໒) ເປັນຜູ້ມີປັນຍາຫຼັກແຫຼມ
(໓) ເທວະດາທັງປວງຍ່ອມປະພຶດຕາມ
(໔) ໄດ້ໂພຄະສົມບັດນັບບໍ່ຖ້ວນ

[໑໑໖] (໕) ເປັນຜູ້ມີຜິວພັນດັ່ງຄໍາ
(໖) ເປັນຜູ້ມີສະຕິປັນຍາໃນທຸກເລື້ອງ
(໗) ເປັນຜູ້ບໍ່ຫວັ່ນໄຫວຕໍ່ມິດ
(໘) ມີຍົດຂະຈອນໄປ

[໑໑໗] ຂ້າພະເຈົ້າ ເປັນຈອມເທບຄອງເທວະສົມບັດ ໘໐ ຊາດ
ມີເຫຼົ່ານາງເທບອັບປະສອນຫ້ອມລ້ອມ ໄດ້ສະເຫວີຍທິບພະຍະສຸກ

[໑໑໘] ຂ້າພະເຈົ້າເປັນພຣະເຈົ້າຈັກກະພັດ ໗໕ ຊາດ
ໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໑໙] ເມື່ອເຖິງພົບສຸດທ້າຍ ຂ້າພະເຈົ້າປະກອບແຕ່ບຸນກໍາ
ໄດ້ເກີດໃນຕະກູນພາມມະນະມະຫາສານມັ່ງຄັ່ງທີ່ສຸດໃນນະຄອນສາວັດຖີ

[໑໒໐] ເວລາແລງ (ວັນໜຶ່ງ) ຂ້າພະເຈົ້າຕ້ອງການຈະຫຼິ້ນ
ຈຶ່ງອອກຈາກນະຄອນ ມີພວກເດັກ ໆ ຫ້ອມລ້ອມ ເຂົ້າໄປສູ່ສັງຄາຣາມ

[໑໒໑] ໃນບ່ອນນັ້ນ ຂ້າພະເຈົ້າໄດ້ພົບສະມະນະອົງໜຶ່ງຜູ້ລຸດພົ້ນ ບໍ່ມີອຸປະທິ
ທ່ານສະແດງທໍາແກ່ຂ້າພະເຈົ້າ ແລະໄດ້ໃຫ້ສະຣະນະແກ່ຂ້າພະເຈົ້າ

[໑໒໒] ຂ້າພະເຈົ້ານັ້ນຟັງສະຣະນະແລ້ວ ຣະລຶກເຖິງສະຣະນະຂອງຂ້າພະເຈົ້າໄດ້
ນັ່ງຢູ່ເທິງອາສະນະດຽວໄດ້ບັນລຸອະຣະຫັນຕະຜົນແລ້ວ

[໑໒໓] ຂ້າພະເຈົ້າເກີດໄດ້ ໗ ຂວບ ກໍໄດ້ບັນລຸອະຣະຫັນຕະຜົນ
ພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງຮູ້ຄຸນສົມບັດຂອງຂ້າພະເຈົ້າແລ້ວ ຈຶ່ງປະທານອຸປະສົມບົດໃຫ້

[໑໘໔] ໃນກັບທີ່ນັບບໍ່ໄດ້ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຖິງສະຣະນະທັງຫຼາຍ
ກໍາທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວພຽງນັ້ນ
ສະແດງຜົນແກ່ຂ້າພະເຈົ້າໃນອັດຕະພາບສຸດທ້າຍນີ້

[໑໘໕] ສະຣະນະຂ້າພະເຈົ້າ ກໍຮັກສາໄວ້ດີແລ້ວ
ໃຈຂ້າພະເຈົ້າ ກໍໄດ້ຕັ້ງໄວ້ໝັ້ນແລ້ວ
ຂ້າພະເຈົ້າ ຈຶ່ງສະເຫວີຍຍົດທຸກຢ່າງແລ້ວ
ໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ (ຄືນິບພານ)

[໑໘໖] ບັນດາທ່ານທີ່ຕ້ອງການຈະຟັງຈົ່ງຟັງຂ້າພະເຈົ້າກ່າວ
ຂ້າພະເຈົ້າ ຈັກບອກບົດອັນເປັນປະໂຫຍດທີ່
ຂ້າພະເຈົ້າເຫັນເອງແກ່ທ່ານທັງຫຼາຍ

[໑໘໗] ພຣະພຸດທະເຈົ້າສະເດັດອຸບັດຂຶ້ນແລ້ວໃນໂລກ
ສາດສະໜາຂອງພຣະຊິນນະເຈົ້າແຜ່ໄປຢູ່
ພຣະອົງຊົງລັ່ນອະມະຕະທໍາອັນບັນເທົາລູກສອນຄືຄວາມເສົ້າໂສກໄດ້

[໑໘໘] ທ່ານທັງຫຼາຍ ຄວນເຮັດອະທິການ
ໃນນາບຸນທີ່ປະເສີດຕາມກໍາລັງຂອງຕົນ
ທ່ານທັງຫຼາຍ ຈັກພົບພຣະນິບພານ

[໑໘໙] ທ່ານທັງຫຼາຍ ຈົ່ງຮັບສະຣະນະ ໓ ຈົ່ງຮັກສາສິນ ໕
ເຮັດຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າແລ້ວ ຈັກເຮັດບ່ອນສຸດທຸກໄດ້

[໑໙໐] ພວກທ່ານທຸກຄົນຈົ່ງຖືຂ້າພະເຈົ້າເປັນໂຕຢ່າງ
ຮັກສາສິນແລ້ວກໍຈັກບັນລຸອະຣະຫັນຕະຜົນໄດ້ໂດຍບໍ່ດົນເລີຍ

[໑໙໑] (ພຣະຕິສະຣະນະຄົມນິຍະເຖຣະຂາບທູນວ່າ)
ຂ້າພຣະອົງເປັນຜູ້ໄດ້ວິດຊາ ໓ ມີລິດ
ສະຫຼາດໃນເຈໂຕປະຣິຍະຍານ ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຂ້າພຣະອົງເປັນສາວົກຂອງພຣະອົງ
ຂໍຖວາຍບັງຄົມພຣະຍຸຄົນບາດຂອງພຣະສາດສະດາ

[໑໙໔] ໃນກັບທີ່ນັບບໍ່ໄດ້ ນັບຈາກກັບນີ້ໄປ

ຂ້າພຣະອົງໄດ້ເຖິງພຣະພຸດທະເຈົ້າວ່າເປັນສະຣະນະ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການເຖິງສະຣະນະ

[໑໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພຣະອົງໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິສະຣະນະຄົມນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິສະຣະນະຄົມນິຍະເຖຣາປະທານທີ ໓ ຈົບ**

# ໔. ປັນຈະສີລະສະມາທານິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັນຈະສີນສະມາທານິຍະເຖຣະ

(ພຣະປັນຈະສີນສະມາທານິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓໔] ຄັ້ງນັ້ນ ຂ້າພະເຈົ້າເປັນລູກຈ້າງຢູ່ໃນນະຄອນຈັນທະວະດີ
ມົວຂວນຂວາຍໃນການງານຂອງຜູ້ອື່ນ ຈຶ່ງບໍ່ໄດ້ບວດ

[໑໓໕] (ຂ້າພະເຈົ້າຄິດວ່າ) ມວນມະນຸດຖືກຄວາມມືດມົນອັນທະການປິດບັງໄວ້ແລ້ວ
ຖືກໄຟ ໓ ກອງແຜດເຜົາຢູ່
ເຮົາຈະພາກຈາກໄປໄດ້ດ້ວຍອຸບາຍແນວໃດໄດ້ນໍ

[໑໓໖] ໄທຍະທຳຂອງເຮົາກໍບໍ່ມີ
ເຮົາຊ່າງເປັນຄົນໜ້າສົງສານ ເປັນລູກຈ້າງຢູ່
ທາງທີ່ດີ ເຮົາເພິ່ງຮັກສາສີນ ໕ ໃຫ້ບໍລິບູນ

[໑໓໗] ຂ້າພະເຈົ້າ ຈຶ່ງເຂົ້າໄປຫາພິກຂຸຊື່ວ່າ ນິສະພະ
ຜູ້ເປັນສາວົກຂອງພຣະມຸນີພຣະນາມວ່າ ອະໂນມະທັດສີ
ແລ້ວຮັບສິກຂາບົດ ໕ ຂໍ້

[໑໓໘] ຄັ້ງນັ້ນ ໝູ່ສັດມີອາຍຸປະມານ ໑໐໐,໐໐໐ ປີ
ຂ້າພະເຈົ້າໄດ້ຮັກສາສີນ ໕ ໃຫ້ບໍລິບູນຕະຫຼອດຣະຍະເວລາເທົ່ານັ້ນ

[໑໗໙] ເມື່ອເວລາໃກ້ຕາຍມາເຖິງເຂົ້າ ເຫຼົ່າເທວະດາຍ່ອມໃຫ້ຂ້າພະເຈົ້າດີໃຈວ່າ
ທ່ານຜູ້ມີຣະທຸກ ລົດທຽມມ້າ ໑,໐໐໐ ໂຕຄັນນີ້ຜາກົດແລ້ວເພື່ອທ່ານ

[໑໘໐] ເມື່ອຈິດດວງສຸດທ້າຍຍັງເປັນໄປຢູ່
ຂ້າພະເຈົ້າຫວນຣະລຶກເຖິງສິນຂອງຕົນເອງ
ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າ ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໘໑] ແລະຂ້າພະເຈົ້າໄດ້ເປັນຈອມເທບ
ຄອງເທວະສົມບັດເຖິງ ໓໐ ຊາດ
ມີເຫຼົ່ານາງເທບອັບປະສອນຫ້ອມລ້ອມ ໄດ້ສະເຫວີຍທິບພະຍະສຸກ

[໑໘໒] ອັນໜຶ່ງ ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໗໕ ຊາດ
ໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໘໓] ຂ້າພະເຈົ້າ ຖືກກຸສົນມູນຕັກເຕືອນແລ້ວໄດ້ຈຸຕິຈາກເທວະໂລກ
ມາເກີດໃນຕະກູນພາມມະນະມະຫາສານມັ່ງຄັ່ງທີ່ສຸດໃນນະຄອນເວສາລີ

[໑໘໔] ເມື່ອສາດສະໜາຂອງພຣະຊິນນະເຈົ້າຍັງຮຸ່ງເຮືອງຢູ່
ມານດາ ແລະບິດາຂອງຂ້າພະເຈົ້າໄດ້ຮັບສິກຂາບົດ ໕ ຂໍ້
ໃນເວລາໃກ້ເຂົ້າພັນສາ

[໑໘໕] ຂ້າພະເຈົ້າ ຮ່ວມຮັບສິນກັບມານດາແລະບິດາ
ຫວນຣະລຶກເຖິງສິນຂອງຕົນເອງ
ນັ່ງເທິງອາສະນະດຽວ ໄດ້ບັນລຸອະຣະຫັນຕະຜົນແລ້ວ

[໑໘໖] ຂ້າພະເຈົ້າມີອາຍຸ ໕ ຂວບ ກໍໄດ້ບັນລຸອະຣະຫັນຕະຜົນ
ພຣະພຸດທະເຈົ້າຜູ້ຊົງມີພຣະຈັກຂຸ
ຊົງຮູ້ຄຸນສົມບັດຂອງຂ້າພະເຈົ້າແລ້ວ
ໄດ້ປະທານອຸປະສົມບົດໃຫ້

[໑໘໗] ໃນກັບທີນັບບໍ່ໄດ້ ນັບຈາກກັບນີ້ໄປ
ຂ້າພະເຈົ້າຮັກສາສິກຂາບົດ ໕ ຂໍ້ໃຫ້ບໍລິບູນແລ້ວ
ຈຶ່ງບໍ່ຕົກວິນິບາດນະຮົກເລີຍ

[໑໔໗] ຂ້າພະເຈົ້ານັ້ນໄດ້ສະເຫວີຍຍົດຍ້ອນອານຸພາບແຫ່ງສີນເຫຼົ່ານັ້ນ
ຂ້າພະເຈົ້າເມື່ອຈະປະກາດຜົນຂອງສີນ
ຕະຫຼອດທັງໂກດກັບກໍຄົງຈະປະກາດໄດ້ພຽງສ່ວນດຽວເທົ່ານັ້ນ

[໑໔໙] ຂ້າພະເຈົ້າຮັກສາສີນ ໕ ແລ້ວ ຍ່ອມໄດ້ເຫດ ໓ ປະການ
ຄືເປັນຜູ້ມີອາຍຸຍືນ ມີໂພຄະສົມບັດຫຼາຍ ແລະມີປັນຍາແຫຼມຄົມ

[໑໕໐] ເມື່ອຂ້າພະເຈົ້າທ່ອງທ່ຽວໄປໃນພົບນ້ອຍພົບໃຫຍ່
ປະກາດຄຸນຂອງສີນທັງປວງ
ແລະຄວາມພຽນຢ່າງບຸຣຸດທີ່ມີປະມານຍິ່ງ
ຂ້າພະເຈົ້າຈຶ່ງໄດ້ຖານະເຫຼົ່ານີ້

[໑໕໑] ສາວົກຂອງພຣະຊິນນະເຈົ້າ
ປະພຶດຢູ່ໃນສີນມີອານີສົງນັບບໍ່ໄດ້
ຖ້າຈະເພິ່ງຍິນດີໃນພົບ ເພິ່ງມີຜົນເຊັ່ນໃດ

[໑໕໒] ສີນ ໕ ຂ້າພະເຈົ້າຜູ້ເປັນລູກຈ້າງ
ມີຄວາມພຽນພ່ຳເພັງດີແລ້ວ
ຂ້າພະເຈົ້າຈຶ່ງພົ້ນຈາກເຄື່ອງຜູກທັງປວງໄດ້ໃນວັນນີ້ຍ້ອນສີນນັ້ນ

[໑໕໓] ໃນກັບທີນັບບໍ່ໄດ້ ນັບຈາກກັບນີ້ໄປ
ຂ້າພະເຈົ້າຮັກສາສີນ ໕ ແລ້ວ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນຂອງສີນ ໕

[໑໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປັນຈະສີນສະມາທານິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນຈະສີລະສະມາທານິຍະເຖຣາປະທານທີ ໔ ຈົບ**

# ໕. ອັນນະສັງສາວະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັນນະສັງສາວະກະເຖຣະ

(ພຣະອັນນະສັງສາວະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໕໕] ພຣະສຳມາສຳພຸດທະເຈົ້າຜູ້ມີພຣະສະຫວີວັນດັ່ງຄຳ
ກຳລັງສະເດັດໄປໃນລະຫວ່າງຮ້ານຕະຫຼາດ
ມີລັກສະນະອັນປະເສີດ ໓໒ ປະການ ຄ້າຍແທ່ງຄຳ

[໑໕໖] ພຣະນາມວ່າ ສິດທັດຖະ ດັ່ງດວງປະທີບສ່ອງໂລກໃຫ້ສະຫວ່າງໂຊດຊ່ວງ
ຜູ້ມີພຣະຄຸນຫາປະມານບໍ່ໄດ້
ຫາໃຜປຽບທຽບບໍ່ໄດ້ ຊົງຝຶກຝົນພຣະອົງແລ້ວ
ຊົງໄວ້ເຊິ່ງຄວາມຮຸ່ງເຮືອງ
ຂ້າພະເຈົ້າໄດ້ເຫັນແລ້ວ ໄດ້ປິຕິຢ່າງຍິ່ງ

[໑໕໗] ຂ້າພະເຈົ້າຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ
ນິມົນພຣະອົງຜູ້ເປັນມະຫາມຸນີໃຫ້ສະເຫວີຍແລ້ວ
ພຣະມຸນີຊົງປະກອບດ້ວຍພຣະກະລຸນາໃນໂລກ
ຊົງອະນຸໂມທະນາແກ່ຂ້າພະເຈົ້າໃນຄັ້ງນັ້ນ

[໑໕໘] ຂ້າພະເຈົ້າທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ
ຜູ້ປະກອບດ້ວຍພຣະມະຫາກະລຸນາ
ຜູ້ຊົງກໍ່ໃຫ້ເກີດຄວາມຊື່ນຊົມຢ່າງຍິ່ງ
ບັນເທິງຢູ່ໃນສະຫວັນຕະຫຼອດກັບໜຶ່ງ

[໑໕໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພິກສາ

[໑໖໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັນນະສັງສາວະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັນນະສັງສາວະກະເຖຣາປະທານທີ ໕ ຈົບ**

# ໖. ທູປະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທູປະທາຍະກະເຖຣະ

(ພຣະທູປະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໖໑] ຂ້າພະເຈົ້າ ມີຈິດຜ່ອງໃສໄດ້ຖວາຍທູບປະຈຳພຣະກຸດຕີ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໑໖໒] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກຳເນີດນັ້ນ ໆ ຂ້າພະເຈົ້າຍ່ອມເປັນທີ່ຮັກຂອງພວກເຂົາແມ່ນທັງໝົດ
ນີ້ເປັນຜົນແຫ່ງການຖວາຍທູບ

[໑໖໓] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທູບໄວ້ຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍທູບ

[໑໖໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທູປະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທູປະທາຍະກະເຖຣາປະທານທີ ໖ ຈົບ**

# ໗. ປູລິນະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປູລິນະປູຊະກະເຖຣະ

(ພຣະປູລິນະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖໕] ຂ້າພະເຈົ້າຂົນຊາຍເກົ່າຢູ່ລານໂພທັບປະເສີດ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ນຳໄປຖິ້ມແລ້ວຂົນຊາຍສະອາດມາໂຮຍໄວ້ແທນ

[໑໖໖] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຊາຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຊາຍ

[໑໖໗] ໃນກັບທີ ໕໖ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ມະຫາປຸລິນະ
ປົກຄອງຄົນ ມີພະລານຸພາບຫຼາຍ

[໑໖໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະປູລິນະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປູລິນະປູຊະກະເຖຣາປະທານທີ ໗ ຈົບ**

# ໘. ອຸດຕິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸດຕິຍະເຖຣະ

(ພຣະອຸດຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖໙] ຄັ້ງນັ້ນ ຂ້າພະເຈົ້າເກີດເປັນແຂ້ອາໄສຢູ່ທີ່ຝັ່ງແມ່ນ້ຳຈັນທະພາຄາ
ຂ້າພະເຈົ້າຂວນຂວາຍຫາເຫຍື່ອຂອງຕົນຈຶ່ງໄດ້ໄປສູ່ທ່ານ້ຳ

[໑໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສະຍຳພູ
ຜູ້ຊົງເປັນບຸກຄົນຜູ້ເລີດ ພຣະນາມວ່າ ສິດທັດຖະ
ພຣະອົງປະສົງຈະສະເດັດຂ້າມແມ່ນ້ຳ ຈຶ່ງສະເດັດເຂົ້າມາຍັງທ່ານ້ຳ

[໑໗໑] ເມື່ອພຣະສຳມາສຳພຸດທະເຈົ້າສະເດັດມາເຖິງແລ້ວ
ແມ່ນຂ້າພະເຈົ້າກໍເຂົ້າໄປເຖິງທີ່ທ່ານ້ຳນັ້ນ
ຂ້າພະເຈົ້າ ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າແລ້ວ ຂາບທູນຄຳນີ້ ວ່າ

[໑໗໒] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຂໍເຊີນພຣະອົງສະເດັດຂຶ້ນ (ຫຼັງຂ້າພຣະອົງ) ເທີ້ນ

ຂ້າພຣະອົງຈັກພາພຣະອົງຂ້າມ
ນັ້ນເປັນວິໄສຂອງບິດາ ແລະປູ່ຂອງຂ້າພຣະອົງ
ຂ້າແຕ່ພຣະມະຫາມຸນີ ຂໍພຣະອົງຊົງອະນຸເຄາະດ້ວຍເທີ້ນ

[໑໗໓] ພຣະຜູ້ມີພຣະພາກເຈົ້າຜູ້ມະຫາມຸນີ
ຊົງສະດັບຄຳທູນເຊີນຂອງຂ້າພະເຈົ້າແລ້ວສະເດັດຂຶ້ນ (ຫຼັງ)
ຂ້າພະເຈົ້າມີຈິດຮ່າເຣີງເບີກບານ
ຈຶ່ງພາພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳສັດໂລກຂ້າມໄປ

[໑໗໔] ຢູ່ຝັ່ງແມ່ນ້ຳຝັ່ງນັ້ນ ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າສິດທັດຖະ ຜູ້ຊົງເປັນຜູ້ນຳສັດໂລກ
ຊົງເຮັດໃຫ້ຂ້າພະເຈົ້າພໍໃຈ ໃນບ່ອນນັ້ນວ່າ
ທ່ານຈັກໄດ້ບັນລຸອະມະຕະທຳ

[໑໗໕] ຂ້າພະເຈົ້າ ຈຸຕິຈາກກາຍນັ້ນແລ້ວ ໄດ້ໄປເກີດໃນເທວະໂລກ
ມີເຫຼົ່ານາງເທບອັບປະສອນຫ້ອມລ້ອມ ໄດ້ສະເຫວີຍທິບພະຍະສຸກ

[໑໗໖] ຂ້າພະເຈົ້າໄດ້ເປັນຈອມເທບ ໄດ້ຄອງເທວະສົມບັດ ໗ ຊາດ
ແລະໄດ້ເປັນພຣະເຈົ້າຈັກກະພັດຜູ້ເປັນໃຫຍ່ໃນແຜ່ນດິນ ໓ ຊາດ
[໑໗໗] ຂ້າພະເຈົ້າປະກອບວິເວກຢູ່ເນືອງ ໆ
ມີປັນຍາຮັກສາຕົນແລະສັງລວມດີແລ້ວ
ຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍຢູ່ໃນສາດສະໜາ
ຂອງພຣະສຳມາສຳພຸດທະເຈົ້າ
[໑໗໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ພາພຣະຜູ້ມີພຣະພາກເຈົ້າຜູ້ອົງອາດກວ່ານໍຣະຊົນຂ້າມແລ້ວ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການພາພຣະຜູ້ມີພຣະພາກເຈົ້າຂ້າມ
[໑໗໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸດຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸດຕິຍະເຖຣາປະທານທີ ໘ ຈົບ**

## ໙. ເອກັນຊະລິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກັນຊະລິກະເຖຣະ

(ພຣະເອກັນຊະລິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗໐] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ພຣະນາມວ່າ ວິປັດສີ ຊົງປຽບດ້ວຍນາຍກວຽນຜູ້ເລີດ
ຜູ້ເປັນນໍຣະຊົນຜູ້ປະເສີດ ຊົງເປັນຜູ້ນຳໂດຍວິເສດ
ກຳລັງສະເດັດໄປໃນລະຫວ່າງຮ້ານຕະຫຼາດ

[໑໗໑] ຊົງຝຶກຜູ້ທີ່ຍັງບໍ່ໄດ້ຮັບການຝຶກ ຜູ້ຄົງທີ່
ເປັນເຈົ້າລັດທິໃຫຍ່ ມີປັນຍາຫຼາຍ
ຂ້າພຣະອົງໄດ້ເຫັນແລ້ວ ຈຶ່ງເປັນຜູ້ເຫຼື້ອມໃສ
ມີໃຈຍິນດີແລ້ວໄດ້ປະຄອງອັນຊະລີ

[໑໗໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ປະຄອງອັນຊະລີໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປະຄອງອັນຊະລີ

[໑໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະເອກັນຊະລິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກັນຊະລິກະເຖຣາປະທານທີ ໙ ຈົບ**

## ໑໐. ໂຂມະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂຂມະທາຍະກະເຖຣະ

(ພຣະໂຂມະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໗໔] ຄັ້ງນັ້ນ ຂ້າພະເຈົ້າເປັນພໍ່ຄ້າອາໄສຢູ່ໃນນະຄອນພັນທຸມະດີ
ໄດ້ລ້ຽງດູໂຂມະທາຍະກະດ້ວຍການຄ້າຂາຍນັ້ນ ແລະປູກພືດສົມບັດ

[໑໓໔] ຂ້າພະເຈົ້າຕ້ອງການບຸນກຸສົນ
ຈຶ່ງໄດ້ຖວາຍຜ້າເປືອກໄມ້ຜືນໜຶ່ງ
ແດ່ພຣະສາດສະດາຊົງພຣະນາມວ່າວິປັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ເຊິ່ງສະເດັດດຳເນີນຢູ່ທີ່ຖະໜົນ
[໑໓໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜ້າເປືອກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າເປືອກໄມ້
[໑໓໗] ໃນກັບທີ ໔໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເກີດເປັນພຣະເຈົ້າຈັກກະພັດອົງໜຶ່ງ
ພຣະນາມວ່າ ສົມະທະວະສັນທະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ເປັນໃຫຍ່ໃນທະວີບທັງ ໔
[໑໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂຂມະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂຂມະທາຍະກະເຖຣາປະທານທີ ໑໐ ຈົບ**

**ສຸພູຕິວັກທີ ໓ ຈົບບໍລິບູນ**

**ພານະວານທີ ໔ ຈົບ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສຸພູຕິເຖຣາປະທານ
໒. ຕິສະຣະນະຄະມະນີຍະເຖຣາປະທານ
໓. ອັນນະສັງສາວະກະເຖຣາປະທານ
໔. ປູລິນະປູຊະກະເຖຣາປະທານ
໕. ເອກັນຊະລິກະເຖຣາປະທານ
໖. ອຸປະວານະເຖຣາປະທານ
໗. ປັນຈະສີລະສະມາທານີຍະເຖຣາປະທານ
໘. ທູປະທາຍະກະເຖຣາປະທານ
໙. ອຸດຕິຍະເຖຣາປະທານ
໑໐. ໂຂມະທາຍະກະເຖຣາປະທານ

**ໃນວັກທີ ໓ ມີ ໑໐ ເລື້ອງດັ່ງວ່າມານີ້**

**ລວມຄາຖາທັງໝົດທີ່ທ່ານກ່າວໄວ້ມີ ໑໓໔ ຄາຖາ**

# ໔. ກຸນທະທານະວັກ

## ໝວດວ່າດ້ວຍພຣະກຸນທະທານະເປັນຕົ້ນ

## ໑. ກຸນທະທານະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸນທະທານະເຖຣະ

(ພຣະກຸນທະທານະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າມີຈິດເຫຼື້ອມໃສ
ມີໃຈຍິນດີໄດ້ບຳຣຸງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຊຶ່ງເປັນພຣະສະຍຳພູ ເປັນບຸກຄົນຜູ້ເລີດ
ສະເດັດຫຼີບຫຼີກຢູ່ ໗ ວັນ

[໒] ຂ້າພະເຈົ້າຮູ້ເວລາທີ່ພຣະອົງຈະສະເດັດອອກຈາກສະມາບັດ
ຈຶ່ງໄດ້ຖືກ້ວຍຫວີໃຫຍ່ເຂົ້າໄປຖວາຍ
ແດ່ພຣະຜູ້ມີພຣະພາກເຈົ້າຜູ້ເປັນມະຫາມຸນີພຣະນາມວ່າ ປະທຸມຸດຕະຣະ

[໓] ພຣະຜູ້ມີພຣະພາກເຈົ້າຜູ້ເປັນສັບພັນຍູ
ຜູ້ຊຶ່ງເປັນຜູ້ນຳສັດໂລກ ເປັນມະຫາມຸນີ
ເມື່ອຈະກະທຳຈິດຂອງຂ້າພະເຈົ້າໃຫ້ເຫຼື້ອມໃສ ຈຶ່ງຊົງຮັບແລ້ວສະເຫວີຍ

[໔] ພຣະສຳມາສຳພຸດທະເຈົ້າຊົງປຽບດ້ວຍນາຍກວຽນຜູ້ປະເສີດ
ສະເຫວີຍແລ້ວປະທັບນັ່ງເທິງອາສະນະຂອງພຣະອົງ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໕] ເຫຼົ່າຍັກທີ່ປະຊຸມກັນຢູ່ທີ່ພູເຂົານີ້
ແລະຄະນະພູດໃນປ່າທັງໝົດຈົ່ງຟັງຄຳຂອງເຮົາ
[໖] ເຮົາຈັກພະຍາກອນຜູ້ທີ່ບຳຣຸງພຣະພຸດທະເຈົ້າ
ຜູ້ເປັນດັ່ງພະຍາເນື້ອຊາດໄກສອນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ
[໗] ຜູ້ນັ້ນຈັກເປັນເທວະຣາດ ໑໑ ຊາດ
ແລະຈັກເປັນພຣະເຈົ້າຈັກກະພັດ ໓໔ ຊາດ

[໗] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໙] ຜູ້ນັ້ນຈັກດ່າສະມະນະທັງຫຼາຍຜູ້ມີສິນ ຜູ້ບໍ່ມີອາສະວະ
ຈັກໄດ້ການຂະໜານນາມຍ້ອນວິບາກແຫ່ງບາບກຳ

[໑໐] ເຂົາຈັກມີນາມວ່າກຸນທະທານະ
ເປັນສາວິກຂອງພຣະສາດສະດາພຣະອົງນັ້ນ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ

[໑໑] ຂ້າພະເຈົ້າຂວນຂວາຍວິເວກຢູ່ເນືອງ ໆ
ມີປີກກະຕິເຂົ້າຊານ ຍິນດີໃນຊານ
ໃຫ້ພຣະສາດສະດາຊົງພໍພຣະທະໄທແລ້ວ
ຢູ່ຢ່າງຜູ້ບໍ່ມີອາສະວະ

[໑໒] ພຣະຜູ້ມີພຣະພາກຊິນນະເຈົ້າມີເຫຼົ່າສາວົກແວດລ້ອມ
ມີໝູ່ພິກຂຸຫ້ອມລ້ອມ ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຊົງໃຫ້ຂ້າພະເຈົ້າຈັບສະລາກ

[໑໓] ຂ້າພະເຈົ້າຫົ່ມຜ້າບ່ຽງບ່າ
ອະພິວາດພຣະສາດສະດາຜູ້ຊົງເປັນຜູ້ນຳສັດໂລກ
ເມື່ອພິກຂຸທັງຫຼາຍກ່າວຢູ່ໄດ້ຈັບສະລາກເປັນເທື່ອທຳອິດ
ຕໍ່ພຣະພັກຂອງພຣະຜູ້ມີພຣະພາກເຈົ້າຜູ້ປະເສີດ

[໑໔] ດ້ວຍກຳນັ້ນ ພຣະຜູ້ມີພຣະພາກເຈົ້າ
ຊົງເຮັດໝື່ນຈັກກະວານໃຫ້ຫວັ່ນໄຫວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸ
ຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງອັນເລີດ

[໑໕] ຂ້າພະເຈົ້າມີຄວາມພຽນສຳລັບນຳພາທຸຣະ
ເປັນຄວາມພຽນທີ່ນຳມາເຊິ່ງທຳເປັນແດນກະເສມຈາກໂຍຄະ
ຂ້າພະເຈົ້າຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກຸນທະທານະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸນທະທານະເຖຣາປະທານທີ ໑ ຈົບ**

## ໔. ສາຄະຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສາຄະຕະເຖຣະ

(ພຣະສາຄະຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ຄັ້ງນັ້ນ ຂ້າພະເຈົ້າໄດ້ເປັນພາມມີນາມວ່າ ໂສພິຕະ
ຫ້ອມລ້ອມດ້ວຍສິດຂອງຕົນໄດ້ໄປສູ່ອາຣາມ

[໑໘] ໃນສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ສູງສຸດແຫ່ງບຸຣຸດ
ມີໝູ່ພິກຂຸຫ້ອມລ້ອມ ສະເດັດອອກຈາກປະຕູອາຣາມແລ້ວປະທັບຢືນຢູ່

[໑໙] ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ຜູ້ຝຶກພຣະອົງແລ້ວມີໝູ່ພິກຂຸຜູ້ຝຶກຕົນຫ້ອມລ້ອມແລ້ວ
ຈຶ່ງທຳຈິດຂອງຕົນໃຫ້ເຫຼື້ອມໃສ
ຊົມເຊີຍພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ນຳສັດໂລກວ່າ

[໔໐] ຕົ້ນໄມ້ທຸກຊະນິດນັ້ນຂຶ້ນງອກງາມເທິງແຜ່ນດິນໄດ້ ສັນໃດ
ສັດທັງຫຼາຍຜູ້ມີຄວາມຮູ້ ກໍສັນນັ້ນ
ຍ່ອມງອກງາມໃນສາດສະໜາຂອງພຣະຊິນນະເຈົ້າ

[໔໑] ແມ່ນພຣະອົງຊົງເປັນສັບພັນຍູ
ປຽບດ້ວຍນາຍກວຽນ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຊົງຊັກນຳຊົນຈຳນວນຫຼາຍອອກຈາກທາງຜິດແລ້ວຕັດບອກທາງຖືກ

[໔໔] ຊົງຝຶກພຣະອົງແລ້ວ ມີໝູ່ພິກຂຸຜູ້ຝຶກຕົນຫ້ອມລ້ອມແລ້ວ
ມີປີກາະຕິເຂົ້າຊານ ມີໝູ່ພິກຂຸຫ້ອມລ້ອມຜູ້ຍິນດີໃນຊານ
ມີຄວາມພຽນ ຫ້ອມລ້ອມດ້ວຍຜູ້ມີຈິດເດັດດ່ຽວ
ສະງົບຣະງັບ ຜູ້ຄົງທີ່

[໔໖] ພຣະອົງປະດັບດ້ວຍສາວົກບໍລິສັດ
ຊົງງົດງາມດ້ວຍພຣະຍານທີ່ເກີດຈາກບຸນ
ພຣະອົງມີພຣະຣັດສະໝີພວຍພຸ່ງດັ່ງດວງອາທິດອຸໄທ ສັນນັ້ນ

[໔໘] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ທອດພຣະເນດເຫັນຂ້າພະເຈົ້າຜູ້ມີຈິດເຫຼື້ອມໃສແລ້ວ
ປະທັບຢືນຢູ່ໃນທ່າມກາງໝູ່ພິກຂຸໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໔໕] ພານໃດເກີດຄວາມຮ່າເຣີງແລ້ວສັນເສີນເຮົາ
ພານນັ້ນຈັກຣື່ນຣົມໃນເທວະໂລກ ໑໐໐,໐໐໐ ກັບ

[໔໖] ເຂົາຖືກກຸສົນມູນຕັກເຕືອນແລ້ວຈຸຕິຈາກສະຫວັນຊັ້ນດຸສິດ
ຈັກບວດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໔໗] ເມື່ອບວດໃນສາດສະໜາແລ້ວຈັກໄດ້ຄວາມຍິນດີແລະຄວາມຮ່າເຣີງ
ມີນາມວ່າ ສາຄະຕະ ເປັນສາວົກຂອງພຣະສາດສະດາ

[໔໘] ຂ້າພະເຈົ້າເມື່ອບວດແລ້ວ ເວັ້ນກາຍທຸດຈະລິດ
ລະວະຈີທຸດຈະລິດ ຊຳຣະອາຊີວະໃຫ້ບໍລິສຸດ

[໔໙] ຂ້າພະເຈົ້າຢູ່ຢ່າງນີ້ ເປັນຜູ້ສະຫຼາດໃນເຕໂຊທາດ (ທາດໄຟ)
ກຳນົດຮູ້ອາສະວະທັງປວງແລ້ວ ຢູ່ຢ່າງຜູ້ບໍ່ມີອາສະວະ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ ໄດ້ຮູ້ວ່າ ທ່ານພຣະສາຄະຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສາຄະຕະເຖຣາປະທານທີ ໔ ຈົບ**

# ໖. ມະຫາກັດຈາຍະນະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມະຫາກັດຈາຍະນະເຖຣະ

(ພຣະມະຫາກັດຈາຍະນະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໑] ພຣະເຈດີ (ວິຫານທີ່ປະທັບ) ຊື່ວ່າ ປະທຸມະ
ຂອງພຣະຜູ້ມີພຣະພາກເຈົ້າຜູ້ເປັນບ່ອນເພິ່ງພຣະນາມວ່າ ປະທຸມຸດຕະຣະ
ຂ້າພະເຈົ້າໃຫ້ເຮັດແຜ່ນສີລາໄວ້ພາຍໃຕ້ແລ້ວໃຊ້ຄຳລູບທາແຜ່ນສີລານັ້ນ

[໖໔] ແລະໄດ້ກັ້ງເສດຕະສັດເຊິ່ງເຮັດດ້ວຍຣັດຕະນະແລ້ວ
ຖືພັດວີກັບແສ້ພັດຖວາຍພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນຂອງສັດໂລກ ຜູ້ຄົງທີ່

[໖໖] ພຸມມະເທວະດາ (ເທວະດາຜູ້ອາໄສຢູ່ເທິງແຜ່ນດິນ)
ມາປະຊຸມກັນທັງໝົດເທົ່າທີ່ມີໃນຄັ້ງນັ້ນ
ດ້ວຍຫວັງວ່າ ພຣະສາດສະດາຈັກຕັດຜົນແຫ່ງການກັ້ງເສດຕະສັດ
ເຊິ່ງເຮັດດ້ວຍຣັດຕະນະ

[໖໔] ພວກເຮົາຈັກຟັງພຣະສາດສະດາຕັດເລື້ອງທັງໝົດນັ້ນ
ຈະເພິ່ງເກີດຄວາມຣ່າເຣີງຢ່າງຍິ່ງ
ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໖໕] ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສະຍຳພູ
ເປັນບຸກຄົນຜູ້ເລີດປະທັບນັ່ງເທິງອາສະນະຄຳແລ້ວ
ມີໝູ່ພິກຂຸທ້ອມລ້ອມ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໖] ເຮົາຈັກພະຍາກອນຜູ້ທີ່ໄດ້ຖວາຍອາສະນະເຊິ່ງເຮັດດ້ວຍຄຳ
ແລະກັ້ງເສດຕະສັດເຊິ່ງເຮັດດ້ວຍຣັດຕະນະນີ້
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໖໗] ຜູ້ນັ້ນ ຈັກເປັນຈອມເທບຄອງເທວະສົມບັດ ໖໐ ກັບ
ຈັກແຜ່ຣັດສະໝີໄປ ໑໐໐ ໂຍດໂດຍຮ້ອບ

[໓໗] ຜູ້ນັ້ນ ຈັກມາເກີດໃນມະນຸດໂລກ ເປັນພຣະເຈົ້າຈັກກະພັດ
ມີພຣະນາມວ່າ ປະພັດສະຣະ ຈັກເປັນຜູ້ມີເດດແຜ່ໄປ

[໓໙] ຜູ້ນັ້ນ ຈັກໄດ້ເປັນກະສັດ
ສ່ອງສະຫວ່າງໄປ ໗ ສອກ ໂດຍຮ້ອບທັງກາງເວັນກາງຄືນ
ເໝືອນດວງອາທິດອຸໄທ ສັນນັ້ນ

[໔໐] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໑] ຜູ້ນັ້ນຖືກກຸສົນມູນຕັກເຕືອນແລ້ວ
ຈັກຈຸຕິຈາກສະຫວັນຊັ້ນດຸສິດ
ມາເກີດເປັນບຸດຂອງພາມມີນາມວ່າ ກັດຈານະ ຕາມໂຄດ

[໔໒] ພາຍຫຼັງເຂົາອອກບວດແລ້ວ ຈັກສຳເລັດເປັນພຣະອະຣະຫັນ ບໍ່ມີອາສະວະ
ພຣະໂຄດົມຜູ້ສ່ອງໂລກໃຫ້ໂຊດຊ່ວງຈັກຕັ້ງເຂົາໄວ້ໃນເອຕະທັກຄະ

[໔໓] ເຂົາຈັກຕອບບັນຫາທີ່ຖືກຖາມຢ່າງຫຍໍ້ໄດ້ໂດຍພິດສະດານ
ແລະເມື່ອຕອບບັນຫານັ້ນ ຈັກເຮັດອັດທະຍາໄສໃຫ້ເຕັມໄດ້

[໔໔] ຂ້າພະເຈົ້າເປັນພາມຜູ້ອະພິຊາຕະບຸດໃນຕະກູນທີ່ມັ່ງຄັ່ງ
ຈົບມົນ ສະລະຊັບແລະເຂົ້າເປືອກແລ້ວ
ອອກບວດເປັນບັນພະຊິດ

[໔໕] ເມື່ອຖືກຖາມບັນຫາແມ່ນໂດຍຫຍໍ້
ຂ້າພະເຈົ້າກໍກ່າວແກ້ໄດ້ໂດຍພິດສະດານ
ກະທຳອັດທະຍາໄສຂອງຊົນເຫຼົ່ານັ້ນໃຫ້ເຕັມ
ໃຫ້ພຣະຜູ້ມີພຣະພາກເຈົ້າຜູ້ສູງສຸດແຫ່ງເທວະດາ ແລະ ມະນຸດຊົງພໍພຣະທະໄທໄດ້

[໔໖] ພຣະມະຫາວີຣະຜູ້ເປັນພຣະສະຍຳພູ ເປັນບຸກຄົນຜູ້ເລີດ
ຂ້າພະເຈົ້າເຮັດໃຫ້ຊົງພໍພຣະທະໄທແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຊົງຕັ້ງຂ້າພະເຈົ້າໄວ້ໃນເອຕະທັກຄະ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະຫາກັດຈາຍະນະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມະຫາກັດຈາຍະນະເຖຣາປະທານທີ ໓ ຈົບ**

# ໔. ກາລຸທາຍີເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກາລຸທາຍີເຖຣະ

(ພຣະກາລຸທາຍີເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ເມື່ອພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່
ສະເດັດດໍາເນີນທາງໄກທ່ຽວຈາຣິກໄປໃນຄັ້ງນັ້ນ

[໔໙] ຂ້າພະເຈົ້າໄດ້ຖືດອກປະທຸມ ດອກອຸບົນ
ແລະດອກມະລິຊ້ອນ ທີ່ບານສະພັ່ງ
ແລະຖືເຂົ້າ (ສຸກ) ຊັ້ນດີມາຖວາຍພຣະສາດສະດາ

[໕໐] ພຣະມະຫາວີຣະສະເຫວີຍເຂົ້າສຸກຊັ້ນດີ ໂພຊະນະຢ່າງດີ
ອັນໜຶ່ງ ກາລຸທາຍີຮັບດອກໄມ້ນັ້ນແລ້ວ ມອບຖວາຍແກ່ພຣະຊິນນະເຈົ້າ

[໕໑] ຜູ້ທີ່ໄດ້ຖວາຍດອກປະທຸມຊັ້ນດີເລີດ
ທີ່ໜ້າປາຖະໜາ ໜ້າຕ້ອງການນີ້ແກ່ເຮົາ ຊື່ວ່າເຮັດສິ່ງທີ່ເຮັດໄດ້ຍາກ

[໕໒] ເຮົາຈັກພະຍາກອນຜູ້ທີ່ໄດ້ໃຊ້ດອກໄມ້ບູຊາ
ແລະໄດ້ຖວາຍເຂົ້າສຸກຊັ້ນດີແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໕໓] ຜູ້ນັ້ນຈັກຄອງເທວະສົມບັດ ໑໘ ຊາດ
ດອກອຸບົນ ດອກປະທຸມ ແລະດອກມະລິຊ້ອນ ຈະມີໃນເບື້ອງເທິງຜູ້ນັ້ນ
[໕໔] ດ້ວຍຜົນບຸນຂອງເຂົາ ຜູ້ຄົນຈັກສ້າງຫຼັງຄາ
ປະກອບດ້ວຍຂອງຫອມທີ່ເປັນທິບກັ້ງໄວ້ໃນອາກາດ ໃນເວລານັ້ນ

[໕໕] ເຂົາຈັກເປັນພຣະເຈົ້າຈັກກະພັດ ໘໕ ຊາດ
ຈັກເປັນພຣະເຈົ້າແຜ່ນດິນຄອງແຜ່ນດິນ ໕໐໐ ຊາດ

[໕໖] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໕໗] ເຂົາຍິນດີຍິ່ງໃນກຳຂອງຕົນ
ຖືກກຸສົນມູນຕັກເຕືອນແລ້ວຈັກເກີດເປັນເຜົ່າພັນແຫ່ງພຣະຍາດພີ່ນ້ອງ
ທີ່ກໍ່ໃຫ້ເກີດຄວາມເພີດເພີນແກ່ພວກເຈົ້າສາກະຍະ

[໕໘] ແລະພາຍຫຼັງເຂົາຖືກກຸສົນມູນຕັກເຕືອນແລ້ວບວດ
ກຳນົດຮູ້ອາສະວະທັງປວງຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໕໙] ພຣະໂຄດົມຜູ້ເປັນເຜົ່າພັນຂອງໂລກ
ຈັກຊົງຕັ້ງເຂົາ ຜູ້ບັນລຸປະຕິສຳພິທາ ທຳກິດທີ່ຄວນທຳສຳເລັດແລ້ວ
ບໍ່ມີອາສະວະໄວ້ໃນເອຕະທັກຄະ

[໖໐] ເຂົາມີຈິດເດັດດ່ຽວເພື່ອພໍ່າເພັງພຽນ
ເປັນຜູ້ສະງົບຣະງັບ ບໍ່ມີອຸປະທິ ມີນາມວ່າອຸທາຍີ ຕາມໂຄດ
ຈັກເປັນສາວົກຂອງພຣະສາດສະດາ

[໖໑] ຣາຄະ ໂທສະ ໂມຫະ ມານະ ແລະມັກຂະອັນຂ້າພະເຈົ້າກຳຈັດໄດ້ແລ້ວ
ຂ້າພະເຈົ້າກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໖໒] ຂ້າພະເຈົ້າມີຄວາມພຽນ ມີປັນຍາຮັກສາຕົນ
ເຮັດໃຫ້ພຣະສຳມາສຳພຸດທະເຈົ້າຊົງພໍພຣະທະໄທແລ້ວ
ແລະພຣະສຳມາສຳພຸດທະເຈົ້າຜູ້ຊົງຍິນດີ
ໄດ້ຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງອັນເລີດ

[໖໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກາລຸທາຍີເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກາລຸທາຍີເຖຣາປະທານທີ ໔ ຈົບ**

# ໕. ໂມຄະຣາດເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂມຄະຣາດເຖຣະ

(ພຣະໂມຄະຣາດເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໔] ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະສະຍຳພູພຣະນາມວ່າ ອັດຖະທັດສີ
ຜູ້ບໍ່ຊົງພ່າຍແພ້ມີໝູ່ພິກຂຸຫ້ອມລ້ອມ
ສະເດັດດຳເນີນໄປທີ່ຖະໜົນ

[໗໕] ຂ້າພະເຈົ້າກໍມີສິດທັງຫຼາຍແວດລ້ອມ ອອກຈາກເຮືອນໄປ
ເມື່ອອອກໄປແລ້ວໄດ້ພົບພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກທີ່ຖະໜົນນັ້ນ

[໗໖] ຂ້າພະເຈົ້າປະຄອງອັນຊະລີເໜືອຫົວ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ
ທຳຈິດຂອງຕົນໃຫ້ເຫຼື້ອມໃສແລ້ວ
ຊົມເຊີຍພຣະອົງຜູ້ຊົງເປັນຜູ້ນຳສັດໂລກວ່າ

[໗໗] ສັດທັງທີ່ມີຮູບກໍຕາມ ບໍ່ມີຮູບກໍຕາມ ທີ່ມີສັນຍາກໍຕາມ
ບໍ່ມີສັນຍາກໍຕາມ ມີຈຳນວນເທົ່າໃດ ສັດຈຳນວນເທົ່ານັ້ນທັງໝົດ
ຍ່ອມເຂົ້າໄປຜາກົດພາຍໃນພຣະຍານຂອງພຣະອົງ

[໗໘] ປຽບເໝືອນສັດນ້ຳເຫຼົ່າໃດເຫຼົ່າໜຶ່ງບັນດາມີ
ສັດເຫຼົ່ານັ້ນຍ່ອມຕົກຢູ່ພາຍໃນແຫຂອງຄົນທີ່ເອົາແຫຕາຖີ່ ໆ
ຫວ່ານຄຸມນ້ຳ ສັນນັ້ນ

[໗໙] ອັນໜຶ່ງ ສັດເຫຼົ່າໃດມີເຈຕະນາ
ສັດເຫຼົ່ານັ້ນທັງໝົດ ທັງທີ່ມີຮູບ ແລະບໍ່ມີຮູບ
ຍ່ອມເຂົ້າໄປຜາກົດພາຍໃນພຣະຍານຂອງພຣະອົງ

[໘໐] ພຣະອົງຊົງຊ່ວຍເຫຼືອສັດໂລກທີ່ອາກູນດ້ວຍຄວາມມືດນີ້ໄດ້
ສັດເຫຼົ່ານັ້ນໄດ້ຟັງທຳຂອງພຣະອົງແລ້ວ
ຍ່ອມຂ້າມກະແສຄວາມສົງໄສໄດ້

[໗໑] ສັດໂລກຖືກອະວິດຊາຫຸ້ມຫໍ່ໄວ້ແລ້ວ
ຖືກຄວາມມືດປົກຄຸມແລ້ວ
ເມື່ອພຣະຍານຂອງພຣະອົງໂຊດຊ່ວງຢູ່ ຄວາມມືດກໍຖືກຂະຈັດແລ້ວ

[໗໒] ພຣະອົງເປັນຜູ້ມີພຣະຈັກຂຸ
ບັນເທົາຄວາມມືດທີ່ໃຫຍ່ຫຼວງຂອງສັດທັງປວງໄດ້
ຊົນຈຳນວນຫຼາຍຟັງທຳຂອງພຣະອົງແລ້ວຈັກນິບພານ

[໗໓] ຂ້າພະເຈົ້ານຳນ້ຳເຜິ້ງຮວງທີ່ບໍ່ມີໂທດ
ໃສ່ເຕັມໝໍ້ແລ້ວ ໃຊ້ມືທັງ ໒ ຂ້າງປະຄອງ
ນ້ອມຖວາຍພຣະຜູ້ມີພຣະພາກເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໗໔] ພຣະຜູ້ມີພຣະພາກເຈົ້າຜູ້ມີຄວາມພຽນຫຼາຍ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຊົງຮັບດ້ວຍພຣະຫັດຂອງພຣະອົງ
ພຣະຜູ້ມີພຣະພາກເຈົ້າຜູ້ສັບພັນຍູ ເມື່ອສະເຫວີຍນ້ຳເຜິ້ງນັ້ນແລ້ວ
ສະເດັດເຫາະຂຶ້ນສູ່ນະພາກາດ

[໗໕] ພຣະສາດສະດາພຣະນາມວ່າອັດຖະທັດສີ
ຜູ້ອົງອາດກວ່ານໍຣະຊົນ ປະທັບຢືນຢູ່ໃນອາກາດ
ເມື່ອຈະຊົງທຳຈິດຂອງຂ້າພະເຈົ້າໃຫ້ເຫຼື້ອມໃສໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໗໖] ຜູ້ໃດຊົມເຊີຍພຣະຍານນີ້ແລະຊົມເຊີຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຜູ້ນັ້ນຈະບໍ່ໄປເກີດໃນທຸກຄະຕິເລີຍ

[໗໗] ແລະຜູ້ນັ້ນຈັກຄອງເທວະສົມບັດ ໖໔ ຊາດ
ຈັກເປັນພຣະເຈົ້າປະເທດຣາດຄອງແຜ່ນດິນ ໑໐໘ ຊາດ

[໗໘] ຈັກເປັນພຣະເຈົ້າຈັກກະພັດ ໑໐໕ ຊາດ
ຈັກຄອງປະເທດຣາດໃນແຜ່ນດິນນັບຊາດບໍ່ຖ້ວນ

[໗໙] ເຂົາຈັກເປັນຜູ້ຄົງແກ່ຮຽນ ຊົງມົນ ຈົບໄຕຣເພດ
ຈັກບວດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມ

[໘໐] ເຂົາຈັກພິຈາລະນາເນື້ອຄວາມທີ່ເລິກເຊິ່ງລະອຽດໄດ້ດ້ວຍຍານ
ຈັກມີນາມວ່າ ໂມຄະຣາດ ເປັນສາວົກຂອງພຣະສາດສະດາ

[໗໑] ເຂົາຈັກສົມບູນດ້ວຍວິດຊາ ໓
ທຳກິດທີ່ຄວນທຳສຳເລັດແລ້ວ ບໍ່ມີອາສະວະ
ພຣະພຸດທະເຈົ້າພຣະນາມວ່າ ໂຄດົມ
ຊົງປຽບດ້ວຍນາຍກວຽນຜູ້ເລີດ
ຈັກຊົງຕັ້ງເຂົາໄວ້ໃນເອຕະທັກຄະ

[໗໘] ຂ້າພະເຈົ້າລະໂຍຄະທີ່ເປັນຂອງມະນຸດໄດ້ແລ້ວ
ຕັດກິເລດເຄື່ອງຜູກພັນຄືພົບໄດ້ແລ້ວ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂມຄະຣາດເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂມຄະຣາດເຖຣາປະທານທີ ໕ ຈົບ**

## ໖. ອະທິມຸດຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະທິມຸດຕະເຖຣະ

(ພຣະອະທິມຸດຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໔] ເມື່ອພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນບ່ອນເພິ່ງ
ຂອງສັດໂລກພຣະນາມວ່າອັດຖະທັດສີ
ຜູ້ສູງສຸດແຫ່ງນໍຣະຊົນ ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າມີຈິດຜ່ອງໃສ ໄດ້ບຳຣຸງພິກຂຸສົງ

[໗໕] ເມື່ອນິມົນພຣະສັງຄະຣັດຕະນະ ຜູ້ຊື່ຕົງ ຜູ້ມີຈິດຕັ້ງໝັ້ນແລ້ວ
ຂ້າພະເຈົ້າຈຶ່ງໃຊ້ຕົ້ນອ້ອຍເຮັດມົນດົບ
ນິມົນສົງຜູ້ສູງສຸດໃຫ້ສັນແລ້ວ

[໗໖] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ

ໃນກຳເນີດນັ້ນ ໆ ຂ້າພະເຈົ້າຍ່ອມປົກຄອງສັດທັງປວງ
ນີ້ເປັນຜົນແຫ່ງບຸນກຳ

[໘໗] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍທານໄວ້ ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍອ້ອຍ

[໘໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອະທິມຸດຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະທິມຸດຕະເຖຣາປະທານທີ ໖ ຈົບ**

## ໗. ລະສຸນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະລະສຸນະທາຍະກະເຖຣະ

(ພຣະລະສຸນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໙] ຄັ້ງນັ້ນ ຂ້າພະເຈົ້າບວດເປັນດາບົດ
ອາໄສຢູ່ໃນບ່ອນບໍ່ໄກພູເຂົາຫິມະພານ
ຂ້າພະເຈົ້າອາໄສກະທຽມລ້ຽງຊີວິດ
ກະທຽມເປັນອາຫານຂອງຂ້າພະເຈົ້າ

[໙໐] ຂ້າພະເຈົ້າໃສ່ກະທຽມເຕັມຫາບແລ້ວຫາບໄປສູ່ສັງຄາຣາມ
ຂ້າພະເຈົ້າມີຈິດຣ່າເຣີງເບີກບານໄດ້ຖວາຍກະທຽມແດ່ພຣະສົງ

[໙໑] ຍ້ອນຖວາຍກະທຽມແດ່ພຣະສົງ
ຜູ້ຍິນດີໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າວິປັດສີ
ຜູ້ເລີດກວ່ານໍຣະຊົນ
ຂ້າພະເຈົ້າຈຶ່ງບັນເທີງໃນສະຫວັນຕະຫຼອດກັບໜຶ່ງ

[໙໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍກະທຽມໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍກະທຽມ

[໙໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະລະສຸນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ລະສຸນະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ອາຍາຄະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອາຍາຄະທາຍະກະເຖຣະ

(ພຣະອາຍາຄະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໔] ເມື່ອພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກພຣະນາມວ່າ ສິຂີ
ຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າມີຈິດຣ່າເຣີງເບີກບານໄດ້ໄຫວ້ພຣະສະຖູບທີ່ປະເສີດ

[໙໕] ຄັ້ງນັ້ນ ຂ້າພະເຈົ້າມີຈິດຣ່າເຣີງເບີກບານ
ໄດ້ໃຫ້ນາຍຊ່າງປະເມີນຣາຄາແລ້ວຈຶ່ງຈ່າຍຊັບ
ຈ້າງກໍ່ສ້າງສາລາໂຮງສັນ

[໙໖] ຂ້າພະເຈົ້າຢູ່ໃນເທວະໂລກເຖິງ ໘ ກັບ ໂດຍບໍ່ຢູ່ປະປົນກັບຜູ້ໃດເລີຍ
ໃນກັບທີເຫຼືອ ຂ້າພະເຈົ້າວຽນວ່າຍຕາຍເກີດຜັດປ່ຽນກັນໄປ
[໙໗] ຢາພິດຍ່ອມບໍ່ເຮັດຫຍັງໃນກາຍຂ້າພະເຈົ້າໄດ້
ແລະອາວຸດກໍບໍ່ທຳຮ້າຍຂ້າພະເຈົ້າໄດ້
ຂ້າພະເຈົ້າຍ່ອມບໍ່ຕາຍໃນນ້ຳ
ນີ້ເປັນຜົນແຫ່ງການສ້າງສາລາໂຮງສັນ

[໙໗] ຂ້າພະເຈົ້າປາຖະໜາຝົນເມື່ອໃດ
ມະຫາເມກຍ່ອມໂຮຍຮຳຝົນຕົກລົງເມື່ອນັ້ນ
ແມ່ນເທວະດາທັງຫຼາຍກໍຢູ່ໃນອຳນາດຂອງຂ້າພະເຈົ້າ
ນີ້ເປັນຜົນແຫ່ງບຸນກຳ

[໙໙] ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ
ສົມບູນດ້ວຍຣັດຕະນະ ໆ ປະການ ໕໐ ຊາດ
ໃຜ ໆ ກໍດູໝິ່ນຂ້າພະເຈົ້າບໍ່ໄດ້
ນີ້ເປັນຜົນແຫ່ງບຸນກຳ

[໑໐໐] ໃນກັບທີ ໕໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຫ້ສ້າງສາລາໂຮງສັນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງສາລາໂຮງສັນ

[໑໐໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອາຍາຄະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາຍາຄະທາຍະກະເຖຣາປະທານທີ ໗ ຈົບ**

## ໙. ທຳມະຈັກກິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທຳມະຈັກກິກະເຖຣະ

(ພຣະທຳມະຈັກກິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໔] ຂ້າພະເຈົ້າໄດ້ຕັ້ງທຳມະຈັກ ທີ່ເຮັດຢ່າງສວຍງາມອັນວິນຍູຊົນຊົມເຊີຍໄວ້
ຂ້າງໜ້າພຸດທະອາດຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ

[໑໐໕] ຂ້າພະເຈົ້າມີຍວດຍານ ກຳລັງພົນ ແລະພາຫະນະ
ຍ່ອມງົດງາມດ້ວຍວັນນະທັງ ໔໑
ຄົນຈຳນວນຫຼາຍຍ່ອມຕິດຕາມແວດລ້ອມຂ້າພະເຈົ້າເປັນນິດ

[໑໐໔] ຂ້າພະເຈົ້າມີດົນຕີ ໖໐,໐໐໐ ຢ່າງ
ບຳຣຸງບຳເຣີຢູ່ທຸກເມື່ອ ຍ່ອມງົດງາມດ້ວຍບໍລິວານ
ນີ້ເປັນຜົນແຫ່ງບຸນກຳ

[໑໐໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຕັ້ງທຳມະຈັກໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຕັ້ງທຳມະຈັກ

[໑໐໖] ໃນກັບທີ ໑໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ
ມີພຣະນາມວ່າສະຫັດສະຣາດ
ຜູ້ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໑໐໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທຳມະຈັກກິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

## ໑໐. ກັບປະຣຸກຂິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກັບປະຣຸກຂິຍະເຖຣະ

(ພຣະກັບປະຣຸກຂິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໘] ຂ້າພະເຈົ້າໄດ້ປະດິດສະຖານຕົ້ນກັນລະປະພຶກ
ຄອງຜ້າງົດງາມວິຈິດຫຼາຍຜືນ
ໄວ້ຊື່ໜ້າພຣະສະຖູບອັນປະເສີດທີ່ສຸດຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າສິດທັດຖະ

[໑໐໙] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ໃນກຳເນີດນັ້ນ ໆ ຕົ້ນກັນລະປະພຶກປະດິດສະຖານ
ສ່ອງແສງງົດງາມທີ່ປະຕູຂອງຂ້າພະເຈົ້າ

[໑໑໐] ພວກຂ້າພະເຈົ້າ ຄື ຂ້າພະເຈົ້າເອງ ຊຸມນຸມຊົນ
ແລະຄົນບາງເຫຼົ່າທີ່ມີອາຍຸເທົ່າກັນ (ເພື່ອນ)
ໄດ້ນຳຜ້າຈາກຕົ້ນກັນລະປະພຶກນັ້ນມານຸ່ງຫົ່ມ

[໑໑໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າປະດິດສະຖານຕົ້ນກັນລະປະພຶກໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປະດິດສະຖານຕົ້ນກັນລະປະພຶກໄວ້

[໑໑໒] ແລະໃນກັບທີ ໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນກະສັດຜູ້ຈັກກະພັດ ໙ ຊາດ
ພຣະນາມວ່າ ສຸເຈລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໑໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກັບປະຣຸກຂິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ກັບປະຣຸກຂິຍະເຖຣາປະທານທີ ໑໐ ຈົບ**

**ກຸນທະທານະວັກທີ ໔ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ກຸນທະທານະເຖຣາປະທານ
໒. ສາຄະຕະເຖຣາປະທານ
໓. ມະຫາກັດຈາຍະນະເຖຣາປະທານ
໔. ກາລຸທາຍີເຖຣາປະທານ
໕. ໂມຄະຣາດເຖຣາປະທານ
໖. ອະທິມຸດຕະເຖຣາປະທານ
໗. ລະສຸນະທາຍະກະເຖຣາປະທານ
໘. ອາຍາຄະທາຍະກະເຖຣາປະທານ
໙. ທຳມະຈັກກິກະເຖຣາປະທານ
໑໐. ກັບປະຣຸກຂິຍະເຖຣາປະທານ

**ແລະມີຄາຖາ ໑໑໔ ຄາຖາ**

# ໕. ອຸປາລິວັກ

## ໝວດວ່າດ້ວຍພຣະອຸປາລິເປັນຕົ້ນ

## ໑. ອຸປາລິເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸປາລິເຖຣະ

(ພຣະອຸປາລິເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ມີພຣະຂີນາສົບ ໑,໐໐໐ ອົງແວດລ້ອມ
ພຣະອົງຜູ້ຂວນຂວາຍວິເວກ ຈຶ່ງສະເດັດໄປເພື່ອຫຼີບຫຼີກ

[໒] ຂ້າພະເຈົ້ານຸ່ງຫົ່ມໜັງສັດ
ຖືໄມ້ກ້ານເທົ້າ ໓ ງ່າມທ່ຽວໄປ ໄດ້ພົບພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ມີໝູ່ພິກຂຸຫ້ອມລ້ອມ

[໓] ຂ້າພະເຈົ້າຈຶ່ງເຮັດໜັງສັດບ່ຽງບ່າ
ປະຄອງອັນຊະລີໄວ້ເໜືອຫົວ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ
ແລ້ວຊົມເຊີຍພຣະອົງຜູ້ຊົງເປັນຜູ້ນຳສັດໂລກວ່າ

[໔] ສັດທັງຫຼາຍທີ່ເກີດໃນໄຂ່ ເກີດໃນໄຄ
ເກີດຜຸດຂຶ້ນ ເກີດໃນທ້ອງ ແລະນົກມີກາເປັນຕົ້ນທັງໝົດ
ໄດ້ທ່ຽວໄປໃນອາກາດທຸກເມື່ອ ສັນໃດ

[໕] ສັດເຫຼົ່າໃດເຫຼົ່າໜຶ່ງ ມີສັນຍາກໍຕາມ
ບໍ່ມີສັນຍາກໍຕາມ ສັດເຫຼົ່ານັ້ນທັງໝົດກໍສັນນັ້ນ
ຍ່ອມເຂົ້າໄປຜາກົດພາຍໃນພຣະຍານຂອງພຣະອົງ

[໖] ອັນໜຶ່ງ ກິ່ນຫອມເຫຼົ່າໃດມີຢູ່ທີ່ພູເຂົາ
ໃນພູເຂົາຫິມະພານເຊິ່ງເປັນພູເຂົາສູງສຸດ
ກິ່ນຫອມເຫຼົ່ານັ້ນທັງໝົດ
ຍ່ອມບໍ່ຄວນແມ່ນສ່ວນສ່ຽວໃນສີນຂອງພຣະອົງເລີຍ

[໗] ໂລກນີ້ພ້ອມທັງເທວະໂລກແລ່ນເຂົ້າໄປສູ່ຄວາມມືດຄືໂມຫະ
ເມື່ອພຣະຍານຂອງພຣະອົງສ່ອງແສງໂຊດຊ່ວງຢູ່ ຄວາມມືດກໍຖືກກຳຈັດໄປ

[໘] ເມື່ອດວງອາທິດອັດສະດົງຄົດແລ້ວ
ສັດທັງຫຼາຍກໍຕົກຢູ່ໃນຄວາມມືດ ສັນໃດ
ເມື່ອພຣະພຸດທະເຈົ້າຍັງບໍ່ສະເດັດອຸບັດຂຶ້ນ
ສັດໂລກກໍຕົກຢູ່ໃນຄວາມມືດ ສັນນັ້ນ

[໙] ດວງອາທິດເມື່ອອຸໄທຂຶ້ນ
ຍ່ອມຂະຈັດຄວາມມືດໄດ້ທຸກເມື່ອ ສັນໃດ
ຂ້າແຕ່ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພຣະອົງກໍຊົງຂະຈັດຄວາມມືດໄດ້ທຸກເມື່ອ ສັນນັ້ນ

[໑໐] ພຣະອົງຊົງມີພຣະຫະໄທເດັດດ່ຽວເພື່ອພ່ຳເພັງພຽນ
ໄດ້ຕັດສະຣູ້ເປັນພຣະພຸດທະເຈົ້າໃນໂລກພ້ອມທັງເທວະໂລກ
ຊົງເຮັດໝູ່ຊົນຈຳນວນຫຼາຍໃຫ້ຍິນດີ
ດ້ວຍການຜາຣິບການກະທຳຂອງພຣະອົງ

[໑໑] ພຣະຜູ້ມີພຣະພາກເຈົ້າຜູ້ມະຫາມຸນີພຣະນາມວ່າ ປະທຸມຸດຕະຣະ
ຜູ້ເປັນນັກປາດ ຊົງສະດັບຄຳນັ້ນແລ້ວ ຊົງອະນຸໂມທະນາແລ້ວ
ສະເດັດເຫາະໄປໃນທ້ອງຟ້າ
ເໝືອນພະຍາຫົງໂຜບິນໄປໃນທ້ອງຟ້າ ສັນນັ້ນ

[໑໒] ພຣະສາດສະດາສຳມາສຳພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະນາມວ່າປະທຸມຸດຕະຣະ
ສະເດັດເຫາະຂຶ້ນໄປປະທັບຢູ່ໃນອາກາດໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໓] ເຮົາຈັກພະຍາກອນຜູ້ທີ່ຊົມເຊີຍຍານ
ເຊິ່ງປະກອບດ້ວຍຂໍ້ອຸປະມາທັງຫຼາຍນີ້
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໔] ເຂົາຈັກເປັນເທວະຣາດ ໑໗ ຊາດ
ຈັກເປັນພຣະເຈົ້າແຜ່ນດິນຄອງແຜ່ນດິນ ໓໐໐ ຊາດ

[໑໕] ເຂົາຈັກເປັນພຣະເຈົ້າຈັກກະພັດ ໔໕ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນ ນັບຊາດບໍ່ຖ້ວນ

[໑໖]	ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໗]	ເຂົາຖືກກຸສົນມູນຕັກເຕືອນແລ້ວຈຸຕິຈາກສະຫວັນຊັ້ນດຸສິດແລ້ວ
ຈັກເປັນຄົນຕໍ່າຕ້ອຍໂດຍຊາດກໍາເນີດ ຊື່ວ່າ ອຸປາລີ

[໑໘]	ພາຍຫຼັງ ເຂົາບວດແລ້ວ ລາຍບາບໄດ້
ກໍານົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໑໙]	ອັນໜຶ່ງ ພຣະໂຄດົມພຸດທະເຈົ້າຜູ້ສາກະຍະບຸດ ມີພຣະຍົດຍິ່ງໃຫຍ່
ຊົງຍິນດີແລ້ວ ຈັກຕັ້ງເຂົາໄວ້ໃນເອຕະທັກຄະວ່າ
ເປັນຜູ້ຊ່ຽວຊານທາງພຣະວິໄນ

[໒໐]	ຂ້າພະເຈົ້າບວດດ້ວຍສັດທາ
ທໍາກິດທີ່ຄວນທໍາສໍາເລັດແລ້ວ ບໍ່ມີອາສະວະ
ກໍານົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໒໑]	ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງອະນຸເຄາະຂ້າພະເຈົ້າ
ຂ້າພະເຈົ້າກໍເປັນຜູ້ຊ່ຽວຊານໃນທາງພຣະວິໄນ
ແລະຜາຣົບກໍາຂອງຕົນຢູ່ຢ່າງຜູ້ບໍ່ມີອາສະວະ

[໒໒]	ຂ້າພະເຈົ້າສັງລວມໃນພຣະປາຕິໂມກແລະໃນອິນຊີ ໕
ຊົງພຣະວິໄນທັງໝົດ ເຊິ່ງເປັນບໍ່ເກີດຣັດຕະນະທັງມວນໄວ້
[໒໓]	ພຣະສາດສະດາຜູ້ປະເສີດໃນໂລກ
ຊົງຮູ້ຄຸນສົມບັດຂອງຂ້າພະເຈົ້າ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຊົງແຕ່ງຕັ້ງຂ້າພະເຈົ້າໄວ້ໃນຕໍາແໜ່ງເອຕະທັກຄະ
[໒໔]	ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸປາລີເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸປາລີເຖຣາປະທານທີ ໑ ຈົບ**

# ໘. ໂສນະໂກລິວິສະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂສນະໂກລິວິສະເຖຣະ

(ພຣະໂສນະໂກລິວິສະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໕] ຂ້າພະເຈົ້າໄດ້ໃຫ້ກໍ່ສ້າງທີ່ຈົງກົມສາບທາດ້ວຍປູນຂາວ
ຖວາຍພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະມຸນີພຣະນາມວ່າ ອະໂນມະທັດສີ
ຜູ້ຈະເລີນທີ່ສຸດໃນໂລກຜູ້ຄົງທີ່

[໘໖] ຂ້າພະເຈົ້າໄດ້ໃຊ້ດອກໄມ້ສີຕ່າງ ໆ ໂຮຍປ່ອນຈົງກົມ
ແລະເຮັດໃຫ້ເປັນເພດານໄວ້ໃນອາກາດ
ແລ້ວຂາບທູນພຣະພຸດທະເຈົ້າຜູ້ສູງສຸດໃຫ້ຊົງໃຊ້ສອຍ

[໘໗] ຄັ້ງນັ້ນ ຂ້າພະເຈົ້າປະຄອງອັນຊະລີຖວາຍອະພິວາດພຣະອົງ
ຜູ້ມີວັດດີງາມ ແລ້ວມອບຖວາຍສາລາຍາວແດ່ພຣະຜູ້ມີພຣະພາກເຈົ້າ

[໘໘] ພຣະຜູ້ມີພຣະພາກເຈົ້າຜູ້ສາດສະດາ ຜູ້ປະເສີດໃນໂລກ
ຜູ້ມີພຣະຈັກຂຸ ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າ
ແລ້ວຊົງຮັບໄວ້ດ້ວຍຄວາມອະນຸເຄາະ

[໘໙] ພຣະສຳມາສຳພຸດທະເຈົ້າ ຜູ້ເປັນທັກຂິໄນຍະບຸກຄົນໃນໂລກ
ພ້ອມທັງເທວະໂລກ ເມື່ອຊົງຮັບແລ້ວ
ຈຶ່ງປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໙໐] ເຮົາຈັກພະຍາກອນຜູ້ທີ່ມີຈິດເບີກບານ ເຊິ່ງໄດ້ຖວາຍສາລາຍາວແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໙໑] ລົດທຽມດ້ວຍມ້າ ໑,໐໐໐ ໂຕ ຈັກຜາກົດສຳລັບຜູ້ນີ້
ເຊິ່ງພຽບພ້ອມດ້ວຍບຸນກຳ ໃນເວລາໃກ້ຈະຕາຍ

[໙໒] ຜູ້ນີ້ຈັກໄປສູ່ເທວະໂລກໂດຍຍານນັ້ນ
ເທວະດາທັງຫຼາຍຈັກພອຍບັນເທີງ ໃນເມື່ອຜູ້ນີ້ເຖິງພົບທີ່ດີແລ້ວ

[໙໓] ເຂົາຈັກຄອງວິມານເຊິ່ງມີຄ່າຫຼາຍ ປະເສີດທີ່ສຸດ
ສາບທາດ້ວຍດິນຄືແກ້ວ ປະກອບດ້ວຍເຮືອນຍອດທີ່ລ້ຳເລີດ

[໓໔] ຜູ້ນີ້ຈັກຣື່ນຣົມໃນເທວະໂລກເຖິງ ໓໐,໐໐໐ ກັບ
ຈັກເປັນເທວະຣາດຕະຫຼອດ ໘໕ ກັບ

[໓໕] ແລະຈັກເກີດເປັນພຣະເຈົ້າຈັກກະພັດ ກໆ ຊາດ
ພຣະເຈົ້າຈັກກະພັດເຫຼົ່ານັ້ນແມ່ນທັງໝົດ
ມີພຣະນາມວ່າ ຍະໂສທະຣະ

[໓໖] ຜູ້ນີ້ໄດ້ສະເຫວີຍສົມບັດທັງ ໘ ແລ້ວ ສ້າງສັ່ງສົມບຸນ
ຈັກເປັນພຣະເຈົ້າຈັກກະພັດໃນກັບທີ ໘໗

[໓໗] ແມ່ນໃນພົບນັ້ນຈັກມີວິມານຢ່າງປະເສີດ
ທີ່ວິດສຸກຳເທບພະບຸດເນຣະມິດໃຫ້
ຜູ້ນີ້ຈັກຄອງບຸຣີນັ້ນ ເຊິ່ງບໍ່ວ່າງເວັ້ນຈາກສຽງ ໑໐ ປະການ

[໓໗] ໃນກັບທີ່ນັບບໍ່ໄດ້ ນັບຈາກກັບນີ້ໄປ
ເຂົາຈັກເປັນພຣະເຈົ້າແຜ່ນດິນໃນແວ່ນແຄວ້ນ
ມີລິດຫຼາຍ ມີພຣະນາມວ່າໂອກກາກະຣາດ ໂດຍພຣະໂຄດ

[໓໙] ນາງກະສັດ ຜູ້ມີໄວປະເສີດ
ສູງຊາດກວ່າຍິງສາວທັງໝົດ ໑໖,໐໐໐ ນາງ
ຈັກປະສູດພຣະຣາດຊະບຸດແລະພຣະຣາດຊະບຸດຕີ ໙ ພຣະອົງ

[໔໐] ນາງກະສັດ ເມື່ອປະສູດພຣະຣາດຊະບຸດ
ແລະພຣະຣາດຊະບຸດຕີ ໙ ພຣະອົງແລ້ວຈັກສະຫວັນນະຄົດ
ແລະພຣະເຈົ້າໂອກກາກະຣາດຈັກຊົງອະພິເສກນາງກັນຍາ
ຜູ້ເປັນທີ່ຮັກເປັນໄວລຸ້ນດະຣຸນີເປັນພຣະມະເຫສີ

[໔໑] ພຣະນາງກັນຍາຈັກເຮັດໃຫ້ພຣະເຈົ້າໂອກກາກະຣາດ
ຊົງພໍພຣະຫະໄທແລ້ວໄດ້ພອນ
ພຣະນາງໄດ້ພອນແລ້ວຈັກໃຫ້ເນຣະເທດ
ພຣະຣາດຊະບຸດແລະພຣະຣາດຊະບຸດຕີ

[໔໘] ພຣະຣາດຊະບຸດແລະພຣະຣາດຊະບຸດຕີທັງໝົດນັ້ນ
ຖືກເນຣະເທດແລ້ວຈັກໄປສູ່ພູເຂົາສູງສຸດ
ພຣະຣາດຊະບຸດທັງໝົດຈັກສົມສູ່ກັບພຣະກະນິດຖະພະຄິນີ
ຍ້ອນຢ້ານວ່າຊາດຕະກູນຈະປະປົນກັນ

[໘໓] ສ່ວນພຣະເຊດຖະກັນຍາພຣະອົງໜຶ່ງຈັກຖືກພະຍາດກຸ້ມຣຸມ
ກະສັດທັງຫຼາຍຈັກເຊື່ອງໄວ້ດ້ວຍຄິດວ່າ
ຊາດຕະກູນຂອງພວກເຮົາຢ່າແຕກສະຫຼາຍເລີຍ

[໘໔] ກະສັດອົງໜຶ່ງຈຶ່ງນຳພຣະເຊດຖະກັນຍານັ້ນມາສົມສູ່ຢູ່ກັນ
ຄວາມເກີດແຫ່ງວົງໂອກກາກະຣາດຈັກແຍກກັນໃນຄັ້ງນັ້ນ

[໘໕] ໂອຣົດຂອງກະສັດເຫຼົ່ານັ້ນ ຈັກມີພຣະນາມວ່າ ໂກລິຍະ
ໂດຍພຣະຊາດ ຈັກໄດ້ສະເຫວີຍໂພຄະສົມບັດ
ອັນເປັນຂອງມະນຸດບໍ່ແມ່ນໜ້ອຍໃນພົບນັ້ນ

[໘໖] ຜູ້ນີ້ຈຸຕິຈາກກາຍນັ້ນແລ້ວ ຈັກໄປເກີດໃນເທວະໂລກ
ແມ່ນໃນເທວະໂລກນັ້ນຈັກໄດ້ວິມານຢ່າງປະເສີດ ເປັນຕາອອນຊອນໃຈ

[໘໗] ເຂົາຖືກກຸສົນມູນຕັກເຕືອນແລ້ວຈັກຈຸຕິຈາກເທວະໂລກ
ມາເກີດເປັນມະນຸດ ມີຊື່ວ່າ ໂສນະ

[໘໘] ຈັກພໍ່າເພັງພຽນ ມີຈິດເດັດດ່ຽວ
ບຳເພັນພຽນໃນສາດສະໜາຂອງພຣະສາດສະດາ
ຈັກກຳນົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໘໙] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມສາກະຍະ
ຜູ້ປະເສີດ ຊົງຮູ້ວິເສດ ມີຄວາມພຽນຫຼາຍ ຊົງເຫັນຄຸນບໍ່ມີບ່ອນສຸດ
ຈັກຊົງຕັ້ງເຂົາໄວ້ໃນຕຳແໜ່ງອັນເລີດ

[໙໐] ເມື່ອຝົນຕົກແລ້ວ ຫຍ້າຍາວປະມານ ໔ ອົງຄຸລີ
ຢືນຕົ້ນຢູ່ພື້ນຖືກລົມພັດໂຊຍ
ສຳລັບພຣະໂຍຄາວະຈອນຜູ້ປະກອບຄວາມພຽນ ຜູ້ຄົງທີ່
ບໍ່ມີອັນໃດຈະປະເສີດຍິ່ງໄປກວ່າຕົ້ນຫຍ້ານັ້ນ

[໙໑] ຂ້າພະເຈົ້າໄດ້ຝຶກຝົນຕົນ ໃນການຝຶກຢ່າງສູງສຸດ
ຈິດຂ້າພະເຈົ້າກໍຕັ້ງໄວ້ດີແລ້ວ
ພາຣະທັງໝົດຂ້າພະເຈົ້າກໍປົງລົງແລ້ວ
ຂ້າພະເຈົ້າເປັນຜູ້ບໍ່ມີອາສະວະ ນິບພານແລ້ວ

[໕໔] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັງຄີຣະສະມະຫານາຄະ
ຊຶ່ງເປັນອະພິຊາຕະບຸດ ຜູ້ເໝືອນພະຍາຣາດຊະສີ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຊຶ່ງແຕ່ງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງອັນເລີດ

[໕໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂສນະໂກລິວິສະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂສນະໂກລິວິດເຖຣາປະທານທີ ໔ ຈົບ**

# ໖. ພັດທິຍະກາລິໂຄທາຍະປຸດຕະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພັດທິຍະກາລິໂຄທາຍະບຸດເຖຣະ

(ພຣະພັດທິຍະກາລິໂຄທາຍະບຸດເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໕໔] ປະຊຸມຊົນທັງປວງເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ ຜູ້ມີພຣະທະໄທປະກອບດ້ວຍເມດຕາ
ເປັນພຣະມະຫາມຸນີ ຜູ້ຊຶ່ງເປັນຜູ້ນຳຊັ້ນເລີດຂອງສັດໂລກທັງປວງ

[໕໕] ຊົນທັງປວງຍ່ອມຖວາຍອາມິດ
ຄືສັດຕຸກ້ອນ ສັດຕຸຜົງ ນ້ຳ ແລະເຂົ້າແດ່ພຣະສາດສະດາ
ແລະໃນສົງຜູ້ເປັນເນື້ອນາບຸນຢ່າງປະເສີດ

[໕໖] ແມ່ນຂ້າພະເຈົ້າກໍຈະນິມົນພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ແລະສົງຜູ້ປະເສີດ ຖວາຍທານແດ່ ພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນເທບຍິ່ງກວ່າເທບ ຜູ້ຄົງທີ່

[໕໗] ແລະຂ້າພະເຈົ້າສົ່ງຄົນໄປໃຫ້ນິມົນພຣະຕະຖາຄົດເຈົ້າ
ແລະພິກຂຸສົງທັງໝົດຜູ້ເປັນນາບຸນຢ່າງປະເສີດ

[໕໘] ຂ້າພະເຈົ້າຈັດຕັ້ງບັນລັງຄຳ ໑໐໐,໐໐໐ ບັນລັງ

ປູດ້ວຍເຄື່ອງປູຜ້າໂກເຊົາຜືນໃຫຍ່
ມີຂົນຍາວ ດ້ວຍເຄື່ອງປູລາຍດອກໄມ້ຍັດດ້ວຍນຸ່ນ
ແລະດ້ວຍຜ້າເປືອກໄມ້ແລະຜ້າຝ້າຍ
ເປັນອາສະນະທີ່ຄວນຄ່າຫຼາຍສົມຄວນແດ່ພຣະພຸດທະເຈົ້າ

[໕໙] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ເປັນເທບຍິ່ງກວ່າເທບ
ຜູ້ອົງອາດກວ່ານໍຣະຊົນ ມີໝູ່ພິກຂຸຫ້ອມລ້ອມ
ສະເດັດເຂົ້າມາໃກ້ປະຕູ (ເຮືອນ) ຂອງຂ້າພະເຈົ້າ

[໖໐] ຂ້າພະເຈົ້າມີຈິດເຫຼື້ອມໃສ
ມີໃຈຍິນດີໄດ້ຕ້ອນຮັບພຣະສຳມາສຳພຸດທະເຈົ້າ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ມີພຣະຍົດແລ້ວນຳສະເດັດມາເຮືອນຂອງຕົນ

[໖໑] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ອັງຄາດພິກຂຸ ໑໐໐,໐໐໐ ອົງ
ແລະພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ ຈົນອີ່ມໜຳດ້ວຍເຂົ້າຊັ້ນດີ

[໖໒] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໓] ເຮົາຈັກພະຍາກອນຜູ້ທີ່ຖວາຍອາສະນະຄຳ
ປູດ້ວຍຜ້າຂົນສັດ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໖໔] ເຂົາຈັກຄອງເທວະສົມບັດ ມີເຫຼົ່ານາງເທບອັບປະສອນຫ້ອມລ້ອມ
ສະເຫວີຍສົມບັດຢູ່ ໗໔ ຊາດ
[໖໕] ເຂົາຈັກເປັນເຈົ້າປະເທດຣາດຄອງແຜ່ນດິນ ໑,໐໐໐ ຊາດ
ຈັກເປັນພຣະເຈົ້າຈັກກະພັດ ໕໑ ຊາດ
[໖໖] ເຂົາຈັກເປັນຜູ້ມີຕະກູນສູງ ໃນພົບກຳເນີດທັງປວງ
ພາຍຫຼັງເຂົາຖືກກຸສົນມູນຕັກເຕືອນຈຶ່ງບວດ
ມີນາມວ່າ ພັດທິຍະ ເປັນສາວົກຂອງພຣະສາດສະດາ

[໕໗] ຂ້າພະເຈົ້າເປັນຜູ້ໝັ້ນປະກອບວິເວກ
ອາໄສຢູ່ໃນເສນາສະນະທີ່ສະຫງັດ
ຜົນທັງປວງ ຂ້າພະເຈົ້າກໍບັນລຸແລ້ວ
ວັນນີ້ ຂ້າພະເຈົ້າເປັນຜູ້ສະລະກິເລດໄດ້ແລ້ວ

[໕໘] ພຣະຜູ້ມີພຣະພາກເຈົ້າຜູ້ເປັນສັບພັນຍູຜູ້ຊົງເປັນຜູ້ນຳສັດໂລກ
ຊົງຮູ້ຄຸນສົມບັດທັງປວງຂອງຂ້າພະເຈົ້າແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຊົງແຕ່ງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງເອຕະທັກຄະ

[໕໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະພັດທິຍະກາລິໂຄທາຍະປຸດຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພັດທິຍະກາລິໂຄທາຍະປຸດຕະເຖຣາປະທານທີ ໓ ຈົບ**

## ໔. ສັນນິດຖາປະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັນນິດຖາປະກະເຖຣະ

(ພຣະສັນນິດຖາປະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໐] ຂ້າພະເຈົ້າສ້າງກະຕູບຢູ່ໃນປ່າ ໃນລະຫວ່າງພູເຂົາ
ສັນໂດດຕາມມີຕາມໄດ້ດ້ວຍຍົດແລະຄວາມເສື່ອມຍົດ

[໖໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ສະເດັດມາຍັງສຳນັກຂອງຂ້າພະເຈົ້າພ້ອມດ້ວຍພິກຂຸ ໑໐໐,໐໐໐ ອົງ

[໖໒] ພຣະຜູ້ມີພຣະພາກເຈົ້າຜູ້ມະຫານາຄະພຣະນາມວ່າ
ປະທຸມຸດຕະຣະ ສະເດັດເຂົ້າມາ
ຂ້າພະເຈົ້າເຫັນແລ້ວໃຫ້ປູເຄື່ອງປູຫຍ້າຖວາຍພຣະສາດສະດາ

[໗໓] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍໝາກແຟງແລະນ້ຳສົ້ມແດ່ພຣະຜູ້ມີພຣະພາກເຈົ້າ
ຜູ້ຊື່ຕົງດ້ວຍທັງຈິດທີ່ຜ່ອງໃສ

[໗໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກແຟງ

[໗໕] ໃນກັບທີ ໔໑ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ສັດຕູນະທະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໗໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັນນິດຖາປະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັນນິດຖາປະກະເຖຣາປະທານທີ ໔ ຈົບ**

# ໕. ປັນຈະຫັດຖິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັນຈະຫັດຖິຍະເຖຣະ

(ພຣະປັນຈະຫັດຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໗] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ມີຈັກຂຸຖອດລົງ ຕັດພົ້ນປະມານ ມີສະຕິ
ຊົງສັງລວມອິນຊີ ສະເດັດໄປໃນລະຫວ່າງຮ້ານຕະຫຼາດ

[໗໘] ຊົນທັງຫຼາຍໄດ້ໃຊ້ດອກບົວ ໕ ກຳ ເຮັດເປັນພວງມາໄລໃຫ້ແກ່ຂ້າພະເຈົ້າ
ຂ້າພະເຈົ້າເຫຼື້ອມໃສຈຶ່ງໄດ້ໃຊ້ດອກບົວນັ້ນບູຊາພຣະພຸດທະເຈົ້າດ້ວຍມືຂອງຕົນ

[໗໙] ຂ້າພະເຈົ້າຍົກດອກໄມ້ເຫຼົ່ານັ້ນຂຶ້ນເປັນຫຼັງຄາ
ເພື່ອພຣະສາດສະດາພຣະອົງນັ້ນ

ດອກໄມ້ທັງຫຼາຍ ຕັ້ງແວດລ້ອມພຣະຜູ້ມີພຣະພາກເຈົ້າຜູ້ມະຫານາກ
ດັ່ງສິດທັງຫຼາຍແວດລ້ອມອາຈານ ສັນນັ້ນ

[໗໐] ໃນກັບທີ ໖໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໑] ໃນກັບທີ ໔,໐໐໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໕ ຊາດ
ມີພຣະນາມວ່າ ທັດຖິຍະ ມີພະລານຸພາບຫຼາຍ

[໗໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປັນຈະຫັດຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນຈະຫັດຖິຍະເຖຣາປະທານທີ ໕ ຈົບ**

# ໖. ປະທຸມະສະທະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະທຸມະສະທະນິຍະເຖຣະ

(ພຣະປະທຸມະສະທະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງ
ກ່າວວ່າ)

[໗໖] ເມື່ອພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກພຣະນາມວ່າ ວິປັດສີ
ເປັນບຸກຄົນຜູ້ເລີດ ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າຖືດອກປະທຸມທີ່ບານດີແລ້ວ ບູຊາທີ່ຈິຕະກາທານ

[໗໔] ເມື່ອມະຫາຊົນຍົກພຣະພຸດທະສະຣີຣະຂຶ້ນເທິງຈິຕະກາທານ
ຈິຕະກາທານສູງຂຶ້ນໄປຈົນຮອດນະພາກາດ
ຂ້າພະເຈົ້າໄດ້ເຮັດຫຼັງຄາກັ້ນໄວ້ໃນອາກາດເໜືອຈິຕະກາທານ

[໗໕] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໖] ໃນກັບທີ ໕໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ປະທຸມິດສະ
ຊຶ່ງເປັນໃຫຍ່ມີໄຊຊະນະໃນທະວີບທັງ ໔ ມີພະລານຸພາບຫຼາຍ

[໗໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປະທຸມະສະທະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ປະທຸມະສະທະນິຍະເຖຣາປະທານທີ ໖ ຈົບ**

## ໗. ສະຍະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສະຍະນະທາຍະກະເຖຣະ

(ພຣະສະຍະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໗໘] ຂ້າພະເຈົ້າໄດ້ຖວາຍບ່ອນນອນອັນເລີດ
ປູດ້ວຍຜ້າແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ມີພຣະຫະໄທປະກອບດ້ວຍເມດຕາ ຜູ້ຄົງທີ່

[໗໙] ພຣະຜູ້ມີພຣະພາກຊິນນະເຈົ້າ ຊົງຮັບບ່ອນນອນ
ແລະບ່ອນນັ່ງອັນເປັນກັບປິຍະແລ້ວ
ສະເດັດລຸກຈາກບ່ອນນອນນັ້ນ ເຫາະຂຶ້ນສູ່ເວຫາ

[໙໐] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍບ່ອນນອນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບ່ອນນອນ

[໗໑] ໃນກັບທີ ໕໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ວະຣຸນະເທບ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະຍະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະຍະນະທາຍະກະເຖຣາປະທານທີ ໗ ຈົບ**

# ໘. ຈັງກະມະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈັງກະມະທາຍະກະເຖຣະ

(ພຣະຈັງກະມະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ
ກ່າວວ່າ)

[໗໓] ຂ້າພະເຈົ້າໃຫ້ສ້າງບ່ອນຈົງກົມກໍ່ດ້ວຍດິນຈີ່
ຖວາຍພຣະມຸນີພຣະນາມວ່າ ອັດຖະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໗໔] ບ່ອນຈົງກົມສ້າງສຳເລັດດີແລ້ວ ສູງ ໕ ສອກ ຍາວ ໑໐໐ ສອກ
ຄວນເປັນບ່ອນຈະເລີນພາວະນາ ເປັນຕາອອນຊອນໃຈ

[໗໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຊົງເປັນຜູ້ສູງສຸດແຫ່ງນໍຣະຊົນ ຊົງຮັບແລ້ວ
ຊົງໃຊ້ພຣະຫັດກອບຊາຍແລ້ວໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໗໖] ດ້ວຍການຖວາຍຊາຍນີ້ ແລະດ້ວຍການສ້າງບ່ອນຈົງກົມຖວາຍດີແລ້ວ
ຜູ້ນັ້ນຈັກໄດ້ຄອງຊາຍທີ່ສົມບູນດ້ວຍຣັດຕະນະ ໗ ປະການ

[໗໗] ເຂົາຈັກຄອງເທວະສົມບັດ ມີເຫຼົ່ານາງເທບອັບປະສອນແວດລ້ອມ
ສະເຫວີຍສົມບັດໃນເທວະດາທັງຫຼາຍເຖິງ ໓ ກັບ

[໙໗] ເຂົາມາເກີດໃນມະນຸດໂລກແລ້ວ
ຈັກເປັນພຣະຣາຊາໃນແວ່ນແຄວ້ນ
ແລະຈັກເປັນພຣະເຈົ້າຈັກກະພັດໃນແຜ່ນດິນ ໓ ຊາດ

[໙໙] ໃນກັບທີ ໑໑໗ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບ່ອນຈົງກົມ

[໑໐໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະຈັງກະມະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈັງກະມະທາຍະກະເຖຣາປະທານທີ ໗ ຈົບ**

# ໘. ສຸພັດທະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸພັດທະເຖຣະ

(ພຣະສຸພັດທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ ຊົງພຣະຍົດຍິ່ງໃຫຍ່
ຮື້ຖອນໝູ່ຊົນ (ອອກຈາກສັງສາຣະວັດ) ແລ້ວສະເດັດດັບຂັນທະປະຣິນິບພານ

[໑໐໒] ກໍເມື່ອພຣະສຳມາສຳພຸດທະເຈົ້າ ສະເດັດດັບຂັນທະປະຣິນິບພານ
ໂລກທາດມີໝື່ນຈັກກະວານຫວັ່ນໄຫວແລ້ວ
ໝູ່ຊົນ ແລະເທວະດາຈຳນວນຫຼາຍປະຊຸມກັນແລ້ວ ໃນຄັ້ງນັ້ນ

[໑໐໓] ຂ້າພະເຈົ້າບັນຈຸເກດສະໜາ ແລະດອກມະລິ
ຈົນເຕັມຜະອົບໄມ້ຈັນ ແລ້ວມີຈິດຮ່າເຮີງເບີກບານ
ບູຊາພຣະຜູ້ມີພຣະພາກເຈົ້າ ຊົງເປັນຜູ້ສູງສຸດແຫ່ງນໍຣະຊົນ

[໑໐໔] ພຣະສາດສະດາສຳມາສຳພຸດທະເຈົ້າ ຜູ້ປະເສີດໃນໂລກ

ຊົງຮູ້ຄວາມດໍາຣິຂອງຂ້າພະເຈົ້າແລ້ວ
ບັນທຶກຢູ່ນັ້ນແລ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໐໕] ເຮົາຈັກພະຍາກອນຜູ້ທີ່ໃຊ້ມາໄລຂອງຫອມ
ບັງຮົ່ມໃຫ້ເຮົາໃນການສຸດທ້າຍ
ທ່ານທັງຫຼາຍ ຈົ່ງຟັງເຮົາກ່າວເທີ້ນ

[໑໐໖] ບຸກຄົນນີ້ຈຸຕິຈາກໂລກນີ້ແລ້ວ ຈັກໄປເກີດໃນໝູ່ເທວະດາຊັ້ນດຸສິດ
ໄດ້ຄອງຣາດຊະສົມບັດໃນສະຫວັນຊັ້ນດຸສິດນັ້ນແລ້ວ
ຈັກໄປເກີດໃນສະຫວັນຊັ້ນນິມມານະຣະດີ

[໑໐໗] ເຂົາຖວາຍມາໄລທີ່ປະເສີດດ້ວຍອຸບາຍນີ້ນັ້ນເອງ
ຈັກພໍໃຈກໍາຂອງຕົນ ສະເຫວີຍສົມບັດ

[໑໐໘] ບຸກຄົນນີ້ຈັກເກີດໃນສະຫວັນຊັ້ນດຸສິດນັ້ນອີກ
ຈຸຕິຈາກສະຫວັນຊັ້ນດຸສິດນັ້ນແລ້ວຈັກໄປເກີດເປັນມະນຸດ

[໑໐໙] ພຣະຜູ້ມີພຣະພາກເຈົ້າຜູ້ມະຫານາຄະສາກະຍະບຸດ
ຜູ້ເລີດໃນໂລກພ້ອມທັງເທວະໂລກ ຊົງມີພຣະຈັກຂຸ
ຊົງໃຫ້ໝູ່ສັດຈໍານວນຫຼາຍຕັດສະຮູ້ແລ້ວ ຈັກສະເດັດດັບຂັນທະປະຣິນິບພານ

[໑໑໐] ຄັ້ງນັ້ນ ເຂົາຖືກກຸສົນມູນຕັກເຕືອນແລ້ວຈັກເຂົ້າເຝົ້າ
ເມື່ອເຂົ້າເຝົ້າພຣະສໍາມາສໍາພຸດທະເຈົ້າແລ້ວຈັກທູນຖາມບັນຫາໃນຄັ້ງນັ້ນ

[໑໑໑] ພຣະສັບພັນຍູສໍາມາສໍາພຸດທະເຈົ້າຜູ້ຊົງເປັນຜູ້ນໍາສັດໂລກ
ຊົງໃຫ້ເຂົາຣ່າເຣິງແລ້ວ ຊົງຮູ້ບຸບພະກໍາ
ຈັກຊົງເປີດເຜີຍສັດຈະທັງຫຼາຍ

[໑໑໒] ບັນຫານີ້ເຂົາພໍໃຈແລ້ວ ເຂົາຍິນດີ ມີໃຈແນ່ວແນ່
ຈັກຖວາຍອະພິວາດພຣະສາດສະດາແລ້ວທູນຂໍບວດ

[໑໑໓] ພຣະພຸດທະເຈົ້າພຣະອົງນັ້ນ
ຊົງສະຫຼາດໃນທໍາອັນເລີດ ຊົງເຫັນເຂົາມີໃຈເຫຼື້ອມໃສ
ຍິນດີດ້ວຍກໍາຂອງຕົນ ຈົ່ງຍອມໃຫ້ບວດ

[໑໑໔] ບຸກຄົນນີ້ພຽນພະຍາຍາມໃນສາດສະໜາ

ຂອງພຣະສຳມາສຳພຸດທະເຈົ້າແລ້ວ
ກຳນົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

**ພານະວານທີ ໕ ຈົບ**

[໑໑໕] ເຮົາປະກອບດ້ວຍບຸບພະກຳ
ມີໃຈແນ່ວແນ່ ມີຈິດຕັ້ງໝັ້ນ ເປັນໂອຣົດຂອງພຣະພຸດທະເຈົ້າ
ເປັນບຸດຜູ້ເກີດແຕ່ທຳເຊິ່ງທຳເນຣະມິດໄວ້ດີແລ້ວ

[໑໑໖] ຂ້າພະເຈົ້າເຂົ້າເຝົ້າພຣະພຸດທະເຈົ້າ
ຜູ້ເປັນທຳຣາຊາແລ້ວໄດ້ທູນຖາມບັນຫາສູງສຸດ
ແລະພຣະຜູ້ມີພຣະພາກເຈົ້າເມື່ອຈະຊົງພະຍາກອນບັນຫາຂອງຂ້າພະເຈົ້າ
ຈຶ່ງຊົງນຳເຂົ້າໄປສູ່ກະແສທຳ

[໑໑໗] ຂ້າພະເຈົ້າຮູ້ທົ່ວເຖິງທຳຂອງພຣະອົງແລ້ວ
ຍິນດີໃນສາດສະໜາຢູ່
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໑໑໘] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳເຊິ່ງຮຸ່ງເຮືອງສູງສຸດ
ຜູ້ບໍ່ມີອຸປາທານ ສະເດັດດັບຂັນທະປະຣິນິບພານແລ້ວ
ດັ່ງປະທີບດັບໄປຍ້ອນໝົດນ້ຳມັນ ສັນນັ້ນ

[໑໑໙] ພຣະສະຖູບແກ້ວຂອງພຣະຜູ້ມີພຣະພາກເຈົ້າ ສູງປະມານ ໗ ໂຍດ
ຂ້າພະເຈົ້າໄດ້ນຳທຸງທີ່ສວຍງາມກວ່າທຸງທັງປວງ
ເປັນຕາອອນຊອນໃຈ ບູຊາໄວ້ທີ່ພຣະສະຖູບນັ້ນ

[໑໒໐] ອັກຄະຣະສາວົກຊື່ວ່າຕິດສະ ຂອງພຣະພຸດທະເຈົ້າພຣະນາມວ່າ ກັດສະປະ
ເປັນບຸດເປັນໂອຣົດຂອງຂ້າພະເຈົ້າ
ເປັນທາຍາດໃນສາດສະໜາຂອງພຣະຊິນນະເຈົ້າ

[໑໒໑] ຂ້າພະເຈົ້າມີໃຈຊົ່ວຊາມ ກ່າວວາຈາບໍ່ມ່ວນແກ່ອັກຄະຣະສາວົກນັ້ນ
ດ້ວຍວິບາກແຫ່ງກຳນັ້ນ
ຄວາມຈະເລີນຈຶ່ງໄດ້ມີແກ່ຂ້າພະເຈົ້າໃນພາຍຫຼັງ

[໑໘໘] ພຣະຊິນນະມຸນີຜູ້ຊົງມີຄວາມພຽນຫຼາຍ
ຊົງເກື້ອກູນປະກອບດ້ວຍພຣະກະລຸນາ
ຊົງປະທານບັນພະຊາແກ່ຂ້າພະເຈົ້າເທິງທີ່ບັນທົມຄັ້ງສຸດທ້າຍໃນສາລະວັນ
ເຊິ່ງເປັນທີ່ແວ່ວງຽນມາແຫ່ງມັນລະກະສັດທັງຫຼາຍ

[໑໘໑] ບັດນີ້ ການບັນພະຊາອຸປະສົມບົດ ມີແກ່ຂ້າພະເຈົ້າ ໃນວັນນີ້
ການປະຣິນິບພານຂອງພຣະພຸດທະຊິນນະເຈົ້າຜູ້ສູງສຸດ
ກວ່າເທວະດາແລະມະນຸດໄດ້ມີສະເພາະໜ້າ

[໑໘໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸພັດທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸພັດທະເຖຣາປະທານທີ ໙ ຈົບ**

## ໑໐. ຈຸນທະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈຸນທະເຖຣະ

(ພຣະຈຸນທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘໕] ຂ້າພະເຈົ້າໃຫ້ເຮັດວັດຖຸຄວນບູຊາ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່ ແລ້ວໃຊ້ດອກມະລິປົກປິດໄວ້

[໑໘໖] ຂ້າພະເຈົ້າໃຫ້ເຮັດດອກໄມ້ນັ້ນສຳເລັດແລ້ວ
ນ້ອມເຂົ້າໄປຖວາຍພຣະພຸດທະເຈົ້າ
ແລະໄດ້ປະຄອງດອກໄມ້ທີ່ເຫຼືອບູຊາພຣະພຸດທະເຈົ້າ

[໑໘໗] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ນຳດອກໄມ້ເຊິ່ງເປັນວັດຖຸຄວນບູຊາ
ໄປບູຊາພຣະພຸດທະເຈົ້າຜູ້ເຊັ່ນກັບຄຳມີຄ່າ
ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ

[໑໘໗] ພຣະສຳມາສຳພຸດທະເຈົ້າ ຜູ້ຊົງຂ້າມຄວາມສົງໄສໄດ້ແລ້ວ
ມີພຣະຂີນາສົບແວດລ້ອມ
ຜູ້ຂ້າມໂອຄະໄດ້ແລ້ວ ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໘໙] ເຮົາຈັກພະຍາກອນຜູ້ທີ່ຖວາຍດອກໄມ້ເຊິ່ງເປັນວັດຖຸຄວນບູຊາ
ສົ່ງກິ່ນທິບຫອມຟຸ້ງແກ່ເຮົາ ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໙໐] ບຸກຄົນນີ້ຈຸຕິຈາກໂລກນີ້ແລ້ວຈັກໄປເກີດໃນເທວະໂລກ
ມີໝູ່ເທວະດາແວດລ້ອມ ມີດອກມະລິໂປຍປາຍ

[໑໙໑] ເຂົາຈັກມີພິບທີ່ສູງແລະວິມານ
ທີ່ສຳເລັດດ້ວຍຄຳແລະແກ້ວມະນີ
ທີ່ເກີດດ້ວຍບຸນກຳຜາກົດຂຶ້ນ

[໑໙໒] ເຂົາຈັກຄອງເທວະສົມບັດ ມີເຫຼົ່ານາງເທບອັບປະສອນແວດລ້ອມ
ໄດ້ສະເຫວີຍສົມບັດຢູ່ ໗໔ ຊາດ

[໑໙໓] ເຂົາຈັກເປັນພຣະເຈົ້າແຜ່ນດິນຄອງແຜ່ນດິນ ໓໐໐ ຊາດ
ແລະຈັກເປັນພຣະເຈົ້າຈັກກະພັດ ໗໕ ຊາດ

[໑໙໔] ຈັກເປັນໃຫຍ່ກວ່າມະນຸດມີນາມວ່າ ທຸຊະໄຊ
ສະເຫວີຍບຸນນັ້ນ ປະກອບດ້ວຍກຳຂອງຕົນ
[໑໙໕] ຈັກບໍ່ຕົກວິນິບາດນະຮົກ ໄປເກີດເປັນມະນຸດ
ເຂົາມີເງິນທີ່ສັ່ງສົມໄວ້ຕັ້ງຮ້ອຍໂກດບໍ່ແມ່ນໜ້ອຍ
[໑໙໖] ເຂົາຈັກບັງເກີດໃນກຳເນີດ (ມະນຸດ) ເປັນພາມ
ມີການສຶກສາມີປັນຍາເປັນບຸດສຸດທີ່ຮັກຂອງວັງຄັນຕະພາມ
ກັບນາງສາຣີພາມມະນີ
[໑໙໗] ແລະພາຍຫຼັງເຂົາຈັກບວດ
ໃນສາດສະໜາຂອງພຣະອັງຄີຣະສະພຸດທະເຈົ້າ
ມີນາມວ່າຈຸນທະ ເປັນສາວົກຂອງພຣະສາດສະດາ
[໑໙໘] ເຂົາຈັກໄດ້ເປັນພຣະຂີນາສົບ (ສິ້ນອາສະວະກິເລດ)
ຂະນະເປັນສາມະເນນຢ່າງແນ່ນອນ
ກຳນົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໑໓໗] ຂ້າພະເຈົ້າໄດ້ບຳຣຸງພຣະຜູ້ມີພຣະພາກເຈົ້າຜູ້ຊົງມີຄວາມພຽນຫຼາຍ
ແລະສາວົກອື່ນ ໆ ຜູ້ມີສີນເປັນທີ່ຮັກຈຳນວນຫຼາຍ
ແລະບຳຣຸງພຣະເຖຣະ (ສາຣີບຸດ) ຜູ້ເປັນອ້າຍຂອງຂ້າພະເຈົ້າ
ເພື່ອບັນລຸປະໂຫຍດສູງສຸດ

[໑໘໐] ຂ້າພະເຈົ້າເມື່ອບຳຣຸງອ້າຍຂອງຂ້າພະເຈົ້າແລ້ວ
ໄດ້ເກັບພຣະທາດໃສ່ໄວ້ໃນບາດ
ນ້ອມເຂົ້າໄປຖວາຍພຣະສຳມາສຳພຸດທະເຈົ້າ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ

[໑໘໑] ພຣະພຸດທະເຈົ້າຊົງປະຄອງພຣະທາດດ້ວຍພຣະຫັດທັງ ໒
ເມື່ອຈະຊົງເຮັດພຣະທາດນັ້ນໃຫ້ຜາກົດໃນໂລກພ້ອມທັງເທວະໂລກ
ຈຶ່ງຊົງປະກາດວ່າເປັນພຣະທາດອັກຄະຣະສາວົກ (ພຣະສາຣີບຸດເຖຣະ)

[໑໘໒] ຈິດຂອງຂ້າພະເຈົ້າລຸດພົ້ນຢ່າງວິເສດແລ້ວ
ແລະສັດທາຂອງຂ້າພະເຈົ້າກໍໝັ້ນຄົງແລ້ວ
ຂ້າພະເຈົ້າກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໑໘໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈຸນທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈຸນທະເຖຣາປະທານທີ ໑໐ ຈົບ**

**ອຸປາລິວັກທີ ໕ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ອຸປາລິເຖຣາປະທານ
໒. ພັດທິຍະກາລິໂຄທາຍະປຸດຕະເຖຣາປະທານ
໓. ປັນຈະຫັດຖິຍະເຖຣາປະທານ
໔. ສະຍະນະທາຍະກະເຖຣາປະທານ
໕. ສຸພັດທະເຖຣາປະທານ
໖. ໂສນະໂກລິວິສະເຖຣາປະທານ
໗. ສັນນິດຖາປະກະເຖຣາປະທານ
໘. ປະທຸມະສະທະນິຍະເຖຣາປະທານ
໙. ຈັງກະມະທາຍະກະເຖຣາປະທານ
໑໐. ຈຸນທະເຖຣາປະທານ

**ແລະມີຄາຖາ ໑໘໓ ຄາຖາ**

# ໗. ວິຊະນີວັກ

## ໝວດວ່າດ້ວຍພັດວິຊະນີເປັນຕົ້ນ

## ໑. ວິທູປະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວິທູປະນະທາຍະກະເຖຣະ

(ພຣະວິທູປະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າ ໄດ້ຖວາຍພັດວິຊະນີອັນໜຶ່ງແດ່ ພຣະພຸດທະເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ ຜູ້ຈະເລີນທີ່ສຸດໃນໂລກ
ຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ຄົງທີ່ຢູ່ແນວນັ້ນ

[໒] ຂ້າພະເຈົ້າເຮັດຈິດຂອງຕົນໃຫ້ເຫຼື້ອມໃສ
ປະນົມມືອະພິວາດ ພຣະສຳມາສຳພຸດທະເຈົ້າແລ້ວ
ມຸ້ງໜ້າຫຼີກໄປທາງທິດເໜືອ

[໓] ພຣະສາດສະດາ ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ຊົງຈັບພັດວິຊະນີແລ້ວ ປະທັບຢືນຢູ່ໃນທ່າມກາງໝູ່ພິກຂຸ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໔] ດ້ວຍການຖວາຍພັດວິຊະນີອັນນີ້ ແລະດ້ວຍການຕັ້ງຈິດໄວ້ໝັ້ນ
ຜູ້ນີ້ຈັກບໍ່ຕົກວິນິບາດນະຣົກເຖິງ ໑໐໐,໐໐໐ ກັບ

[໕] ຂ້າພະເຈົ້າພໍ່າເພັງພຽນ ມີຈິດເດັດດ່ຽວ
ມີໃຈຕັ້ງໝັ້ນໃນເຈໂຕຄຸນ ມີອາຍຸ ໗ ຂວບ ກໍໄດ້ບັນລຸອະຣະຫັນຕະຜົນ

[໖] ໃນກັບທີ ໒໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າ ພິສະມານະ ມີພະລານຸພາບຫຼາຍ

[໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວິທູປະນະທາຍະກະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວິທູປະນະທາຍະກະເຖຣາປະທານທີ ໑ ຈົບ**

# ໘. ສະຕະຣັງສິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະຕະຣັງສິຍະເຖຣະ

(ພຣະສະຕະຣັງສິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘] ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນຜູ້ສູງສຸດແຫ່ງບຸຣຸດ
ສະເດັດຂຶ້ນພູເຂົາສູງແລ້ວປະທັບນັ່ງຢູ່
ຂ້າພະເຈົ້າ ເປັນພາມຜູ້ຈົບມົນ
ຢູ່ໃນບ່ອນບໍ່ໄກຈາກພູເຂົາ

[໙] ຂ້າພະເຈົ້າ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ
ຜູ້ມີຄວາມພຽນຫຼາຍ ຜູ້ເປັນເທບຍິ່ງກວ່າເທບ
ຜູ້ອົງອາດກວ່ານໍຣະຊົນ ປະນົມມືແລ້ວ
ຊົມເຊີຍພຣະອົງຜູ້ຊົງເປັນຜູ້ນຳສັດໂລກ ວ່າ

[໑໐] ພຣະມະຫາວີຣະພຸດທະເຈົ້າພຣະອົງນີ້
ຊົງປະກາດທຳອັນປະເສີດ
ມີໝູ່ພິກຂຸແວດລ້ອມ ຮຸ່ງເຮືອງດັ່ງກອງໄຟ

[໑໑] ພຣະຜູ້ມີພຣະພາກເຈົ້າ ຊົງເປັນເໝືອນມະຫາສະມຸດທີ່ຫວັ່ນໄຫວໄດ້ຍາກ
ຊົງເປັນເໝືອນຫ້ວງນ້ຳທີ່ຂ້າມໄດ້ຍາກ
ຊົງເປັນເໝືອນຣາດຊະສີທີ່ບໍ່ເກງກົວ
ມີພຣະຈັກຂຸສະແດງທຳຢູ່

[໑໒] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງເປັນຜູ້ນຳ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ
ປະທັບຢືນຢູ່ໃນທ່າມກາງໝູ່ພິກຂຸ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໓]　ຜູ້ໃດ ໄດ້ຖວາຍອັນຊະລີ ແລະ ຊົມເຊີຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຜູ້ນັ້ນຈັກໄດ້ຄອງເທວະສົມບັດ ໓໐,໐໐໐ ກັບ

[໑໔]　ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ອັງຄີຣະສະ
ຜູ້ຊົງທຳລາຍກິເລດເຄື່ອງທໍ່ຫຸ້ມໄດ້ແລ້ວ
ຈັກສະເດັດອຸບັດຂຶ້ນໃນຄັ້ງນັ້ນ

[໑໕]　ຜູ້ນັ້ນ ຈັກເປັນທຳທາຍາດຂອງພຣະອົງ
ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນພຣະອະຣະຫັນມີນາມວ່າ ສະຕະລັງສີ

[໑໖]　ຂ້າພະເຈົ້າມີອາຍຸ ໗ ຂວບ ກໍໄດ້ບວດເປັນບັນພະຊິດ
ມີນາມວ່າ ສະຕະລັງສີ ຂ້າພະເຈົ້າມີຣັດສະໝີແຜ່ອອກໄປ

[໑໗]　ຂ້າພະເຈົ້າມີປົກກະຕິເຂົ້າຊານ ຍິນດີໃນຊານ
ຢູ່ທີ່ມົນດົບ ຫຼື ເຫງົ້າຕົ້ນໄມ້
ຊົງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໑໘]　ຕະຫຼອດ ໖໐,໐໐໐ ກັບ ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ມີນາມຄືກັນວ່າ ຣາມ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໙]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະຕະຣັງສີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະຕະຣັງສີຍະເຖຣາປະທານທີ ໔ ຈົບ**

# ໓. ສະຍະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະຍະນະທາຍະກະເຖຣະ

(ພຣະສະຍະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຂ້າພະເຈົ້າມີຈິດຜ່ອງໃສ
ໄດ້ຖວາຍບ່ອນນອນແດ່ ພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງອະນຸເຄາະສັດໂລກທັງປວງພຣະອົງນັ້ນ

[໔໑] ດ້ວຍຜົນແຫ່ງການຖວາຍບ່ອນນອນນັ້ນ
ໂພຄະສົມບັດຈຶ່ງບັງເກີດມີແກ່ຂ້າພະເຈົ້າ
ປຽບເໝືອນ ພືດທີ່ມີຄວາມສົມບູນໃນນາດີ
ນີ້ເປັນຜົນແຫ່ງການຖວາຍບ່ອນນອນນັ້ນ

[໔໒] ຂ້າພະເຈົ້າ ນອນໃນອາກາດໄດ້
ຊົງແຜ່ນດິນນີ້ໄວ້ໄດ້ ເປັນໃຫຍ່ໃນສັດທັງຫຼາຍ
ນີ້ເປັນຜົນແຫ່ງການຖວາຍບ່ອນນອນ

[໔໓] ໃນກັບທີ ໕,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ມີຄວາມພຽນຫຼາຍ
ໃນກັບທີ ໓,໔໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ມີພະລານຸພາບຫຼາຍ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະຍະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະຍະນະທາຍະກະເຖຣາປະທານທີ ໓ ຈົບ**

# ໔. ຄັນໂທທະກະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຄັນໂທທະກະທາຍະກະເຖຣະ

(ພຣະຄັນໂທທະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໕] ຄັ້ງນັ້ນ ໄດ້ມີການສະຫຼອງຕົ້ນມະຫາໂພຂອງພຣະພຸດທະເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ ຂ້າພະເຈົ້າໄດ້ຖືໝໍ້ນ້ຳອັນວິຈິດ
ໄດ້ຖວາຍນ້ຳຫອມຣົດຕົ້ນມະຫາໂພ

[໔໖] ກໍໃນເວລາທີ່ຣົດຕົ້ນມະຫາໂພ
ເມກຝົນເປັນຈຳນວນຫຼາຍ ໄດ້ຕົກລົງມາແລະໄດ້ມີສຽງບັນລືດັ່ງລັ່ນ
ໃນເມື່ອສາຍຟ້າຟາດລົງມາ

[໔໗] ດ້ວຍກຳລັງແຫ່ງສາຍຟ້າຟາດລົງມານັ້ນແລ
ຂ້າພະເຈົ້າໄດ້ສິ້ນຊີວິດ ໃນບ່ອນນັ້ນ
ໄປເກີດເທິງເທວະໂລກ ໄດ້ກ່າວຄາຖາເຫຼົ່ານີ້ ວ່າ

[໔໘] ຊ່າງໜ້າອັດສະຈັນແທ້ ພຣະພຸດທະເຈົ້າ
ຊ່າງໜ້າອັດສະຈັນແທ້ ພຣະທຳ
ຊ່າງໜ້າອັດສະຈັນແທ້ ການທີ່ຂ້າພະເຈົ້າໄດ້ພົບພໍ້ກັບພຣະສາດສະດາ
ຮ່າງກາຍຂອງຂ້າພະເຈົ້າໄດ້ລົ້ມລົງຕາຍໄປແລ້ວ
ຂ້າພະເຈົ້າໄດ້ຮື່ນຣົມໃນເທວະໂລກ

[໔໙] ວິມານຂອງຂ້າພະເຈົ້າມີ ໆ ຊັ້ນ ສູງຕະຫງ່ານ
ນາງເທບກັນຍາ ໑໐໐,໐໐໐ ນາງ ແວດລ້ອມຂ້າພະເຈົ້າທຸກເມື່ອ

[໕໐] ຂ້າພະເຈົ້າບໍ່ມີຄວາມເຈັບໄຂ້
ບໍ່ມີຄວາມເສົ້າໂສກ ບໍ່ປະສົບຄວາມຮ້ອນຮົນເລີຍ
ນີ້ເປັນຜົນແຫ່ງບຸນກຳ

[໕໑] ໃນກັບທີ ໔,໘໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສັງວະສີທະ
ສົມບູນດ້ວຍຣັດຕະນະ ໆ ປະການ ມີພະລານຸພາບຫຼາຍ

[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄັນໂທທະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄັນໂທທະກະທາຍະກະເຖຣາປະທານທີ ໔ ຈົບ**

# ໕. ໂອປະວຸຍທະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂອປະວຸຍທະເຖຣະ

(ພຣະໂອປະວຸຍທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໓] ຂ້າພະເຈົ້າໄດ້ຖວາຍມ້າອາຊາໄນແດ່ພຣະພຸດທະເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ ເມື່ອມອບຖວາຍແດ່ ພຣະສໍາພຸດທະເຈົ້າແລ້ວ
ໄດ້ກັບໄປສູ່ເຮືອນຂອງຕົນ

[໓໔] ພຣະອັກຄະຣະສາວົກມີນາມວ່າ ເທວິລະ ຂອງພຣະສາດສະດາ
ຜູ້ເປັນທໍາທາຍາດທີ່ລໍ້າເລີດ ໄດ້ມາຍັງສໍານັກຂອງຂ້າພະເຈົ້າ (ກ່າວວ່າ)

[໓໕] ພຣະຜູ້ມີພຣະພາກເຈົ້າ ຜູ້ນໍາປະໂຫຍດທັງປວງ
ມ້າອາຊາໄນບໍ່ສົມຄວນແກ່ພຣະອົງ ພຣະອົງຜູ້ມີພຣະຈັກຂຸ
ຊົງຮູ້ຄວາມດໍາຣິຂອງທ່ານແລ້ວ ຈຶ່ງຊົງຮັບໄວ້ແລ້ວ

[໓໖] ຂ້າພະເຈົ້າຈຶ່ງຕີຣາຄາມ້າສິນທົບ ເຊິ່ງມີກໍາລັງແລ່ນໄວໄດ້ດັ່ງລົມ
ເປັນພາຫະນະທີ່ວ່ອງໄວແລ້ວໄດ້ຖວາຍຂອງທີ່ຄວນ
ແດ່ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ

[໓໗] ຂ້າພະເຈົ້າເກີດໃນກໍາເນີດໃດ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກໍາເນີດນັ້ນ ໆ ມ້າອາຊາໄນມີກໍາລັງແລ່ນໄວດັ່ງລົມ
ເປັນຊັບເຄື່ອງພໍໃຈ ຍ່ອມບັງເກີດແກ່ຂ້າພະເຈົ້າ

[໓໘] ຊົນເຫຼົ່າໃດໄດ້ອຸປະສົມບົດ ຊົນເຫຼົ່ານັ້ນໄດ້ລາບດີແລ້ວ
ຖ້າວ່າ ພຣະພຸດທະເຈົ້າຈະເພິ່ງມີໃນໂລກ
ຂ້າພະເຈົ້າກໍຈະເພິ່ງເຂົ້າໄປເຝົ້າເລື້ອຍ ໆ

[໓໙] ຂ້າພະເຈົ້າໄດ້ເປັນພຣະຣາຊາຜູ້ມີພະລານຸພາບຫຼາຍ
ເປັນໃຫຍ່ມີໄຊຊະນະໃນທະວີບທັງ ໔
ເປັນໃຫຍ່ແຫ່ງຊົນຊາວຊົມພູທະວີບ ໔໗ ຊາດ

[໔໐] ອັດຕະພາບນີ້ ເປັນອັດຕະພາບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ຂ້າພະເຈົ້າລະຄວາມຊະນະ ແລະ ຄວາມພ່າຍແພ້ໄດ້ແລ້ວ
ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໔໑] ໃນກັບທີ ໓,໔໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ມີເດດຫຼາຍ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂອປະວຸຍທະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂອປະວຸຍທະເຖຣາປະທານທີ ໕ ຈົບ**

# ໖. ສະປະຣິວາຣາສະນະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະປະຣິວາຣາສະນະເຖຣະ

(ພຣະສະປະຣິວາຣາສະນະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຂ້າພະເຈົ້າໄປສູ່ສະຖານທີ່ຊຸດໂຊມແຫ່ງໜຶ່ງ
ທີ່ຂ້າພະເຈົ້າປະດັບດ້ວຍດອກມະລິຊ້ອນ
ໄດ້ຖວາຍບິນທະບາບແດ່ ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
[໔໔] ພຣະພຸດທະເຈົ້າ ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ຊົງເປັນຜູ້ຕົງ ມີພຣະທະໄທຕັ້ງໝັ້ນ
ປະທັບນັ່ງເທິງອາສະນະນັ້ນແລ້ວ
ໄດ້ຊົງປະກາດອານິສົງບິນທະບາດວ່າ

[໔໕] ພືດແມ່ນຈະມີປະມານໜ້ອຍທີ່ຊາວນາປູກລົງໃນນາດີ
ເມກຝົນເປັນຈໍານວນຫຼາຍໂຮຍລົງມາຢ່າງພໍເໝາະ
ເຮັດໃຫ້ເກີດຜົນໃຫ້ຊາວນາຍິນດີໄດ້ ສັນໃດ

[໔໖] ບິນທະບາດນີ້ກໍສັນນັ້ນ ທ່ານປູກແລ້ວໃນນາດີ
ຜົນຈັກໃຫ້ທ່ານຍິນດີໃນພົບທີ່ທ່ານເກີດ

[໔໗] ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ເມື່ອຕັດດັ່ງນີ້ແລ້ວ ຊົງຮັບບິນທະບາດ
ຫັນພຣະພັກສະເດັດຫຼີກໄປທາງທິດເໜືອ

[໔໘] ຂ້າພະເຈົ້າສັງລວມໃນພຣະປາຕິໂມກແລະໃນອິນຊີ ໕
ໝັ່ນປະກອບວິເວກຢູ່ຢ່າງຜູ້ບໍ່ມີອາສະວະ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະສະປະຣິວາຣາສະນະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະປະຣິວາຣາສະນະເຖຣາປະທານທີ ໖ ຈົບ**

# ໗. ປັນຈະທີປະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັນຈະທີປະກະເຖຣະ

(ພຣະປັນຈະທີປະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໐] ຂ້າພະເຈົ້າເຊື່ອຢ່າງສະນິດໃຈໃນພຣະສັດທໍາຂອງພຣະພຸດທະເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງອະນຸເຄາະສັດທັງປວງ
ຈຶ່ງໄດ້ເປັນຜູ້ມີຄວາມເຫັນຕົງ

[໕໑] ຂ້າພະເຈົ້າໄດ້ຖວາຍປະທີບ ແວດລ້ອມໄວ້ທີ່ຕົ້ນໂພ
ຄັ້ງນັ້ນ ຂ້າພະເຈົ້າເຊື່ອຢູ່ ຈຶ່ງກະທໍາການບູຊາດ້ວຍປະທີບໄວ້

[໕໔] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກຳເນີດນັ້ນ ໆ ເທວະດາຍ່ອມຖືດວງໄຟໄວ້ໃນອາກາດ
ນີ້ເປັນຜົນແຫ່ງການບູຊາດ້ວຍປະທີບ

[໕໓] ຂ້າພະເຈົ້າສາມາດເບິ່ງເຫັນໄດ້ຊອດຝາ ຊອດກຳແພງສີລາ
ຊອດພູເຂົາໄດ້ຮ້ອຍໂຍດໂດຍຮອບ

[໕໔] ດ້ວຍຜົນກຳທີ່ເຫຼືອຢູ່ນັ້ນ
ຂ້າພະເຈົ້າເປັນຜູ້ບັນລຸຄວາມສິ້ນອາສະວະ
ຂ້າພະເຈົ້າຊົງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ

[໕໕] ໃນກັບທີ ໓,໔໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ສະຕະຈັກຊຸ
ມີເດດຫຼາຍ ມີພະລານຸພາບຫຼາຍ

[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັນຈະທີປະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນຈະທີປະກະເຖຣາປະທານທີ ໗ ຈົບ**

## ໘. ທະຊະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທະຊະທາຍະກະເຖຣະ

(ພຣະທະຊະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໗] ຂ້າພະເຈົ້າມີຈິດຮ່າເຣິງ ເບີກບານ
ໄດ້ຍົກທຸງຂຶ້ນປັກໄວ້ທີ່ເຫງົ້າຕົ້ນໂພ
ເຊິ່ງເປັນຕົ້ນໄມ້ປະເສີດຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ

[໕໗] ຂ້າພະເຈົ້າເກັບໃບໂພທີ່ຫຼົ່ນນຳໄປຖິ້ມພາຍນອກ
ພຣະສຳມາສຳພຸດທະເຈົ້າຜູ້ມີດຈິດທັງພາຍໃນທັງພາຍນອກ
ຜູ້ລຸດພົ້ນດີແລ້ວ ຫາອາສະວະບໍ່ໄດ້

[໕໙] ຂ້າພະເຈົ້າໄດ້ໄຫວ້ຕົ້ນໂພທີ່ປະເສີດ
ເໝືອນໄດ້ອະພິວາດພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊຶ່ງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ ສະເພາະພຣະພັກ

[໖໐] ຜູ້ເປັນພຣະສາດສະດາປະທັບຢືນໃນທ່າມກາງໝູ່ພິກຂຸ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ
ດ້ວຍການຖວາຍທຸງ ແລະ ດ້ວຍການບຳຣຸງທັງ ໒ ຢ່າງນີ້

[໖໑] ເຂົາຈະບໍ່ໄປເກີດໃນທຸຄະຕິຕະຫຼອດ ໑໐໐,໐໐໐ ກັບ
ຈັກສະເຫວີຍທິບພະຍະສົມບັດບໍ່ແມ່ນໜ້ອຍໃນໝູ່ເທວະດາ

[໖໒] ແລະເຂົາຈັກໄດ້ເປັນພຣະຣາຊາໃນແວ່ນແຄວ້ນຫຼາຍຮ້ອຍຊາດ
ຈັກໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ອຸກຄະຕະ

[໖໓] ເຂົາເມື່ອສະເຫວີຍສົມບັດແລ້ວ ຖືກກຸສົນມູນຕັກເຕືອນ
ຈັກຍິນດີຍິ່ງໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມ

[໖໔] ຂ້າພະເຈົ້າມີຈິດເດັດດ່ຽວເພື່ອພ່ຳເພັງພຽນ
ສະງົບຣະງັບ ບໍ່ມີອຸປະທິ ຊຶ່ງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໖໕] ໃນກັບທີ ໑,໐໕໑ (ນັບຈາກກັບນີ້ໄປ)
ໄດ້ເປັນກະສັດຫຼາຍພຣະອົງ ມີພຣະນາມວ່າ ອຸກຄະຕະ
ໃນກັບທີ ໑,໑໕໐ (ນັບຈາກກັບນີ້ໄປ)
ໄດ້ເປັນກະສັດຫຼາຍຊາດມີພຣະນາມວ່າ ເຂມະ

[໖໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໗ ແລະ ອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທະຊະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທະຊະທາຍະກະເຖຣາປະທານທີ ໗ ຈົບ**

# ໙. ປະທຸມະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະທຸມະເຖຣະ

(ພຣະປະທຸມະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງປະກາດສັດຈະ ໔ ຊົງປະກາດທຳອັນປະເສີດໃຫ້ເປັນໄປ
ຊົງໂປຍປາຍຫຍາດຝົນຄືອະມະຕະທຳ ໃຫ້ມະຫາຊົນສະງົບເຢັນ

[໖໘] ຂ້າພະເຈົ້າຢືນຖືດອກປະທຸມພ້ອມທັງທຸງຢູ່ໃນບ່ອນໄກ ໔໕໐ ຊົ່ວຄັນທະນູ
ມີໃຈຮ່າເຣີງ ໄດ້ໂຍນດອກປະທຸມພ້ອມດ້ວຍທຸງຂຶ້ນໄປໃນອາກາດ
ເພື່ອບູຊາພຣະມຸນີພຣະນາມວ່າ ປະທຸມຸດຕະຣະ

[໖໙] ແລະເມື່ອດອກປະທຸມກຳລັງລອຍມາ
ຄວາມອັດສະຈັນກໍເກີດມີໃນຂະນະນັ້ນ
ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າ ຊົງຮັບໄວ້ແລ້ວ

[໗໐] ພຣະສາດສະດາຊົງຮັບດອກປະທຸມຊັ້ນດີເລີດໄວ້
ດ້ວຍພຣະຫັດທີ່ປະເສີດ
ປະທັບຢືນຢູ່ໃນທ່າມກາງໝູ່ພິກຂຸ
ໄດ້ຕັດພຣະຄາຖາເຫຼົ່ານີ້ ວ່າ

[໗໑] ເຮົາຈັກພະຍາກອນຜູ້ທີ່ໂຍນດອກປະທຸມນີ້
ມາໃກ້ພຣະສັບພັນຍູເຊິ່ງເປັນຜູ້ນຳສູງສຸດ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໗໔] ເຂົາຈັກເປັນຈອມເທບຄອງເທວະສົມບັດ ໖໐ ກັບ
ຈັກເປັນພຣະເຈົ້າແຜ່ນດິນຄອງແຜ່ນດິນ ໗໐໐ ກັບ

[໗໖] ຈັກເປັນພຣະເຈົ້າຈັກກະພັດ ຍ້ອນຖືເອົາກີບບົວໃນດອກບົວນັ້ນ
ສາຍຝົນດອກໄມ້ຈັກຕົກລົງມາຈາກອາກາດໃນຄັ້ງນັ້ນ

[໗໔] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໗໕] ຜູ້ນັ້ນ ຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງ ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໗໖] ຂ້າພະເຈົ້າເກີດຈາກທ້ອງແລ້ວ ມີສະຕິສຳປະຊັນຍະ
ມີອາຍຸໄດ້ ໕ ຂວບ ກໍໄດ້ບັນລຸອະຣະຫັນຕະຜົນ

[໗໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປະທຸມະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທຸມະເຖຣາປະທານທີ ໙ ຈົບ**

# ໑໐. ອະສະນະໂພທິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະສະນະໂພທິຍະເຖຣະ

(ພຣະອະສະນະໂພທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໘] ຂ້າພະເຈົ້າມີອາຍຸ ໗ ຂວບ ກໍໄດ້ພົບພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ຂ້າພະເຈົ້າມີຈິດເຫຼື້ອມໃສ
ມີໃຈຍິນດີ ໄດ້ເຂົ້າໄປເຝົ້າພຣະອົງຜູ້ເປັນນະຣະຜູ້ສູງສຸດ

[໗໙] ຂ້າພະເຈົ້າມີຈິດຮ່າເຣີງ ເບີກບານ ໄດ້ປູກຕົ້ນໂພອັນອຸດົມ
ຖວາຍພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໘໐] ຕົ້ນໄມ້ງອກຂຶ້ນເທິງແຜ່ນດິນ ໂດຍນາມບັນຍັດວ່າ ອະສະນະ
ຂ້າພະເຈົ້າບຳຣຸງຕົ້ນໂພຊື່ ອະສະນະ ອັນອຸດົມນີ້ຕະຫຼອດ ໕ ປີ

[໘໑] ຂ້າພະເຈົ້າໄດ້ເຫັນຕົ້ນໄມ້ມີດອກບານສະພັ່ງໜ້າອັດສະຈັນ
ເປັນເຫດໃຫ້ຂົນພອງສະຫຍອງເກົ້າ ເມື່ອຈະປະກາດກຳຂອງຕົນ
ຈຶ່ງເຂົ້າໄປເຝົ້າພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໗໔] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຕິດສະ ພຣະອົງນັ້ນ
ຊົງເປັນພຣະສະຍຳພູ ຜູ້ເປັນບຸກຄົນຜູ້ເລີດ
ປະທັບນັ່ງຢູ່ໃນທ່າມກາງໝູ່ພິກຂຸແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໗໓] ເຮົາຈັກພະຍາກອນຜູ້ທີ່ປູກຕົ້ນໂພນີ້
ແລະກະທຳການບູຊາພຣະພຸດທະເຈົ້າໂດຍເຄົາລົບ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໗໔] ເຂົາຈັກຄອງເທວະສົມບັດໃນໝູ່ເທວະດາ ໓໐ ກັບ
ແລະຈັກໄດ້ເປັນພຣະເຈົ້າຈັກກະພັດ ໖໔ ຊາດ

[໗໕] ເຂົາຖືກກຸສົນມູນຕັກເຕືອນຈຸຕິຈາກສະຫວັນຊັ້ນດຸສິດແລ້ວ
ສະເຫວີຍສົມບັດທັງ ໔ ຈັກຣື່ນຣົມຢູ່ໃນຄວາມເປັນມະນຸດ

[໗໖] ເຂົາມີຈິດເດັດດ່ຽວເພື່ອພ່ຳເພັງພຽນ
ສະງົບຣະງັບ ບໍ່ມີອຸປະທິ
ກຳນົດຮູ້ອາສະວະທັງປວງຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໗໗] ຂ້າພະເຈົ້າໝັ່ນປະກອບວິເວກ ເປັນຜູ້ສະງົບຣະງັບ ບໍ່ມີອຸປະທິ
ຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ປູກຕົ້ນໂພໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປູກຕົ້ນໂພ

[໗໙] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ໃນຄັ້ງນັ້ນ ໄດ້ເປັນພຣະເຈົ້າຈັກກະພັດ ຜາກົດພຣະນາມວ່າ ທັນທະເສນ
ສົມບູນດ້ວຍຣັດຕະນະ ໗ ປະການ

[໘໐] ໃນກັບທີ ໗໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດຜູ້ເປັນໃຫຍ່ໃນແຜ່ນດິນ ໗ ຊາດ
ມີພຣະນາມວ່າ ສະມັນຕະເນມິ

[໗໑] ໃນກັບທີ ໔໕ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ປຸນນະກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໗໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະສະນະໂພທິຍະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ອະສະນະໂພທິຍະເຖຣາປະທານທີ ໑໐ ຈົບ**

**ວິຊະນີວັກທີ ໖ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ວິທູປະນະທາຍະກະເຖຣາປະທານ
໒. ສະຍະນະທາຍະກະເຖຣາປະທານ
໓. ໂອປະວຸຍຫະເຖຣາປະທານ
໔. ປັນຈະທີປະກະເຖຣາປະທານ
໕. ປະທຸມະເຖຣາປະທານ
໖. ສະຕະຣັງສີຍະເຖຣາປະທານ
໗. ຄັນໂທທະກະທາຍະກະເຖຣາປະທານ
໘. ສະປະຣິວາຣາສະນະເຖຣາປະທານ
໙. ທະຊະທາຍະກະເຖຣາປະທານ
໑໐. ອາສະນະໂພທິຍະເຖຣາປະທານ

**ແລະມີຄາຖາ ໗໔ ຄາຖາ**

# ໗. ສະກະຈິດຕະນິຍະວັກ

## ໝວດວ່າດ້ວຍພຣະສະກະຈິດຕະນິຍະເປັນຕົ້ນ

## ໑. ສະກະຈິດຕະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະກະຈິດຕະນິຍະເຖຣະ

(ພຣະສະກະຈິດຕະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ເຫັນປ່າໃຫຍ່ດົງໜາ
ສະຫງັດງຽບປາສະຈາກອັນຕະລາຍ
ເປັນບ່ອນຢູ່ຂອງພວກລືສີ ຜູ້ສົມຄວນຮັບເຄື່ອງບູຊາ
[໒] ຂ້າພະເຈົ້າຈຶ່ງນຳໄມ້ໄຜ່ມາເຮັດເປັນສະຖູບແລ້ວ
ໂຮຍດອກໄມ້ຕ່າງ ໆ ລົງ
ໄດ້ໄຫວ້ພຣະສະຖູບທີ່ຂ້າພະເຈົ້າສ້າງແລ້ວ
ເໝືອນໄດ້ອະພິວາດພຣະສຳມາສຳພຸດທະເຈົ້າສະເພາະພຣະພັກ
[໓] ຂ້າພະເຈົ້າໄດ້ເປັນພຣະຣາຊາສົມບູນດ້ວຍຣັດຕະນະ ໗ ປະການ
ເປັນໃຫຍ່ໃນແວ່ນແຄວ້ນ ພໍໃຈກຳຂອງຕົນ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້
[໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໕] ໃນກັບທີ ໗໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ອະນັນຕະຍະສະ
ສົມບູນດ້ວຍຣັດຕະນະ ໗ ປະການ ເປັນໃຫຍ່ໃນທະວີບທັງ ໔
[໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະສະກະຈິດຕະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະກະຈິດຕະນິຍະເຖຣາປະທານທີ ໑ ຈົບ**

# ໔. ອາໂປປຸບພີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອາໂປປຸບພີຍະເຖຣະ

(ພຣະອາໂປປຸບພີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິຂີ
ສະເດັດອອກຈາກວິຫານ ແລ້ວສະເດັດຂຶ້ນບ່ອນຈົງກົມ
ເມື່ອປະກາດສັດຈະ ໔ ຊົງສະແດງອະມະຕະບົດ

[໘] ຂ້າພະເຈົ້າ ຮູ້ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພຣະນາມວ່າ ສິຂີ ຜູ້ຄົງທີ່ແລ້ວ
ຈຶ່ງຈັບດອກໄມ້ຕ່າງ ໆ ໂຍນຂຶ້ນໄປໃນອາກາດ

[໙] ຂ້າແດ່ພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ດ້ວຍຜົນກຳນັ້ນ ຂ້າພຣະອົງລະຄວາມຊະນະ ແລະຄວາມພ່າຍແພ້ໄດ້ແລ້ວ
ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໑໐] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໑໑] ໃນກັບທີ ໔໐ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ເປັນຈັກກະພັດພຣະນາມວ່າ ສຸເມທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາໂປປຸບພີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາໂປປຸບພີຍະເຖຣາປະທານທີ ໔ ຈົບ**

# ໖. ປັດຈາຄະມະນິຍະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະປັດຈາຄະມະນິຍະເຖຣະ

(ພຣະປັດຈາຄະມະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖] ຄັ້ງນັ້ນ ຂ້າພະເຈົ້າເປັນນົກຈັກກະພາກ ຢູ່ທີ່ຝັ່ງແມ່ນ້ຳສິນທຸ
ຂ້າພະເຈົ້າກິນແຕ່ສາຫຣ່າຍລ້ວນ ໆ
ແລະຣະມັດຣະວັງຢ່າງດີໃນກຳຊົ່ວທັງຫຼາຍ

[໑໔] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ ຜູ້ປາສະຈາກທຸລິຄີກິເລດ
ສະເດັດໄປໃນອາກາດ ຈຶ່ງຄາບດອກສາລະ
ບູຊາພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ

[໑໕] ຜູ້ມີສັດທາຕັ້ງໝັ້ນດ້ວຍດີ ບໍ່ຫວັ່ນໄຫວໄວ້ໃນພຣະຕະຖາຄົດເຈົ້າ
ຈະບໍ່ໄປເກີດໃນທຸກຄະຕິເລີຍ ດ້ວຍຈິດທີ່ເຫຼື້ອມໃສນັ້ນ

[໑໖] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ຂ້າພະເຈົ້າເປັນນົກໄດ້ປູກພືດ (ກຸສົນ) ທີ່ດີໄວ້ແລ້ວ

[໑໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໘] ໃນກັບທີ ໑໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໘ ຊາດ
ພຣະນາມວ່າ ສຸຈາຣຸທັດສະນະ ມີພະລານຸພາບຫຼາຍ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະປັດຈາຄະມະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ຢ່າງນີ້

**ປັດຈາຄະມະນິຍະເຖຣາປະທານທີ ໖ ຈົບ**

# ໔. ປະຣັບປະສາທະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະຣັບປະສາທະກະເຖຣະ

(ພຣະປະຣັບປະສາທະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ພຣະສຳມາສຳພຸດທະເຈົ້າ ຜູ້ອົງອາດ ປະເສີດທີ່ສຸດ
ມີຄວາມພຽນ ສະແຫວງຫາຄຸນອັນຍິ່ງໃຫຍ່ ຊົງຊະນະວິເສດ
ມີພຣະສະຫວິວັນດັ່ງຄຳ ໃຜນໍ ເມືອເຫັນແລ້ວ ຈະບໍ່ເຫຼື້ອມໃສ

[໔໑] ພຣະພຸດທະເຈົ້າ ຊົງມີພຣະຄຸນຫາຜູ້ປຽບບໍ່ໄດ້
ປຽບດັ່ງ ພູເຂົາຫິມະພານ (ແລະ) ປຽບດັ່ງສາຄອນທີ່ຂ້າມໄດ້ຍາກ
ຊານຂອງພຣະພຸດທະເຈົ້າ ກໍສັນນັ້ນ
ໃຜນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໒] ແຜ່ນດິນທີ່ຫາປະມານບໍ່ໄດ້
ມາໄລປະດັບທົວຢ່າງວິຈິດ ສັນໃດ
ສີນຂອງພຣະພຸດທະເຈົ້າ ກໍສັນນັ້ນຄືກັນ
ໃຜນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໓] ລົມທີ່ໃຜ ໆ ເຮັດໃຫ້ປັ່ນປ່ວນບໍ່ໄດ້
ອາກາດທີ່ໃຜ ໆ ນັບບໍ່ໄດ້ ສັນໃດ
ພຣະຍານຂອງພຣະພຸດທະເຈົ້າ ກໍສັນນັ້ນ
ໃຜນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໔] ພາມຊື່ວ່າໂສນະ ໄດ້ສັນເສີນພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດ ພຣະນາມວ່າ ສິດທັດຖະ
ຜູ້ບໍ່ຊົງພ່າຍແພ້ ດ້ວຍ ໔ ຄາຖາເຫຼົ່ານີ້

[໔໕] ຂ້າພະເຈົ້າບໍ່ໄປເກີດໃນທຸກຄະຕິ ໙໔ ກັບ
ໄດ້ສະເຫວີຍສົມບັດທີ່ດີງາມບໍ່ແມ່ນໜ້ອຍ ໃນສຸກຄະຕິທັງຫຼາຍ

[໔໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນເສີນພຣະພຸດທະເຈົ້າ ຜູ້ຊົງເປັນຜູ້ນຳສັດໂລກໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນ

[໔໗] ໃນກັບທີ ໑໔ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ຜູ້ສູງສັກ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປະຣັບປະສາທະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະຣັບປະສາທະກະເຖຣາປະທານທີ ໔ ຈົບ**

# ໕. ພິສະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພິສະທາຍະກະເຖຣະ

(ພຣະພິສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໙] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ເວດສະພູ
ເປັນອົງທີ ໖ ແຫ່ງພຣະຜູ້ມີພຣະພາກເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ພຣະອົງເປັນຜູ້ສູງສຸດແຫ່ງບຸຣຸດ ສະເດັດເຂົ້າປ່າດົງທຶບ ແລ້ວປະທັບຢູ່

[໕໐] ຂ້າພະເຈົ້າໄດ້ຖືເຫງົ້າບົວ ແລະ ຮາກບົວໄປໃນສຳນັກຂອງພຣະພຸດທະເຈົ້າ
ຂ້າພະເຈົ້າເຫຼື້ອມໃສແລ້ວໄດ້ຖວາຍເຫງົ້າບົວ ແລະ ຮາກບົວນັ້ນ
ແດ່ພຣະພຸດທະເຈົ້າ ດ້ວຍມືຂອງຕົນ

[໕໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າເວດສະພູ ຜູ້ມີປັນຍາປະເສີດ
ຊົງແຕະເຫງົ້າບົວແລະຮາກບົວດ້ວຍພຣະຫັດ
ຂ້າພະເຈົ້າບໍ່ຮູ້ຈັກຄວາມສຸກທີ່ສະເໝີດ້ວຍຄວາມສຸກນັ້ນ
ແລະຄວາມສຸກທີ່ຍິ່ງໄປກວ່າຄວາມສຸກນັ້ນ ແຕ່ບ່ອນໃດເລີຍ

[໕໒] ອັດຕະພາບສຸດທ້າຍຂອງຂ້າພະເຈົ້າກຳລັງເປັນໄປຢູ່
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໓] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວແລະຮາກບົວ

[໓໔] ໃນກັບທີ ໑໓ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ເປັນໃຫຍ່ໃນໝູ່ມະນຸດ ມີພະລານຸພາບຫຼາຍ

[໓໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພິສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພິສະທາຍະກະເຖຣາປະທານທີ ໕ ຈົບ**

## ໖. ສຸຈິນຕິຕະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸຈິນຕິຕະເຖຣະ

(ພຣະສຸຈິນຕິຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໖] ຂ້າພະເຈົ້າເປັນນາຍພານຜູ້ທ່ອງທ່ຽວຢູ່ທີ່ຮ່ອມພູເຂົາ
ເໝືອນພະຍາໄກສອນມີຊາດສູງ
ຂ້າໝູ່ເນື້ອລ້ຽງຊີວິດຢູ່ໃນລະຫວ່າງພູເຂົາ

[໓໗] ສ່ວນພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຊົງເປັນສັບພັນຍູ ປະເສີດກວ່າເຈົ້າລັດທິທັງຫຼາຍ
ພຣະອົງປະສົງຈະຊ່ວຍເຫຼືອຂ້າພະເຈົ້າ ຈຶ່ງສະເດັດມາຍັງພູເຂົາທີ່ອຸດົມ

[໓໘] ຂ້າພະເຈົ້າຂ້າເນື້ອຟານແລ້ວນຳມາກິນ
ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດພິກຂາຈານໃກ້ເຂົ້າມາ

[໓໙] ຂ້າພະເຈົ້າໄດ້ເລືອກຈັບເນື້ອຍ່າງດີຖວາຍພຣະສາດສະດາພຣະອົງນັ້ນ
ໃນຄັ້ງນັ້ນ ພຣະມະຫາວີຣະເຈົ້າຊົງອະນຸໂມທະນາ
ຊ່ອຍເຮັດໃຫ້ຂ້າພະເຈົ້າສະງົບເຢັນ

[໔໐] ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າເຂົ້າໄປໃນຮ່ອມພູ
ຍັງປີຕິໃຫ້ເກີດຂຶ້ນແລ້ວ ໄດ້ສິ້ນຊີວິດ ໃນບ່ອນນັ້ນ

[໔໑] ດ້ວຍການຖວາຍຊີ້ນນັ້ນ ແລະ ດ້ວຍການຕັ້ງຈິດໄວ້ໝັ້ນ
ຂ້າພະເຈົ້າໄດ້ຮື່ນຣົມຢູ່ໃນເທວະໂລກ ໑໑໕ ກັບ

[໔໒] ໃນກັບທັງຫຼາຍທີ່ເຫຼືອ
ຂ້າພະເຈົ້າທຳກຸສົນໄວ້ ດ້ວຍການຖວາຍເນື້ອນັ້ນເອງ
ແລະດ້ວຍການຣະລຶກເຖິງພຣະພຸດທະເຈົ້າ

[໔໓] ໃນກັບທີ ໓໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ມີພຣະນາມວ່າ ທີຄາຍຸ
ໃນກັບທີ ໑໒໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ມີພຣະນາມວ່າ ສະຣະນະ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໒ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸຈິນຕິຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸຈິນຕິຕະເຖຣາປະທານທີ ໒ ຈົບ**

## ໗. ວັດຖະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວັດຖະທາຍະກະເຖຣະ

(ພຣະວັດຖະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕] ຄັ້ງນັ້ນ ຂ້າພະເຈົ້າເກີດເປັນພະຍາຄຸດຊາດປັກສີ ມີປີກງາມ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ສະເດັດໄປສູ່ພູເຂົາຄັນທະມາດ

[໔໖] ຂ້າພະເຈົ້າລະເພດຄຸດແລ້ວ ແປງຮ່າງເປັນມານົບ
ຖວາຍຜ້າຜືນໜຶ່ງແດ່ພຣະພຸດທະເຈົ້າ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໔໗] ພຣະພຸດທະເຈົ້າຜູ້ສາດສະດາຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ຊົງຮັບຜ້າຜືນນັ້ນແລ້ວ ປະທັບຢືນຢູ່ໃນອາກາດ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໔໘] ດ້ວຍການຖວາຍຜ້ານີ້ແລະດ້ວຍການຕັ້ງຈິດໄວ້ໝັ້ນ
ຜູ້ນີ້ລະກຳເນີດຄຸດແລ້ວ ຈັກຮື່ນຣົມຢູ່ໃນເທວະໂລກ

[໔໙] ສ່ວນພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ຊົງສັນເສີນການຖວາຍຜ້າເປັນທານແລ້ວ
ຫັນພຣະພັກສະເດັດຫຼີກໄປທາງທິດເໜືອ

[໕໐] ໃນພົບທີ່ຂ້າພະເຈົ້າເກີດ ຂ້າພະເຈົ້າມີຜ້າສົມບູນ
ຜ້າເປັນຫຼັງຄາຢູ່ໃນອາກາດ
ນີ້ເປັນຜົນແຫ່ງການຖວາຍຜ້າ

[໕໑] ໃນກັບທີ ໓໖ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ພຣະນາມວ່າ ອະຣຸນສະ
ມີພະລານຸພາບຫຼາຍ ເປັນໃຫຍ່ໃນໝູ່ມະນຸດ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະວັດຖະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວັດຖະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ອັມພະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຳພະທາຍະກະເຖຣະ

(ພຣະອຳພະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໓] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອະໂນມະທັດສີ
ຜູ້ບໍ່ມີອຸປະທີ ປະທັບນັ່ງຢູ່ລະຫວ່າງພູເຂົາ
ໄດ້ຊົງແຜ່ເມດຕາໄປໃນສັດໂລກຫາປະມານບໍ່ໄດ້

[໕໔] ຄັ້ງນັ້ນ ຂ້າພະເຈົ້າເປັນວານອນ ຢູ່ທີ່ພູເຂົາຫີມະພານທີ່ສູງສຸດ
ໄດ້ເຫັນພຣະພຸດທະເຈົ້າ ຜູ້ມີພຣະຄຸນອັນຍິ່ງບໍ່ຕໍ່າຊາມ
ຈຶ່ງທໍາຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ

[໕໕] ເວລານັ້ນ ຕົ້ນໝາກມ່ວງກໍາລັງອອກໝາກ
ມີຢູ່ບໍ່ໄກຈາກພູຫີມະພານ
ຂ້າພະເຈົ້າໄດ້ໄປເກັບໜ່ວຍໝາກມ່ວງສຸກຈາກຕົ້ນໝາກມ່ວງນັ້ນ
ມາຖວາຍພ້ອມນໍ້າເຜິ້ງ

[໕໖] ພຣະພຸດທະເຈົ້າຜູ້ມະຫາມຸນີພຣະນາມວ່າ ອະໂນມະທັດສີ
ຊົງພະຍາກອນການຖວາຍນັ້ນຂອງຂ້າພະເຈົ້າວ່າ
ດ້ວຍການຖວາຍນໍ້າເຜິ້ງ ແລະ ນໍ້າໝາກມ່ວງທັງ ໔ ນີ້

[໕໗] ຜູ້ນີ້ຈັກຣື່ນຣົມຢູ່ໃນເທວະໂລກ ໕໗ ກັບ
ໃນກັບທັງຫຼາຍທີ່ເຫຼືອ ຈັກວຽນວ່າຍຕາຍເກີດສະລັບກັນໄປ

[໕໘] ເມື່ອຄວາມຈະເລີນເຕັມທີ່ແລ້ວ ເຂົາເຮັດບາບກໍາໃຫ້ສິ້ນໄປແລ້ວ
ຈັກບໍ່ໄປຕົກວິນິບາດນະຣົກ ເຜົາກິເລດໃຫ້ມອດໄໝ້ໄປໄດ້

[໕໙] ຂ້າພະເຈົ້າເປັນຜູ້ທີ່ພຣະຜູ້ມີພຣະພາກເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ຊົງຝຶກແລ້ວ
ດ້ວຍການຝຶກຢ່າງສູງສຸດ ຂ້າພະເຈົ້າຜູ້ລະຄວາມຊະນະ
ແລະຄວາມພ່າຍແພ້ໄດ້ແລ້ວບັນລຸຖານະທີ່ບໍ່ຫວັ່ນໄຫວ

[໖໐] ໃນກັບທີ ໑ກໆ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໔ ຊາດ
ມີພຣະນາມວ່າອໍາພັດຖະໄຊ ມີພະລານຸພາບຫຼາຍ

[໖໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອໍາພະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອໍາພະທາຍະກະເຖຣາປະທານທີ ໗ ຈົບ**

# ໗. ສຸມະນະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸມະນະເຖຣະ

(ພຣະສຸມະນະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໔] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງດອກໄມ້ ມີນາມວ່າສຸມະນະ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຜູ້ສົມຄວນຮັບເຄື່ອງບູຊາຂອງຊາວໂລກ

[໖໓] ຈຶ່ງໃຊ້ມືທັງ ໒ ປະຄອງດອກມະລິຊັ້ນດີ
ບູຊາພຣະພຸດທະເຈົ້າພຣະນາມວ່າສິຂີ ຜູ້ເປັນເຜົ່າພັນຂອງໂລກ

[໖໔] ດ້ວຍການບູຊາດ້ວຍດອກໄມ້ນີ້
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໖໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໖໖] ໃນກັບທີ ໔໖ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ມີຍົດຍິ່ງໃຫຍ່ສົມບູນດ້ວຍຣັດຕະນະ ໗ ປະການ

[໖໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸມະນະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸມະນະເຖຣາປະທານທີ ໗ ຈົບ**

# ໑໐. ປຸບຜະຈັງໂກຕິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸບຜະຈັງໂກຕິຍະເຖຣະ

(ພຣະປຸບຜະຈັງໂກຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໘] ພຣະພຸດທະເຈົ້າພຣະນາມວ່າ ສິຂີ ຜູ້ປະເສີດ
ຊົງເປັນເໝືອນຣາດຊະສີ ໂຕບໍ່ເກງກົວ
ເໝືອນພະຍາຄຸດເລີດກວ່ານົກທັງຫຼາຍ
ເໝືອນພະຍາເສືອໂຄ່ງໂຕອົງອາດ ເໝືອນພະຍາໄກສອນມີຊາດສູງ

[໖໙] ພຣະອົງຜູ້ເປັນບ່ອນເພິ່ງຂອງທັງ ໓ ໂລກ ບໍ່ຊົງຫວັ່ນໄຫວ
ບໍ່ຊົງພ່າຍແພ້ເລີດກວ່າບັນດາສະມະນະ
ປະທັບນັ່ງມີໝູ່ພິກຂຸຫ້ອມລ້ອມ

[໗໐] ຂ້າພຣະອົງນຳດອກອັງກາບຊັ້ນດີໃສ່ໄວ້ໃນຜະອົບ
ໄດ້ບູຊາພຣະພຸດທະເຈົ້າປະເສີດທີ່ສຸດດ້ວຍທັງຜະອົບໃຫຍ່ນັ້ນເອງ

[໗໑] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຊົງອົງອາດກວ່ານໍຣະຊົນ
ຂ້າພຣະອົງລະຄວາມຊະນະ ແລະຄວາມພ່າຍແພ້ໄດ້ແລ້ວ
ບັນລຸຖານະທີ່ບໍ່ຫວັ່ນໄຫວ໌ດ້ວຍຈິດທີ່ເຫຼື້ອມໃສນັ້ນ

[໗໒] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໓] ໃນກັບທີ ໓໐ ຖ້ອນ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໕ ຊາດ
ມີພຣະນາມວ່າ ເທວະພູຕິ ສົມບູນດ້ວຍຣັດຕະນະ ໗ ປະການ

[໗໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປຸບຜະຈັງໂກຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸບຜະຈັງໂກຕິຍະເຖຣາປະທານທີ ໑໐ ຈົບ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສະກະຈິດຕະນິຍະເຖຣາປະທານ
໒. ປັດຈາຄະມະນິຍະເຖຣາປະທານ
໓. ພິສະທາຍະກະເຖຣາປະທານ
໔. ວັດຖະທາຍະກະເຖຣາປະທານ
໕. ສຸມະນະເຖຣາປະທານ
໖. ອາໂປປຸບຜິຍະເຖຣາປະທານ
໗. ປະຣັບປະສາທະກະເຖຣາປະທານ
໘. ສຸຈິນຕິຕະເຖຣາປະທານ
໙. ອຳພະທາຍະກະເຖຣາປະທານ
໑໐. ປຸບຜະຈັງໂກຕິຍະເຖຣາປະທານ

**ຄາຖາອັນສະແດງອັດຖະທີ່ທ່ານກ່າວໄວ້ແລ້ວນັບໄດ້ ໗໑ ຄາຖາ ແນວນີ້ແລ**

# ໙. ນາຄະສະມາລະວັກ

## ໝວດວ່າດ້ວຍພຣະນາກະສະມາລະເປັນຕົ້ນ

## ໑. ນາຄະສະມາລະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນາຄະສະມາລະເຖຣະ

(ພຣະນາຄະສະມາລະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າເກັບດອກແຄຝອຍໄປບູຊາທີ່ພຣະສະຖູບ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິຂີ
ຜູ້ເປັນເຜົ່າພັນຂອງໂລກ
ເຊິ່ງມະຫາຊົນສ້າງໄວ້ທີ່ຫົນທາງໃຫຍ່ ໂດຍເອື້ອເຟື້ອ

[໒] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະສະຖູບ

[໖] ໃນກັບທີ ໑໕ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ປຸບຜິຍະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນາຄະສະມາລະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນາຄະສະມາລະເຖຣາປະທານທີ ໑ ຈົບ**

# ໔. ປະທະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະທະສັນຍະກະເຖຣະ

(ພຣະປະທະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕] ຂ້າພະເຈົ້າໄດ້ເຫັນຮອຍພຣະບາດ
ທີ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ ຊົງປະທັບໄວ້ແລ້ວ
ຈຶ່ງເປັນຜູ້ມີຈິດຮ່າເຣິງເບີກບານ ທຳຈິດໃຫ້ເຫຼື້ອມໃສໃນຮອຍພຣະບາດ
[໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໃນຮອຍພຣະບາດໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນຮອຍພຣະບາດ
[໗] ໃນກັບທີ ໗ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ສຸເມທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປະທະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທະສັນຍະກະເຖຣາປະທານທີ ໔ ຈົບ**

# ໓. ສຸສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸສັນຍະກະເຖຣະ

(ພຣະສຸສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙] ຂ້າພະເຈົ້າໄດ້ເຫັນຜ້າບັງສຸກູນຈີວອນຂອງພຣະສາດສະດາ
ແຂວນຢູ່ເທິງຍອດໄມ້ ຈຶ່ງໄດ້ປະນົມມືໄປທາງນັ້ນ
ໄຫວ້ຜ້າບັງສຸກູນຈີວອນ

[໑໐] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນຜ້າບັງສຸກູນຈີວອນ

[໑໑] ໃນກັບທີ ໔ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ທຸມະທະຣະ
ຊົງເປັນໃຫຍ່ ມີໄຊຊະນະໃນທະວີບທັງ ໔ ມີພະລານຸພາບຫຼາຍ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸສັນຍະກະເຖຣາປະທານທີ ໓ ຈົບ**

# ໔. ພິສາລຸວະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພິສາລຸວະທາຍະກະເຖຣະ

(ພຣະພິສາລຸວະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ຂ້າພະເຈົ້າເຂົ້າໄປສູ່ປ່າໃຫຍ່ດົງໜາ ຢູ່ໃນປ່າ
ໄດ້ພົບພຣະພຸດທະເຈົ້າພຣະນາມວ່າ ວິປັດສີ ຜູ້ສົມຄວນຮັບເຄື່ອງບູຊາ

[໑໔] ຂ້າພະເຈົ້າຈຶ່ງໄດ້ຖວາຍເຫງົ້າບົວ ຫົວມັນ
ແລະນ້ຳສຳລັບລ້າງພຣະຫັດ
ຖວາຍອະພິວາດພຣະຍຸຄົນບາດດ້ວຍຂະໜ່ອມແລ້ວ
ຫັນໜ້າຫຼີກໄປທາງທິດເໜືອ

[໑໕] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເຫງົ້າບົວແລະຫົວມັນໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງບຸນກຳ

[໑໖] ແລະໃນກັບທີ ๖ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ພິສະສຳມະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະພິສາລຸວະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພິສາລຸວະທາຍະກະເຖຣາປະທານທີ ໔ ຈົບ**

**ພານະວານທີ ๖ ຈົບ**

## ໕. ເອກະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະສັນຍະກະເຖຣະ

(ພຣະເອກະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘] ໄດ້ມີອັກຄະຣະສາວົກນາມວ່າ ຂັນທະ ຂອງພຣະວິປັດສີພຸດທະເຈົ້າ
ຜູ້ສົມຄວນຮັບເຄື່ອງບູຊາຂອງຊາວໂລກ
ຂ້າພະເຈົ້າຖວາຍພິກສາຈອງໜຶ່ງແກ່ທ່ານ

[໑໙] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະ ມະນຸດ
ຜູ້ອົງອາດກວ່ານໍຣະຊົນ ດ້ວຍຈິດທີ່ເຫຼື້ອມໃສນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພິກສາຈອງໜຶ່ງ

[໔໐] ໃນກັບທີ ໔໐ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ອະຣຸນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະສັນຍະກະເຖຣາປະທານທີ ໕ ຈົບ**

# ໖. ຕິນະສັນຖາຣະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິນະສັນຖາຣະທາຍະກະເຖຣະ

(ພຣະຕິນະສັນຖາຣະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໒] ໃນບ່ອນບໍ່ໄກພູເຂົາຫິມະພານ
ມີສະນ້ຳທຳມະຊາດສະໃຫຍ່ແຫ່ງໜຶ່ງ
ເດຍລະດາດໄປດ້ວຍດອກບົວສົດບົງກົດ
ເປັນບ່ອນອາໄສຂອງນົກຕ່າງ ໆ

[໔໓] ຂ້າພະເຈົ້າອາບແລະດື່ມນ້ຳໃນສະນັ້ນແລ້ວ ພັກຢູ່ບໍ່ໄກ
ໄດ້ເຫັນພຣະພຸດທະເຈົ້າຜູ້ເລີດກວ່າສະມະນະ ສະເດັດເຫາະໄປໃນອາກາດ

[໔໔] ພຣະສາດສະດາຜູ້ປະເສີດໃນໂລກ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ ສະເດັດລົງຈາກອາກາດ
ປະທັບຢືນຢູ່ເທິງແຜ່ນດິນໃນຂະນະນັ້ນ

[໔໕] ຂ້າພະເຈົ້າໄດ້ໃຊ້ກ່ຽວ ກ່ຽວຫຍ້າມາຖວາຍເຮັດເປັນບ່ອນປະທັບນັ່ງ
ພຣະຜູ້ມີພຣະພາກເຈົ້າຜູ້ເປັນໃຫຍ່ໃນໂລກທັງ ໓
ຊົງເປັນຜູ້ນຳ ໄດ້ປະທັບນັ່ງຢູ່ໃນບ່ອນນັ້ນ

[໔໕]　ຂ້າພະເຈົ້າທຳຈິດຂອງຕົນໃຫ້ເຫຼື້ອມໃສ
ໄດ້ຂາບໄຫວ້ພຣະອົງ ຊຶ່ງເປັນຜູ້ນຳສັດໂລກ
ຫຍໍ້ລົງນັ່ງຍອງຍໍ້ເພ່ງເບິ່ງພຣະມະຫາມຸນີ

[໔໗]　ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຂ້າພະເຈົ້າຈຶ່ງໄດ້ໄປເກີດໃນສະຫວັນຊັ້ນນິມມານະຣະດີ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຄື່ອງປູຫຍ້າ

[໔໘]　ໃນກັບທີ ໔ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ມິດຕະສຳມະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໙]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນະສັນຖາຣະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ຕິນະສັນຖາຣະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ສູຈິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສູຈິທາຍະກະເຖຣະ

(ພຣະສູຈິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐]　ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ມີພຣະສຳມາສຳພຸດທະເຈົ້າ ຊຶ່ງເປັນຜູ້ນຳສັດໂລກ
ພຣະນາມວ່າ ສຸເມທະ ຕາມພຣະໂຄດ
ມີພຣະລັກສະນະອັນປະເສີດ ໓໒ ປະການ

[໕໑]　ຂ້າພະເຈົ້າໄດ້ຖວາຍເຂັມ ໕ ເຫຼັ້ມ ເພື່ອປະໂຫຍດແກ່ການຫຍິບຈີວອນ
ແດ່ພຣະອົງຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໓໔] ດ້ວຍການຖວາຍເຂັມນັ້ນ ໆ ແລ
ຍານເປັນເຄື່ອງເຫັນແຈ້ງອັດຖະທີ່ລະອຽດຄືນກ້າ
ເກີດຂຶ້ນແກ່ຂ້າພະເຈົ້າໄດ້ໄວແລະໂດຍງ່າຍ

[໓໓] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຊົງຮ່າງກາຍອັນມີໃນພົບສຸດທ້າຍຢູ່
ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໓໔] ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ພຣະນາມວ່າ ທີບທາທິບໍດີ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສູຈິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສູຈິທາຍະກະເຖຣາປະທານທີ ໗ ຈົບ**

## ໘. ປາຕະລິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປາຕະລິປຸບຜິຍະເຖຣະ

(ພຣະປາຕະລິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຂອງຕົນ ຈຶ່ງກ່າວວ່າ)

[໓໖] ພຣະສຳມາສຳພຸດທະເຈົ້າຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ເຊັ່ນກັບຄຳມີຄ່າ ມີພຣະລັກສະນະອັນປະເສີດ ໓໒ ປະການ
ເຊິ່ງກຳລັງສະເດັດໄປໃນລະຫວ່າງຮ້ານຕະຫຼາດ

[໓໗] ຄັ້ງນັ້ນ ຂ້າພະເຈົ້າເປັນບຸດເສດຖີສຸຂຸມາລະຊາດ
ດຳຣົງຢູ່ໃນຄວາມສຸກ ໄດ້ນຳດອກແຄຝອຍທີ່ຫໍ່ໃສ່ພົກ
ອອກບູຊາພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ

[໓໘] ຂ້າພະເຈົ້າມີຈິດຮ່າເຣີງເບີກບານ ບູຊາພຣະອົງດ້ວຍດອກໄມ້

ນອບນ້ອມພຣະພຸດທະເຈົ້າພຣະນາມວ່າຕິດສະ ຜູ້ຮູ້ແຈ້ງໂລກ
ຊຶ່ງເປັນບ່ອນເພິ່ງ ເປັນເທບຂອງນໍຣະຊົນ

[໓໙] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໔໐] ໃນກັບທີ ໖໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ອະພິສຳມະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປາຕະລິປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປາຕະລິປຸບຜິຍະເຖຣາປະທານທີ ໘ ຈົບ**

# ໗. ຖິຕັນຊະລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຖິຕັນຊະລິຍະເຖຣະ

(ພຣະຖິຕັນຊະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໒] ເມື່ອກ່ອນ ຂ້າພະເຈົ້າເປັນພານເນື້ອຢູ່ໃນປ່າດົງທຶບ
ໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະລັກສະນະອັນປະເສີດ ໓໒ ປະການ ໃນປ່ານັ້ນ

[໔໓] ໃນບ່ອນນັ້ນ ຂ້າພະເຈົ້າກະທຳອັນຊະລີແດ່ ພຣະສຳມາສຳພຸດທະເຈົ້າ
ຜູ້ປະທັບນັ່ງຢູ່ເທິງເຄື່ອງປູໃບໄມ້ປະຈຳໃນບ່ອນບໍ່ໄກ
ແລ້ວອວ່າຍໜ້າຫຼີກໄປທາງທິດຕາເວັນອອກ

[໔໔] ລຳດັບນັ້ນ ອະສະນີບາດໄດ້ຕົກລົງເທິງຂະໜ່ອມຂອງຂ້າພະເຈົ້າ
ໃນຄັ້ງນັ້ນ ເວລາໃກ້ຕາຍ ຂ້າພະເຈົ້ານັ້ນໄດ້ກະທຳອັນຊະລີອີກຄັ້ງໜຶ່ງ

[໔໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ກະທຳອັນຊະລີໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການກະທຳອັນຊະລີ
[໔໖] ໃນກັບທີ ໕໔ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ມິຄະເກຕຸ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຖິຕັນຊະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຖິຕັນຊະລິຍະເຖຣາປະທານທີ ໙ ຈົບ**

## ໑໐. ຕິປະທຸມິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິປະທຸມິຍະເຖຣະ

(ພຣະຕິປະທຸມິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ຄັ້ງນັ້ນ ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງຝຶກພຣະອົງແລ້ວ
ມີສາວົກຜູ້ຝຶກຕົນແວດລ້ອມແລ້ວ ສະເດັດອອກຈາກນະຄອນ
[໔໙] ຄັ້ງນັ້ນ ຂ້າພະເຈົ້າໄດ້ເປັນຊ່າງດອກໄມ້ ຢູ່ໃນນະຄອນຫົງສະວະດີ
ໄດ້ຖືດອກປະທຸມ ໓ ດອກ ເຊິ່ງເປັນດອກໄມ້ຊັ້ນດີເລີດໃນນະຄອນນັ້ນ
[໕໐] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ກຳລັງສະເດັດສວນທາງມາໃນລະຫວ່າງຮ້ານຕະຫຼາດ
ພ້ອມກັບການໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຈຶ່ງຄິດແນວນີ້ໃນເວລານັ້ນວ່າ

[໕໑] ປະໂຫຍດອັນໃດຂອງເຮົາກັບດອກໄມ້ເຫຼົ່ານີ້
ທີ່ເຮົາໃຊ້ບຳຣຸງພຣະຣາຊາ
ເຮົາເພິ່ງໄດ້ບ້ານ ຄາມເຂດ ຫຼື ຊັບພັນໜຶ່ງເທົ່ານັ້ນ

[໕໔]　ເຮົາບູຊາພຣະພຸດທະເຈົ້າ ຜູ້ຝຶກຕົນທີ່ບໍ່ໄດ້ຝຶກຕົນ
ຜູ້ມີຄວາມພຽນ ຊຶ່ງນໍາສຸກມາໃຫ້ແກ່ສັດທັງປວງ
ຊຶ່ງເປັນບ່ອນເພິ່ງຂອງສັດໂລກແລ້ວ ຈັກໄດ້ຊັບອັນເປັນອໍາມະຕະ

[໕໓]　ຂ້າພະເຈົ້າເມື່ອຄິດແນວນີ້ແລ້ວ ຈຶ່ງທໍາຈິດຂອງຕົນໃຫ້ເຫຼື້ອມໃສ
ຈັບດອກບົວແດງ ໓ ດອກໂຍນຂຶ້ນໄປໃນອາກາດ ໃນຄັ້ງນັ້ນ

[໕໔]　ພໍຂ້າພະເຈົ້າໂຍນຂຶ້ນໄປ
ດອກບົວແດງເຫຼົ່ານັ້ນກໍແຜ່ (ຂະຫຍາຍກີບ) ຢູ່ໃນອາກາດ
ກ້ານຊີ້ຂຶ້ນຂ້າງເທິງ ດອກຍ້ອຍລົງຂ້າງລຸ່ມ
ກັ້ນຢູ່ເໜືອພຣະສຽນໃນອາກາດ

[໕໕]　ໝູ່ມະນຸດທີ່ເຫັນແລ້ວພາກັນໂຫ່ຮ້ອງສຽງດັງ
ທັງເທວະດາໃນອາກາດກໍພາກັນແຊ່ຊ້ອງສາທຸການວ່າ

[໕໖]　ຄວາມອັດສະຈັນເກີດຂຶ້ນແລ້ວໃນໂລກ
ຍ້ອນອານຸພາບແຫ່ງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເຮົາທັງໝົດຈັກຟັງທໍາ ຍ້ອນອານຸພາບແຫ່ງດອກໄມ້

[໕໗]　ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊຶ່ງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບຢືນຢູ່ທີ່ຖະໜົນນັ້ນເອງ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໕໘]　ເຮົາຈັກພະຍາກອນມານົບຜູ້ທີ່ໄດ້ບູຊາພຣະພຸດທະເຈົ້າດ້ວຍດອກບົວແດງ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໕໙]　ມານົບນັ້ນ ຈັກຣື່ນຣົມໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ແລະຈັກເປັນຈອມເທບຄອງເທວະສົມບັດ ໓໐ ຊາດ

[໖໐]　ຄັ້ງນັ້ນ ຈັກມີວິມານຊື່ ມະຫາວິດຖາຣິກະ
ສູງ ໓໐໐ ໂຍດ ກວ້າງ ໑໕໐ ໂຍດ

[໖໑]　ປ້ອມ ໔໐໐,໐໐໐ ປ້ອມ ປະກອບດ້ວຍເຮືອນຍອດຊັ້ນດີ
ປະດັບດ້ວຍບ່ອນນອນໃຫຍ່ ທີ່ບຸນກໍາສ້າງໄວ້ດີແລ້ວ

[໖໒]　ນາງເທບອັບປະສອນ ໑໐໐,໐໐໐ ໂກດ
ສະຫຼາດໃນການຟ້ອນຣໍາ ການຂັບຮ້ອງ
ແລະຊໍານານໃນການປະໂຄມ ຈັກແວດລ້ອມເຂົາ

[໙໓] ຄັ້ງນັ້ນ ຝົນດອກໄມ້ທິບສີແດງ ຈັກຕົກລົງໃນວິມານທີ່ປະເສີດ
ເຊິ່ງຄັບຄັ່ງດ້ວຍໝູ່ເທບນາຣີ ແນວນັ້ນ

[໙໔] ດອກບົວແດງໃຫຍ່ປະມານເທົ່າລໍ້ ຈັກແຂວນຢູ່
ທີ່ຕະປູຝາ ທີ່ໄມ້ແຂ້ວນາກ ທີ່ບານປະຕູ
ແລະທີ່ເສົາຣະນຽດ ໃນຄັ້ງນັ້ນ

[໙໕] ນາງເທບອັບປະສອນທັງຫຼາຍໃຊ້ກີບບົວປູວິມານນີ້ແລ້ວ
ຈັກນຸ່ງຫົ່ມກີບບົວ
ນອນກິ້ງເກືອກຢູ່ພາຍໃນວິມານທີ່ປະເສີດເຊິ່ງປູດ້ວຍກີບບົວ

[໙໖] ດອກບົວແດງລ້ວນເຫຼົ່ານັ້ນ ແວດລ້ອມວິມານ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບຟຸ້ງໄປ
ໃນທີ່ປະມານ ໑໐໐ ໂຍດໂດຍຮອບ

[໙໗] ມານັບນີ້ ຈັກເປັນພຣະເຈົ້າຈັກກະພັດ ໗໕ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໙໘] ເຂົາໄດ້ສະເຫວີຍສົມບັດທັງ ໔ ແລ້ວ ມີຄວາມສະຫວັສດີ ບໍ່ມີອຸປັດທະວະ
ເມື່ອພົບສຸດທ້າຍມາເຖິງແລ້ວຈັກບັນລຸນິບພານ

[໙໙] ພຣະພຸດທະເຈົ້າ ຂ້າພະເຈົ້າໄດ້ເຫັນດີແລ້ວນໍ
ພານິດຊະກຳ ຂ້າພະເຈົ້າກໍປະກອບແລ້ວ
ຂ້າພະເຈົ້າໃຊ້ດອກບົວ ໓ ດອກບູຊາແລ້ວ ໄດ້ສະເຫວີຍສົມບັດ ໓ ປະການ

[໗໐] ດອກບົວແດງບານງົດງາມ ຈັກກັ້ນຢູ່ເໜືອຫົວຂອງຂ້າພະເຈົ້າ
ຜູ້ໄດ້ບັນລຸທຳແລ້ວ ລຸດພົ້ນແລ້ວໂດຍປະການທັງປວງ ໃນວັນນີ້

[໗໑] ເມື່ອພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ
ຊົງສະແດງຜົນກຳຂອງຂ້າພະເຈົ້າ
ເຫຼົ່າສັດຫຼາຍຮ້ອຍ ຫຼາຍພັນໄດ້ບັນລຸທຳແລ້ວ

[໗໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກບົວ ໓ ດອກ

[໓໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະຕິປະທຸມິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິປະທຸມິຍະເຖຣາປະທານທີ ໑໐ ຈົບ**

**ນາຄະສະມາລະວັກທີ ໘ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ນາຄະສະມາລະເຖຣາປະທານ
໒. ສຸສັນຍະກະເຖຣາປະທານ
໓. ເອກະສັນຍະກະເຖຣາປະທານ
໔. ສູຈິທາຍະກະເຖຣາປະທານ
໕. ຖິຕັນຊະລິຍະເຖຣາປະທານ
໖. ປະທະສັນຍະກະເຖຣາປະທານ
໗. ພິສາລຸວະທາຍະກະເຖຣາປະທານ
໘. ຕິນະສັນຖາຣະທາຍະກະເຖຣາປະທານ
໙. ປາຕະລິປຸບຜິຍະເຖຣາປະທານ
໑໐. ຕິປະທຸມິຍະເຖຣາປະທານ

**ແລະມີຄາຖາ ໓໔ ຄາຖາ**

# ໙. ຕິມິຣະປຸບຜິຍະວັກ

## ໝວດວ່າດ້ວຍພຣະຕິມິຣະປຸບຜິຍະເປັນຕົ້ນ

## ໑. ຕິມິຣະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິມິຣະປຸບຜິຍະເຖຣະ

(ພຣະຕິມິຣະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າທ່ຽວໄປຕາມກະແສນ້ຳ ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ໄດ້ເຫັນພຣະສະມະນະ ຜູ້ຜ່ອງໃສບໍ່ຂຸ່ນມົວ ປະທັບນັ່ງຢູ່

[໔] ຂ້າພະເຈົ້າ ຈຶ່ງທຳຈິດໃຫ້ເຫຼື້ອມໃສໃນພຣະສະມະນະນັ້ນແລ້ວ
ຈຶ່ງໄດ້ຄິດແນວນີ້ໃນຄັ້ງນັ້ນວ່າ ພຣະຜູ້ມີພຣະພາກເຈົ້ານີ້
ຊົງຂ້າມເອງແລ້ວ ຈັກຊ່ອຍສັບພະສັດໃຫ້ຂ້າມ (ວັດຕະສົງສານ)
ຊົງຝຶກຕົນເອງແລ້ວ ຈັກຊົງຝຶກສັບພະສັດ

[໕] ຊົງເບົາພຣະຫະໄທເອງແລ້ວ ຈັກຊົງຊ່ອຍສັບພະສັດໃຫ້ເບົາໃຈ
ຊົງສະງົບເອງແລ້ວ ຈັກຊົງຊ່ອຍສັບພະສັດໃຫ້ສະງົບ
ຊົງພົ້ນເອງແລ້ວ ຈັກຊົງຊ່ອຍສັບພະສັດໃຫ້ພົ້ນ
ຊົງສະງົບເຢັນເອງແລ້ວ ຈັກຊົງຊ່ອຍສັບພະສັດໃຫ້ສະງົບເຢັນ

[໖] ຂ້າພະເຈົ້າເມື່ອຄິດແນວນີ້ແລ້ວ ໄດ້ຖືດອກບົວໝີ
ມາໂຮ່ຍເໜືອພຣະສຽນຂອງພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະນາມວ່າສິດທັດຖະ ໃນຄັ້ງນັ້ນ

[໗] ຂ້າພະເຈົ້າປະຄອງອັນຊະລີ ແລະ ທຳປະທັກຂິນພຣະອົງ
ຂາບພຣະຍຸຄົນບາດຂອງພຣະສາດສະດາແລ້ວ ຈຶ່ງຫຼີກໄປສູ່ທິດອື່ນ

[໘] ພະຍາເນື້ອໄດ້ບຽດບຽນຂ້າພະເຈົ້າ ຜູ້ໄປແລ້ວບໍ່ດົນ
ຂ້າພະເຈົ້າຍ່າງໄປຕາມແຄມເຫວ ໄດ້ຕົກລົງໄປ (ຕາຍ) ໃນເຫວນັ້ນ ໆ ເອງ

[໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໐] ໃນກັບທີ ໕໘ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໆ ຊາດ ພຣະນາມວ່າມະຫາຍະສະ
ສົມບູນດ້ວຍຣັດຕະນະ ໆ ປະການ ມີພະລານຸພາບຫຼາຍ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິມິຣະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິມິຣະປຸບຜິຍະເຖຣາປະທານທີ ໑ ຈົບ**

# ໘. ຄະຕະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຄະຕະສັນຍະກະເຖຣະ

(ພຣະຄະຕະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ຂ້າພະເຈົ້າມີອາຍຸ ໗ ຂວບ ກໍໄດ້ອອກບວດເປັນບັນພະຊິດ
ມີຈິດຜ່ອງໃສ ໄດ້ຂາບພຣະຍຸຄົນບາດຂອງພຣະສາດສະດາ

[໑໑] ຂ້າພະເຈົ້າໄດ້ໂຍນດອກດິນ[໑] ໗ ດອກໄປໃນອາກາດ
ອຸທິດສະເພາະພຣະພຸດທະເຈົ້າພຣະນາມວ່າ ຕິດສະ
ຜູ້ຊົງພຣະຄຸນຫາບ່ອນສຸດບໍ່ໄດ້ດັ່ງສາຄອນ

[໑໘] ຂ້າພະເຈົ້າມີໃຈຮ່າເຣີງ ເຫຼື້ອມໃສແລ້ວ
ບູຊາຫົນທາງທີ່ພຣະສຸຄົດເຈົ້າສະເດັດດຳເນີນໄປ
ໄດ້ປະນົມມືທັງ ໘ ຂອງຕົນໄຫວ້ພຣະສຸຄົດເຈົ້າ

[໑໓] ໃນກັບທີ ໙໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໔] ໃນກັບທີ ໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ ພຣະນາມວ່າອັກຄິສິຂະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄະຕະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄະຕະສັນຍະກະເຖຣາປະທານທີ ໘ ຈົບ**

# ໓. ນິປັນນັນຊະລິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນິປັນນັນຊະລິກະເຖຣະ

(ພຣະນິປັນນັນຊະລິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖] ຂ້າພະເຈົ້າເປັນໄຂ້ໜັກ ນັ່ງພັກຢູ່ທີ່ເຫງົ້າຕົ້ນໄມ້
ເຖິງອາການໜ້າສົງສານຢ່າງຍິ່ງ ຢູ່ໃນປ່າໃຫຍ່ດົງໜາ

[໑໗] ພຣະສາດສະດາພຣະນາມວ່າຕິດສະ ຊົງອາໄສຄວາມອະນຸເຄາະ
ຈຶ່ງສະເດັດມາຫາຂ້າພະເຈົ້າ ຂ້າພະເຈົ້ານັ້ນນອນຢູ່
ໄດ້ປະນົມມືໄວ້ເໜືອຫົວ

[໑໘] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ ຜູ້ສູງສຸດແຫ່ງສັບພະສັດ
ແລ້ວໄດ້ສິ້ນຊີວິດໃນບ່ອນນັ້ນ

[໑໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຂາບໄຫວ້ພຣະພຸດທະເຈົ້າ ຊົງເປັນບຸຣຸດຜູ້ສູງສຸດ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຂາບໄຫວ້

[໔໐] ໃນກັບທີ ໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໕ ຊາດ ພຣະນາມວ່າ ມະຫາສິຂະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນິປັນນັນຊະລິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນິປັນນັນຊະລິກະເຖຣາປະທານທີ ໓ ຈົບ**

# ໔. ອະໂທປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະໂທປຸບຜິຍະເຖຣະ

(ພຣະອະໂທປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ພິກຂຸຊື່ ອະພິພູນັ້ນ ໄດ້ວິດຊາ ໓ ມີອານຸພາບຫຼາຍ
ເປັນອັກຄະຣະສາວົກຂອງພຣະພຸດທະເຈົ້າພຣະນາມວ່າ ສິຂີ
ເຂົ້າໄປສູ່ພູເຂົາຫິມະພານ

[໔໓] ຄັ້ງນັ້ນ ແມ່ນຂ້າພະເຈົ້າກໍບວດເປັນລືສີ
ເປັນຜູ້ຊຳນານໃນອັບປະມັນຍາແລະລິດ
ອາໄສຢູ່ໃນອາສົມທີ່ໜ້າຣື່ນຣົມ ໃກ້ພູເຂົາຫິມະພານ

[໔໔] ຂ້າພະເຈົ້າປາຖະໜາພູເຂົາຢ່າງຍິ່ງ
ປຽບເໝືອນ ນົກໃນອາກາດປາຖະໜາອາກາດສັນນັ້ນ
ຂ້າພະເຈົ້າເກັບດອກໄມ້ທີ່ຕີນພູແລ້ວຈຶ່ງມາຍັງພູເຂົາ

[໔໕] ຂ້າພະເຈົ້າຈັບດອກໄມ້ ໗ ດອກ
ມາໂຮ່ຍລົງເໜືອຫົວ (ຂອງພຣະເຖຣະ)
ຜູ້ອັນພຣະພິກຂຸຜູ້ມີຄວາມແກ່ກ້າແນມເບິ່ງ
ກໍອວ່າຍໜ້າຫຼີກໄປທາງທິດຕາເວັນອອກ

[໔໖] ຂ້າພະເຈົ້າເຖິງອາສົມແລ້ວ ຈັດແຈງທີ່ຢູ່
ຄອນສາແຫຣກບໍຣິຂານ ຍ່າງໄປຕາມລະຫວ່າງພູເຂົາ

[໔໗] ງູເຫຼືອມເປັນສັດດຸຮ້າຍ ມີກຳລັງຫຼາຍ ໄດ້ຮັດຂ້າພະເຈົ້າ
ຂ້າພະເຈົ້າຣະລຶກເຖິງບຸບພະກຳ ແລ້ວໄດ້ສິ້ນຊີວິດໃນທີ່ນັ້ນເອງ

[໔໘] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອະໂທປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

# ໕. ຣັງສິສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຣັງສິສັນຍະກະເຖຣະ

(ພຣະຣັງສິສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໐] ເມື່ອກ່ອນ ຂ້າພະເຈົ້າອາໄສຢູ່ທີ່ພູເຂົາຫິມະພານ
ນຸ່ງຫົ່ມໜັງສັດຢູ່ໃນຮ່ອມພູເຂົາ

[໓໑] ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະສະຫວີວັນດັ່ງຄຳ
ມີພຣະຣັດສະໝີຮຸ່ງເຮື່ອງເໝືອນດວງອາທິດ ສະເດັດເຂົ້າໃນປ່າ
ງົດງາມເໝືອນຕົ້ນພະຍາໄມ້ສາລະມີດອກບານສະພັ່ງ

[໓໒] ຂ້າພະເຈົ້າຈຶ່ງທຳຈິດໃຫ້ເຫຼື້ອມໃສໃນພຣະຣັດສະໝີ
ຂອງພຣະວິປັດສີພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ນັ່ງຍອງຍໍ້ປະຄອງອັນຊະລີເໜືອຫົວໄຫວ້ແລ້ວ

[໓໓] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນຣັດສະໝີ

[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະຣັງສິສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຣັງສິສັນຍະກະເຖຣາປະທານທີ ໕ ຈົບ**

# ໖. ທຸຕິຍະຣັງສິສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທຸຕິຍະຣັງສິສັນຍະກະເຖຣະ

(ພຣະທຸຕິຍະຣັງສິສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ຂ້າພະເຈົ້ານຸ່ງຜ້າເປືອກໄມ້ ອາໄສຢູ່ທີ່ພູເຂົາຫິມະພານ
ຂຶ້ນສູ່ບ່ອນຈົງກົມແລ້ວ ນັ່ງອວ່າຍໜ້າໄປທາງທິດຕາເວັນອອກ

[໓໖] ຂ້າພະເຈົ້າໄດ້ເຫັນພຣະສຸຄົດເຈົ້າພຣະນາມວ່າ ຜຸດສະ
ຜູ້ຍິນດີໃນຊານທຸກເມື່ອ ເທິງພູເຂົາ
ຈຶ່ງປະນົມມືແລ້ວກະທຳຈິດໃຫ້ເຫຼື້ອມໃສໃນພຣະຣັດສະໝີ

[໓໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນຣັດສະໝີ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທຸຕິຍະຣັງສິສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທຸຕິຍະຣັງສິສັນຍະກະເຖຣາປະທານທີ ໖ ຈົບ**

## ໗. ຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຜະລະທາຍະກະເຖຣະ

(ພຣະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໙] ຂ້າພະເຈົ້ານຸ່ງຫົ່ມໜັງສັດຜືນໃຫຍ່ ອາໄສຢູ່ທີ່ພູເຂົາຫິມະພານ
ໄດ້ເຫັນພຣະຊິນນະເຈົ້າຜູ້ປະເສີດພຣະນາມວ່າ ຜຸດສະ
ຈຶ່ງໄດ້ຖືໝາກໄມ້ໄປຖວາຍ

[໔໐] ຂ້າພະເຈົ້າມີຈິດຜ່ອງໃສ ໄດ້ຖວາຍໝາກໄມ້ໃດໄວ້
ໝາກໄມ້ນັ້ນກໍບັງເກີດແກ່ຂ້າພະເຈົ້າ ໃນພົບທີ່ຂ້າພະເຈົ້າບັງເກີດແລ້ວ

[໔໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໔]    ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜະລະທາຍະກະເຖຣາປະທານທີ ໗ ຈົບ**

# ໘. ສັດທະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັດທະສັນຍະກະເຖຣະ

(ພຣະສັດທະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓]    ຂ້າພະເຈົ້າຢູ່ໃນ ທີ່ປູດ້ວຍໃບໄມ້ ທີ່ພູເຂົາຫິມະພານ
ຂ້າພະເຈົ້າກະທຳຈິດໃຫ້ເຫຼື້ອມໃສໃນພຣະສຸຣະສຽງຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າຜຸດສະ ເຊິ່ງກຳລັງຕັດທຳຢູ່

[໔໔]    ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງບຸນກຳ

[໔໕]    ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັດທະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດທະສັນຍະກະເຖຣາປະທານທີ ໘ ຈົບ**

# ໙. ໂພທິສິນຈະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂພທິສິນຈະກະເຖຣະ

(ພຣະໂພທິສິນຈະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ໄດ້ມີການສະຫຼອງຕົ້ນມະຫາໂພ
ແຫ່ງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ໃນຄັ້ງນັ້ນ ຂ້າພະເຈົ້າບວດຢູ່ ຈຶ່ງເຂົ້າໄປໃກ້ ໆ

[໔໗] ຂ້າພະເຈົ້າໄດ້ຖືດອກໂກສຸມ ແລະ ນຳໄປໂຮຍແລະທົດທີ່ຕົ້ນໂພ
ດ້ວຍກ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງລຸດພົ້ນແລ້ວ
ຈັກຊົງຊ່ວຍພວກເຮົາໃຫ້ລຸດພົ້ນນຳ
ຊົງສະງົບເຢັນແລ້ວ ຈັກຊົງຊ່ວຍພວກເຮົາໃຫ້ສະງົບເຢັນ

[໔໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ທົດນ້ຳຕົ້ນໂພ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການທົດນ້ຳຕົ້ນໂພ

[໔໙] ເມື່ອກັບທີ ໓໓ ກຳລັງເປັນໄປຢູ່
ໄດ້ເປັນພຣະເຈົ້າຈັກກະພັດ ໘ ຊາດ
ພຣະນາມວ່າ ອຸທະກະເສຈະນະ ຊົງເປັນໃຫຍ່ໃນໝູ່ຊົນ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂພທິສິນຈະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂພທິສິນຈະກະເຖຣາປະທານທີ ໙ ຈົບ**

## ໑໐. ປະທຸມະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປະທຸມປຸບຜິຍະເຖຣະ

(ພຣະປະທຸມປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າເຂົ້າໄປສູ່ສະບົວ ຫັກດອກບົວຢູ່
ໄດ້ເຫັນພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຜຸດສະ
ຜູ້ມີພຣະລັກສະນະອັນປະເສີດ ໓໒ ປະການ

[໕໔] ຂ້າພະເຈົ້າຈັບດອກປະທຸມໂຍນຂຶ້ນໄປໃນອາກາດ (ເພື່ອບູຊາ)
ຂ້າພະເຈົ້າຣະລຶກເຖິງກຳຊົ່ວແລ້ວ ຈຶ່ງບວດເປັນບັນພະຊິດ

[໕໓] ຂ້າພະເຈົ້າເມື່ອບວດແລ້ວ ມີກາຍແລະໃຈອັນສັງລວມດີ
ລະອະຈິທຸດຈະລິດ ຊຳຣະອາຊີວະໃຫ້ມົດຈົດ

[໕໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໕] ໃນກັບທີ ໑໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໗ ຊາດ
ພຣະນາມວ່າ ປະທຸມາພາດ
ແລະໄດ້ເປັນພຣະເຈົ້າແຜ່ນດິນ ໔໗ ຊາດ

[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປະທຸມປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທຸມະປຸບຜິຍະເຖຣາປະທານທີ ໑໐ ຈົບ**

**ຕິມິຣະປຸບຜິຍະວັກທີ ໗ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຕິມິຣະປຸບຜິຍະເຖຣາປະທານ
໒. ນິປັນນັນຊະລິກະເຖຣາປະທານ
໓. ຮັງສີສັນຍະກະເຖຣາປະທານ
໔. ຜະລະທາຍະກະເຖຣາປະທານ
໕. ໂພທິສິນຈະກະເຖຣາປະທານ
໖. ຄະຕະສັນຍະກະເຖຣາປະທານ
໗. ອະໂທປຸບຜິຍະເຖຣາປະທານ
໘. ທຸຕິຍະຮັງສີສັນຍະກະເຖຣາປະທານ
໙. ສັດທະສັນຍະກະເຖຣາປະທານ
໑໐. ປະທຸມະປຸບຜິຍະເຖຣາປະທານ

**ແລະທ່ານປະກາດຄາຖາໄວ້ ໕໖ ຄາຖາ**

# ໑໐. ສຸທາວັກ

## ໝວດວ່າດ້ວຍພຣະສຸທາປິນທິຍະເປັນຕົ້ນ

## ໑. ສຸທາປິນທິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸທາປິນທິຍະເຖຣະ

(ພຣະສຸທາປິນທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ສຳລັບບຸກຄົນຜູ້ບູຊາພຣະພຸດທະເຈົ້າ
ພຣະປັດເຈກພຸດທະເຈົ້າ ຫຼື ສາວົກຂອງພຣະພຸດທະເຈົ້າ ຜູ້ຄວນບູຊາ
ຜູ້ລ່ວງພົ້ນກິເລດເປັນເຫດລ້າຊ້າ
ຂ້າມຄວາມເສົ້າໂສກແລະຄວາມຮ່ຳໄຮໄດ້ແລ້ວ

[໒] (ແລະ) ສຳລັບບຸກຄົນຜູ້ບູຊາຜູ້ຄວນບູຊາເຫຼົ່ານັ້ນ ຜູ້ຈົ່ງຊັ້ນ
ຜູ້ບໍ່ມີໄພແຕ່ບ່ອນໃດ ເຊິ່ງນິບພານແລ້ວ
ໃຜ ໆ ບໍ່ອາດນັບບຸນໄດ້ວ່າ ບຸນນີ້ມີປະມານເທົ່ານີ້

[໓] ການທີ່ບຸກຄົນໃນໂລກນີ້ ເພິ່ງຄອງຄວາມເປັນໃຫຍ່ແຫ່ງທະວີບທັງ ໔
ນັ້ນກໍຍັງບໍ່ເຖິງສ່ວນທີ່ ໑໖ ແຫ່ງການບູຊານີ້ເລີຍ

[໔] ຂ້າພະເຈົ້າມີໃຈຜ່ອງໃສ
ໄດ້ໃສ່ກ້ອນປູນຂາວໄວ້ໃນລະຫວ່າງແຜ່ນດິນຈີ່ທີ່ພຣະເຈດີ
ແຫ່ງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ ຜູ້ເປັນນະຣະຜູ້ເລີດ

[໕] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປະຕິສັງຂອນ

[໖] ໃນກັບທີ ໓໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໓ ຊາດ
ພຣະນາມວ່າ ປະຕິສັງຂາຣະ
ສົມບູນດ້ວຍຣັດຕະນະ ໗ ປະການ

[໗]　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸທາປິນທິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸທາປິນທິຍະເຖຣາປະທານທີ ໑ ຈົບ**

# ໔. ສຸປິຖິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸປິຖິຍະເຖຣະ

(ພຣະສຸປິຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘]　ຂ້າພະເຈົ້າມີຈິດຮ່າເຣີງ ເບີກບານໄດ້ຖວາຍຕັ່ງທີ່ສະອາດມົດຈົດ
ແດ່ພຣະພຸດທະເຈົ້າພຣະນາມວ່າຕິດສະ ຜູ້ໂລກະນາດ
ຜູ້ເປັນເຜົ່າພັນແຫ່ງດວງອາທິດ

[໙]　ໃນກັບທີ ໕໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະຣາຊາພຣະນາມວ່າ ມະຫາຣຸຈິ
ມີໂພຄະໄພບູນ ແລະບ່ອນນອນມີຄ່າບໍ່ແມ່ນໜ້ອຍ

[໑໐]　ຂ້າພະເຈົ້າມີໃຈຜ່ອງໃສ ໄດ້ຖວາຍຕັ່ງແດ່ພຣະພຸດທະເຈົ້າແລ້ວ
ສະເຫວີຍຜົນກໍາຂອງຕົນ ທີ່ຕົນໄດ້ເຮັດໄວ້ດີແລ້ວ ໃນຄັ້ງໜຶ່ງກ່ອນ

[໑໑]　ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຕັ່ງໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຕັ່ງ

[໑໔]　ໃນກັບທີ ໕໘ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໕ ຊາດ
ຊາດທີ ໑ ພຣະນາມວ່າ ຣຸຈິ ຊາດທີ ໔ ພຣະນາມວ່າ ອຸປະຣຸຈິ
ແລະຊາດທີ ໕ ພຣະນາມວ່າ ມະຫາຣຸຈິ

[໑໕]　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸປິຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸປິຖິຍະເຖຣາປະທານທີ ໔ ຈົບ**

## ໕. ອັດທະເຈລະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອັດຖະເຈລະກະເຖຣະ

(ພຣະອັດຖະເຈລະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ຂ້າພະເຈົ້າເປັນຄົນເຂັ້ນໃຈ ເຖິງອາການໜ້າສົງສານຢ່າງຍິ່ງ
ໄດ້ຖວາຍຜ້າເຄິ່ງຜືນແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ

[໑໕] ຂ້າພະເຈົ້າເມື່ອຖວາຍຜ້າເຄິ່ງຜືນແລ້ວ
ບັນເທີງຢູ່ໃນສະຫວັນຕະຫຼອດ ໑ ກັບ
ແລະໃນກັບທັງຫຼາຍທີ່ເຫຼືອ ຂ້າພະເຈົ້າໄດ້ທຳກຸສົນໄວ້ແລ້ວ

[໑໖] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າ

[໑໗] ໃນກັບທີ ໕໑ (ນັບຈາກກັບນີ້ໄປ)
ໄດ້ເປັນກະສັດຜູ້ຈັກກະພັດ
ພຣະນາມວ່າ ສະມັນຕາໂອທະນະ ເປັນໃຫຍ່ໃນໝູ່ຊົນ

[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອັດຖະເຈລະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັດທະເຈລະກະເຖຣາປະທານທີ ໕ ຈົບ**

# ໔. ສູຈິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສູຈິທາຍະກະເຖຣະ

(ພຣະສູຈິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໙] ເມື່ອກ່ອນຂ້າພະເຈົ້າໄດ້ເປັນຊ່າງຄຳຢູ່ໃນນະຄອນພັນທຸມາ
ເຊິ່ງເປັນນະຄອນທີ່ລ້ຳເລີດ ຂ້າພະເຈົ້າໄດ້ຖວາຍເຂັມ
ແດ່ພຣະພຸດທະເຈົ້າພຣະນາມວ່າວິປັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໒໐] ຍານຂອງຂ້າພະເຈົ້າສະເໝີດ້ວຍເພັດລ້ຳຄ່າ ເປັນຈັ່ງຊັ້ນໄດ້ຍ້ອນກຳ
ຂ້າພະເຈົ້າເປັນຜູ້ປາສະຈາກຣາຄະ
ລຸດພົ້ນຢ່າງວິເສດ ບັນລຸຄວາມສິ້ນອາສະວະ

[໒໑] ຂ້າພະເຈົ້າຄົ້ນຈັບພົບທັງທີ່ເປັນອະດີດ ປັດຈຸບັນ
ແລະອະນາຄົດທັງປວງໄດ້ດ້ວຍຍານ
ນີ້ເປັນຜົນແຫ່ງການຖວາຍເຂັມ

[໒໒] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໆ ຊາດ ພຣະນາມວ່າ ວະຊິຣະ
ສົມບູນດ້ວຍຣັດຕະນະ ໆ ປະການ ມີພະລານຸພາບຫຼາຍ

[໒໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະສູຈິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສູຈິທາຍະກະເຖຣາປະທານທີ ໔ ຈົບ**

# ໕. ຄັນທະມາລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຄັນທະມາລິຍະເຖຣະ

(ພຣະຄັນທະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໒໔] ຂ້າພະເຈົ້າໄດ້ສ້າງສະຖູບໄມ້ຫອມປົກຄຸມດ້ວຍດອກມະລິ
ສ້າງໃຫ້ສົມຄວນແດ່ ພຣະຜູ້ມີພຣະພາກພຸດທະເຈົ້າພຣະນາມວ່າ ສິດທັດຖະ

[໔໕] ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ເຊັ່ນກັບຄຳທີ່ລ້ຳຄ່າ ຊົງຮຸ່ງເຮືອງເໝືອນຕົ້ນຣາຊະພຶກ
ເໝືອນແທ່ນບູຊາໄຟອັນສະຫວ່າງເຈີດຈ້າ

[໔໖] ຜູ້ປະເສີດເໝືອນພະຍາເສືອໂຄ່ງໂຕອົງອາດ
ເໝືອນພະຍາໄກສອນຜູ້ມີຊາດສູງ
ຜູ້ເລີດກວ່າສະມະນະທັງຫຼາຍ ຜູ້ປະທັບນັ່ງມີໝູ່ພິກຂຸຫ້ອມລ້ອມ
[໔໗] ຂ້າພະເຈົ້າຂາບພຣະຍຸຄົນບາດຂອງພຣະສາດສະດາແລ້ວ
ອວ່າຍໜ້າຫຼີກໄປທາງທິດເໜືອ
ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຂອງຫອມ ແລະດອກໄມ້ໄວ້
[໔໘] ດ້ວຍຜົນແຫ່ງສັກກາຣະທີ່ເຮັດໄວ້ໃນພຣະພຸດທະເຈົ້າໂດຍພິເສດ
ຂ້າພະເຈົ້າຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໔໙] ໃນກັບທີ ໓໙ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີນາມຄືກັນວ່າເທບຄັນທະ
[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄັນທະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄັນທະມາລິຍະເຖຣາປະທານທີ ໕ ຈົບ**

## ໖. ຕິປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິປຸບຜິຍະເຖຣະ

(ພຣະຕິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ເມື່ອກ່ອນ ຂ້າພະເຈົ້າເປັນພານເນື້ອອາໄສຢູ່ໃນປ່າໃຫຍ່ດົງໜາ
ເຫັນຕົ້ນແຄຝອຍມີໃບຂຽວສົດ ຈຶ່ງໂຮ່ຍດອກໄມ້ ໓ ດອກບູຊາ
(ເຊິ່ງເປັນຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ)

[໕໔] ຄັ້ງນັ້ນ ຂ້າພະເຈົ້າເກັບໃບແຄຝອຍແຫ້ງໄປຖິ້ມໃນພາຍນອກແລ້ວ
ອະພິວາດຕົ້ນແຄຝອຍ ເໝືອນອະພິວາດພຣະສໍາມາສໍາພຸດທະເຈົ້າ
ຜູ້ມີດຈິດທັງພາຍໃນແລະພາຍນອກ ຜູ້ລຸດພົ້ນແລ້ວບໍ່ມີອາສະວະ

[໕໕] ຊຶ່ງເປັນຜູ້ນໍາຂອງໂລກພຣະນາມວ່າ ວິປັດສີ
ສະເພາະພຣະພັກແລ້ວ ກໍສິ້ນຊີວິດ ໃນບ່ອນນັ້ນ

[໕໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາຕົ້ນໂພໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຕົ້ນໂພ

[໕໕] ໃນກັບທີ ໕໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໕ ຊາດ
ພຣະນາມວ່າ ສະມັນຕະປາສາທິກະ ມີພະລານຸພາບຫຼາຍ
[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິປຸບຜິຍະເຖຣາປະທານທີ ໖ ຈົບ**

## ໗. ມະທຸປິນທິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມະທຸປິນທິກະເຖຣະ

(ພຣະມະທຸປິນທິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໗] ໃນປ່າໃຫຍ່ດົງໝາທີ່ງຽບສະຫງັດບໍ່ມີສຽງອື້ອຶງ
ຂ້າພະເຈົ້າເຫັນພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ປະເສີດກວ່າລືສີທັງຫຼາຍ ຜູ້ສົມຄວນຮັບເຄື່ອງບູຊາ
[໕໘] ຜູ້ດັບກິເລດແລ້ວ ຊຶ່ງເປັນມະຫານາຄະ ອົງອາດເໝືອນມ້າອາຊາໄນ
ຮຸ່ງເຮືອງດັ່ງດາວປະກາຍພຶກ
ເຊິ່ງໝູ່ເທວະດາ ແລະມະນຸດນະມັດສະການແລ້ວ

[໓໙] ຂ້າພະເຈົ້າມີຄວາມພໍໃຈຫຼວງຫຼາຍ
ຍາມໄດ້ເກີດຂື້ນໃນຂະນະນັ້ນ ຂ້າພະເຈົ້າໄດ້ຖວາຍນ້ຳເຜີ້ງ
ແດ່ພຣະສາດສະດາຜູ້ສະເດັດອອກຈາກສະມາທິແລ້ວ

[໔໐] ມີຈິດຜ່ອງໃສຈຶ່ງໝອບຂາບພຣະຍຸຄົນບາດຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ສິດທັດຖະແລ້ວ ອວ່າຍໜ້າຫຼີກໄປທາງທິດຕາເວັນອອກ
ໃນກັບທີ ໓໔ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເປັນພຣະຣາຊາມີນາມວ່າ ສຸທັດສະນະ

[໔໑] ຄັ້ງນັ້ນ ນ້ຳເຜີ້ງໄຫຼອອກຈາກເຫງົ້າບົວລົງໃນໂພຊະນາຫານຂອງຂ້າພະເຈົ້າ
ຝົນນ້ຳເຜີ້ງຕົກລົງແລ້ວ
ນີ້ເປັນຜົນແຫ່ງບຸບພະກຳ

[໔໒] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍນ້ຳເຜີ້ງໄວ້ຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍນ້ຳເຜີ້ງ

[໔໓] ໃນກັບທີ ໓໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ມີນາມຄືກັນວ່າ ສຸທັດສະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະທຸປິນທິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມະທຸປິນທິກະເຖຣາປະທານທີ ໗ ຈົບ**

# ໗. ເສນາສະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເສນາສະນະທາຍະກະເຖຣະ

(ພຣະເສນາສະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕] ຂ້າພະເຈົ້າໄດ້ຖວາຍເຄື່ອງປູໃບໄມ້
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ແລະໄດ້ໂຮຍດອກໂກສຸມເຮັດໃຫ້ເປັນອຸປະການ (ຝາ) ໂດຍຮ້ອບ

[໔໖] ຂ້າພະເຈົ້າໄດ້ໃຊ້ສອຍຫ້ອງທີ່ໜ້າຮື່ນຣົມມີຄ່າຫຼາຍໃນຜາສາດ
ດອກໄມ້ມີຄ່າຫຼາຍໄດ້ຕົກລົງເທິງບ່ອນນອນຂອງຂ້າພະເຈົ້າ

[໔໗] ຂ້າພະເຈົ້ານອນເທິງບ່ອນນອນອັນວິຈິດເຊິ່ງປູດ້ວຍດອກໄມ້
ແລະຝົນດອກໄມ້ຕົກລົງເທິງບ່ອນນອນຂອງຂ້າພະເຈົ້າໃນຂະນະນັ້ນ

[໔໘] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເຄື່ອງປູໃບໄມ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຄື່ອງປູ

[໔໙] ໃນກັບທີ ໕ ນັບຈາກກັບນີ້ໄປ
ໄດ້ເກີດເປັນພຣະເຈົ້າຈັກກະພັດ ໆ ພຣະອົງ
ພຣະນາມວ່າ ຖິຕາສັນຖາຣະກະ
ຊົງເປັນໃຫຍ່ໃນໝູ່ຊົນ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະເສນາສະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເສນາສະນະທາຍະກະເຖຣາປະທານທີ ໗ ຈົບ**

# ໙. ເວີຍາວັດຈະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເວີຍາວັດຈະກະເຖຣະ

(ພຣະເວີຍາວັດຈະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໑] ໄດ້ມີການປະຊຸມໃຫຍ່ແຫ່ງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຂ້າພະເຈົ້າໄດ້ເປັນໄວຍາວັດຈະກອນ ຂວນຂວາຍໃນກິດທຸກຢ່າງ

[໕໒] ຂ້າພະເຈົ້າບໍ່ມີໄທຍະທຳທີ່ຈະຖວາຍ
ແດ່ພຣະສຸຄົດເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ມີຈິດຜ່ອງໃສ ໄດ້ອະພິວາດພຣະຍຸຄົນບາດຂອງພຣະສາດສະດາ

[໕໓] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ກະທຳຄວາມຂວນຂວາຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຂວນຂວາຍ

[໕໔] ໃນກັບທີ ໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສຸຈິນຕິຍະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເວີຍາວັດຈະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເວີຍາວັດຈະກະເຖຣາປະທານທີ ໙ ຈົບ**

# ໑໐. ພຸດທຸປັດຖາກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພຸດທຸປັດຖາກະເຖຣະ

(ພຣະພຸດທຸປັດຖາກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໖] ຂ້າພະເຈົ້າໄດ້ເປົ່າສັງບູຊາພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ເປັນຜູ້ຂວນຂວາຍບຳຣຸງພຣະສຸຄົດເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ເປັນນິດ

[໕໗] ທ່ານຈຶ່ງເບິ່ງຜົນການບຳຣຸງພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ຜູ້ຄົງທີ່
ເຄື່ອງດົນຕີ ໖໐,໐໐໐ ຢ່າງແວດລ້ອມຂ້າພະເຈົ້າທຸກເມື່ອ
[໕໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບຳຣຸງພຣະຜູ້ມີພຣະພາກເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບຳຣຸງ
[໕໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າ ມະຫານິໂຄດ ມີພະລານຸພາບຫຼາຍ
[໖໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະພຸດທຸປັດຖາກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພຸດທຸປັດຖາກະເຖຣາປະທານທີ ໑໐ ຈົບ**

**ສຸທາວັກທີ ໑໐ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສຸທາປິນທິຍະເຖຣາປະທານ
໒. ອັດທະເຈລະກະເຖຣາປະທານ
໓. ຄັນທະມາລິຍະເຖຣາປະທານ
໗. ມະທຸປິນທິກະເຖຣາປະທານ
໙. ເວີຍຍາວັດຈະກະເຖຣາປະທານ
໒. ສຸປິຖິຍະເຖຣາປະທານ
໔. ສູຈິທາຍະກະເຖຣາປະທານ
໖. ຕິປຸບຜິຍະເຖຣາປະທານ
໘. ເສນາສະນະທາຍະກະເຖຣາປະທານ
໑໐. ພຸດທຸປັດຖາກະເຖຣາປະທານ

ໃນວັກນີ້ທ່ານປະກາດຄາຖາໄວ້ ໖໐ ຄາຖາບໍລິບູນ

## ອັນໜຶ່ງ ລວມວັກໄດ້ ໑໐ ວັກ ຄື

໑. ພຸດທະວັກ
໒. ສຸພູຕິວັກ
໓. ອຸປາລິວັກ
໔. ສະກະຈິດຕະນິຍະວັກ
໕. ຕິມິຣະປຸບຜິຍະວັກ
໖. ສີຫາສະນິຍະວັກ
໗. ກຸນທະທານະວັກ
໘. ວິຊະນີວັກ
໙. ນາຄະສະມາລະວັກ
໑໐. ສຸທາວັກ

ລວມຄາຖາໄດ້ ໑,໔໕໕ ຄາຖາ

ໝວດ ໑໐ ແຫ່ງວັກມີພຸດທະວັກເປັນຕົ້ນ ຈົບ

໑໐໐ ເລື້ອງ ໝວດທີ ໑ ຈົບບໍລິບູນ

# ໑໑. ພິກຂະທາຍິວັກ

## ໝວດວ່າດ້ວຍພຣະພິກຂະທາຍິເປັນຕົ້ນ

## ໑. ພິກຂະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະພິກຂະທາຍະກະເຖຣະ

(ພຣະພິກຂະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ສົມຄວນຮັບເຄື່ອງບູຊາ ສະເດັດອອກຈາກປ່າໃຫຍ່
ຄືຕັນຫາເຄື່ອງຮ້ອຍຮັດມາສູ່ຄວາມດັບ (ນິບພານ)
[໒] ຂ້າພະເຈົ້າໄດ້ເຫັນແລ້ວຈຶ່ງໄດ້ມອບຖວາຍພິກສາຈອງໜຶ່ງ
ແດ່ພຣະພຸດທະເຈົ້າພຣະນາມວ່າສິດທັດຖະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ສະຫງົບຣະງັບດ້ວຍປັນຍາ ມີຄວາມພຽນຫຼາຍ ເປັນຜູ້ຄົງທີ່
[໓] ຂ້າພະເຈົ້າເກີດຄວາມພໍໃຈເປັນຢ່າງຫຼາຍໃນພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ຊຶ່ງຊ່ອຍມະຫາຊົນຜູ້ຕາມສະເດັດພຣະຍຸຄົນບາດໃຫ້ສະຫງົບເຢັນ

[໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພິກສາ

[໕] ໃນກັບທີ ໗໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ
ມີພຣະນາມວ່າ ມະຫາເຣນຸ
ສົມບູນດ້ວຍຣັດຕະນະ ໗ ປະການ

[໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພິກຂະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ພິກຂະທາຍະກະເຖຣາປະທານທີ ໑ ຈົບ**

## ໔. ຍານະສັນຍິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຍານະສັນຍິກະເຖຣະ

(ພຣະຍານະສັນຍິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗] ພຣະສໍາມາສໍາພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄໍາ
ເໝືອນມ້າອາຊາໄນໂຕອົງອາດ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເໝືອນຊ້າງມາຕັງຄະຕົກມັນ ໓ ແຫ່ງ

[໘] ຊົງເຮັດທິດທັງປວງໃຫ້ສະຫວ່າງສະໄຫວ ເໝືອນດວງຈັນໃນວັນເພັງ
ເປັນຜູ້ຈະເລີນທີ່ສຸດໃນໂລກ ກໍາລັງສະເດັດດໍາເນີນຢູ່ເທິງຖະໜົນ

[໙] ຂ້າພະເຈົ້າໄດ້ເຫັນແລ້ວຈຶ່ງທໍາຈິດໃຫ້ເຫຼື້ອມໃສໃນພຣະຍານແລ້ວ
ປະຄອງອັນຊະລີ ມີຈິດເຫຼື້ອມໃສ ມີໃຈຍິນດີ
ຖວາຍອະພິວາດພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ສິດທັດຖະ

[໑໐] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກໍາໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນພຣະຍານ

[໑໑] ໃນກັບທີ ກ໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ ພຣະນາມວ່າ ນະຣຸຕະທະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຍານະສັນຍິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຍານະສັນຍິກະເຖຣາປະທານທີ ໔ ຈົບ**

## ໕. ອຸບປະລະທັດຖິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸບປະລະທັດຖິຍະເຖຣະ

(ພຣະອຸບປະລະທັດຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງດອກໄມ້ອາໄສຢູ່ໃນຕິວະຣານະຄອນ
ໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ປາສະຈາກທຸລິຄືກິເລດ ທີ່ຊາວໂລກບູຊາແລ້ວ

[໑໔] ຈຶ່ງມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍດອກໄມ້ (ດອກອຸບົນ) ກຳໜຶ່ງ
ຍ້ອນອຳນາດແຫ່ງກຳນັ້ນ ຂ້າພະເຈົ້າອຸບັດໃນພົບໃດ ໆ

[໑໕] ໃນພົບນັ້ນ ໆ ຂ້າພະເຈົ້າສະເຫວີຍຜົນທີ່ໜ້າປາຖະໜາ
ທີ່ຕົນເຮັດໄວ້ດີແລ້ວໃນປາງກ່ອນ ແວດລ້ອມດ້ວຍດອກໄມ້ຢ່າງດີ
ນີ້ເປັນຜົນແຫ່ງການຖວາຍດອກໄມ້

[໑໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໗] ເວັ້ນກັບປັດຈຸບັນ ນັບຖອຍຫຼັງໄປ ໗໔ ກັບ ໃນຄັ້ງນັ້ນ
ໄດ້ເປັນພຣະຣາຊາ ໕໐໐ ຊາດ ມີພຣະນາມວ່າ ນັດຊຸບມະ

[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸບປະລະທັດຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸບປະລະທັດຖິຍະເຖຣາປະທານທີ ໓ ຈົບ**

## ໔. ປະທະປູຊະກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະປະທະປູຊະກະເຖຣະ

(ພຣະປະທະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໙] ຂ້າພະເຈົ້າໄດ້ຖວາຍດອກມະລິແດ່
ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ແລະຂ້າພະເຈົ້າມີຈິດຮ່າເຣີງ ຈຶ່ງໂຮຍດອກມະລິ ໗ ດອກ
ລົງໃສ່ພຣະຍຸຄົນບາດ ດ້ວຍຄວາມຍິນດີ

[໔໐] ດ້ວຍຜົນກຳນັ້ນ ໃນວັນນີ້
ຂ້າພະເຈົ້າຈຶ່ງໃຫຍ່ເໜືອນໍຣະຊົນ ແລະ ເທວະດາ
ຊົງຮ່າງກາຍອັນມີໃນພົບສຸດທ້າຍຢູ່
ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໔໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໔໔] ໃນກັບທີ ໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໓ ຊາດ

ມີພຣະນາມວ່າ ສະມັນຕະຄັນທະ
ຄອງແຜ່ນດິນ ມີທະວີບທັງ ໔ ເປັນຂອບເຂດ ເປັນໃຫຍ່ໃນໝູ່ຊົນ
[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປະທະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທະປູຊະກະເຖຣາປະທານທີ ໔ ຈົບ**

# ໕. ມຸດຖິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມຸດຖິປຸບຜິຍະເຖຣະ

(ພຣະມຸດຖິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງດອກໄມ້ ມີຊື່ວ່າ ສຸທັດສະນະ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
[໔໕] ຂ້າພະເຈົ້າມີໃຈຍິນດີ ຖືດອກມະລິໄປບູຊາ
ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ມີພຣະຈັກຂຸບໍລິສຸດ ຊົງບັນລຸທິບພະຍະຈັກຂຸ
[໔໖] ດ້ວຍການບູຊາພຣະພຸດທະເຈົ້ານີ້ ແລະດ້ວຍການຕັ້ງຈິດໄວ້ໝັ້ນ
ຂ້າພະເຈົ້າຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ
[໔໗] ໃນກັບທີ ໓໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າ ເທບອຸດຕະຣະ ມີພະລານຸພາບຫຼາຍ
[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມຸດຖິປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມຸດຖິປຸບຜິຍະເຖຣາປະທານທີ ໕ ຈົບ**

# ๗. ອຸທະກະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸທະກະປູຊະກະເຖຣະ

(ພຣະອຸທະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໙] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ຮຸ່ງເຮືອງດັ່ງແປວໄຟ
ດັ່ງຖ່ານບູຊາໄຟອັນສະຫວ່າງເຈີດຈ້າ
ກຳລັງສະເດັດເຫາະໄປໃນອາກາດ

[໙໐] ຂ້າພະເຈົ້າໄດ້ເຫັນແລ້ວຈຶ່ງໃຊ້ຝ່າມືຕັກນ້ຳ ແລ້ວຊັດຂຶ້ນໄປໃນອາກາດ
ພຣະພຸດທະເຈົ້າຜູ້ຊົງມີຄວາມພຽນຫຼາຍ
ມີພຣະກະລຸນາໃນຂ້າພະເຈົ້າ ຊົງຮັບໄວ້ແລ້ວ

[໙໑] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ ປະທັບຢືນຢູ່ໃນອາກາດ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ ວ່າ

[໙໒] ດ້ວຍຜົນແຫ່ງການຖວາຍນ້ຳ ແລະດ້ວຍການເກີດປີຕິນີ້
ໃນ ໑໐໐,໐໐໐ ກັບ ເຂົາຈະບໍ່ໄປເກີດໃນທຸກຄະຕິເລີຍ

[໙໓] ຂ້າແຕ່ ພຣະອົງຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ດ້ວຍຜົນກຳນັ້ນ ຂ້າພຣະອົງລະຄວາມຊະນະ ແລະຄວາມພ່າຍແພ້ໄດ້ແລ້ວ
ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໙໔] ໃນກັບທີ ໑໗໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ ມີພຣະນາມວ່າ ສະຫັດສະຣາດ
ຄອບຄອງແຜ່ນດິນ ມີທະວີບທັງ ໔ ເປັນຂອບເຂດ ເປັນໃຫຍ່ໃນໝູ່ຊົນ

[໙໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸທະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸທະກະປູຊະກະເຖຣາປະທານທີ ໗ ຈົບ**

# ໗. ນະມາລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນະມາລິຍະເຖຣະ

(ພຣະນະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໖] ເມື່ອພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ຈະເລີນທີ່ສຸດໃນໂລກ
ຜູ້ຄົງທີ່ ຜູ້ສະງົບຣະງັບ ປະທັບນັ່ງເທິງເຄື່ອງປູຫຍ້າ

[໓໗] ຂ້າພະເຈົ້ານຳດອກອົ້ມາຜູກເປັນວີແລ້ວ
ເຂົ້າໄປຖວາຍງານວີພຣະພຸດທະເຈົ້າ
ຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ຄົງທີ່

[໓໘] ພຣະສັບພັນຍູພຸດທະເຈົ້າ ຊົງເປັນຜູ້ນຳສັດໂລກ
ຊົງຮັບວີແລ້ວ ຊົງຮູ້ຄວາມຄິດຂອງຂ້າພະເຈົ້າ
ໄດ້ຕັດພຣະຄາຖານີ້ ວ່າ

[໓໙] ກາຍຂອງເຮົາສະງົບເຢັນ ຄວາມຮ້ອນຣົນກໍບໍ່ມີ ສັນໃດ
ຈິດຂອງທ່ານຈຶ່ງລຸດພົ້ນຈາກໄຟທັງ ໓ ກອງ ສັນນັ້ນ

[໔໐] ເທວະດາບາງເຫຼົ່າທີ່ອາໄສຕົ້ນໄມ້ຢູ່
ກໍມາປະຊຸມກັນທັງໝົດ ດ້ວຍຫວັງວ່າ
ພວກເຮົາຈັກໄດ້ຟັງພຣະພຸດທະພົດທີ່ຈະເຮັດຜູ້ຖວາຍງານວີໃຫ້ຣ່າເຣີງ

[໔໑] ພຣະຜູ້ມີພຣະພາກເຈົ້າ ປະທັບນັ່ງຢູ່ໃນບ່ອນນັ້ນ
ມີໝູ່ເທວະດາຫ້ອມລ້ອມ
ເມື່ອຈະໃຫ້ຜູ້ຖວາຍງານວີຣ່າເຣີງ
ຈຶ່ງໄດ້ຕັດພຣະຄາຖາເຫຼົ່ານີ້ ວ່າ

[໔໒] ດ້ວຍການຖວາຍງານວີນີ້ແລະດ້ວຍການຕັ້ງຈິດໄວ້ໝັ້ນ
ຜູ້ນີ້ຈັກເປັນພຣະເຈົ້າຈັກກະພັດມີພຣະນາມວ່າສຸພະຕະ ຕາມພຣະໂຄດ

[໔໓] ດ້ວຍຜົນກຳທີ່ເຫຼືອນັ້ນ ຜູ້ນີ້ຖືກກຸສົນມູນຕັກເຕືອນແລ້ວ
ຈັກເປັນພຣະເຈົ້າຈັກກະພັດມີພຣະນາມວ່າມາລຸຕະ ຕາມພຣະໂຄດ

[໔໔] ດ້ວຍການຖວາຍງານວີນີ້ ແລະດ້ວຍຄວາມຍົກຍ້ອງນັບຖືຢ່າງໄພບູນ
ໃນ ໑໐໐,໐໐໐ ກັບ ຜູ້ນີ້ຈະບໍ່ໄປເກີດໃນທຸກຄະຕິເລີຍ

[໔໕] ໃນກັບທີ ໖໐,໐໐໐ (ນັບຈາກກັບນີ້ໄປ)
ຈັກເປັນພຣະເຈົ້າຈັກກະພັດ ໖໗ ຊາດ ພຣະນາມວ່າ ສຸພະຕະ
ໃນກັບທີ ໑,໐໔໙ (ນັບຈາກກັບນີ້ໄປ)
ຈັກເປັນພຣະເຈົ້າຈັກກະພັດ ໗ ພຣະອົງ ພຣະນາມວ່າ ມາລຸຕະ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໗ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນະມາລິຍະເຖຣາປະທານທີ ໗ ຈົບ**

**ພານະວານທີ ໗ ຈົບ**

# ໗. ອາສະນຸປັດຖາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອາສະນຸປັດຖາຍະກະເຖຣະ

(ພຣະອາສະນຸປັດຖາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ຂ້າພະເຈົ້າເຂົ້າປ່າດົງທຶບທີ່ງຽບສະຫງັດບໍ່ມີສຽງອື້ອຶງ
ໄດ້ຖວາຍພຣະບັນລັງ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າອັດຖະທັດສີ ຜູ້ຄົງທີ່

[໔໘] ຂ້າພະເຈົ້າຖືດອກໄມ້ກຳໜຶ່ງ ແລ້ວກະທຳປະທັກຂິນພຣະອົງ
ເຂົ້າໄປເຝົ້າພຣະສາດສະດາແລ້ວ ອວ່າຍໜ້າຫຼີກໄປທາງທິດເໜືອ

[໔໙] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ດ້ວຍຜົນກຳນັ້ນ ຂ້າພຣະອົງເຮັດຕົນໃຫ້ດັບສະນິດໄດ້
ພົບທັງປວງຂ້າພຣະອົງກໍຖອນໄດ້ແລ້ວ

[໕໐] ໃນກັບ ໑໑໗ (ນັບຈາກກັບນີ້ໄປ)
ຂ້າພຣະອົງໄດ້ຖວາຍທານໄວ້ຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພຣະບັນລັງ

[໕໑] ໃນກັບທີ ໑໐໗ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ສັນນິບພາປະກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາສະນຸປັດຖາຍະກະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາສະນຸປັດຖາຍະກະເຖຣາປະທານທີ ໘ ຈົບ**

# ໙. ພິລາລິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາ ດຂອງພຣະພິລາລິທາຍະກະເຖຣະ

(ພຣະພິລາລິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໓] ຄັ້ງນັ້ນ ຂ້າພະເຈົ້າຢູ່ໃນ ທີ່ຢູ່ເຊິ່ງມຸງບັງດ້ວຍໃບໄມ້
ໃນບ່ອນບໍ່ໄກຈາກພູເຂົາຫິມະພານ
ຂ້າພະເຈົ້າຫິວອາຫານແຕ່ກໍນອນເສີຍ

[໕໔] ຂ້າພະເຈົ້າຂຸດຫົວມັນ ມັນອ້ອນ ມັນມີເສືອ ຫອມກະທຽມ
ເກັບໝາກກະເບົາ ໝາກຣິກຟ້າ ໝາກຕູມ ນຳມາກະກຽມໄວ້

[໕໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຈຶ່ງສະເດັດມາຍັງສຳນັກຂອງຂ້າພະເຈົ້າ

[໕໖] ຂ້າພະເຈົ້າໄດ້ເຫັນພຣະອົງຜູ້ມະຫານາຄະ ຜູ້ເປັນເທບຍິ່ງກວ່າເທບ
ຊົງອົງອາດກວ່ານໍຣະຊົນ ສະເດັດມາໃກ້ແລ້ວ
ຈຶ່ງຈັບມັນມີເສືອມາໃສ່ລົງໃນບາດ

[໕໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ສັບພັນຍູ ຊົງມີຄວາມພຽນຫຼາຍ
ເມື່ອຈະຊົງໃຫ້ຂ້າພະເຈົ້າຍິນດີ ຈຶ່ງສະເຫວີຍມັນນີເສືອນັ້ນ
ເມື່ອສະເຫວີຍສຳເລັດແລ້ວ ໄດ້ຕັດພຣະຄາຖານີ້ວ່າ

[໕໘] ທ່ານທຳຈິດຂອງຕົນໃຫ້ເຫຼື້ອມໃສແລ້ວ ໄດ້ຖວາຍມັນນີເສືອແກ່ເຮົາ
ທ່ານຈະບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໕໙] ຈິດດວງສຸດທ້າຍຂອງຂ້າພະເຈົ້າກຳລັງເປັນໄປ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຊົງຮ່າງກາຍອັນມີໃນພົບສຸດທ້າຍຢູ່
ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໖໐] ໃນກັບທີ ໕໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສຸເມຂະລິມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໖໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພິລາລິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພິລາລິທາຍະກະເຖຣາປະທານທີ ໙ ຈົບ**

## ໑໐. ເຣນູປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເຣນູປູຊະກະເຖຣະ

(ພຣະເຣນູປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໔] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ມີພຣະຣັດສະໝີຮຸ່ງເຮືອງ ເໝືອນດວງອາທິດ
ເຮັດທິດທັງປວງໃຫ້ສະຫວ່າງສະໄຫວເໝືອນດວງຈັນວັນເພັງ
[໖໕] ມີສາວົກທັງຫຼາຍຫ້ອມລ້ອມ ເໝືອນແຜ່ນດິນມີສາຄອນຫ້ອມລ້ອມ
ຂ້າພະເຈົ້າໄດ້ເຫັນແລ້ວ ຈຶ່ງຖືດອກກາກະທິງ
ພ້ອມທັງເກສອນໄປບູຊາພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ

[໖໔] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກກາກະທິງພ້ອມເກສອນບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໖໕] ໃນກັບທີ ໔໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ເຣນຸ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໖໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເຣນູປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເຣນູປູຊະກະເຖຣາປະທານທີ ໑໐ ຈົບ**

**ພິກຂະທາຍິວັກທີ ໑໑ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ພິກຂະທາຍະກະເຖຣາປະທານ
໒. ອຸບປະລະຫັດຖີຍະເຖຣາປະທານ
໓. ມຸດຖິປຸບຜິຍະເຖຣາປະທານ
໗. ນະມາລິຍະເຖຣາປະທານ
໙. ພິລາລິທາຍະກະເຖຣາປະທານ
໔. ຍານະສັນຍິກະເຖຣາປະທານ
໕. ປະທະປູຊະກະເຖຣາປະທານ
໖. ອຸທະກະປູຊະກະເຖຣາປະທານ
໘. ອາສະນຸປັດຖາຍະກະເຖຣາປະທານ
໑໐. ເຣນູປູຊະກະເຖຣາປະທານ

**ມີຄາຖາ ໖໖ ຄາຖາ**

# ໑໔. ມະຫາປະຣິວາຣະວັກ

## ໝວດວ່າດ້ວຍພຣະມະຫາປະຣິວາຣະເປັນຕົ້ນ

## ໑. ມະຫາປະຣິວາຣະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມະຫາປະຣິວາຣະເຖຣະ

(ພຣະມະຫາປະຣິວາຣະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ກັບພິກຂຸສົງ ໖໘,໐໐໐ ອົງ ສະເດັດເຂົ້າໄປສູ່ພັນທຸມະວິຫານ

[໒] ຂ້າພະເຈົ້າອອກຈາກນະຄອນແລ້ວໄດ້ໄປທີ່ທີປະເຈດີ
ໄດ້ເຫັນພຣະພຸດທະເຈົ້າ ຜູ້ປາສະຈາກທຸລີຄືກິເລດ
ຜູ້ສົມຄວນຮັບເຄື່ອງບູຊາ

[໓] ພວກຍັກໃນສຳນັກຂອງຂ້າພະເຈົ້າ ມີປະມານ ໘໔,໐໐໐ ຕົນ
ບຳຣຸງຂ້າພະເຈົ້າໂດຍເຄົາລົບ ດັ່ງໝູ່ເທວະດາຊັ້ນຕາວະຕິງສາ
ບຳຣຸງພຣະອິນໂດຍເຄົາລົບສັນນັ້ນ

[໔] ຄັ້ງນັ້ນ ຂ້າພະເຈົ້າຖືຜ້າທິບອອກຈາກບ່ອນຢູ່ໄປ
ຖວາຍອະພິວາດດ້ວຍຂະໜ່ອມ
ແລະໄດ້ຖວາຍຜ້າທິບນັ້ນແດ່ພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕] ຊ່າງໜ້າອັດສະຈັນ ພຣະພຸດທະເຈົ້າທັງຫຼາຍ
ຊ່າງໜ້າອັດສະຈັນ ພຣະທຳທັງຫຼາຍ
ຊ່າງໜ້າອັດສະຈັນ ການທີ່ຂ້າພະເຈົ້າໄດ້ມາພົບພໍ້ພຣະສາດສະດາ
ດ້ວຍອານຸພາບແຫ່ງພຣະພຸດທະເຈົ້າ ແຜ່ນດິນນີ້ຈຶ່ງໄຫວ

[໖] ຂ້າພະເຈົ້າໄດ້ເຫັນຄວາມອັດສະຈັນເຊິ່ງບໍ່ເຄີຍມີ
ໜ້າຂົນພອງສະຫຍອງເກົ້ານັ້ນແລ້ວ

ຈຶ່ງທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໗] ຂ້າພະເຈົ້ານັ້ນເມື່ອກະທຳຈິດໃຫ້ເຫຼື້ອມໃສແລ້ວ
ໄດ້ຖວາຍຜ້າທິບແດ່ພຣະສາດສະດາ
ຈຶ່ງພ້ອມທັງອຳມາດ ແລະ ບໍລິວານຊົນ
ເຖິງພຣະພຸດທະເຈົ້າວ່າເປັນສະຣະນະ ຢ່າງໝັ້ນຄົງ

[໘] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໙] ໃນກັບທີ ໑໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ ພຣະນາມວ່າ ວາຫະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະຫາປະຣິວາຣະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມະຫາປະຣິວາຣະເຖຣາປະທານທີ ໑ ຈົບ**

## ໔. ສຸມັງຄະລະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸມັງຄະລະເຖຣະ

(ພຣະສຸມັງຄະລະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑] ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຊະນະຢ່າງປະເສີດ
ພຣະນາມວ່າ ອັດຖະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ສະເດັດອອກຈາກພຣະວິຫານແລ້ວສະເດັດເຂົ້າໄປສູ່ສະນ້ຳ

[໑໔] ພຣະຜູ້ມີພຣະພາກສໍາມາສໍາພຸດທະເຈົ້າ
ຊົງສົງນໍ້າ ແລະ ສະເຫວີຍແລ້ວ ສະເດັດຂຶ້ນຊົງຜ້າຜືນດຽວ
ປະທັບຢືນຫຼຽວເບິ່ງທິດນ້ອຍທິດໃຫຍ່ຢູ່ໃນບ່ອນນັ້ນ

[໑໖] ຄັ້ງນັ້ນ ຂ້າພະເຈົ້າເຂົ້າໄປໃນບ່ອນຢູ່
ໄດ້ເຫັນພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນໍາສັດໂລກ
ມີຈິດຣ່າເຣີງເບີກບານ ໄດ້ຕົບມື

[໑໔] ຂ້າພະເຈົ້າປະກອບການຟ້ອນຣໍາ
ການຂັບຮ້ອງແລະການປະໂຄມດົນຕີມີອົງ ໕
ຖວາຍພຣະອົງ ຜູ້ຮຸ່ງເຮື່ອງເໝືອນດວງອາທິດ
ສ່ອງແສງສະຫວາງແຈ້ງດັ່ງຄໍາ
[໑໕] ຂ້າພະເຈົ້າເກີດໃນກໍາເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກໍາເນີດນັ້ນ ໆ ຂ້າພະເຈົ້າເປັນໃຫຍ່ເໜືອສັດທັງປວງ
ຍົດຂອງຂ້າພະເຈົ້າກໍໄພບູນ
[໑໖] ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ ຂ້າພຣະອົງ
ຂໍນອບນ້ອມພຣະອົງ ຂ້າແຕ່ພຣະອົງຜູ້ສູງສຸດແຫ່ງບຸຣຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ ພຣະອົງຜູ້ເປັນພຣະມຸນີ
ຊົງເຮັດພຣະອົງໃຫ້ຍິນດີແລ້ວ ຈຶ່ງຊົງເຮັດຜູ້ອື່ນໃຫ້ຍິນດີຕາມ
[໑໗] ຂ້າພະເຈົ້າຜູ້ມີວັດດີງາມກໍານົດແລ້ວ ບັງລົງ ກະທໍາຄວາມຣ່າເຣີງ
ເຂົ້າໄປບໍາຣຸງພຣະສໍາມາສໍາພຸດທະເຈົ້າແລ້ວ
ຈຶ່ງໄດ້ໄປເກີດເທິງສະຫວັນຊັ້ນດຸສິດ
[໑໘] ໃນກັບທີ ໑໑໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໘ ຊາດ ພຣະນາມວ່າ ເອກະຈິນຕິຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸມັງຄະລະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸມັງຄະລະເຖຣາປະທານທີ ໔ ຈົບ**

# ໓. ສະຣະນະຄະມະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະຣະນະຄະມະນິຍະເຖຣະ

(ພຣະສະຣະນະຄະມະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໐] ສົງຄາມຂອງທ້າວເທວະຣາດທັງ ໔ ຝ່າຍ
ໄດ້ຜາກົດປະຊິດຕິດກັນ ສຽງດັ່ງກຶກກ້ອງໄດ້ເປັນໄປ

[໔໑] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ປະທັບຢືນຢູ່ໃນອາກາດ
ຊົງເຮັດມະຫາຊົນໃຫ້ສັງເວດແລ້ວ

[໔໔] ເທວະດາທັງປວງມີໃຈເບີກບານ ຕ່າງວາງເກາະແລະອາວຸດ
ພ້ອມໃຈກັນຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ ໃນຂະນະນັ້ນ

[໔໓] ພຣະສາດສະດາຜູ້ຊົງອະນຸເຄາະ ຊົງຮູ້ແຈ້ງໂລກ
ຊົງຮູ້ຄວາມຄິດຂອງຂ້າພະເຈົ້າແລ້ວ
ຊົງເປ່ງອາສະພິວາຈາ ກະທຳມະຫາຊົນໃຫ້ເຢັນໃຈວ່າ

[໔໔] ບຸກຄົນຜູ້ເກີດເປັນມະນຸດ ມີຈິດປະທຸດສະຮ້າຍ
ບຽດບຽນສັດພຽງໂຕດຽວ
ຈະຕ້ອງເກີດໃນອະບາຍຍະພູມ ຍ້ອນຈິດປະທຸດສະຮ້າຍນັ້ນ

[໔໕] ປຽບເໝືອນຊ້າງໃນສະໜາມຮົບ
ບຽດບຽນສັດຈຳນວນຫຼາຍ
ທ່ານທັງຫຼາຍຈົ່ງກະທຳຈິດຂອງຕົນໃຫ້ເຢັນເຫີ້ນ
ຢ່າບຽດບຽນກັນເລີຍ

[໔໖] ແມ່ນພວກເສນາຂອງພະຍາຍັກທັງ ໔ ໄດ້ສະງົບສົງຄາມ
ແລະພາກັນເຖິງພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ຜູ້ຄົງທີ່ເປັນອັນດີ ວ່າເປັນສະຣະນະ ຢ່າງໝັ້ນຄົງ

[໔໗] ສ່ວນພຣະສາດສະດາ ຜູ້ມີພຣະຈັກຂຸ ຊົງເຮັດໃຫ້ໝູ່ຊົນຍິນຍອມແລ້ວ
ອັນໝູ່ເທວະດາເພ່ງເບິ່ງຢູ່ ຊົງກ້າວພຣະບາດ
ຊົງອວ່າຍພຣະພັກສະເດັດຫຼີກໄປທາງທິດເໜືອ

[໔໗] ຂ້າພະເຈົ້າໄດ້ເຖິງພຣະອົງຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຜູ້ຄົງທີ່ ວ່າເປັນສະຣະນະເປັນຄົນທຳອິດ
ຂ້າພະເຈົ້າບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໔໘] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າ ມະຫາທຸນະທຸພິ ແລະ ພຣະນາມວ່າ ຣະເຖສະພະ

[໓໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະຣະນະຄະມະນີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະຣະນະຄະມະນີຍະເຖຣາປະທານທີ ໓ ຈົບ**

## ໔. ເອກາສະນີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກາສະນີຍະເຖຣະ

(ພຣະເອກາສະນີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໑] ຄັ້ງນັ້ນ ຂ້າພະເຈົ້າໄດ້ເກີດເປັນທ້າວເທວະຣາດມີນາມວ່າ ວະຣຸນະ
ພ້ອມດ້ວຍຍານ ພົນທະຫານ ແລະ ພາຫະນະ
ເຂົ້າໄປບຳຣຸງພຣະສຳມາສຳພຸດທະເຈົ້າ

[໓໔] ເມື່ອພຣະສຳມາສຳພຸດທະເຈົ້າຜູ້ຊົງເປັນບ່ອນເພິ່ງ
ຂອງສັດໂລກ ພຣະນາມວ່າ ອັດຖະທັດສີ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ນຳດົນຕີທັງປວງໄປສູ່ຕົ້ນໂພອັນອຸດົມ

[໓໓] ຂ້າພະເຈົ້າປະກອບການປະໂຄມ
ການຟ້ອນລຳແລະກັງສະດານທຸກຢ່າງ ບຳຣຸງຕົ້ນໂພອັນອຸດົມ
ເໝືອນບຳຣຸງພຣະສຳມາສຳພຸດທະເຈົ້າສະເພາະພຣະພັກ

[໓໔] ຂ້າພະເຈົ້າເມື່ອບຳຣຸງຕົ້ນໂພເຊິ່ງງອກຂຶ້ນເທິງພື້ນດິນນັ້ນແລ້ວ
ຈຶ່ງນັ່ງຂັດສະມາທິ ແລ້ວໄດ້ສິ້ນຊີວິດລົງ ໃນບ່ອນນັ້ນເອງ

[໓໕] ຂ້າພະເຈົ້າຜາຣິບກຳຂອງຕົນ ເຫຼື້ອມໃສໃນຕົ້ນໂພອັນອຸດົມ
ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າຈຶ່ງໄປເກີດໃນສະຫວັນຊັ້ນນິມມານະຣະດີ

[໓໖] ເຄື່ອງດົນຕີ ໖໐,໐໐໐ ຢ່າງ ແວດລ້ອມຂ້າພະເຈົ້າ
ຜູ້ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ທັງໃນເທວະດາແລະມະນຸດ ຢູ່ທຸກເມື່ອ

[໓໗] ໄຟ ໓ ກອງ ຂ້າພະເຈົ້າດັບໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຊົງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໓໘] ໃນກັບທີ ໑໐໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓໔ ຊາດ
ມີພຣະນາມວ່າ ສຸພາຫຸ
ສົມບູນດ້ວຍຣັດຕະນະ ໗ ປະການ

[໓໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກາສະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກາສະນິຍະເຖຣາປະທານທີ ໔ ຈົບ**

# ໕. ສຸວັນນະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸວັນນະປຸບຜິຍະເຖຣະ

(ພຣະສຸວັນນະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ປະທັບນັ່ງສະແດງອະມະຕະບົດແກ່ໝູ່ຊົນ

[໔໑] ຂ້າພະເຈົ້າຟັງທຳຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່
ໄດ້ໃຊ້ດອກໄມ້ຄຳ ໔ ດອກ ບູຊາພຣະພຸດທະເຈົ້າ

[໔໒] ດອກໄມ້ຄຳນັ້ນ ກາຍເປັນຫຼັງຄາຄຳ ມຸງບັງຕະຫຼອດຊຸມຊົນ
ໃນຄັ້ງນັ້ນ ຣັດສະໝີຂອງພຣະພຸດທະເຈົ້າແລະຣັດສະໝີຂອງຄຳ
ລວມກັນເປັນແສງສະຫວ່າງຢ່າງເຈີດຈ້າ

[໔໓] ຂ້າພະເຈົ້າມີຈິດເບີກບານ ມີໃຈຍິນດີ ເກີດໂສມະນັດ
ປະນົມມືໃຫ້ຊົນເຫຼົ່ານັ້ນເກີດປີຕິ
ນຳຄວາມສຸກໃນປັດຈຸບັນມາໃຫ້

[໔໔] ຂ້າພະເຈົ້າທູນວິງວອນ ແລະ ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ
ຜູ້ມີວັດດີງາມ ກະທຳຄວາມປາໂມດໃຫ້ເກີດຂຶ້ນແລ້ວ
ກັບເຂົ້າສູ່ບ່ອນຢູ່ຂອງຕົນ

[໔໕] ຂ້າພະເຈົ້າກັບເຂົ້າສູ່ບ່ອນຢູ່ແລ້ວ
ຍັງຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດຢູ່
ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າຈຶ່ງໄດ້ໄປເກີດເທິງສະຫວັນຊັ້ນດຸສິດ

[໔໖] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໗] ໃນກັບທີ ໔໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າເນມິສຳມະຕະ ມີພະລານຸພາບຫຼາຍ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸວັນນະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸວັນນະປຸບຜິຍະເຖຣາປະທານທີ ໕ ຈົບ**

# ໖. ຈິຕະກະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈິຕະກະປູຊະກະເຖຣະ

(ພຣະຈິຕະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໙] ຂ້າພະເຈົ້າພ້ອມທັງອຳມາດ ແລະບໍລິວານສິງສະຖິດຢູ່ທີ່ຕົ້ນເກດ
ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດດັບຂັນທະປະຣິນິບພານແລ້ວ

[໕໐] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ໄປສູ່ຈິຕະກາທານ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິຂີ ຜູ້ຊຶ່ງເປັນເຜົ່າພັນຂອງໂລກ
ປະໂຄມດົນຕີ ໃນບ່ອນນັ້ນ
ໂຮຍຂອງຫອມແລະດອກໄມ້ໃຫ້ທົ່ວເຖິງ

[໕໑] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ທຳການບູຊາທີ່ຈິຕະກາທານ
ໄຫວ້ຈິຕະກາທານແລ້ວ ກັບມາວິມານຂອງຕົນ

[໕໒] ຂ້າພະເຈົ້າເຂົ້າໄປໃນວິມານແລ້ວ ຍັງຣະລຶກເຖິງການບູຊາຈິຕະກາທານຢູ່
ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ
ຊຶ່ງອົງອາດກວ່ານໍຣະຊົນ ດ້ວຍຜົນກຳນັ້ນ

[໕໓] ຂ້າພະເຈົ້າຈຶ່ງສະເຫວີຍສົມບັດທັງໃນເທວະດາແລະໃນມະນຸດແລ້ວ
ລະຄວາມຊະນະແລະຄວາມພ່າຍແພ້ໄດ້ແລ້ວ ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໕໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຈິຕະກາທານ

[໕໕] ໃນກັບທີ ໔໙ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າອຸກຄະຕະ ມີພະລານຸພາບຫຼາຍ

[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈິຕະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈິຕະກະປູຊະກະເຖຣາປະທານທີ ໖ ຈົບ**

## ໗. ພຸດທະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະພຸດທະສັນຍະກະເຖຣະ

(ພຣະພຸດທະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໗] ເມື່ອຄັ້ງໜຶ່ງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຜູ້ເລີດໃນໂລກ ຊົງປົງພຣະຊົນມາຍຸສັງຂານ
ແຜ່ນດິນໝື່ນຈັກກະວານທັງສະມຸດສາຄອນກໍໄຫວແລ້ວ

[໕໘] ແມ່ນວິມານຂອງຂ້າພະເຈົ້າ ສູງ ກວ້າງ ຍາວ
ສະອາດແລະງົດງາມ ມີພວງມາໄລເປັນທີ ໕ ກໍຍັງໄຫວ
ຍ້ອນການທີ່ພຣະພຸດທະເຈົ້າຊົງປົງພຣະຊົນມາຍຸສັງຂານ

[໕໙] ເມື່ອວິມານສັ່ນໄຫວແລ້ວ ຂ້າພະເຈົ້າເກີດຄວາມສະດຸ້ງຢ້ານວ່າ
ເກີດເຫດອັນໃດນໍ ແສງສະຫວ່າງເຈີດຈ້າໄດ້ມີແລ້ວເພື່ອປະໂຫຍດອັນໃດ

[໖໐] ທ້າວເວດສຸວັນມາ ໃນບ່ອນນີ້ແລ້ວ ເຮັດມະຫາຊົນໃຫ້ເຢັນໃຈວ່າ
ໄພທີ່ຈະເກີດແກ່ສັດບໍ່ມີ
ທ່ານທັງຫຼາຍຈົ່ງມີຄວາມຕັ້ງໃຈເຄົາລົບເທີ້ນ

[໖໑] ຊ່າງໜ້າອັດສະຈັນ ພຣະພຸດທະເຈົ້າ
ຊ່າງໜ້າອັດສະຈັນ ພຣະທຳ
ຊ່າງໜ້າອັດສະຈັນ ການທີ່ຂ້າພະເຈົ້າໄດ້ມາພົບພໍ້ກັບພຣະສາດສະດາ
ເມື່ອພຣະພຸດທະເຈົ້າຊົງອຸບັດຂຶ້ນ ແຜ່ນດິນກໍໄຫວຫວັ່ນ

[໖໒] ຂ້າພະເຈົ້າປະກາດພຸດທານຸພາບແລ້ວ
ຈຶ່ງບັນເທີງຢູ່ໃນສະຫວັນຕະຫຼອດໜຶ່ງກັບ
ໃນກັບທີເຫຼືອ ຂ້າພະເຈົ້າໄດ້ກະທຳກຸສົນໄວ້ແລ້ວ

[໖໓] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈໍາໃນພຣະພຸດທະເຈົ້າ

[໕໔] ໃນກັບທີ ໑໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ສະມິຕະ
ຜູ້ມີຄວາມພຽນ ມີພະລານຸພາບຫຼາຍ

[໕໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພຸດທະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພຸດທະສັນຍະກະເຖຣາປະທານທີ ໗ ຈົບ**

## ໘. ມັກຄະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມັກຄະສັນຍະກະເຖຣະ

(ພຣະມັກຄະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໖] ສາວົກທັງຫຼາຍຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ທ່ຽວໄປໃນປ່າ ຫຼົງທາງຈຶ່ງທ່ຽວໄປໃນປ່າໃຫຍ່ເໝືອນຄົນຕາບອດ

[໕໗] ບຸດຂອງພຣະມຸນີເຫຼົ່ານັ້ນຣະລຶກເຖິງພຣະສໍາມາສໍາພຸດທະເຈົ້າ
ພຣະນາມວ່າປະທຸມຸດຕະຣະ ຊົງເປັນຜູ້ນໍາ ຫຼົງທາງຢູ່ໃນປ່າໃຫຍ່

[໕໘] ຂ້າພະເຈົ້າ ລົງຈາກວິມານແລ້ວ ໄດ້ໄປສູ່ສໍານັກຂອງພິກຂຸ
ບອກທາງໃຫ້ແລະໄດ້ຖວາຍໂພຊະນາຫານແກ່ພິກຂຸເຫຼົ່ານັ້ນ

[໕໙] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ດ້ວຍກໍານັ້ນ ຂ້າພຣະອົງມີອາຍຸ ໗ ຂວບ ກໍໄດ້ບັນລຸອະຣະຫັນຕະຜົນ

[໗໐] ໃນກັບທີ ໑໐໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໔ ຊາດ
ມີພຣະນາມວ່າສະຈັກຂຸ ສົມບູນດ້ວຍຣັດຕະນະ ໗ ປະການ

[໗໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມັກຄະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ມັກຄະສັນຍະກະເຖຣາປະທານທີ ໘ ຈົບ**

# ໙. ປັດຈຸປັດຖານະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັດຈຸປັດຖານສັນຍະກະເຖຣະ

(ພຣະປັດຈຸປັດຖານສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໔] ເມື່ອພຣະສຸຄົດເຈົ້າພຣະນາມວ່າ ອັດຖະທັດສີ
ສະເດັດດັບຂັນທະປະຣິນິບພານແລ້ວ
ຄັ້ງນັ້ນ ຂ້າພະເຈົ້າໄດ້ເກີດໃນກໍາເນີດຍັກ ແລະໄດ້ຮັບຍົດຕາມລໍາດັບ

[໗໓] (ຂ້າພະເຈົ້າຄິດວ່າ) ຍົດທີ່ເຮົາໄດ້ແລ້ວ ເປັນຂອງໄດ້ຍາກນໍ
ເປັນຂອງທີ່ຮຸ່ງເຮືອງຍາກ ເກີດຂຶ້ນໄດ້ຍາກ ເມື່ອໂພຄະຂອງເຮົາມີຢູ່
ພຣະສຸຄົດເຈົ້າ ຜູ້ມີພຣະຈັກຂຸກໍສະເດັດດັບຂັນທະປະຣິນິບພານໄປສາແລ້ວ

[໗໔] ສາວິການາມວ່າ ສາຄອນ ຮູ້ຄວາມດໍາຣິຂອງຂ້າພະເຈົ້າແລ້ວ
ທ່ານປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງມາຍັງສໍານັກຂອງຂ້າພະເຈົ້າ

[໗໕] ທ່ານກ່າວວ່າ ທ່ານຈະເສົ້າໂສກໄປເຮັດຫຍັງນໍ
ຢ່າຢ້ານເລີຍ ທ່ານຈົ່ງປະພຶດທໍາເທີ້ນ ທ່ານຜູ້ມີປັນຍາດີ
ພຣະພຸດທະເຈົ້າຊົງປະທານວິດຊາສົມບັດແກ່ຊົນທັງປວງເນືອງ ໆ ວ່າ

[໗໖] ຫາກຜູ້ໃດ ເພິ່ງບູຊາພຣະສໍາມາສໍາພຸດທະເຈົ້າ
ຜູ້ຊົງເປັນຜູ້ນໍາສັດໂລກ ຍັງດໍາຣົງພະຊົນຢູ່ກໍດີ
ເພິ່ງບູຊາພຣະທາດແມ່ນປະມານເທົ່າເມັດພັນຜັກກາດຂອງພຣະພຸດທະເຈົ້າ
ແມ່ນສະເດັດດັບຂັນທະປະຣິນິບພານແລ້ວກໍດີ

[໗໗] ເມື່ອຈິດທີ່ເຫຼື້ອມໃສຂອງຜູ້ນັ້ນສະເໝີກັນ
ບຸນກໍມີຜົນຫຼາຍສະເໝີກັນ
ຍ້ອນແນວນັ້ນ ທ່ານຈຶ່ງສ້າງສະຖູບ
ບູຊາພຣະທາດຂອງພຣະຊິນນະເຈົ້າເທີ້ນ

[໗໘] ຂ້າພະເຈົ້າໄດ້ຟັງຄຳເວົ້າຂອງທ່ານສາຄອນແລ້ວ
ໄດ້ສ້າງພຸດທະສະຖູບ ບຳຣຸງພຣະສະຖູບຊັ້ນເລີດຂອງພຣະມຸນີຢູ່ ໕ ປີ

[໗໙] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ດ້ວຍຜົນກຳນັ້ນ ຂ້າພຣະອົງຈຶ່ງສະເຫວີຍສົມບັດ
ໄດ້ບັນລຸອະຣະຫັນຕະຜົນແລ້ວ

[໘໐] ໃນກັບທີ ໑໐໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ພຣະນາມວ່າ ພູຣິປັນຍາ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໘໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປັດຈຸປັດຖານສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັດຈຸປັດຖານະສັນຍະກະເຖຣາປະທານທີ ໙ ຈົບ**

# ໑໐. ຊາຕິປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຊາຕິປູຊະກະເຖຣະ

(ພຣະຊາຕິປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໔] ເມື່ອພຣະວິປັດສີໂພທິສັດປະສູດ ໄດ້ມີແສງສະຫວ່າງເຈີດຈ້າ
ແຜ່ນດິນພ້ອມທັງສະມຸດສາຄອນແລະພູເຂົາກໍໄຫວແລ້ວ
[໘໕] ອັນໜຶ່ງ ພວກໂຫຣາຈານພະຍາກອນວ່າ
ຜູ້ນີ້ຈັກເປັນພຣະພຸດທະເຈົ້າໃນໂລກ
ຈັກເປັນຜູ້ເລີດກວ່າສັບພະສັດ ຈັກຮື້ຖອນໝູ່ຊົນ

[໗໔] ຂ້າພະເຈົ້າໄດ້ຟັງຄຳຂອງພວກໂຫຣາຈານແລ້ວ
ໄດ້ກະທຳການບູຊາພຣະຊາດກຳເນີດ
ດ້ວຍຄວາມດຳຣິວ່າ ການບູຊາເຊັ່ນກັບການບູຊາພຣະຊາດກຳເນີດບໍ່ມີ

[໗໕] ຂ້າພະເຈົ້າສ້າງກຸສົນແລ້ວ ຈຶ່ງກະທຳຈິດຂອງຕົນໃຫ້ເຫຼື້ອມໃສ
ເມື່ອກະທຳການບູຊາພຣະຊາດກຳເນີດແລ້ວ ກໍສິ້ນຊີວິດລົງ ໃນບ່ອນນັ້ນ

[໗໖] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ໃນກຳເນີດນັ້ນ ໆ ຂ້າພະເຈົ້າເປັນໃຫຍ່ເໜືອສັບພະສັດ
ນີ້ເປັນຜົນແຫ່ງການບູຊາພຣະຊາດກຳເນີດ

[໗໗] ແມ່ນົມທັງຫຼາຍຍ່ອມບຳຣຸງຂ້າພະເຈົ້າ
ຢູ່ໃນອຳນາດຈິດຂອງຂ້າພະເຈົ້າ
ແມ່ນົມເຫຼົ່ານັ້ນບໍ່ອາດເພື່ອເຮັດໃຫ້ຂ້າພະເຈົ້າຄຽດໄດ້
ນີ້ເປັນຜົນແຫ່ງການບູຊາພຣະຊາດກຳເນີດ

[໗໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ທຳການບູຊາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະຊາດກຳເນີດ

[໗໙] ໃນກັບທີ ໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓໔ ຊາດ
ພຣະນາມວ່າ ສຸປາຣິຈະຣິຍະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໘໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຊາຕິປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຊາຕິປູຊະກະເຖຣາປະທານທີ ໑໐ ຈົບ**

**ມະຫາປະຣິວາຣະວັກທີ ໑໔ ຈົບບໍລິບູນ**

# ລວມອຸປາທານທີ່ມີໃນວັກນີ້ ຄື

໑. ມະຫາປະຣິວາຣະເຖຣາປະທານ
໒. ສະຣະນະຄະມະນິຍະເຖຣາປະທານ
໓. ສຸວັນນະປຸບຜິຍະເຖຣາປະທານ
໗. ພຸດທະສັນຍະກະເຖຣາປະທານ
໙. ປັດຈຸປັດຖານະສັນຍະກະເຖຣາປະທານ
໘. ສຸມັງຄະລະເຖຣາປະທານ
໔. ເອກາສະນິຍະເຖຣາປະທານ
໖. ຈິຕະກະປູຊະກະເຖຣາປະທານ
໘. ມັກຄະສັນຍະກະເຖຣາປະທານ
໑໐. ຊາຕິປູຊະກະເຖຣາປະທານ

ທ່ານກ່າວລວມຄາຖາໄວ້ ໙໐ ຄາຖາ ແນວນີ້ແລ

# ໑໓. ເສເຣີຍຍະກະວັກ

## ໝວດວ່າດ້ວຍພຣະເສເຣີຍຍະກະເປັນຕົ້ນ

## ໑. ເສເຣີຍຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເສເຣີຍຍະກະເຖຣະ

(ພຣະເສເຣີຍຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າເປັນຜູ້ຄົງແກ່ຮຽນ ຊົງມົນ
ຈົບໄຕຣເພດ ຢືນຢູ່ໃນທີ່ກາງແຈ້ງ
ໄດ້ເຫັນພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ນຳສັດໂລກ

[໒] ສະເດັດທ່ຽວຢູ່ໃນປ່າເໝືອນຣາດຊະສີ
ບໍ່ສະດຸ້ງຢ້ານເໝືອນພະຍາເສືອໂຄ່ງ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ເໝືອນຊ້າງມາຕັງຄະຕົກມັນ ໓ ແຫ່ງ

[໓] ຂ້າພະເຈົ້າຈັບດອກອີຮຸມປ່າ
ໂຍນຂຶ້ນໄປ (ບູຊາ) ໃນອາກາດ ດ້ວຍພຸດທານຸພາບ
ດອກອີຮຸມປ່າທັງຫຼາຍຫ້ອມລ້ອມຢູ່ໂດຍປະການທັງປວງ

[໔] ພຣະຜູ້ມີພຣະພາກເຈົ້າຜູ້ສັບພັນຍູ ຊົງມີຄວາມພຽນຫຼາຍ
ຊົງເປັນຜູ້ນຳສັດໂລກ ຊົງອະທິຖານແລ້ວ
ດອກໄມ້ທັງຫຼາຍກໍກະຈາຍເປັນເຄື່ອງມຸງບັງດອກໄມ້
ບູຊາພຣະນະຣາສະພະໂດຍຮ້ອບ

[໕] ລຳດັບນັ້ນ ແຜ່ນດອກໄມ້ນັ້ນມີກ້ານຢູ່ຂ້າງໃນ ມີໜ້າຢູ່ຂ້າງນອກ
ກະທຳການມຸງບັງຕະຫຼອດ ໗ ວັນ
ຕໍ່ແຕ່ນັ້ນກໍອັນຕະຣະທານຫາຍໄປ

[໖] ຂ້າພະເຈົ້າໄດ້ເຫັນຄວາມອັດສະຈັນເຊິ່ງບໍ່ເຄີຍມີ
ໜ້າຂົນພອງສະຫຍອງເກົ້ານັ້ນແລ້ວ
ຈຶ່ງກະທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າຜູ້ສຸຄົດ ຊົງເປັນຜູ້ນຳສັດໂລກ

[໗] ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າຖືກກຸສົນມູນຕັກເຕືອນແລ້ວ
ຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍ ຕະຫຼອດ ໑໐໐,໐໐໐ ກັບ

[໘] ໃນກັບທີ ໑,໐໑໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໘໕ ຊາດ
ມີພຣະນາມວ່າ ວິລາມາລາ ມີພະລານຸພາບຫຼາຍ

[໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເສເຣີຍຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເສເຣີຍຍະກະເຖຣາປະທານທີ ໑ ຈົບ**

# ໘. ປຸບຜະຖູປິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸບຜະຖູປິຍະເຖຣະ

(ພຣະປຸບຜະຖູປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ກຸກກຸຣະ
ພາມຜູ້ຈົບມົນ ຢູ່ໃນທ່າມກາງພູເຂົານັ້ນ

[໑໑] ສິດ ໑,໐໑໕ ຄົນ ແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ
ແລະສິດເຫຼົ່ານັ້ນ ເປັນຜູ້ລຸກຂຶ້ນກ່ອນ (ຕື່ນກ່ອນ) (ແລະນອນພາຍຫຼັງ)
ແກ່ກ້າໃນມົນທັງຫຼາຍ (ມາແຈ້ງແກ່ຂ້າພະເຈົ້າວ່າ)

[໑໘] ພຣະພຸດທະເຈົ້າ ຊົງອຸບັດຂຶ້ນແລ້ວໃນໂລກ
ຂໍທ່ານຈົ່ງຮູ້ເທີ້ນວ່າ
ພຣະອົງຊົງຈະເລີນກວ່າພວກເຮົາ
ພຣະອົງມີອະນຸພະຍັນຊະນະ ໘໐
ມີພຣະລັກສະນະອັນປະເສີດ ໓໘ ປະການ

[໑໓] ພຣະຊິນນະວອນ ມີພຣະຣັດສະໝີແຜ່ໄປຂ້າງລະໜຶ່ງວາ
ຮຸ່ງເຮືອງດັ່ງດວງອາທິດ
ພາມຜູ້ຈົບມົນ ຟັງຄຳຂອງພວກສິດດັ່ງນີ້ແລ້ວ

[໑໔] ຈຶ່ງອອກຈາກອາສົມ ຖາມເຖິງທິດກັບສິດທັງຫຼາຍວ່າ
ພຣະຜູ້ມີພຣະພາກເຈົ້າຜູ້ມີຄວາມພຽນຫຼາຍ
ຊຶ່ງເປັນຜູ້ນໍາສັດໂລກ ປະທັບຢູ່ໃນພູມິພາກໃດ

[໑໕] ຂ້າພະເຈົ້າເຫັນພູມິພາກນັ້ນແລ້ວ
ຈັກນະມັດສະການພຣະຊິນນະເຈົ້າ ຜູ້ທີ່ຫາບຸກຄົນປຽບບໍ່ໄດ້
ຂ້າພະເຈົ້າມີຈິດເບີກບານ ມີໃຈຍິນດີ
ຈຶ່ງບູຊາພຣະຕະຖາຄົດເຈົ້ານັ້ນ

[໑໖] ມາເທີ້ນສິດທັງຫຼາຍ ພວກເຮົາຈັກໄປເຝົ້າພຣະຕະຖາຄົດເຈົ້າ
ຈັກຂາບໄຫວ້ພຣະຍຸຄົນບາດຂອງພຣະສາດສະດາແລ້ວ
ຈັກຟັງຄໍາສັ່ງສອນຂອງພຣະຊິນນະເຈົ້າ

[໑໗] ຂ້າພະເຈົ້າ ອອກໄປໄດ້ວັນດຽວກໍເກີດເຈັບໄຂ້
ຖືກຄວາມເຈັບໄຂ້ບຽດບຽນ ຈຶ່ງເຂົ້າໄປນອນທີ່ສາລາ

[໑໘] ຂ້າພະເຈົ້າປະຊຸມສິດທັງໝົດແລ້ວ
ໄດ້ຖາມພວກເຂົາເຖິງພຣະຕະຖາຄົດເຈົ້າວ່າ
ພຣະຄຸນຂອງພຣະຜູ້ຊຶ່ງເປັນບ່ອນເພິ່ງຂອງສັດໂລກ
ຜູ້ມີປັນຍາເຄື່ອງຕັດສະຣູ້ຢ່າງປະເສີດ ເປັນເຊັ່ນໃດ

[໑໙] ສິດເຫຼົ່ານັ້ນຖືກຂ້າພະເຈົ້າຖາມແລ້ວໄດ້ຕອບຕາມທີ່ຕົນເຫັນມາ
ສະແດງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດນັ້ນ
ສະເພາະໜ້າຂອງຂ້າພະເຈົ້າໂດຍເຄົາລົບ

[໒໐] ຂ້າພະເຈົ້າຟັງຄໍາຂອງສິດເຫຼົ່ານັ້ນແລ້ວ
ຈຶ່ງທໍາຈິດຂອງຕົນໃຫ້ເຫຼື້ອມໃສ
ໃຊ້ດອກໄມ້ສ້າງເປັນພຣະສະຖູບແລ້ວ ໄດ້ສິ້ນຊີວິດລົງ ໃນບ່ອນນັ້ນ

[໒໑] ສິດເຫຼົ່ານັ້ນ ເຜົາຮ່າງກາຍຂອງຂ້າພະເຈົ້າແລ້ວ
ໄດ້ໄປໃນສໍານັກຂອງພຣະພຸດທະເຈົ້າ
ປະຄອງອັນຊະລີ ຖວາຍອະພິວາດພຣະສາດສະດາ

[໒໒] ຂ້າພະເຈົ້າໃຊ້ດອກໄມ້ສ້າງເປັນພຣະສະຖູບເພື່ອພຣະສຸຄົດເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໔໓] ໃນກັບທີ ໔໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າ ອັກຄີສະມະ ມີພະລານຸພາບຫຼາຍ

[໔໔] ໃນກັບທີ ໒໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໓໘ ຊາດ
ມີພຣະນາມວ່າ ກະຕາສະນະ ຊົງເປັນໃຫຍ່ໃນແຜ່ນດິນ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປຸບຜະຖູປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸບຜະຖູປິຍະເຖຣາປະທານທີ ໒ ຈົບ**

## ໓. ປາຍາສະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປາຍາສະທາຍະກະເຖຣະ

(ພຣະປາຍາສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ ກ່າວວ່າ)

[໔໖] ພຣະສໍາມາສໍາພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄໍາ
ມີພຣະລັກສະນະອັນປະເສີດ ໓໒ ປະການ
ກໍາລັງສະເດັດອອກຈາກປ່າ ມີໝູ່ພິກຂຸຫ້ອມລ້ອມ

[໔໗] ຂ້າພະເຈົ້າປະສົງຈະບູຊາຍັນ
ຈຶ່ງຕັກເຂົ້າປາຍາດໃສ່ຖາດສໍາຣິດ
ແລ້ວນ້ອມນໍາເຄື່ອງການະບູຊາເຂົ້າໄປດ້ວຍມືຕົນເອງ

[໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ສະເດັດຂຶ້ນສູ່ບ່ອນຈົງກົມໃນອາກາດເຊິ່ງເປັນທາງລົມ
[໔໙] ຂ້າພະເຈົ້າໄດ້ເຫັນຄວາມອັດສະຈັນເຊິ່ງບໍ່ເຄີຍມີ
ໜ້າຂົນພອງສະຫຍອງເກົ້ານັ້ນແລ້ວ ຈຶ່ງວາງຖາດສໍາຣິດລົງ
ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ

[໓໐] ຂາບທູນວ່າ ຂ້າແຕ່ພຣະມະຫາມຸນີ
ພຣະອົງເປັນພຣະສັບພັນຍູພຸດທະເຈົ້າໃນໂລກ
ພ້ອມທັງເທວະໂລກແລະມະນຸດໂລກ
ຂໍຈົ່ງຊົງອະນຸເຄາະຮັບເຂົ້າປາຍາດຂອງຂ້າພຣະອົງເທີ້ນ

[໓໑] ພຣະຜູ້ມີພຣະພາກເຈົ້າຜູ້ສັບພັນຍູ ຊົງເປັນຜູ້ນໍາສັດໂລກ
ເປັນສາດສະດາຜູ້ປະເສີດໃນໂລກ
ຊົງຮູ້ຄວາມດໍາຣິຂອງຂ້າພະເຈົ້າແລ້ວ ຈຶ່ງຊົງຮັບໄວ້

[໓໒] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າປາຍາດ

[໓໓] ໃນກັບທີ ໔໑ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າພຸດທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປາຍາສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປາຍາສະທາຍະກະເຖຣາປະທານທີ ໓ ຈົບ**

# ໔. ຄັນໂທທະກິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຄັນໂທທະກິຍະເຖຣະ

(ພຣະຄັນໂທທະກິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ຂ້າພະເຈົ້ານັ່ງຢູ່ໃນຜາສາດທີ່ປະເສີດ
ໄດ້ເຫັນພຣະຊິນນະເຈົ້າພຣະນາມວ່າ ວິປັດສີ
ຊົງເໝືອນຕົ້ນຣົກຟ້າທີ່ງົດງາມ
ເປັນພຣະສັບພັນຍູ ຊົງເປັນຜູ້ນໍາສູງສຸດ

[໓໖]　　ພຣະອົງຊົງເປັນຜູ້ນຳສັດໂລກ
ສະເດັດດຳເນີນໄປໃນບ່ອນບໍ່ໄກຟາສາດ
ຣັດສະໝີຂອງພຣະອົງສະຫວ່າງສະໄຫວ
ໃນເມື່ອດວງອາທິດອັດສະດົງຄົດລົງມາແລ້ວ

[໓໗]　　ຂ້າພະເຈົ້າປະຄອງນ້ຳຫອມ
ປະພົມ (ບູຊາ) ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ແລ້ວສິ້ນຊີວິດລົງ ໃນບ່ອນນັ້ນ ດ້ວຍຈິດທີ່ເຫຼື້ອມໃສນັ້ນ

[໓໘]　　ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ປະພົມນ້ຳຫອມໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໙]　　ໃນກັບທີ ໓໑ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ສຸຄັນທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໐]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄັນໂທທະກິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄັນໂທທະກິຍະເຖຣາປະທານທີ ໔ ຈົບ**

## ໕. ສຳມຸຂາຖະວິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຳມຸຂາຖະວິກະເຖຣະ

(ພຣະສຳມຸຂາຖະວິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑]　　ເມື່ອພຣະວິປັດສີໂພທິສັດປະສູດ
ຂ້າພະເຈົ້າພະຍາກອນນິມິດ ແລະ ເຮັດໝູ່ຊົນໃຫ້ເຢັນໃຈວ່າ
ພຣະໂພທິສັດນີ້ ຈັກເປັນພຣະພຸດທະເຈົ້າໃນໂລກ

[໔໔] ອັນໜຶ່ງ ເມື່ອພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ໝື່ນຈັກກະວານຍ່ອມຫວັ່ນໄຫວ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໔໑] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ໄດ້ມີແສງສະຫວ່າງເຈີດຈ້າ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໔໔] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ແມ່ນ້ຳທັງຫຼາຍບໍ່ໄຫຼ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໔໕] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ໄຟໃນອະເວຈີນະຮົກບໍ່ລຸກສະຫວ່າງແຈ້ງ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໔໖] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ໝູ່ນົກບໍ່ສັນຈອນໄປມາ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໔໗] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ກອງລົມບໍ່ພັດ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໔໘] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ຣັດຕະນະທຸກຊະນິດສ່ອງແສງໂຊດຊ່ວງ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໔໙] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະອົງໃດປະສູດ
ຊົງກ້າວພຣະບາດໄປໄດ້ ໗ ກ້າວ
ບັດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນສາດສະດາ
ຜູ້ມີພຣະຈັກຂຸ ຊົງສະແດງທຳຢູ່

[໕໐] ພຣະສຳມາສຳພຸດທະເຈົ້າພໍປະສູດແລ້ວເທົ່ານັ້ນ
ກໍຊົງຫຼຽວເບິ່ງທິດທັງປວງ ແລ້ວຊົງເປ່ງອາສະພິວາຈາ
ນີ້ເປັນທຳມະດາຂອງພຣະພຸດທະເຈົ້າທັງຫຼາຍ

[໕໑] ຂ້າພະເຈົ້າເຮັດໝູ່ຊົນໃຫ້ເກີດສັງເວດແລ້ວ ຊົມເຊີຍ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ
ແລ້ວອວ່າຍໜ້າຫຼີກໄປທາງທິດຕາເວັນອອກ

[໕໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າຊົມເຊີຍພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຊົມເຊີຍ

[໕໓] ໃນກັບທີ ໙໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ສຳມຸຂາຖະວິກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໔] ໃນກັບທີ ໘໙ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ປະຖະວິທຸນທຸພິ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໕] ໃນກັບທີ ໘໘ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ໂອພາສະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໖] ໃນກັບທີ ໘໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສະຣິຕັດເສທະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໗]　ໃນກັບທີ ໗໖ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ອັກຄິນິບພາປະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໘]　ໃນກັບທີ ໗໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ວາຕະສະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໙]　ໃນກັບທີ ໗໔ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ຄະຕິປັດເສທະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໖໐]　ໃນກັບທີ ໗໓ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ຣັດຕະນະປັດຊະລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໖໑]　ໃນກັບທີ ໗໒ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າປະທະວິກກະມະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໖໒]　ໃນກັບທີ ໗໑ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າວິໂລກະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໖໓]　ໃນກັບທີ ໗໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າຄິຣິສາຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໖໔]　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສໍາມຸຂາຖະວິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສໍາມຸຂາຖະວິກະເຖຣາປະທານທີ ໕ ຈົບ**

# ໖. ກຸສຸມາສະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກຸສຸມາສະນິຍະເຖຣະ

(ພຣະກຸສຸມາສະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໕] ຄັ້ງນັ້ນ ຂ້າພະເຈົ້າເກີດເປັນພາມຢູ່ໃນນະຄອນທັນຍະວະດີ
ເປັນຜູ້ຊ່ຽວຊານໃນຄຳພີພະຍາກອນລັກສະນະ
ຄຳພີອິຕິຫາສະ ແລະໄຕຣເພດພ້ອມດ້ວຍຄຳພີນິຄັນຖຸສາດ
ແລະຄຳພີເກຕຸພະສາດ

[໖໖] ຂ້າພະເຈົ້າເປັນຜູ້ເຂົ້າໃຈໂຕບົດ ເຂົ້າໃຈໄວຍາກອນ ສະຫຼາດໃນນິມິດ
ຈົບໄຕຣເພດບອກມົນໃຫ້ສິດທັງຫຼາຍ

[໖໗] ຂ້າພະເຈົ້າວາງດອກອຸບົນ ໕ ກຳໄວ້ເທິງຫຼັງຂອງຂ້າພະເຈົ້າ
ປະສົງຈະບູຊາຍັນ ໃນສະມາຄົມບິດາມານດາ

[໖໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຊົງອົງອາດກວ່ານໍຣະຊົນ
ມີໝູ່ພິກຂຸຫ້ອມລ້ອມສະເດັດມາເຮັດທິດທັງປວງໃຫ້ສະຫວ່າງສະໄຫວ

[໖໙] ຂ້າພະເຈົ້າປູອາສະນະແລ້ວໂຮຍດອກອຸບົນນັ້ນລົງ
ນິມົນພຣະມະຫາມຸນີ ນຳສະເດັດໄປສູ່ເຮືອນຂອງຕົນ

[໗໐] ອາມິດໃດທີ່ຂ້າພະເຈົ້າກະກຽມໄວ້ ມີຢູ່ໃນເຮືອນຂອງຕົນ
ຂ້າພະເຈົ້າເຫຼື້ອມໃສໄດ້ຖວາຍອາມິດນັ້ນແດ່ ພຣະພຸດທະເຈົ້າ
ດ້ວຍມືທັງ ໔ ຂອງຕົນ

[໗໑] ຂ້າພະເຈົ້າຮູ້ເວລາວ່າ ພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ
ຈຶ່ງໄດ້ຖວາຍດອກອຸບົນກຳໜຶ່ງ
ພຣະຜູ້ມີພຣະພາກເຈົ້າຜູ້ສັບພັນຍູຊົງອະນຸໂມທະນາແລ້ວ
ອວ່າຍພຣະພັກສະເດັດຫຼີກໄປທາງທິດເໜືອ

[໗໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍດອກໄມ້ໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກໄມ້

[໗໓] ໃນກັບທີ່ຕໍ່ຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ວະຣະທັດສະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໗໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກຸສຸມາສະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸສຸມາສະນິຍະເຖຣາປະທານທີ ໖ ຈົບ**

## ໗. ຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຜະລະທາຍະກະເຖຣະ

(ພຣະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໕] ຂ້າພະເຈົ້າເປັນຜູ້ຄົງແກ່ຮຽນ ຊົງມົນ ຈົບໄຕຣເພດ
ຢູ່ໃນອາສົມທີ່ບໍ່ໄກພູເຂົາຫິມະພານ

[໗໖] ເຄື່ອງບູຊາໄຟ ແລະເມັດບົວຂາວຂອງຂ້າພະເຈົ້າມີຢູ່
ຂອງທັງໝົດຂ້າພະເຈົ້າໃສ່ໄວ້ໃນຖາດແລ້ວ ແຂວນໄວ້ທີ່ປາຍໄມ້

[໗໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ພຣະອົງປະສົງຈະຊ່ວຍຂ້າພະເຈົ້າ
ເມື່ອຈະສະເດັດທ່ຽວບິນທະບາດ ຈຶ່ງສະເດັດເຂົ້າມາຫາຂ້າພະເຈົ້າ

[໗໘] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍເມັດບົວແດ່ ພຣະພຸດທະເຈົ້າ
ພຣະອົງຊົງເຮັດປີຕິໃຫ້ເກີດແກ່ຂ້າພະເຈົ້າ
ຊົງນຳຄວາມສຸກມາໃຫ້ໃນປັດຈຸບັນ

[໗໙] ພຣະສາດສະດາສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບຢືນຢູ່ໃນອາກາດ ໄດ້ຕັດພຣະຄາຖານີ້ ວ່າ

[໘໐] ດ້ວຍການຖວາຍເມັດບົວນີ້ ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນຄົງ
ຜູ້ນີ້ຈະບໍ່ໄປເກີດໃນທຸກຄະຕິເລີຍ ຕະຫຼອດ ໑໐໐,໐໐໐ ກັບ

[໘໑] ດ້ວຍກຸສົນມູນນັ້ນ ໆ ແລ ຂ້າພະເຈົ້າໄດ້ສະເຫວີຍສົມບັດແລ້ວ
ລະຄວາມຊະນະ ແລະ ຄວາມພ່າຍແພ້ໄດ້ແລ້ວ ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໘໔] ໃນກັບທີ ໑໐໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສຸມັງຄະລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໘໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜະລະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ຍານະສັນຍິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຍານະສັນຍິກະເຖຣະ

(ພຣະຍານະສັນຍິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໔] ຂ້າພະເຈົ້າຢູ່ໃນລະຫວ່າງພູເຂົາ ທີ່ພູເຂົາຫິມະພານ
ໄດ້ເຫັນກອງຊາຍງົດງາມແລ້ວ
ຫວນຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໘໕] ການປຽບທຽບໃນພຣະຍານບໍ່ມີ
ສິ່ງຄາມ (ຄືການປຸງແຕ່ງ) ບໍ່ມີແກ່ພຣະສາດສະດາ
ພຣະສາດສະດາຊົງຮູ້ທຳທັງປວງແລ້ວ ຕັດສິນໃຈດ້ວຍພຣະຍານ

[໗໖] ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຊົງເປັນຜູ້ສູງສຸດແຫ່ງບຸຣຸດ ຂໍນອບນ້ອມພຣະອົງ
ຜູ້ທີ່ຈະສະເໝີດ້ວຍພຣະຍານຂອງພຣະອົງບໍ່ມີ
ຕາບເທົ່າທີ່ພຣະຍານສູງສຸດຂອງພຣະອົງຍັງມີຢູ່

[໗໗] ຂ້າພະເຈົ້າທຳຈິດໃຫ້ເຫຼື້ອມໃສໃນພຣະຍານແລ້ວ
ບັນເທີງຢູ່ໃນສະຫວັນຕະຫຼອດກັບໜຶ່ງ
ໃນກັບທັງຫຼາຍທີ່ເຫຼືອ ຂ້າພະເຈົ້າກະທຳກຸສົນໄວ້ແລ້ວ

[໗໘] ໃນກັບທີ ໘໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນພຣະຍານ

[໗໙] ໃນກັບທີ ໗໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ປຸລິນະປຸບຜິຍະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໘໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຍານະສັນຍິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຍານະສັນຍິກະເຖຣາປະທານທີ ໘ ຈົບ**

## ໙. ຄັນຖິປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄັນຖິປຸບຜິຍະເຖຣະ

(ພຣະຄັນຖິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຜູ້ມີພຣະສະຫວີວັນດັ່ງຄຳ ຜູ້ສົມຄວນແກ່ທັກຂິນາ
ມີໝູ່ສາວົກຫ້ອມລ້ອມ ສະເດັດອອກຈາກອາຣາມ

[໙໔] ຂ້າພະເຈົ້າໄດ້ເຫັນພຣະສັບພັນຍູພຸດທະເຈົ້າ
ຜູ້ປະເສີດທີ່ສຸດ ຫາອາສະວະບໍ່ໄດ້
ຈຶ່ງມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ໃຊ້ພວງດອກໄມ້ບູຊາ

[໙໓] ດ້ວຍຈິດທີ່ເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່
ຂ້າພະເຈົ້າມີຈິດຮ່າເຣິງ ເບີກບານ ຖວາຍອະພິວາດພຣະຕະຖາຄົດອີກ

[໙໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໙໕] ໃນກັບທີ ໔໑ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ອະຣຸນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໙໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄັນຖີປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄັນຖີປຸບຜິຍະເຖຣາປະທານທີ ໙ ຈົບ**

## ໑໐. ປະທຸມະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະທຸມະປູຊະກະເຖຣະ

(ພຣະປະທຸມະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໗] ໃນບ່ອນບໍ່ໄກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ວ່າ ໂຄຕະມະ
ດາດດື່ນໄປດ້ວຍຕົ້ນໄມ້ນານາຊະນິດ
ເປັນບ່ອນຢູ່ຂອງໝູ່ມະຫາພູດ (ຄືຍັກ)

[໙໗] ອາສົມໄດ້ສ້າງໄວ້ໃນທ່າມກາງພູເຂົານັ້ນ
ຂ້າພະເຈົ້າມີສິດຂອງຕົນຫ້ອມລ້ອມ
ຢູ່ໃນອາສົມ (ໄດ້ກ່າວກັບສິດວ່າ)
[໙໙] ມາເທີ້ນຄະນະສິດຂອງເຮົາ ຈົ່ງນຳດອກປະທຸມມາໃຫ້ເຮົາ
ເຮົາຈັກກະທຳການບູຊາພຣະພຸດທະເຈົ້າ ແດ່ພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່
[໑໐໐] ສິດເຫຼົ່ານັ້ນຮັບຄຳທີ່ຂ້າພະເຈົ້າສັ່ງແນວນີ້ແລ້ວ
ຈຶ່ງນຳດອກປະທຸມມາໃຫ້ຂ້າພະເຈົ້າ
ຂ້າພະເຈົ້າເຮັດເຄື່ອງໝາຍຢ່າງນັ້ນແລ້ວ ຈຶ່ງບູຊາພຣະພຸດທະເຈົ້າ
[໑໐໑] ຄັ້ງນັ້ນ ຂ້າພະເຈົ້າປະຊຸມສິດທັງຫຼາຍແລ້ວ
ພ່ຳສອນເປັນຢ່າງດີວ່າ
ທ່ານທັງຫຼາຍຢ່າໄດ້ຜະໝາດເລີຍ
ຄວາມບໍ່ຜະໝາດເປັນເຫດນຳຄວາມສຸກມາໃຫ້
[໑໐໒] ຂ້າພະເຈົ້າເມື່ອພ່ຳສອນສິດທັງຫຼາຍຂອງຕົນ
ຜູ້ອົດທົນຕໍ່ຄຳສອນແນວນີ້
ປະກອບຕົນໃນຄຸນຄືຄວາມບໍ່ຜະໝາດ
ແລ້ວໄດ້ສິ້ນຊີວິດລົງໃນຄັ້ງນັ້ນ
[໑໐໓] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໑໐໔] ໃນກັບທີ ໕໑ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ທະລຸຕະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໑໐໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປະທຸມະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທຸມະປູຊະກະເຖຣາປະທານທີ ໑໐ ຈົບ**

**ເສເຣີຍຍະວັກທີ ໑໓ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ເສເຣີຍຍະກະເຖຣາປະທານ
໒. ປາຍາສະທາຍະກະເຖຣາປະທານ
໓. ສຳມຸຂາຖະວິກະເຖຣາປະທານ
໗. ຜະລະທາຍະກະເຖຣາປະທານ
໙. ຄັນຖິປຸບພິຍະເຖຣາປະທານ
໔. ປຸບຜະຖູປິຍະເຖຣາປະທານ
໕. ຄັນໂທທະກິຍະເຖຣາປະທານ
໖. ກຸສຸມາສະນິຍະເຖຣາປະທານ
໘. ຍານະສັນຍິກະເຖຣາປະທານ
໑໐. ປະທຸມະປູຊະກະເຖຣາປະທານ

**ບັນດິດຜູ້ເຫັນແຈ້ງອັດຖະຣົບໂຮມຄາຖາໄວ້ ໑໐໕ ຄາຖາ**

# ໑໔. ໂສພິຕະວັກ

## ໝວດວ່າດ້ວຍພຣະໂສພິຕະເປັນຕົ້ນ

## ໑. ໂສພິຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂສພິຕະເຖຣະ

(ພຣະໂສພິຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ຊົງສະແດງອະມະຕະບົດແກ່ໝູ່ຊົນຈຳນວນຫຼາຍຢູ່

[໒] ຄັ້ງນັ້ນ ຂ້າພະເຈົ້າໄດ້ຟັງພຣະດຳຣັດຂອງພຣະອົງ
ທີ່ເປ່ງອອກດ້ວຍອາສະພິວາຈາ ແລ້ວຈຶ່ງປະຄອງອັນຊະລີ
ເປັນຜູ້ມີຈິດມີອາລົມດຽວ (ກ່າວວ່າ)

[໓] ມະຫາສະມຸດລ້ຳເລີດກວ່າທະເລທັງຫຼາຍ
ພູເຂົາສິເນຣຸປະເສີດກວ່າພູເຂົາທັງຫຼາຍ ສັນໃດ
ຊົນເຫຼົ່າໃດເປັນໄປຕາມອຳນາດຈິດ
ຊົນເຫຼົ່ານັ້ນບໍ່ເຖິງສ່ວນໜຶ່ງແຫ່ງພຸດທະຍານ ສັນນັ້ນ

[໔] ພຣະພຸດທະເຈົ້າຊົງເປັນລືສີ
ຊົງປະກອບດ້ວຍພຣະກະລຸນາ ຊົງພັກການສະແດງທຳແລ້ວ
ປະທັບນັ່ງຢູ່ໃນທ່າມກາງໝູ່ພິກຂຸ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໔] ຜູ້ໃດສັນເສີນພຣະຍານໃນພຣະພຸດທະເຈົ້າ ຊຶ່ງເປັນຜູ້ນຳສັດໂລກ
ຜູ້ນັ້ນຈະບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໕] ຜູ້ນັ້ນຈັກເຜົາກິເລດທັງຫຼາຍໄດ້ແລ້ວ
ເປັນຜູ້ມີຈິດມີອາລົມດຽວ ມີໃຈຕັ້ງໝັ້ນ ມີນາມວ່າ ໂສພິຕະ
ເປັນສາວົກຂອງພຣະສາດສະດາ

[໖] ໃນກັບທີ ໑,໐໕໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ
ພຣະນາມວ່າ ສະມຸກຄະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວ ໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂສພິຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂສພິຕະເຖຣາປະທານທີ ໑ ຈົບ**

## ໘. ສຸທັດສະນະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸທັດສະນະເຖຣະ

(ພຣະສຸທັດສະນະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ຢູ່ໃກ້ຝັ່ງແມ່ນ້ຳອັນກວ້າງໃຫຍ່
ມີຕົ້ນລຽບກຳລັງຈໍ່ໜ່ວຍຢູ່ຫຼາຍລົ້ນ
ເມື່ອຂ້າພະເຈົ້າສະແຫວງຫາຕົ້ນໄມ້ນັ້ນ
ຈຶ່ງໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຊຶ່ງເປັນຜູ້ນຳສັດໂລກ

[໑໑] ຄັ້ງນັ້ນ ຂ້າພະເຈົ້າເຫັນຕົ້ນກາຣະເກດມີດອກບານສະພັ່ງ
ຈຶ່ງຕັດກ້ານແລ້ວ ບູຊາພຣະພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ເປັນເຜົ່າພັນຂອງໂລກ (ດ້ວຍຂາບທູນວ່າ)

[໑໔] ຂ້າແຕ່ພຣະມະຫາມຸນີພຸດທະເຈົ້າ ຜູ້ປະເສີດທີ່ສຸດ
ພຣະອົງຊົງບັນລຸອະມະຕະບົດທີ່ບໍ່ຈຸຕິດ້ວຍພຣະຍານໃດ
ຂ້າພຣະອົງຂໍບູຊາພຣະຍານນັ້ນ

[໑໓] ເມື່ອຂ້າພະເຈົ້າບູຊາພຣະຍານແລ້ວ
ຈຶ່ງໄດ້ເຫັນຕົ້ນລຽບ ຂ້າພະເຈົ້າໄດ້ປັ້ນຍານັ້ນ
ນີ້ເປັນຜົນແຫ່ງການບູຊາພຣະຍານ

[໑໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະຍານ

[໑໕] ໃນກັບທີ ໑໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໔ ຊາດ
ມີນາມຄືກັນວ່າ ພະລຸກຄະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸທັດສະນະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸທັດສະນະເຖຣາປະທານທີ ໔ ຈົບ**

## ໓. ຈັນທະນະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈັນທະນະປູຊະກະເຖຣະ

(ພຣະຈັນທະນະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງ
ກ່າວວ່າ)

[໑໗] ຄັ້ງນັ້ນ ຂ້າພະເຈົ້າເປັນກິນນະຣະ
ອາໄສຢູ່ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ມີດອກໄມ້ເປັນພັກສາ ນຸ່ງຫົ່ມດອກໄມ້

[໑໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ສະເດັດເຫາະໄປຕາມປ່າ ດັ່ງພະຍາຫົງໃນທ້ອງຟ້າ

[໑໙] (ຂ້າພະເຈົ້າຂາບທູນວ່າ) ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ ຈິດພຣະອົງບໍລິສຸດດີ
ພຣະອົງມີສີພຣະພັກຜ່ອງໃສ ມີພຣະທະໄທຜ່ອງແຜ້ວ

[໒໐] ພຣະຜູ້ມີພຣະພາກເຈົ້າຜູ້ມີປັນຍາດັ່ງແຜ່ນດິນ ມີປັນຍາດີ
ສະເດັດລົງຈາກອາກາດ ຊົງປູຜ້າສັງຄາຕິແລ້ວ ປະທັບນັ່ງຂັດສະມາທິ
[໒໑] ຂ້າພະເຈົ້າຖືແກ່ນຈັນຫອມຢ່າງລະອຽດ
ໄດ້ໄປສູ່ສຳນັກພຣະຊິນນະເຈົ້າ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ບູຊາພຣະພຸດທະເຈົ້າ
[໒໒] ຂ້າພະເຈົ້າຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ທຳຄວາມປາໂມດໃຫ້ເກີດຂຶ້ນແລ້ວ
ອວ່າຍໜ້າຫຼີກໄປທາງທິດເໜືອ
[໒໓] ໃນກັບທີ ໑໑໗ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຊ້ແກ່ນຈັນບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໒໔] ໃນກັບທີ ໑໑໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ
ພຣະນາມວ່າໂຣຫິນີ ມີພະລານຸພາບຫຼາຍ
[໒໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈັນທະນະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈັນທະນະປູຊະກະເຖຣາປະທານທີ ໓ ຈົບ**

**ພານະວານທີ ໗ ຈົບ**

# ໔. ປຸບຜະສະຕະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸບຜະສະຕະນິຍະເຖຣະ

(ພຣະປຸບຜະສະຕະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ພາມມີນາມວ່າ ສຸບັນທະ
ເປັນຜູ້ຄົງແກ່ຮຽນ ຈົບມົນ ເປັນຜູ້ຄວນແກ່ການຂໍ
ໄດ້ບູຊາຍັນຊື່ວ່າ ວາຊະເປີຍຍະ (ກ່າວຄຳອ່ອນຫວານ)

[໔໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຊົງເປັນຜູ້ເລີດ ຊົງເປັນລືສີ
ປະກອບດ້ວຍພຣະກະລຸນາ ຊົງອະນຸເຄາະໝູ່ຊົນ
ສະເດັດຈົງກົມໃນອາກາດ

[໔໘] ພຣະສຳມາສຳພຸດທະເຈົ້າຜູ້ສັບພັນຍູ
ຊົງເປັນຜູ້ນຳສັດໂລກ ບໍ່ມີອຸປະທິ
ເມື່ອສະເດັດຈົງກົມແລ້ວ
ຊົງແຜ່ເມດຕາໄປໃນໝູ່ສັດຫາປະມານບໍ່ໄດ້

[໔໙] ພາມຜູ້ຈົບມົນ ເດັດດອກໄມ້ທີ່ກ້ານແລ້ວ
ປະຊຸມສິດທັງໝົດ ໃຫ້ຊ່ອຍກັນຫວ່ານດອກໄມ້ຂຶ້ນໄປໃນອາກາດ

[໕໐] ຄັ້ງນັ້ນ ຫຼັງຄາດອກໄມ້ໄດ້ມີທົ່ວນະຄອນ
ບໍ່ຫາຍໄປຕະຫຼອດ ໗ ວັນ ດ້ວຍພຸດທານຸພາບ

[໕໑] ດ້ວຍກຸສົນມູນນັ້ນ ໆ ເອງ (ຂ້າພະເຈົ້າ) ໄດ້ສະເຫວີຍສົມບັດ
ກຳນົດຮູ້ອາສະວະທັງປວງແລ້ວ
ຂ້າມກະແສຕັນຫາທີ່ແຜ່ຊ່ານໄປໃນໂລກໄດ້ແລ້ວ

[໕໔] ໃນກັບທີ ໑໑໑ (ນັບຈາກກັບນີ້ໄປ)
ໄດ້ເປັນກະສັດຜູ້ຈັກກະພັດ ໓໕ ຊາດ
ມີພຣະນາມວ່າ ອຳພະຣັງສະ ມີພະລານຸພາບຫຼາຍ

[໕໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປຸບຜະສະຕະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

# ໕. ຣະໂຫສັນຍິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຣະໂຫສັນຍິກະເຖຣະ

(ພຣະຣະໂຫສັນຍິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ໃນບ່ອນບໍ່ໄກພູເຂົາຫິມະພານ
ມີພູເຂົາໜ່ວຍໜຶ່ງຊື່ວ່າ ວະສະພະ
ເຂົາໄດ້ສ້າງອາສົມໄວ້ສຳລັບຂ້າພະເຈົ້າທີ່ຕີນພູເຂົານັ້ນ

[໓໕] ຄັ້ງນັ້ນ ຂ້າພະເຈົ້າເປັນພາມ
ບອກມົນແກ່ສິດ ໓໐,໐໐໐ ຄົນ
ຮີບໂຮມສິດເຫຼົ່ານັ້ນແລ້ວ ເຂົ້າໄປຢູ່ໃນບ່ອນສົມຄວນແຫ່ງໜຶ່ງ
[໓໖] ຂ້າພະເຈົ້າເປັນພາມຜູ້ຈົບມົນ ນັ່ງໃນບ່ອນສົມຄວນແລ້ວ
ສະແຫວງຫາພຸດທະເວດ ກະທຳຈິດໃຫ້ເຫຼື້ອມໃສໃນພຣະຍານ
[໓໗] ຂ້າພະເຈົ້າເມື່ອທຳຈິດໃຫ້ເຫຼື້ອມໃສໃນພຣະຍານນັ້ນແລ້ວ
ນັ່ງຂັດສະມາທິຢູ່ເທິງເຄື່ອງປູໃບໄມ້ ໄດ້ສິ້ນຊີວິດລົງ ໃນບ່ອນນັ້ນ
[໓໘] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນພຣະຍານ
[໓໙] ໃນກັບທີ ໔໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດນາມວ່າ ສິຣິທະຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຣະໂຫສັນຍິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຣະໂຫສັນຍິກະເຖຣາປະທານທີ ໕ ຈົບ**

# ໙. ຈຳປະກະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈຳປະກະປຸບຜິຍະເຖຣະ

(ພຣະຈຳປະກະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ເວດສະພູ
ຜູ້ໂຊດຊ່ວງດັ່ງດອກກັນນິກາ ປະທັບນັ່ງຢູ່ລະຫວ່າງພູເຂົາ
ຊົງເຮັດທິດທັງປວງໃຫ້ສະຫວ່າງ ດັ່ງດາວປະກາຍພຶກ

[໔໒] ໄດ້ມີມານົບ ໓ ຄົນ ເປັນຜູ້ສຶກສາດີແລ້ວໃນສິນລະປະຂອງຕົນ
ຄອງບໍຣິຂານຍ່າງຕາມຫຼັງຂ້າພະເຈົ້າໄປ

[໔໓] ຂ້າພະເຈົ້າຜູ້ມີຕະບະ ໄດ້ເກັບດອກຈຳປາ ໗ ດອກໃສ່ໄວ້ໃນພາຖາດ
ຂ້າພະເຈົ້າຖືດອກໄມ້ເຫຼົ່ານັ້ນໄປບູຊາພຣະຍານ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ເວດສະພູ

[໔໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະຍານ

[໔໕] ໃນກັບທີ ໔໙ ໄດ້ເປັນພຣະເຈົ້າຈັກກະພັດນາມວ່າ ວິຫະຕາພາສະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະຈຳປະກະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈຳປະກະປຸບຜິຍະເຖຣາປະທານທີ ໙ ຈົບ**

# ໗. ອັດຖະສັນທັດສະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັດຖະສັນທັດສະກະເຖຣະ

(ພຣະອັດຖະສັນທັດສະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ຂ້າພະເຈົ້ານັ່ງຢູ່ໃນໂຮງມຸ້ງມເຄື່ອງໃຫຍ່
ໄດ້ເຫັນພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ນຳສັດໂລກ
ສິ້ນອາສະວະແລ້ວ ບັນລຸພະລະທຳ ມີໝູ່ພິກຂຸຫ້ອມລ້ອມ

[໔໘] ພິກຂຸສິງປະມານ ໑໐໐,໐໐໐ ອົງ
ບັນລຸວິດຊາ ໓ ໄດ້ອະພິນຍາ ໖ ມີລິດຫຼາຍ
ແວດລ້ອມພຣະສຳມາສຳພຸດທະເຈົ້າ
ໃຜນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໙] ການປຽບທຽບໃນພຣະຍານ
ຂອງພຣະສຳມາສຳພຸດທະເຈົ້າພຣະອົງໃດ
ບໍ່ມີໃນໂລກພ້ອມທັງເທວະໂລກ
ພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ມີພຣະຍານບໍ່ສິ້ນສຸດ
ໃຜນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໐] ອັນໜຶ່ງ ພຣະພຸດທະເຈົ້າ ຜູ້ຊົງສະແດງທຳກາຍ
ເຊິ່ງເປັນບໍ່ເກີດແຫ່ງຣັດຕະນະທັງໝົດ
ຊົນທັງຫຼາຍບໍ່ສາມາດຈະໃຫ້ກຳເຣີບໄດ້
ໃຜນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໑] ນາຣະທະພາມນັ້ນ ຊົມເຊີຍພຣະສຳມາສຳພຸດທະເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ ຜູ້ບໍ່ຊົງພ່າຍແພ້
ດ້ວຍ ໓ ຄາຖາເຫຼົ່ານີ້ແລ້ວ ໄດ້ຍ່າງໄປຂ້າງໜ້າ

[໕໒] ດ້ວຍຈິດທີ່ເຫຼື້ອມໃສແລະດ້ວຍການຊົມເຊີຍພຣະພຸດທະເຈົ້ານັ້ນ
ຂ້າພະເຈົ້າຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍ ຕະຫຼອດ ໑໐໐,໐໐໐ ກັບ

[໕໓] ໃນກັບທີ ໑໓໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສຸມິດຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັດຖະສັນທັດສະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັດຖະສັນທັດສະກະເຖຣາປະທານທີ ໗ ຈົບ**

## ໘. ເອກະຣັງສະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກະຣັງສະນິຍະເຖຣະ

(ພຣະເອກະຣັງສະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໕] ຊົນທັງຫຼາຍ ຮູ້ຈັກຂ້າພະເຈົ້າວ່າ ເກສະວະ ໂດຍຊື່ວ່າ ນາຣະທະ
ຂ້າພະເຈົ້າສະແຫວງຫາກຸສົນ ແລະ ອະກຸສົນຢູ່
ໄດ້ໄປສູ່ສຳນັກຂອງພຣະພຸດທະເຈົ້າ

[໕໖] ພຣະມະຫາມຸນີພຣະນາມວ່າ ອັດຖະທັດສີ
ມີພຣະທະໄທປະກອບດ້ວຍເມດຕາ
ປະກອບດ້ວຍພຣະກະລຸນາມີພຣະຈັກຂຸພຣະອົງນັ້ນ
ເມື່ອຈະຊົງປອບໂຍນສັດທັງຫຼາຍໃຫ້ເບົາໃຈ ຈຶ່ງຊົງສະແດງທຳ

[໕໗] ຂ້າພະເຈົ້າກະທຳຈິດຂອງຕົນໃຫ້ເຫຼື້ອມໃສແລ້ວ
ປະນົມມືໄວ້ເໜືອຫົວ
ຖວາຍອະພິວາດພຣະສາດສະດາແລ້ວ
ອວ່າຍໜ້າຫຼີກໄປທາງທິດຕາເວັນອອກ

[໕໘] ໃນກັບທີ ໑໑໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ອະມິດຕະຕາປະນະ
ຜູ້ເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໕໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະຣັງສະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະຣັງສະນິຍະເຖຣາປະທານທີ ໘ ຈົບ**

# ໗. ສາລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສາລະທາຍະກະເຖຣະ

(ພຣະສາລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໒໐] ຄັ້ງນັ້ນ ຂ້າພະເຈົ້າເກີດເປັນພະຍາໄກສອນພະຍາເນື້ອມີຊາດສູງ
ສະແຫວງຫາບໍ່ນ້ຳເທິງພູເຂົາຢູ່
ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຊຶ່ງເປັນຜູ້ນຳສັດໂລກ

[໒໑] ຂ້າພະເຈົ້າຈຶ່ງຄິດວ່າ ພຣະມະຫາວີຣະເຈົ້າພຣະອົງນີ້
ຍ່ອມເຮັດມະຫາຊົນໃຫ້ສະງົບເຢັນໄດ້
ທາງທີ່ດີເຮົາເພິ່ງເຂົ້າໄປເຝົ້າພຣະອົງ
ຜູ້ເປັນເທບຍິ່ງກວ່າເທບ ຊຶ່ງອົງອາດກວ່ານໍຣະຊົນ

[໒໔] ຂ້າພະເຈົ້າຈຶ່ງຫັກງ່າໄມ້ສາລະແລ້ວນຳດອກມາພ້ອມມັດໜຶ່ງ
ເຂົ້າໄປເຝົ້າພຣະສຳມາສຳພຸດທະເຈົ້າ
ໄດ້ຖວາຍດອກໄມ້ຊັ້ນດີເລີດ

[໒໓] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກໄມ້

[໒໔] ແລະໃນກັບທີ ໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ
ມີພຣະນາມວ່າ ວິໂຣທະນະ ມີພະລານຸພາບຫຼາຍ

[໒໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໒ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສາລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສາລະທາຍະກະເຖຣາປະທານທີ ໗ ຈົບ**

# ໑໐. ຜະລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຜະລະທາຍະກະເຖຣະ

(ພຣະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໖] ຄັ້ງນັ້ນ ຂ້າພະເຈົ້າເປັນນາຍພານທ່ຽວຂ້າສັດອື່ນເປັນຈຳນວນຫຼາຍ
ນອນຢູ່ທີ່ເງີບພູ ບໍ່ໄກພຣະສາດສະດາພຣະນາມວ່າ ສິຂີ

[໖໗] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ທັງເວລາແລງ ແລະເວລາເຊົ້າ
ແຕ່ຂ້າພະເຈົ້າບໍ່ມີໄທຍະທຳທີ່ຈະຖວາຍ
ພຣະສາດສະດາຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ຄົງທີ່

[໖໘] ຈຶ່ງໄດ້ຖືໝາກຫາດ ໄປສູ່ສຳນັກພຣະພຸດທະເຈົ້າ
ພຣະຜູ້ມີພຣະພາກເຈົ້າ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ຊົງຮັບ (ໝາກຫາດ) ໄວ້ແລ້ວ

[໖໙] ຕໍ່ຈາກນັ້ນ ຂ້າພະເຈົ້າໄດ້ຖືໝາກຫາດ
ໄປປົນນິບັດພຣະອົງຜູ້ຊົງເປັນຜູ້ນຳວິເສດ
ຂ້າພະເຈົ້າໄດ້ສິ້ນຊີວິດລົງ ໃນບ່ອນນັ້ນເອງ ດ້ວຍຈິດທີ່ເຫຼື້ອມໃສນັ້ນ

[໗໐] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກຫາດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໑] ໃນກັບທີ ໑໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ ພຣະນາມວ່າ ປິຍາລິນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໗໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜະລະທາຍະກະເຖຣາປະທານທີ ໑໐ ຈົບ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ໂສພິຕະເຖຣາປະທານ
໒. ຈັນທະນະປູຊະກະເຖຣາປະທານ
໓. ຣະໂຫສັນຍິກະເຖຣາປະທານ
໔. ອັດຖະສັນທັດສະກະເຖຣາປະທານ
໕. ສາລະທາຍະກະເຖຣາປະທານ
໖. ສຸທັດສະນະເຖຣາປະທານ
໗. ປຸບຜະສະຕະນິຍະເຖຣາປະທານ
໘. ຈຳປະກະປຸບຜິຍະເຖຣາປະທານ
໙. ເອກະຣັງສະນິຍະເຖຣາປະທານ
໑໐. ຜະລະທາຍະກະເຖຣາປະທານ

**ບັນດິດທັງຫຼາຍຮີບໂຮມຄາຖາໄວ້ ໔໒ ຄາຖາ ດັ່ງນີ້ແລ**

# ໑໕. ສັດຕະວັກ

## ໝວດວ່າດ້ວຍພຣະສັດຕະເປັນຕົ້ນ

## ໑. ອະທິສັດຕິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະທິສັດຕິຍະເຖຣະ

(ພຣະອະທິສັດຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ສູງສຸດແຫ່ງນໍຣະຊົນ ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າໃຫ້ຊ່າງເຮັດສະເວດຕະສັດເປັນຊັ້ນ ໆ ບູຊາໄວ້ທີ່ພຣະສະຖູບ

[໒] ຂ້າພະເຈົ້າໄດ້ມານະມັດສະການພຣະພຸດທະເຈົ້າ
ຊຶ່ງເປັນຜູ້ນຳສັດໂລກ ຕາມການອັນສົມຄວນ
ໄດ້ເຮັດຫຼັງຄາດອກໄມ້ບູຊາໄວ້ເໜືອສະເວດຕະສັດ

[໓] ໃນກັບທີ ໑໑໔ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຄອບຄອງເທວະສົມບັດ

ບໍ່ໄປເກີດເປັນມະນຸດເລີຍ
ນີ້ເປັນຜົນແຫ່ງການບູຊາພຣະສະຖູບ

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອະທິສັດຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະທິສັດຕິຍະເຖຣາປະທານທີ ໑ ຈົບ**

# ໔. ຖໍາພາໂຣປະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຖໍາພາໂຣປະກະເຖຣະ

(ພຣະຖໍາພາໂຣປະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕] ເມື່ອພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນບ່ອນເພິ່ງ
ຂອງສັດໂລກພຣະນາມວ່າ ທໍາມະທັດສີ
ຊົງອົງອາດກວ່ານໍຣະຊົນ ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ຍົກເສົາທຸງຂຶ້ນໄວ້
ທີ່ເຈດີຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໖] ຂ້າພະເຈົ້າໃຫ້ນາຍຊ່າງສ້າງຂັ້ນໄດ
ແລ້ວຂຶ້ນສູ່ພຣະສະຖູບທີ່ປະເສີດ
ໄດ້ຖືດອກມະລິໄປບູຊາທີ່ພຣະສະຖູບ

[໗] ຊ່າງໜ້າອັດສະຈັນ ພຣະພຸດທະເຈົ້າທັງຫຼາຍ
ຊ່າງໜ້າອັດສະຈັນ ພຣະທໍາທັງຫຼາຍ
ຊ່າງໜ້າອັດສະຈັນ ການທີ່ຂ້າພະເຈົ້າໄດ້ມາພົບພໍ້ພຣະສາດສະດາ
ຂ້າພະເຈົ້າ ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະສະຖູບ
[໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີພຣະນາມວ່າ ຖູປະສິຂະ ມີພະລານຸພາບຫຼາຍ

[໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຖໍາພາໂຣປະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຖໍາພາໂຣປະກະເຖຣາປະທານທີ ໔ ຈົບ**

## ໕. ເວທິກາຣະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເວທິກາຣະກະເຖຣະ

(ພຣະເວທິກາຣະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ເມື່ອພຣະຜູ້ມີພຣະພາກເຈົ້າ ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ພຣະນາມວ່າ ປິຍະທັດສີ ຊົງເປັນຜູ້ສູງສຸດແຫ່ງນໍຣະຊົນ
ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ທໍາແທ່ນສໍາລັບບູຊາພຣະພຸດທະເຈົ້າ

[໑໑] ຂ້າພະເຈົ້າໃຫ້ປະດັບລ້ອມໄວ້ດ້ວຍແກ້ວມະນີແລ້ວ
ໄດ້ກ່າວສັນເສີນພຣະພຸດທະເຈົ້າຜູ້ສູງສຸດ
ທໍາການສະຫຼອງແທ່ນສໍາລັບບູຊາແລ້ວ
ກໍໄດ້ສິ້ນຊີວິດລົງ ໃນບ່ອນນັ້ນເອງ

[໑໔] ຂ້າພະເຈົ້າເກີດໃນກໍາເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກໍາເນີດນັ້ນ ໆ ເທວະດາທັງຫຼາຍ ຍ່ອມຊົງແກ້ວມະນີໄວ້ໃນອາກາດ
ນີ້ເປັນຜົນແຫ່ງບຸນກໍາ

[໑໕] ໃນກັບທີ ໑໑໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໕໔ ຊາດ
ມີພຣະນາມວ່າ ມະນີປະພາ ມີພະລານຸພາບຫຼາຍ
[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເວຫິກາຣະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເວຫິກາຣະກະເຖຣາປະທານທີ ໓ ຈົບ**

# ໔. ສະປະຣິວາຣິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະປະຣິວາຣິຍະເຖຣະ

(ພຣະສະປະຣິວາຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ພຣະຊິນນະສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ຮຸ່ງເຮືອງດັ່ງກອງໄຟສະເດັດດັບຂັນທະປະຣິນິບພານແລ້ວ

[໑໖] ກໍເມື່ອພຣະມະຫາວີຣະເຈົ້າສະເດັດດັບຂັນທະປະຣິນິບພານແລ້ວ
ໄດ້ມີພຣະສະຖູບທີ່ກວ້າງໃຫຍ່
ຊົນທັງຫຼາຍບຳຣຸງຮັກສາສິ່ງຂອງທີ່ຈະເພິ່ງຖວາຍພຣະສະຖູບ
ໃນຫ້ອງພຣະທາດເຊິ່ງປະເສີດທີ່ສຸດ

[໑໗] ຄັ້ງນັ້ນ ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ເຮັດແທ່ນບູຊາດ້ວຍໄມ້ຈັນ
ຖວາຍທູບ ແລະ ຂອງຫອມທີ່ສົມຄວນແກ່ພຣະສະຖູບ

[໑໘] ຂ້າພະເຈົ້າເມື່ອເກີດໃນພົບໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນພົບນັ້ນ ໆ ບໍ່ເຫັນຄວາມຕ່ຳຕ້ອຍຂອງຕົນເລີຍ
ນີ້ເປັນຜົນແຫ່ງບຸບພະກຳ

[໑໙] ໃນກັບທີ ໑໑໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໘ ຊາດ
ມີພຣະນາມວ່າ ສະມັດຕະ ມີພະລານຸພາບຫຼາຍ

[໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະປະຣິວາຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະປະຣິວາຣິຍະເຖຣາປະທານທີ ໔ ຈົບ**

# ໕. ອຸມາປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸມາປຸບຜິຍະເຖຣະ

(ພຣະອຸມາປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ອັນຊາວໂລກບູຊາ ຜູ້ສົມຄວນຮັບເຄື່ອງບູຊາ
ສະເດັດດັບຂັນທະປະຣິນິບພານແລ້ວ
ໄດ້ມີການສະຫຼອງພຣະມະຫາສະຖູບ

[໔໒] ເມື່ອງານສະຫຼອງພຣະສະຖູບ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ກຳລັງດຳເນີນໄປຢູ່
ຂ້າພະເຈົ້າໄດ້ຖືດອກຝ້າຍໄປບູຊາທີ່ພຣະສະຖູບ

[໔໓] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໔໔] ໃນກັບທີ ໙ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗໕ ຊາດ
ມີພຣະນາມວ່າ ໂສມະເທບ ມີພະລານຸພາບຫຼາຍ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸມາປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸມາປຸບຜິຍະເຖຣາປະທານທີ ໕ ຈົບ**

# ໖. ອະນຸໂລມະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະນຸໂລມະທາຍະກະເຖຣະ

(ພຣະອະນຸໂລມະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຂອງຕົນ ຈຶ່ງກ່າວວ່າ)

[໔໖] ຂ້າພະເຈົ້າໄດ້ເຮັດແທ່ນບູຊາທີ່ຕົ້ນໂພຂອງພຣະມຸນີພຣະນາມວ່າ ອະໂນມະທັດສີ
ຂ້າພະເຈົ້າໃສ່ກ້ອນປູນຂາວແລ້ວລູບໃຫ້ກ້ຽງດ້ວຍມື (ຂອງຕົນເອງ)

[໔໗] ພຣະສາດສະດາພຣະນາມວ່າ ອະໂນມະທັດສີ ຜູ້ສູງສຸດແຫ່ງນໍຣະຊົນ
ທອດພຣະເນດເຫັນກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີນັ້ນ
ປະທັບຢືນຢູ່ໃນທ່າມກາງໝູ່ພິກຂຸ ໄດ້ຕັດພຣະຄາຖານີ້ວ່າ

[໔໘] ດ້ວຍຜົນກຳຄືການສາບທາດ້ວຍປູນຂາວນີ້
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຜູ້ນີ້ຈັກໄດ້ສະເຫວີຍສົມບັດແລ້ວເຮັດບ່ອນສຸດທຸກໄດ້

[໔໙] ຂ້າພະເຈົ້າເປັນຜູ້ມີສີໜ້າຜ່ອງໃສ
ເປັນຜູ້ມີຈິດມີອາລົມດຽວ ມີໃຈຕັ້ງໝັ້ນດ້ວຍດີ
ຊົງຮ່າງກາຍອັນມີໃນພົບສຸດທ້າຍຢູ່
ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໕໐] ໃນກັບທີ ໑໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສຳປັດສະນະ
ບໍລິບູນ ບໍ່ບົກຜ່ອງ ມີພະລານຸພາບຫຼາຍ

[໕໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອະນຸໂລມະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະນຸໂລມະທາຍະກະເຖຣາປະທານທີ ໖ ຈົບ**

# ๓. มักคะทายะกะเถราปะทาน

## ปะหวัดในอะดีดชาดของพระมักคะทายะกะเถระ

(พระมักคะทายะกะเถระ เมื่อจะปะกาดปะหวัดในอะดีดชาดของตึน จึ่งก่าวว่า)

[๑๔] พระสำมาสำพุดทะเจ้า ผู้มีพระจักขุ
สะเด็ดข้ามแม่น้ำแล้วดำเนินไปสู่ป่า
ข้าพะเจ้าได้เห็นพระสำมาสำพุดทะเจ้าพระนามว่า สิดทัดถะ
มีพระลักสะนะอันปะเสີດพระอົງນັ້ນ

[๑๑] ข้าพะเจ้าจึ่งถືຈົກແລະກະຕ່າມາ
ປັບຫົນທາງນັ້ນໃຫ້ຮາບພຽງ
ຖວາຍອະພິວາດພຣະສາດສະດາແລ້ວ ກະທຳຈິດຂອງຕົນໃຫ້ເຫຼື້ອມໃສ

[໑໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການເຮັດທາງຖວາຍ

[໑໕] ໃນກັບທີ ໕໓ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງມີພຣະນາມວ່າ ສຸບປະພຸດທະ
ຜູ້ເປັນໃຫຍ່ໃນໝູ່ຊົນ ເປັນຜູ້ນຳ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມັກຄະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມັກຄະທາຍະກະເຖຣາປະທານທີ ໓ ຈົບ**

## ໗. ຜະລະກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຜະລະກະທາຍະກະເຖຣະ

(ພຣະຜະລະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗] ເມື່ອກ່ອນຂ້າພະເຈົ້າເປັນນາຍຊ່າງເຮັດຍານພາຫະນະ
ເປັນຜູ້ສຶກສາດີໃນວຽກງານຂອງຊ່າງໄມ້
ໄດ້ໃຊ້ໄມ້ຈັນເຮັດເປັນແຜ່ນແປ້ນ
ແລ້ວຖວາຍພຣະສຳມາສຳພຸດທະເຈົ້າ ຜູ້ເປັນເຜົ່າພັນຂອງໂລກ

[໓໘] ວິມານຄຳທີ່ບຸນກຳເນຣະມິດດີແລ້ວນີ້ ສ່ອງແສງສະຫວ່າງສະໄຫວ
ຍານຄືຊ້າງ ຍານຄືມ້າ ເຊິ່ງເປັນຍານທິບ ໄດ້ຜາກົດແກ່ຂ້າພະເຈົ້າ

[໓໙] ຜາສາດ ວໍ ແລະແກ້ວ ປະມານບໍ່ໄດ້
ບັງເກີດແກ່ຂ້າພະເຈົ້າຕາມປາຖະໜາ
ນີ້ເປັນຜົນແຫ່ງການຖວາຍແຜ່ນແປ້ນ

[໔໐] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍແຜ່ນແປ້ນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍແຜ່ນແປ້ນ

[໔໑] ໃນກັບທີ ໕໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ພຣະນາມວ່າ ພະວະນິມະມິຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຜະລະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜະລະກະທາຍະກະເຖຣາປະທານທີ ໗ ຈົບ**

# ໙. ວະສະກິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະວະສະກິຍະເຖຣະ

(ພຣະວະສະກິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສະຍຳພູ
ຜູ້ບໍ່ຊົງພ່າຍແພ້ ພຣະນາມວ່າ ສຸເມທະ
ເມື່ອຈະຊົງພອກພູນວິເວກຈຶ່ງສະເດັດເຂົ້າປ່າໃຫຍ່

[໔໔] ຂ້າພະເຈົ້າເຫັນດອກຊ້າງນ້າວບານສະພັ່ງ
ຈຶ່ງນຳມາຮ້ອຍເປັນພວງມາໄລ
ບູຊາພຣະສຳມາສຳພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ສະເພາະພຣະພັກຂອງພຸດທະເຈົ້າ

[໔໕] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] ໃນກັບທີ ໑໑໙ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ພຣະນາມວ່າ ນິມະມິຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະວະສະກິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວະສະກິຍະເຖຣາປະທານທີ ໙ ຈົບ**

# ໑໐. ປັນລັງກະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັນລັງກະທາຍະກະເຖຣະ

(ພຣະປັນລັງກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ຂ້າພະເຈົ້າໄດ້ຖວາຍບັນລັງພ້ອມທັງເພດານ ແລະ ຜ້າຄຸມ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສຸເມທະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໔໙] ຄັ້ງນັ້ນ ບັນລັງນັ້ນສົມບູນດ້ວຍຣັດຕະນະ ໗ ປະການ
ດັ່ງຈະຮູ້ຄວາມຄິດຂອງຂ້າພະເຈົ້າ
ຈຶ່ງໄດ້ບັງເກີດແກ່ຂ້າພະເຈົ້າທຸກເມື່ອ

[໕໐] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍບັນລັງໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບັນລັງ

[໕໑] ໃນກັບທີ ໒໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ
ພຣະນາມວ່າ ສຸວະຣະນະນາພະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັນລັງກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນລັງກະທາຍະກະເຖຣາປະທານທີ ໑໐ ຈົບ**

**ສັດຕະວັກທີ ໑໕ ຈົບບໍລິບູນ**

## ລວມອະປາທານທີ່ມີໃນວັກນີ້ ຄື

໑. ອະທິສັດຕິຍະເຖຣາປະທານ
໒. ເວທິກາຣະກະເຖຣາປະທານ
໓. ອຸມາປຸບຜິຍະເຖຣາປະທານ
໗. ມັກຄະທາຍະກະເຖຣາປະທານ
໙. ວະສະກິຍະເຖຣາປະທານ
໔. ຖຳພາໂຣປະກະເຖຣາປະທານ
໕. ສະປະຣິວາຣິຍະເຖຣາປະທານ
໖. ອະນຸໂລມະທາຍະກະເຖຣາປະທານ
໘. ຜະລະກະທາຍະກະເຖຣາປະທານ
໑໐. ປັນລັງກະທາຍະກະເຖຣາປະທານ

ບັນດິດປະກາດຄາຖາໄວ້ ໕໔ ຄາຖາ

# ໑໖. ພັນທຸຊີວະກະວັກ

## ໝວດວ່າດ້ວຍພຣະພັນທຸຊີວະກະເປັນຕົ້ນ

## ໑. ພັນທຸຊີວະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະພັນທຸຊີວະກະເຖຣະ

(ພຣະພັນທຸຊີວະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະສຳມາສຳພຸດທະເຈົ້າ ຜູ້ປາສະຈາກມົນທິນ
ບໍລິສຸດ ຜ່ອງໃສ ບໍ່ຂຸ່ນມົວດັ່ງດວງຈັນ
ສິ້ນຄວາມເພີດເພີນໃນພົບແລ້ວ
ຊົງຂ້າມຕັນຫາທີ່ແຜ່ຊ່ານໄປໃນໂລກໄດ້ແລ້ວ

[໔] ຊົງຊ່ອຍໝູ່ຊົນໃຫ້ສະງົບເຢັນ ຊົງຂ້າມເອງແລ້ວ
ພາໝູ່ຊົນໃຫ້ຂ້າມ ຊົງເປັນພຣະມຸນີ ເຂົ້າຊານຢູ່ໃນປ່າ
ເປັນຜູ້ມີຈິດມີອາລົມດຽວ
ມີພຣະຫະໄທຕັ້ງໝັ້ນດ້ວຍດີ

[໓] ຂ້າພະເຈົ້າໃຊ້ດ້າຍຮ້ອຍດອກຊະບາແລ້ວບູຊາ
ພຣະພຸດທະເຈົ້າພຣະນາມວ່າສິຂີ ພຣະອົງນັ້ນ
ຜູ້ເປັນເຜົ່າພັນຂອງໂລກ

[໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕] ໃນກັບທີ ໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສະມັນຕະຈັກຂຸ
ເປັນຈອມມະນຸດ ມີຍົດໃຫຍ່ ມີພະລານຸພາບຫຼາຍ

[໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພັນທຸຊີວະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

## ໔. ຕັບພະປຸບຜີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕັບພະປຸບຜີຍະເຖຣະ

(ພຣະຕັບພະປຸບຜີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗] ຂ້າພະເຈົ້າເປັນຜູ້ຂວນຂວາຍໃນການງານຂອງບຸກຄົນອື່ນ
ໄດ້ທຳຄວາມຜິດໄວ້ແລ້ວ ປະສົບໄພເວນ ຈຶ່ງແລ່ນໜີໄປຕາມປ່າ

[໘] ຂ້າພະເຈົ້າໄດ້ເຫັນຕົ້ນໄມ້ມີດອກເປັນພວງ
ບານສະພັ່ງທີ່ທຳມະຊາດສ້າງໄວ້
ຈຶ່ງຖືດອກແດງ ໆ ໄປໂຮຍລົງໃສ່ຕົ້ນໂພ

[໙] ຂ້າພະເຈົ້າໄດ້ປັດກວາດຕົ້ນແຄຝອຍ
ເຊິ່ງເປັນຕົ້ນໄມ້ເປັນບ່ອນຕັດສະຮູ້ທີ່ປະເສີດນັ້ນແລ້ວ
ເຂົ້າໄປນັ່ງຂັດສະມາທິຢູ່ເຫງົ້າຕົ້ນໂພ

[໑໐] ຊົນທັງຫຼາຍສະແຫວງຫາທາງໄປຢູ່ ໄດ້ມາສູ່ສຳນັກຂອງຂ້າພະເຈົ້າ
ແລະຂ້າພະເຈົ້າເຫັນຊົນເຫຼົ່ານັ້ນ ໃນບ່ອນນັ້ນແລ້ວ
ຣະລຶກເຖິງຕົ້ນໂພທີ່ປະເສີດ

[໑໑] ຂ້າພະເຈົ້າມີຈິດຜ່ອງໃສ ໄຫວ້ຕົ້ນໂພແລ້ວ
ຕົກລົງໄປໃນເຫວທີ່ເປັນຕາຢ້ານ ເລີກຫຼາຍຊົ່ວລຳຕານ

[໑໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຕົ້ນໂພ

[໑໓] ໃນກັບທີ ໖ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສຸສັນຍະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕັບພະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕັບພະປຸບຜິຍະເຖຣາປະທານທີ ໔ ຈົບ**

## ໖. ວິຖີສຳມັດຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວິຖີສຳມັດຊະກະເຖຣະ

(ພຣະວິຖີສຳມັດຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ພຣະສຳມາສຳພຸດທະເຈົ້າ ຜູ້ຊົງເປັນຜູ້ນຳສັດໂລກ
ມີພຣະຣັດສະໝີຮຸ່ງເຮືອງດັ່ງດວງອາທິດອຸໄທ ແລະເໝືອນດວງຈັນ
ສະເດັດດຳເນີນໄປດັ່ງດວງຈັນໃນວັນເພັງ

[໑໖] ພິກຂຸສົງປະມານ ໖໘,໐໐໐ ອົງ
ລ້ວນເປັນພຣະຂີນາສົບ ແວດລ້ອມພຣະສຳມາສຳພຸດທະເຈົ້າ
ພຣະອົງນັ້ນ ຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຊົງອົງອາດກວ່ານໍຣະຊົນ

[໑໗] ເມື່ອພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ນຳສັດໂລກ ສະເດັດດຳເນີນໄປ

ຂ້າພະເຈົ້າມີຈິດຜ່ອງໃສ ຈຶ່ງກວາດຖະໜົນນັ້ນ
ແລ້ວໄດ້ຍົກທຸງຂຶ້ນຢູ່ຖະໜົນນັ້ນ

[໑໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ທຸງບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຍົກທຸງ (ຖວາຍບູຊາ)

[໑໘] ໃນກັບທີ ໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະຣາຊາຜາກິດພຣະນາມວ່າ ສຸທະຊະ
ສົມບູນດ້ວຍອາການທຸກຢ່າງ ມີພະລານຸພາບຫຼາຍ

[໔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະວິຖີສຳມັດຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວິຖີສຳມັດຊະກະເຖຣາປະທານທີ ໓ ຈົບ**

# ໔. ກັກກາຣຸປຸບຜະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກັກກາຣຸປຸບຜະປູຊະກະເຖຣະ

(ພຣະກັກກາຣຸປຸບຜະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໔໑] ຂ້າພະເຈົ້າເປັນເທບພະບຸດ ບູຊາພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິຂີ
ຜູ້ຊົງເປັນຜູ້ນຳ ໄດ້ປະຄອງດອກຟັກທິບ
ບູຊາພຣະພຸດທະເຈົ້າພຣະອົງນັ້ນ

[໔໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] ແລະໃນກັບທີ ໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສັດຕຸຕະທະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກັກກາຣຸປຸບຜະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກັກກາຣຸປຸບຜະປູຊະກະເຖຣາປະທານທີ ໔ ຈົບ**

# ໕. ມັນທາຣະວະປຸບຜະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມັນທາຣະວະປຸບຜະປູຊະກະເຖຣະ

(ພຣະມັນທາຣະວະປຸບຜະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງ
ຕົນ ຈຶ່ງກ່າວວ່າ)

[໔໕] ຂ້າພະເຈົ້າເປັນເທບພະບຸດ ບູຊາພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິຂີ
ຜູ້ຊົງເປັນຜູ້ນຳ ໄດ້ບູຊາພຣະພຸດທະເຈົ້າພຣະອົງນັ້ນ
ດ້ວຍດອກມົນທາຣົບ

[໔໖] ພວງມາໄລທິບໄດ້ເປັນຫຼັງຄາ
ຢູ່ເໜືອພຣະຕະຖາຄົດເຈົ້າຕະຫຼອດ ໗ ວັນ
ປະຊາຊົນທັງປວງມາປະຊຸມກັນນະມັດສະການພຣະຕະຖາຄົດ

[໔໗] ໃນກັບທີ ໖໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໘] ແລະໃນກັບທີ ໑໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ຊຸຕິນທະຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະມັນທາຣະວະປຸບຜະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມັນທາຣະວະປຸບຜະປູຊະກະເຖຣາປະທານທີ ໕ ຈົບ**

## ໖. ກະທຳພະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກະທຳພະປຸບຜິຍະເຖຣະ

(ພຣະກະທຳພະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູເຂົາໜ່ວຍໜຶ່ງຊື່ວ່າ ກຸກກຸຕະ
ມີພຸດທະ ໗ ພຣະອົງອາໄສຢູ່ທີ່ເຊີງພູເຂົານັ້ນ

[໕໑] ຂ້າພະເຈົ້າເຫັນຕົ້ນກະທຸ່ມມີດອກບານສະພັ່ງ
ດັ່ງດວງຈັນລອຍເດັ່ນ (ໃນທ້ອງຟ້າ)
ຈຶ່ງໃຊ້ມືທັງ ໒ ປະຄອງ ໂຮຍບູຊາພຸດທະທັງ ໗ ອົງ

[໕໒] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຸດທະ

[໕໓] ໃນກັບທີ ໙໒ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ພຣະອົງ
ມີນາມຄືກັນວ່າ ປຸບຜະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກະທຳພະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກະທຳພະປຸບຜິຍະເຖຣາປະທານທີ ໖ ຈົບ**

## ໗. ຕິນະສູລະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິນະສູລະກະເຖຣະ

(ພຣະຕິນະສູລະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ວ່າ ພູຕະຄະນະ
ພຣະສະຍໍາພູຊິນນະເຈົ້າອົງໜຶ່ງ
ຜູ້ສະລະໂລກແລ້ວ ອາໄສຢູ່ທີ່ພູເຂົານັ້ນ

[໓໖] ຂ້າພະເຈົ້າຖືດອກມະລິຊ້ອນໄປບູຊາພຣະພຸດທະເຈົ້າພຣະອົງນັ້ນ
ຂ້າພະເຈົ້າຈຶ່ງບໍ່ຕົກວິນິບາດນະຣົກຕະຫຼອດ ໗໐,໐໐໐ ກັບ

[໓໗] ໃນກັບທີ ໑໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ທໍຣະນິຣຸທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິນະສູລະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ຕິນະສູລະກະເຖຣາປະທານທີ ໗ ຈົບ**

## ໘. ນາຄະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນາຄະປຸບຜິຍະເຖຣະ

(ພຣະນາຄະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໙] (ຂ້າພະເຈົ້າເປັນ) ພານມີນາມວ່າ ສຸວັດສະ ຜູ້ຈົບມົນ
ມີພວກສິດຂອງຕົນຫ້ອມລ້ອມ ອາໄສຢູ່ລະຫວ່າງພູເຂົາ

[໔໐] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ສົມຄວນຮັບເຄື່ອງບູຊາ
ພຣະອົງຊົງປະສົງຈະຊ່ອຍຂ້າພະເຈົ້າ (ຈາກສັງສາຣະວັດ)
ຈຶ່ງສະເດັດມາຍັງສໍານັກຂອງຂ້າພະເຈົ້າ

[໔໑] ພຣະອົງສະເດັດຈົງກົມຢູ່ໃນອາກາດ
ເໝືອນປະທີບທີ່ກຳລັງລຸກສະຫວ່າງແຈ້ງ
ຊົງຮູ້ຄວາມຣ່າເຣີງຂອງຂ້າພະເຈົ້າແລ້ວ
ອວ່າຍພຣະພັກສະເດັດຫຼີກໄປທາງທິດຕາເວັນອອກ

[໔໘] ຂ້າພະເຈົ້າໄດ້ເຫັນຄວາມອັດສະຈັນເຊິ່ງບໍ່ເຄີຍມີ
ໜ້າຂົນພອງສະຫຍອງເກົ້ານັ້ນແລ້ວ
ຈຶ່ງເກັບເອົາດອກກາກະທິງໄປໂຣຍລົງໃສ່ທາງສະເດັດໄປ

[໔໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໂຣຍດອກໄມ້ໄວ້ ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຂ້າພະເຈົ້າຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍ

[໔໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ມະຫາຣະຖະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນາຄະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນາຄະປຸບພິຍະເຖຣາປະທານທີ ໘ ຈົບ**

# ໙. ປຸນນາຄະປຸບພິຍະເຖຣະປະທານ

## ປະຫວັດໃນອະດີດຊາດຂອງພຣະປຸນນາຄະປຸບພິຍະເຖຣະ

(ພຣະປຸນນາຄະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ຂ້າພະເຈົ້າເປັນນາຍພານ ເຂົ້າໄປສູ່ປ່າດົງທຶບອາໄສຢູ່
ໄດ້ເຫັນດອກບຸນນາກບານສະພັ່ງ
ຈຶ່ງຫວນຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
[໔໗] ຈຶ່ງເລືອກເກັບດອກບຸນນາກນັ້ນ ເຊິ່ງມີກິ່ນຫອມຍິ່ງນັກແລ້ວ
ກໍ່ສະຖູບທີ່ກອງຊາຍ ບູຊາພຣະພຸດທະເຈົ້າ

[໔໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໙] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າຕະໂມນຸທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປຸນນາຄະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸນນາຄະປຸບຜິຍະເຖຣະປະທານທີ ໙ ຈົບ**

## ໑໐. ກຸມຸທະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸມຸທະທາຍະກະເຖຣະ

(ພຣະກຸມຸທະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ໃນບ່ອນບໍ່ໄກພູເຂົາຫິມະພານ
ໄດ້ມີສະນ້ຳໃຫຍ່ເກີດເອງຕາມທຳມະຊາດ
ເດຍລະດາດດ້ວຍດອກປະທຸມ ແລະດອກອຸບົນ
ສະພັ່ງໄປດ້ວຍດອກບຸນທະຣິກ

[໕໒] ຄັ້ງນັ້ນ ຂ້າພະເຈົ້າເກີດເປັນນົກມີນາມວ່າ ກຸກກຸຕະ ເປັນສັດມີສິນ
ສົມບູນດ້ວຍວັດ ສະຫຼາດໃນບຸນ ແລະບໍ່ແມ່ນບຸນ ອາໄສຢູ່ໃກ້ສະນັ້ນ
[໕໓] ພຣະມະຫາມຸນີພຣະນາມວ່າປະທຸມຸດຕະຣະ ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ສະເດັດຈາຣິກໄປໃນບ່ອນບໍ່ໄກສະນັ້ນ
[໕໔] ຂ້າພະເຈົ້າຫັກດອກໂກມຸດເຊິ່ງເກີດໃນນ້ຳແລ້ວ ນ້ອມເຂົ້າໄປຖວາຍ
ພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຜູ້ພຣະມະຫາມຸນີ ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ ຈຶ່ງຊົງຮັບໄວ້

[໕໕] ຂ້າພະເຈົ້າເມື່ອຖວາຍທານນັ້ນແລ້ວ ຖືກກຸສົນມູນຕັກເຕືອນແລ້ວ
ຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໕໖] ໃນກັບທີ ໑໑໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ
ມີພຣະນາມວ່າ ອະຣຸນະ ມີພະລານຸພາບຫຼາຍ

[໕໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກຸມຸທະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸມຸທະທາຍະກະເຖຣາປະທານທີ ໑໐ ຈົບ**

**ພັນທຸຊີວະກະວັກທີ ໑໖ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ພັນທຸຊີວະກະເຖຣາປະທານ
໒. ວິຖີສຳມັດຊະກະເຖຣາປະທານ
໕. ມັນທາຣະວະປຸບຜະປູຊະກະເຖຣາປະທານ
໗. ຕິນະສູລະກະເຖຣາປະທານ
໙. ປຸນນາຄະປຸບພິຍະເຖຣະປະທານ
໘. ຕັບພະປຸບພິຍະເຖຣາປະທານ
໔. ກັກກາຣຸປຸບຜະປູຊະກະເຖຣາປະທານ
໖. ກະທຳພະປຸບພິຍະເຖຣາປະທານ
໗. ນາຄະປຸບພິຍະເຖຣາປະທານ
໑໐. ກຸມຸທະທາຍະກະເຖຣາປະທານ

**ບັນດິດກ່າວຄາຖາໄວ້ ໕໖ ຄາຖາ**

# ໑໗. ສຸປາຣິຈະຣິຍະວັກ

## ໝວດວ່າດ້ວຍພຣະສຸປາຣິຈະຣິຍະເປັນຕົ້ນ

## ໑. ສຸປາຣິຈະຣິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸປາຣິຈະຣິຍະເຖຣະ

(ພຣະສຸປາຣິຈະຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມະ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຊົງອົງອາດກວ່ານໍຣະຊົນ
ຊົງມີພຣະຈັກຂຸ ສະເດັດອອກຈາກປ່າໃຫຍ່ແລ້ວ ຊົງສະແດງທຳຢູ່

[໒] ເທວະດາໄດ້ປະຊຸມກັນໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໃນຂະນະນັ້ນ ເທວະດາທັງຫຼາຍມາປະຊຸມກັນ
ດ້ວຍກິດບາງຢ່າງ ໄດ້ເພ່ງແນມເບິ່ງ

[໓] ກໍຂ້າພະເຈົ້າໄດ້ຮູ້ພຣະດຳຣັດ ທີ່ສະແດງອະມະຕະທຳຂອງພຣະພຸດທະເຈົ້າ
ກໍມີຈິດເຫຼື້ອມໃສ ມີໃຈຍິນດີ ຕົບມືແລ້ວຈຶ່ງເຂົ້າໄປບຳຣຸງ

[໔] ຂ້າພະເຈົ້າເຫັນຜົນແຫ່ງການບຳຣຸງພຣະສາດສະດາ
ທີ່ຂ້າພະເຈົ້າປະພຶດດີແລ້ວ ໃນ ໓໐,໐໐໐ ກັບ
ຂ້າພະເຈົ້າຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍ

[໕] ໃນກັບທີ ໑໔໙ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ສະມະລັງກະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸປາຣິຈະຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸປາຣິຈະຣິຍະເຖຣາປະທານທີ ໑ ຈົບ**

# ໔. ກະນະເວຣະປຸບພິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກະນະເວຣະປຸບພິຍະເຖຣະ

(ພຣະກະນະເວຣະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ມີໝູ່ສາວົກຫ້ອມລ້ອມ
ສະເດັດດຳເນີນໄປສູ່ນະຄອນ

[໘] ຂ້າພະເຈົ້າໄດ້ຮັບແຕ່ງຕັ້ງໃຫ້ເປັນຜູ້ຄຸ້ມຄອງພາຍໃນພຣະຣາດຊະວັງ
ຈຶ່ງເຂົ້າໄປໃນຜາສາດ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ

[໙] ຂ້າພະເຈົ້າຈຶ່ງຖືດອກຍີ່ໂຖໄປໂຮຍລົງໃນທ່າມກາງໝູ່ພິກຂຸ
ແບ່ງໂຮຍລົງສຳລັບພຣະພຸດທະເຈົ້າຍິ່ງກວ່ານັ້ນ

[໑໐] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໑] ໃນກັບທີ ໘໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ພຣະນາມວ່າ ມະຫິດທິກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກະນະເວຣະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກະນະເວຣະປຸບພິຍະເຖຣາປະທານທີ ໔ ຈົບ**

# ໓. ຂັດຊະກະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຂັດຊະກະທາຍະກະເຖຣະ

(ພຣະຂັດຊະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓] ເມື່ອກ່ອນ ຂ້າພະເຈົ້າໄດ້ຖວາຍໝາກໄມ້
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ
ແລະໄດ້ຖວາຍໝາກພ້າວ ແລະຂອງຄວນຫຍ້ຳທີ່ຮູ້ກັນດີ

[໑໔] ຂ້າພະເຈົ້າເມື່ອຖວາຍໝາກໄມ້ນັ້ນແດ່ ພຣະພຸດທະເຈົ້າພຣະນາມວ່າ ຕິດສະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຍ່ອມບັນເທີງ ມີຄວາມປະສົງສິ່ງທີ່ໜ້າປາຖະໜາ
ກໍບັນລຸໄດ້ຕາມປາຖະໜາ

[໑໕] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໑໖] ໃນກັບທີ ໑໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ອິນທະສະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຂັດຊະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ຂັດຊະກະທາຍະກະເຖຣາປະທານທີ ໓ ຈົບ**

# ໔. ເທສະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເທສະປູຊະກະເຖຣະ

(ພຣະເທສະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘] ກໍພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ສະເດັດເຫາະຂຶ້ນສູ່ທ້ອງຟ້າໄປໃນອາກາດ

[໑໙] ພຣະສາດສະດາມະຫາມຸນີ ປະທັບຢູ່ໃນພູມິພາກໃດແລ້ວສະເດັດເຫາະຂຶ້ນໄປ
ຂ້າພະເຈົ້າມີຈິດເຫຼື້ອມໃສ ໄດ້ບູຊາພູມິພາກນັ້ນດ້ວຍມືທັງສອງຂອງຕົນ

[໔໐] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຫັນພຣະມະຫາມຸນີ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພູມິພາກ (ທີ່ພຣະອົງປະທັບ)

[໔໑] ໃນກັບທີ ໑໑ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ໂຄສຸຊາຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເທສະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເທສະປູຊະກະເຖຣາປະທານທີ ໔ ຈົບ**

# ໕. ກະນິກາຣະສັດຕິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກະນິກາຣະສັດຕິຍະເຖຣະ

(ພຣະກະນິກາຣະສັດຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໓] ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ເວດສະພູ
ຜູ້ຈະເລີນທີ່ສຸດໃນໂລກ

ຊົງອົງອາດກວ່ານໍຣະຊົນ ເປັນມຸນີ
ສະເດັດເຂົ້າປ່າໃຫຍ່ ເພື່ອຊົງພັກກາງເວັນ

[໔໔] ຄັ້ງນັ້ນ ຂ້າພະເຈົ້າໄດ້ເກັບດອກກັນນິການາເຮັດເປັນຄັນຮົ່ມ
ໄດ້ເຮັດເພດານດອກໄມ້ບູຊາພຣະພຸດທະເຈົ້າ

[໔໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] ໃນກັບທີ ໔໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ພຣະນາມວ່າ ໂສນະນາພະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກະນິການະສັດຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ກະນິການະສັດຕິຍະເຖຣາປະທານທີ ໕ ຈົບ**

## ໖. ສັບປິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັບປິທາຍະກະເຖຣະ

(ພຣະສັບປິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຜຸດສະ
ຜູ້ສົມຄວນຮັບເຄື່ອງບູຊາ ຜູ້ແກ່ກ້າ
ຊົງຊ່ອຍມະຫາຊົນໃຫ້ສະຫງົບເຢັນ ສະເດັດດຳເນີນໄປຕາມຖະໜົນ

[໔໙] ພຣະຜູ້ມີພຣະພາກເຈົ້າ ສະເດັດມາເຖິງສຳນັກຂອງຂ້າພະເຈົ້າໂດຍລຳດັບ
ຂະນະນັ້ນ ຂ້າພະເຈົ້າຮັບບາດແລ້ວ ໄດ້ຖວາຍເນີຍໃສແລະນ້ຳມັນ

[໓໐] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເນີຍໃສແລະນ້ຳມັນໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເນີຍໃສແລະນ້ຳມັນ

[໓໑] ໃນກັບທີ ໕໖ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ສະໂມສະກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັບປິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັບປິທາຍະກະເຖຣາປະທານທີ ໖ ຈົບ**

## ໗. ຍຸທິກະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຍຸທິກະປຸບຜິຍະເຖຣະ

(ພຣະຍຸທິກະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໓] ຂ້າພະເຈົ້າທ່ຽວໄປຕາມກະແສນ້ຳ ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ໃນບ່ອນນັ້ນ ຂ້າພະເຈົ້າໄດ້ເຫັນພຣະສະຍຳພູພຸດທະເຈົ້າ
ຜູ້ດັ່ງຕົ້ນພະຍາໄມ້ສາລະມີດອກບານສະພັ່ງ
[໓໔] ຂ້າພະເຈົ້າໄດ້ຖືດອກເຂັມເຂົ້າເຝົ້າພຣະມະຫາມຸນີ
ມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ບູຊາພຣະພຸດທະເຈົ້າ

[໓໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໖] ໃນກັບທີ ໖໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ສາມຸດທະຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຍຸທິກະປຸບພີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຍຸທິກະປຸບພີຍະເຖຣາປະທານທີ ໗ ຈົບ**

## ໘. ທຸດສະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທຸດສະທາຍະກະເຖຣະ

(ພຣະທຸດສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໘] ຄັ້ງນັ້ນ ຂ້າພະເຈົ້າເປັນຣາດຊະໂອຣົດຢູ່ໃນຕິວະຣານະຄອນທີ່ໜ້າຣື່ນຣົມ
ໄດ້ເຄື່ອງບັນນາການແລ້ວ ຈຶ່ງໄດ້ຖວາຍພຣະຜູ້ມີພຣະພາກເຈົ້າ ຜູ້ສະງົບຣະງັບ

[໓໙] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຊົງຮັບ (ເຄື່ອງບັນນາການ) ແລ້ວໃຊ້ພຣະຫັດລູບຜ້າ
ເມື່ອຊົງຮັບແລ້ວ ໄດ້ສະເດັດເຫາະຂຶ້ນສູ່ນະພາກາດ

[໔໐] ເມື່ອພຣະພຸດທະເຈົ້າກຳລັງສະເດັດໄປ
ຜ້າປິວຕາມໄປເບື້ອງພຣະປະຣິດສະດາງ
ຂ້າພະເຈົ້າທຳຈິດໃຫ້ເຫຼື້ອມໃສໃນພຣະອົງວ່າ
ພຣະພຸດທະເຈົ້າຂອງພວກເຮົາຊົງເປັນບຸກຄົນຜູ້ເລີດ

[໔໑] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າ

[໔໔] ໃນກັບທີ ໙໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ປະຣິສຸດທະ
ເປັນຈອມມະນຸດ ມີພະລານຸພາບຫຼາຍ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທຸດສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທຸດສະທາຍະກະເຖຣາປະທານທີ ໘ ຈົບ**

## ໙. ສະມາທະປະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະມາທະປະກະເຖຣະ

(ພຣະສະມາທະປະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ໄດ້ມີການປະຊຸມອຸປາສົກຈຳນວນຫຼາຍໃນນະຄອນພັນທຸມະດີ
ຂ້າພະເຈົ້າເປັນຫົວໜ້າອຸປາສົກເຫຼົ່ານັ້ນ
ອຸປາສົກເຫຼົ່ານັ້ນເປັນຄົນຮັບໃຊ້ຂ້າພະເຈົ້າ

[໔໕] ຂ້າພະເຈົ້າຮຽກປະຊຸມອຸປາສົກເຫຼົ່ານັ້ນທັງໝົດ
ແລ້ວຊັກຊວນໃນການທຳບຸນວ່າ
ເຮົາທັງຫຼາຍຈັກສ້າງຜາມຖວາຍແດ່ພຣະສົງ
ຜູ້ເປັນເນື້ອນາບຸນອັນປະເສີດ

[໔໖] ອຸປາສົກເຫຼົ່ານັ້ນຮັບຄຳວ່າ ດີແລ້ວ
ແລ້ວດຳເນີນໄປຕາມຄວາມພໍໃຈຂອງຂ້າພະເຈົ້າ
ພວກເຮົາທັງຫຼາຍສ້າງຜາມໃຫ້ສຳເລັດແລ້ວ
ໄດ້ຖວາຍພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ

[໔໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສ້າງຜາມຖວາຍໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງຜາມຖວາຍ

[໔໗] ໃນກັບທີ ໕໙ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ອາເທີຍຍະ
ຜູ້ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະມາທະປະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະມາທະປະກະເຖຣາປະທານທີ ໙ ຈົບ**

## ໑໐. ປັນຈັງຄຸລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັນຈັງຄຸລິຍະເຖຣະ

(ພຣະປັນຈັງຄຸລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ຊົງອົງອາດກວ່ານໍຣະຊົນ
ເປັນພຣະມຸນີ ຊົງສະຫຼາດໃນວິຫານທຳ
ກຳລັງສະເດັດເຂົ້າໄປສູ່ພຣະຄັນທະກຸດຕີ

[໕໑] ຂ້າພະເຈົ້າໄດ້ຖືຂອງຫອມ ແລະພວງມາໄລໄປສູ່ສຳນັກພຣະຊິນນະເຈົ້າ
ແຕ່ຂ້າພະເຈົ້າມີສັດທາໜ້ອຍໃນພຣະສຳມາສຳພຸດທະເຈົ້າ
ຈຶ່ງໄດ້ຖວາຍເຄື່ອງລູບທາດ້ວຍນິ້ວທັງ ໕

[໕໔] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ຂອງຫອມບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງເຄື່ອງລູບທາດ້ວຍນິ້ວທັງ ໕

[໕໖] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສະຍຳປະພະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັນຈັງຄຸລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນຈັງຄຸລິຍະເຖຣາປະທານທີ ໑໐ ຈົບ**

**ສຸປາຣິຈະຣິຍະວັກທີ ໑໗ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສຸປາຣິຈະຣິຍະເຖຣາປະທານ
໒. ຂັດຊະກະທາຍະກະເຖຣາປະທານ
໓. ກະນິກາຣະສັດຕິຍະເຖຣາປະທານ
໗. ຍຸທິກະປຸບພິຍະເຖຣາປະທານ
໑. ສະມາທະປະກະເຖຣາປະທານ
໒. ກະນະເວຣະປຸບພິຍະເຖຣາປະທານ
໔. ເທສະປູຊະກະເຖຣາປະທານ
໖. ສັບປິທາຍະກະເຖຣາປະທານ
໘. ທຸດສະທາຍະກະເຖຣາປະທານ
໑໐. ປັນຈັງຄຸລິຍະເຖຣາປະທານ

**ມີຄາຖາ ໕໔ ຄາຖາ ຢ່າງນີ້ແລ**

# ໑໘. ກຸມຸທະວັກ

## ໝວດວ່າດ້ວຍພຣະກຸມຸທະເປັນຕົ້ນ

## ໑. ກຸມຸທະມາລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸມຸທະມາລິຍະເຖຣະ

(ພຣະກຸມຸທະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ໃນບ່ອນບໍ່ໄກພູເຂົາຫິມະພານ
ໄດ້ມີສະທຳມະຊາດສະໃຫຍ່
ຂ້າພະເຈົ້າເປັນຜີເສືອນ້ຳດຸຮ້າຍ ມີກຳລັງຫຼາຍ ເກີດຢູ່ໃກ້ສະນັ້ນ
[໒] ດອກໂກມຸດບານໃຫຍ່ປະມານເທົ່າລໍ້ລົດ ເກີດຢູ່ໃນສະນັ້ນ
ແລະໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເກັບດອກໂກມຸດທີ່ມີຝັກໄວ້

[໓]　　พระผู้มีพระพาภเจ้าพระนามว่า อัดถะทัดสี
ผู้เป็นจอมแห่งเทวะดาและมะนุด อิ่งอาดภว่านํระชิน
ทอดพระเนดเห็นดอภโภมุดที่ทุบแล้ว
จิ่งสะเด็ดมายังสำนักຂองข้าพะเจ้า

[໔]　　ข้าพะเจ้าได้เห็นพระสำมาสำพุดทะเจ้า ผู้เป็นเทบยิ่งภว่าเทบ
ຊິ່ງอิ่งอาดภว่านํระชิน สะเด็ดเข้ามา
จิ่งจับดอภโภมุดทั้งໝົດບູຊາพระพุดทะเจ้า

[໕]　　ຄັ້ງນັ້ນ ດອກໄມ້ທີ່ພູເຂົາຫິມະພານມີຢູ່ປະມານເທົ່າໃດ
ພຣະຕະຖາຄົດເຈົ້າມີດອກໄມ້ປະມານເທົ່ານັ້ນເປັນຫຼັງຄາສະເດັດໄປ

[໖]　　ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗]　　ໃນກັບທີ ໑໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ
ມີພຣະນາມວ່າ ສະຫັດສະລົດ
ຜູ້ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໘]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກຸມຸທະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸມຸທະມາລິຍະເຖຣາປະທານທີ ໑ ຈົບ**

## ໘. ນິດເສນິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນິດເສນິທາຍະກະເຖຣະ

(ພຣະນິດເສນິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๗] ຂ້າພະເຈົ້າໃຫ້ສ້າງຂັ້ນໄດສຳລັບສະເດັດຂຶ້ນຜາສາດ
ຖວາຍພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂກນທັນຍະ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ຜູ້ຄົງທີ່

[໑໐] ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າສະເຫວີຍສົມບັດແລ້ວ
ຊົງຮ່າງກາຍອັນມີໃນພົບສຸດທ້າຍຢູ່
ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໑໑] ໃນກັບທີ ๓໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ๓ ຊາດ
ພຣະນາມວ່າ ສຳພະທຸນະ ມີພະລານຸພາບຫຼາຍ

[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະນິດເສນີທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ນິດເສນີທາຍະກະເຖຣາປະທານທີ ໘ ຈົບ**

## ๙. ຣັດຕິປຸບພິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຣັດຕິປຸບພິຍະເຖຣະ

(ພຣະຣັດຕິປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑๓] ເມື່ອກ່ອນ ຂ້າພະເຈົ້າເປັນພານເນື້ອຢູ່ໃນປ່າດົງທຶບ
ໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ເປັນເທບຍິ່ງກວ່າເທບ ຊົງອົງອາດກວ່ານໍຣະຊົນ
[໑໔] ຂ້າພະເຈົ້າເຫັນຕົ້ນມອກເຫຼັກຂຶ້ນເທິງແຜ່ນດິນ
ມີດອກບານສະພັ່ງຢູ່ກາງຄືນຈຶ່ງເກັບມາພ້ອມທັງກ້ານ
ນ້ອມເຂົ້າໄປຖວາຍແດ່ພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
[໑໕] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກໄມ້

[໑໖] ແລະໃນກັບທີ ๗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ສຸບປະສັນນະ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ
[໑໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ๔
ວິໂມກ ๘ ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຣັດຕິປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຣັດຕິປຸບພິຍະເຖຣາປະທານທີ ๓ ຈົບ**

# ๔. ອຸທະປານະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸທະປານະທາຍະກະເຖຣະ

(ພຣະອຸທະປານະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑๘] ຂ້າພະເຈົ້າໄດ້ຂຸດນໍ້າສ້າງ ຖວາຍພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ແລະໃນຄັ້ງນັ້ນ ຂ້າພະເຈົ້າໄດ້ນໍາບິນທະບາດໄປຖວາຍ
[໑໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກໍາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຂຸດນໍ້າສ້າງຖວາຍ
[๔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ๔ ວິໂມກ ๘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸທະປານະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸທະປານະທາຍະກະເຖຣາປະທານທີ ๔ ຈົບ**

# ໕. ສີຫາສະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສີຫາສະນະທາຍະກະເຖຣະ

(ພຣະສີຫາສະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໑] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊຶ່ງເປັນບ່ອນເພິ່ງຂອງສັດໂລກ ຊຶ່ງເປັນຜູ້ນຳ
ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ຖວາຍພຣະບັນລັງ

[໔໔] ຊຶ່ງຈຳນວນຫຼາຍ ທຳການບູຊາດ້ວຍຂອງຫອມ ແລະດອກໄມ້ຫຼາກຫຼາຍ
ທີ່ພຣະບັນລັງອັນນຳຄວາມສຸກມາໃຫ້ໃນປັດຈຸບັນ ແລ້ວສະງົບເຢັນ

[໔໓] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ໄຫວ້ຕົ້ນໂພທີ່ປະເສີດແລ້ວ
ບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໔໔] ໃນກັບທີ ໑,໐໑໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ
ມີພຣະນາມວ່າ ສີລຸຈະທະຍະ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສີຫາສະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສີຫາສະນະທາຍະກະເຖຣາປະທານທີ ໕ ຈົບ**

# ໖. ມັກຄະທັດຕິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມັກຄະທັດຕິກະເຖຣະ

(ພຣະມັກຄະທັດຕິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໖] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອະໂນມະທັດສີ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ

ຊຶ່ງອີງອາດກວ່ານໍຣະຊົນ ສະເດັດຈົງກົມຢູ່ໃນບ່ອນແຈ້ງ
ເພື່ອປະໂຫຍດສຸກໃນປັດຈຸບັນ

[໔໗] ເມື່ອພຣະຜູ້ມີພຣະພາກເຈົ້າຍົກພຣະບາດຂຶ້ນ
ດອກໄມ້ງົດງາມລອຍຢູ່ເໜືອພຣະສຽນ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ຖວາຍອະພິວາດແລ້ວ ຈຶ່ງໄດ້ໂຮຍດອກໄມ້

[໔໘] ໃນກັບທີ ໔໐,໐໐໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໕ ຊາດ
ພຣະນາມວ່າ ປຸບຜະສະຕະນິຍະ ມີພະລານຸພາບຫຼາຍ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມັກຄະທັດຕິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມັກຄະທັດຕິກະເຖຣາປະທານທີ ໖ ຈົບ**

## ໗. ເອກະທີປິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະທີປິຍະເຖຣະ

(ພຣະເອກະທີປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍປະທີບດວງໜຶ່ງໄວ້ທີ່ຕົ້ນຊ້າງນ້າວ
ເຊິ່ງເປັນຕົ້ນໄມ້ເປັນທີ່ຕັດສະຣູ້ທີ່ປະເສີດ
ຂອງພຣະມຸນີພຣະນາມວ່າ ປະທຸມຸດຕະຣະ

[໕໑] ເມື່ອຂ້າພະເຈົ້າເກີດຢູ່ໃນພົບ ທີ່ມີການສັ່ງສົມບຸນເກີດຂຶ້ນ
ຂ້າພະເຈົ້າຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍປະທີບ

[໕໔] ໃນກັບທີ ໑໖,໐໐໐ ນັບຈາກກັບນີ້ໄປ

ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ມີພຣະນາມວ່າ ຈັນທາພະ ມີພະລານຸພາບຫຼາຍ

[໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະທິປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະທິປິຍະເຖຣາປະທານທີ ໗ ຈົບ**

**ພານະວານທີ ໙ ຈົບ**

## ໘. ມະນິປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມະນິປູຊະກະເຖຣະ

(ພຣະມະນິປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ແມ່ນ້ຳສາຍໜຶ່ງໄຫຼຜ່ານໄປພາຍໃນພູເຂົາຫິມະພານ
ຄັ້ງນັ້ນ ພຣະສະຍຳພູພຸດທະເຈົ້າປະທັບຢູ່ແຄມຝັ່ງແມ່ນ້ຳນັ້ນ

[໓໕] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ປະຄອງບັນລັງແກ້ວອັນວິຈິດດ້ວຍດີ
ເປັນທີ່ໜ້າອອນຊອນໃຈ ບູຊາພຣະພຸດທະເຈົ້າ

[໓໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ແກ້ວມະນີບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໗] ແລະໃນກັບທີ ໑໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໘ ຊາດ
ມີພຣະນາມວ່າ ສະຕະລັງສີ ມີພະລານຸພາບຫຼາຍ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມະນິປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມະນິປູຊະກະເຖຣາປະທານທີ ๗ ຈົບ**

## ๘. ຕິກິດສະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິກິດສະກະເຖຣະ

(ພຣະຕິກິດສະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๓๙] ຂ້າພະເຈົ້າເປັນໝໍ ສຶກສາດີແລ້ວ ຢູ່ໃນນະຄອນພັນທຸມະດີ
ເປັນຜູ້ນຳຄວາມສຸກມາໃຫ້ແກ່ມະຫາຊົນຜູ້ມີໂຣກໄພ ມີທຸກສາຫັດ

[໔໐] ຄັ້ງນັ້ນ ຂ້າພະເຈົ້າເຫັນພຣະສະມະນະຜູ້ມີສິນ ຮຸ່ງເຮືອງຫຼາຍ ເຈັບໄຂ້
ມີຈິດເຫຼື້ອມໃສ ມີໃຈຍິນດີ ຈຶ່ງໄດ້ຖວາຍຢາ (ບຳບັດໄຂ້)

[໔໑] ພຣະສະມະນະຜູ້ສັງລວມອິນຊີມີນາມວ່າ ອະໂສກ
ຜູ້ເປັນອຸປັດຖາກຂອງພຣະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ຫາຍຈາກໂຣກພະຍາດດ້ວຍຢານັ້ນ

[໔໒] ໃນກັບທີ ๙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຢາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຢາ

[໔໓] ໃນກັບທີ ๗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດມີນາມວ່າ ສັບໂພສະທະ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ๘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິກິດສະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິກິດສະກະເຖຣາປະທານທີ ๘ ຈົບ**

# ໑໐. ສັງຄຸປັດຖາກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະສັງຄຸປັດຖາກະເຖຣະ

(ພຣະສັງຄຸປັດຖາກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕] ໃນສະໄໝພຣະຜູ້ມີພຣະພາກເຈົ້ານາມວ່າ ເວດສະພູ
ຂ້າພະເຈົ້າເປັນຄົນວັດມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ອຸປັດຖາກພຣະສົງຜູ້ປະເສີດສຸດ
[໔໖] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການອຸປັດຖາກ
[໔໗] ໃນກັບທີ ໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ພຣະນາມວ່າ ສະໂມຕະສະກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັງຄຸປັດຖາກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັງຄຸປັດຖາກະເຖຣາປະທານທີ ໑໐ ຈົບ**

**ກຸມຸທະວັກທີ ໑໘ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ກຸມຸທະມາລິຍະເຖຣາປະທານ
໒. ຣັດຕິປຸບພິຍະເຖຣາປະທານ
໓. ສີຫາສະນະທາຍະກະເຖຣາປະທານ
໗. ເອກະທີປີຍະເຖຣາປະທານ
໙. ຕິກິດສະກະເຖຣາປະທານ
໔. ນິດເສນິທາຍະກະເຖຣາປະທານ
໕. ອຸທະປານະທາຍະກະເຖຣາປະທານ
໖. ມັກຄະທັດຕິກະເຖຣາປະທານ
໘. ມະນິປູຊະກະເຖຣາປະທານ
໑໐. ສັງຄຸປັດຖາກະເຖຣາປະທານ

**ມີຄາຖາ ໔໙ ຄາຖາ ແນວນີ້ແລ**

# ໑໙. ກຸຕະຊະປຸບຜິຍະວັກ

## ໝວດວ່າດ້ວຍພຣະກຸຕະຊະປຸບຜິຍະເປັນຕົ້ນ

## ໑. ກຸຕະຊະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸຕະຊະປຸບຜິຍະເຖຣະ

(ພຣະກຸຕະຊະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ດັ່ງດວງອາທິດອຸໄທ ຊົງຫຼຽວເບິ່ງທິດ ສະເດັດເຫາະໄປໃນອາກາດ

[໒] ຂ້າພະເຈົ້າເຫັນດອກໂມກມັນບານສະພັ່ງ
ທັງດອກໃຫຍ່ແລະດອກນ້ອຍ ຈຶ່ງເກັບມາຈາກຕົ້ນ
ແລ້ວບູຊາພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຜຸດສະ

[໓] ໃນກັບທີ ໙໒ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔] ໃນກັບທີ ໑໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ ພຣະນາມວ່າ ສຸປຸບຜິຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກຸຕະຊະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸຕະຊະປຸບຜິຍະເຖຣາປະທານທີ ໑ ຈົບ**

# ໘. ພັນທຸຊີວະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພັນທຸຊີວະກະເຖຣະ

(ພຣະພັນທຸຊີວະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ໂສພິຕະ
ຜູ້ເຊິ່ງສັດຕະບຸຣຸດສັນເສີນແລ້ວ
ພຣະອົງປະທັບນັ່ງເຂົ້າສະມາທິຢູ່ໃນລະຫວ່າງພູເຂົາ

[໗] ຂ້າພະເຈົ້າສະແຫວງຫາດອກບົວງາມໃນສະທຳມະຊາດ
ແຕ່ໄດ້ເຫັນດອກຊະບາໃນບ່ອນໃກ້

[໘] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໃຊ້ມືທັງ ໘ ປະຄອງໄວ້ແລ້ວ
ເຂົ້າເຝົ້າພຣະມະຫາມຸນີ ແລ້ວບູຊາພຣະໂສພິຕະພຸດທະເຈົ້າ

[໙] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໐] ໃນກັບທີ ໑໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ
ມີພຣະນາມວ່າ ສະມຸດທະກັບປະ
ຜູ້ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະພັນທຸຊີວະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພັນທຸຊີວະກະເຖຣາປະທານທີ ໘ ຈົບ**

# ໓. ໂກຕຸມະພະຣິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂກຕຸມະພະຣິຍະເຖຣະ

(ພຣະໂກຕຸມະພະຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ພຣະຜູ້ມີພຣະພາກເຈົ້າ ຜູ້ຮຸ່ງເຮືອງດັ່ງດອກກັນນິກາ
ມີພຣະຄຸນຫາປະມານບໍ່ໄດ້ເໝືອນທະເລ ແຜ່ກວ້າງດັ່ງແຜ່ນດິນ
ປະທັບນັ່ງຢູ່ໃນລະຫວ່າງພູເຂົາ

[໑໓] ອັນໝູ່ເທວະດາບູຊາແລ້ວ ເໝືອນມ້າອາຊາໄນໂຕອົງອາດ
ຜູ້ສູງສຸດແຫ່ງນໍຣະຊົນ
ຂ້າພະເຈົ້າມີຈິດຮ່າເຣິງ ເບີກບານ ຈຶ່ງເຂົ້າເຝົ້າພຣະອົງ

[໑໔] ຂ້າພະເຈົ້າໄດ້ປະຄອງດອກໄມ້ ແລະຜ້າຂົນສັດເນື້ອດີ
ບູຊາພຣະພຸດທະເຈົ້າພຣະນາມວ່າ ສິຂີ ຜູ້ເປັນເຜົ່າພັນຂອງໂລກ

[໑໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໖] ໃນກັບທີ ໔໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງມີພຣະນາມວ່າ ມະຫາເນລະ
ມີເດດຫຼາຍ ມີພະລານຸພາບຫຼາຍ

[໑໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂກຕຸມະພະຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂກຕຸມະພະຣິຍະເຖຣາປະທານທີ ໓ ຈົບ**

# ໔. ປັນຈະຫັດຖິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັນຈະຫັດຖິຍະເຖຣະ

(ພຣະປັນຈະຫັດຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ມີໝູ່ສາວົກຫ້ອມລ້ອມ
ສະເດັດດຳເນີນໄປຕາມຖະໜົນ

[໑໘] ຂ້າພະເຈົ້າເປັນບຸດ
ປະສົງຈະຖວາຍເຄື່ອງບູຊາເພື່ອໃຫ້ສຳເລັດປະໂຫຍດ
ຈຶ່ງວາງດອກອຸບົນ ໕ ກຳ ແລະ ໔ ກຳ (ໄວ້ທີ່ໃກ້ຕົນ)

[໔໐] ຂ້າພະເຈົ້າສຳຜັດພຣະພຸດທະຣັດສະໝີແລ້ວ
ຈຶ່ງບູຊາພຣະສຳມາສຳພຸດທະເຈົ້າ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ ມີພຣະສະຫວີວັນດັ່ງຄຳ
ກຳລັງສະເດັດດຳເນີນຢູ່ໃນລະຫວ່າງຮ້ານຕະຫຼາດ

[໔໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໔] ໃນກັບທີ ໑໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໕ ຊາດ
ພຣະນາມວ່າ ສຸລະປະສຳມະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປັນຈະຫັດຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນຈະຫັດຖິຍະເຖຣາປະທານທີ ໔ ຈົບ**

# ໕. ອິສິມຸຄະກະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອິສິມຸຄະກະທາຍະກະເຖຣະ

(ພຣະອິສິມຸຄະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໔] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງເປັນຜູ້ນຳ ມີພຣະຣັດສະໝີຮຸ່ງເຮືອງເໝືອນດວງອາທິດອຸໄທ
ເໝືອນດວງຈັນ ເໝືອນຕົ້ນຮັກຟ້າທີ່ງົດງາມ

[໘໕] ຂ້າພະເຈົ້າແມ່ນຢືນຢູ່ໃນຜາສາດ
ກໍນິມົນພຣະລືສີຜູ້ຍິ່ງໃຫຍ່
ແລ້ວໄດ້ຖວາຍຮວງເຜີ້ງນ້ອຍທີ່ບໍ່ມີໂຕອ່ອນແດ່ພຣະອົງ
ຜູ້ເປັນເຜົ່າພັນຂອງໂລກ

[໘໖] ຂ້າພະເຈົ້າໄດ້ຖວາຍນ້ຳເຜີ້ງຈົນເຕັມບາດສາວົກຂອງພຣະພຸດທະເຈົ້າ
ປະມານ ໗໐໐,໐໐໐ ອົງ ຫຼື ຫຼາຍກວ່ານັ້ນ

[໘໗] ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຂ້າພະເຈົ້າຖືກກຸສົນມູນຕັກເຕືອນແລ້ວ
ຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໘໘] ໃນກັບທີ ໔໐,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໓໗ ຊາດ
ມີພຣະນາມວ່າ ມະຫິສະມັນຕະ ມີພະລານຸພາບຫຼາຍ

[໘໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔
ວິໂມກ ໘ ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອິສິມຸຄະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອິສິມຸຄະກະທາຍະກະເຖຣາປະທານທີ ໕ ຈົບ**

# ໕. ໂພທິອຸປັດຖາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂພທິອຸປັດຖາຍະກະເຖຣະ

(ພຣະໂພທິອຸປັດຖາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໐] ຂ້າພະເຈົ້າເປັນຄົນຕີຕະໂພນຢູ່ໃນນະຄອນຣຳມະວະດີ
ຈຶ່ງໄປສູ່ຕົ້ນໂພທີ່ປະເສີດ
ປະກອບທຳການບຳຣຸງເປັນນິດ

[໓໑] ຂ້າພະເຈົ້າບຳຣຸງທັງເວລາແລງແລະເວລາເຊົ້າ
ຖືກກຸສົນມູນຕັກເຕືອນແລ້ວ
ຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໑໗ ກັບ

[໓໘] ໃນກັບທີ ໑໑໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ທະມະຖະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະໂພທິອຸປັດຖາຍະກະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂພທິອຸປັດຖາຍະກະເຖຣາປະທານທີ ໕ ຈົບ**

# ໖. ເອກະຈິນະຕິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກະຈິນະຕິກະເຖຣະ

(ພຣະເອກະຈິນຕິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ໃນການໃດ ເທວະດາຈະຈຸຕິຈາກໝູ່ເທວະດາຍ້ອນສິ້ນອາຍຸ
ໃນການນັ້ນ ເທວະດາຜູ້ພອຍຍິນດີຍ່ອມເປ່ງສຽງ ໓ ປະການ ວ່າ

[๓๕] ທ່ານຜູ້ຈະເລີນ ທ່ານຈາກບ່ອນນີ້ ຈົ່ງໄປສູ່ສຸຄະຕິ
ຢູ່ຮ່ວມກັບມະນຸດ ເປັນມະນຸດແລ້ວ
ຈົ່ງໄດ້ສັດທາທີ່ປະເສີດໃນພຣະສັດທຳ

[๓๖] ສັດທາຂອງທ່ານຜູ້ຕັ້ງໝັ້ນ
ເປັນສັດທາທີ່ຫຍັ່ງຮາກລົງເລິກດຳຣົງໝັ້ນ
ບໍ່ຄອນແຄນໃນພຣະສັດທຳ
ທີ່ພຣະອະຣິຍະປະກາດດີແລ້ວຈົນຕະຫຼອດຊີວິດ

[๓๗] ທ່ານຈົ່ງກະທຳກຸສົນທີ່ບໍ່ບຽດບຽນ ບໍ່ມີອຸປະທິ
ທາງກາຍ ທາງວາຈາ ທາງໃຈ ໃຫ້ຫຼາຍເທີ້ນ

[๓๘] ແຕ່ນັ້ນ ທ່ານສັ່ງສົມບຸນແລ້ວ
ຈົ່ງກະທຳບຸນນັ້ນໃຫ້ຫຼາຍດ້ວຍການໃຫ້ທານ
ຈົ່ງແນະນຳແມ່ນສັດເຫຼົ່າອື່ນໃຫ້ຕັ້ງຢູ່
ໃນພົມມະຈັນ ໃນພຣະສັດທຳເທີ້ນ

[๓๙] ດ້ວຍຄວາມອະນຸເຄາະນີ້ ໃນການໃດ ເຫຼົ່າເທວະດາຜູ້ຮູ້
ຈຶ່ງພອຍຍິນດີກັບເທວະດາ ຜູ້ເຊິ່ງກຳລັງຈຸຕິວ່າ
ດູຣາເທວະ ຂໍທ່ານຈົ່ງມາເລື້ອຍ ໆ ເດີ້

[๔๐] ໃນການນັ້ນ ເມື່ອໝູ່ເທວະດາມາປະຊຸມກັນ
ຂ້າພະເຈົ້າເກີດຄວາມສະລົດໃຈວ່າ ຂ້າພະເຈົ້າຈຸຕິຈາກບ່ອນນີ້ແລ້ວ
ຈັກໄປສູ່ກຳເນີດອັນໃດນໍ

[๔๑] ທ່ານສະມະນະຜູ້ອົບຮົມອິນຊີແລ້ວ
ຮູ້ຄວາມສະລົດໃຈຂອງຂ້າພະເຈົ້າ
ປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງມາຍັງສຳນັກຂອງຂ້າພະເຈົ້າ

[๔๒] ທ່ານມີນາມວ່າ ສຸມະນະ ເປັນສາວົກ
ຂອງພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ພ່ຳສອນອັດຖະທຳ ໃຫ້ຂ້າພະເຈົ້າສະລົດໃຈ ໃນຄັ້ງນັ້ນ

[๔๓] ຂ້າພະເຈົ້າໄດ້ຟັງຄຳຂອງທ່ານແລ້ວ

ທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ
ໄດ້ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວໄດ້ສິ້ນຊີວິດລົງ ໃນບ່ອນນັ້ນ

[໔໔] ຂ້າພະເຈົ້ານັ້ນ ຖືກກຸສົນມູນຕັກເຕືອນແລ້ວ
ໄດ້ອຸບັດໃນເທວະໂລກນັ້ນເອງ
ບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະຈິນຕິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະຈິນະຕິກະເຖຣາປະທານທີ ៗ ຈົບ**

# ໘. ຕິກັນນິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິກັນນິປຸບຜິຍະເຖຣະ

(ພຣະຕິກັນນິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ຂ້າພະເຈົ້າເປັນເທວະດາ ມີເຫຼົ່ານາງເທບອັບປະສອນຫ້ອມລ້ອມ
ຣະລຶກເຖິງບຸບພະກຳແລ້ວ
ຈຶ່ງຫວນຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໗] ຂ້າພະເຈົ້າກະທຳຈິດຂອງຕົນໃຫ້ເຫຼື້ອມໃສ
ໄດ້ປະຄອງດອກອັນຊັນ ໓ ດອກ
ບູຊາພຣະພຸດທະເຈົ້າພຣະນາມວ່າວິປັດສີ ຜູ້ອົງອາດກວ່ານໍຣະຊົນ

[໔໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໙] ໃນກັບທີ ໗໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ພຣະນາມວ່ານມຸດຕະມະ
ສົມບູນດ້ວຍຣັດຕະນະ ៗ ປະການ ມີພະລານຸພາບຫຼາຍ

[໔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໒ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິກັນນິປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິກັນນິປຸບພິຍະເຖຣາປະທານທີ ໘ ຈົບ**

## ໙. ເອກະຈາຣິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະຈາຣິຍະເຖຣະ

(ພຣະເອກະຈາຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑] ຄັ້ງນັ້ນ ໄດ້ມີສຽງປະກາດກຶກກ້ອງໃນໝູ່ເທວະດາຊັ້ນຕາວະຕຶງສາວ່າ
ພຣະພຸດທະເຈົ້າຈະສະເດັດດັບຂັນທະປະຣິນິບພານໃນໂລກ
ແຕ່ພວກເຮົາຍັງມີຣາຄະຢູ່

[໔໒] ບັນດາເທວະດາຜູ້ເກີດຄວາມສັງເວດ
ຜູ້ຫຼາຍໄປດ້ວຍຄວາມເສົ້າໂສກເຫຼົ່ານັ້ນ
ຂ້າພະເຈົ້າຖືກກໍາລັງຂອງຕົນອຸບປະຖໍາແລ້ວ
ໄດ້ໄປໃນສໍານັກຂອງພຣະພຸດທະເຈົ້າ

[໔໓] ຂ້າພະເຈົ້າຖືດອກມົນທາຣົບທີ່ເນຣະມິດ
ຮີບໂຮມໄວ້ໄປບູຊາພຣະພຸດທະເຈົ້າ
ໃນເວລາໃກ້ຈະປະຣິນິບພານ

[໔໔] ຄັ້ງນັ້ນ ເທວະດາແລະນາງເທບອັບປະສອນທັງປວງ
ອະນຸໂມທະນາຕໍ່ຂ້າພະເຈົ້າ
ຂ້າພະເຈົ້າຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໔໕] ໃນກັບທີ ໒໐,໐໐໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໒ ຊາດ
ພຣະນາມວ່າ ມະຫາມັນລະຊະນະ ມີພະລານຸພາບຫຼາຍ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໒ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະຈາຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະຈາຣິຍະເຖຣາປະທານທີ ໙ ຈົບ**

## ໑໐. ຕິວັນຕິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິວັນຕິປຸບຜິຍະເຖຣະ

(ພຣະຕິວັນຕິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໗] ພວກຂ້າພະເຈົ້າທຸກຄົນນັ້ນມາປະຊຸມກັນ
ເພ່ງໂທດພຣະເຖຣະຊື່ວ່າ ອະພິພູ
ຄວາມຮ້ອນຮົນໄດ້ເກີດຂຶ້ນແກ່ພວກຂ້າພະເຈົ້າ ຜູ້ເພ່ງໂທດ
[໘໘] ຄັ້ງນັ້ນ ພຣະເຖຣະມີນາມວ່າ ສຸນັນທະ
ເປັນສາວົກຂອງພຣະມຸນີພຸດທະເຈົ້າພຣະນາມວ່າ ທຳມະທັດສີ
ມາໃນສຳນັກຂອງຂ້າພະເຈົ້າ
[໘໙] ຄັ້ງນັ້ນ ຊົນທັງຫຼາຍທີ່ເປັນຄົນຮັບໃຊ້ຂອງຂ້າພະເຈົ້າ
ໄດ້ໃຫ້ດອກໄມ້ແກ່ຂ້າພະເຈົ້າ
ຂ້າພະເຈົ້າໄດ້ຖືດອກໄມ້ນັ້ນໄປບູຊາສາວົກ
[໙໐] ຂ້າພະເຈົ້າ ໄດ້ສິ້ນຊີວິດລົງ ໃນບ່ອນນັ້ນແລ້ວ ກໍກັບມາເກີດອີກ
ບໍ່ຕົກວິນິບາດນະຣົກເລີຍຕະຫຼອດ ໑໑໘ ກັບ
[໙໑] ໃນກັບທີ ໑໑໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໘ ຊາດ
ພຣະນາມວ່າ ທູມະເກຕຸ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໙໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິວັນຕິປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິວັນຕິປຸບຜິຍະເຖຣາປະທານທີ ໑໐ ຈົບ**

**ກຸຕະຊະປຸບຜິຍະວັກທີ ໑໙ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ກຸຕະຊະປຸບຜິຍະເຖຣາປະທານ | ໒. ພັນທຸຊີວະກະເຖຣາປະທານ |
| ໓. ໂກຕຸມະພະຣິຍະເຖຣາປະທານ | ໔. ປັນຈະຫັດຖິຍະເຖຣາປະທານ |
| ໕. ອິສິມຸຄະກະທາຍະກະເຖຣາປະທານ | ໖. ໂພທິອຸປັດຖາຍະກະເຖຣາປະທານ |
| ໗. ເອກະຈິນຕິກະເຖຣາປະທານ | ໘. ຕິກັນນິປຸບຜິຍະເຖຣາປະທານ |
| ໙. ເອກະຈາຣິຍະເຖຣາປະທານ | ໑໐. ຕິວັນຕິປຸບຜິຍະເຖຣາປະທານ |

**ທ່ານປະກາດຄາຖາໄວ້ ໖໒ ຄາຖາ**

# ໒໐. ຕະມາລະປຸບຜິຍະວັກ

## ໝວດວ່າດ້ວຍພຣະຕະມາລະປຸບຜິຍະເປັນຕົ້ນ

## ໑. ຕະມາລະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕະມາລະປຸບຜິຍະເຖຣະ

(ພຣະຕະມາລະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ວິມານຂອງຂ້າພະເຈົ້າມີເສົາຄຳ ໘໒,໐໐໐ ຕົ້ນ
ປຽບໄດ້ກັບໄມ້ກ້ານເຫົ້າຂອງເທວະດາ
ບຸນກຳເນຣະມິດໄວ້ດີແລ້ວ

[໒] ຂ້າພະເຈົ້າມີໃຈຜ່ອງໃສ
ໄດ້ປະຄອງດອກຄູນບູຊາພຣະພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ເປັນເຜົ່າພັນຂອງໂລກ

[໓] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔] ໃນກັບທີ ໒໐ ນັບຈາກກັບນີ້ໄປ

ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ຈັນທະຕິດຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[๕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕະມາລະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ແນວນີ້

**ຕະມາລະປຸບຜິຍະເຖຣາປະທານທີ ໑ ຈົບ**

# ๘. ຕິນະສັນຖາຣະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິນະສັນຖາຣະທາຍະກະເຖຣະ

(ພຣະຕິນະສັນຖາຣະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[๖] ໃນການທີ່ຂ້າພະເຈົ້າເປັນລືສີຢູ່ໃນປ່າ
ກ່ຽວຫຍ້າຖວາຍພຣະສາດສະດາ
ຫຍ້າທັງໝົດນັ້ນວຽນໄປທາງຂວາແລ້ວຕົກລົງໃສ່ແຜ່ນດິນ

[๗] ຄັ້ງນັ້ນ ຂ້າພະເຈົ້າຖືຫຍ້ານັ້ນມາປູໃສ່ເນີນດິນ
ແລະນຳໃບຕານມາ ๓ ໃບ

[๘] ມາເຮັດເປັນຫຼັງຄາເທິງໄມ້ ๓ ອັນ
ໄດ້ຖວາຍພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ເທວະດາແລະມະນຸດທັງຫຼາຍໃນບ່ອນນັ້ນ
ຖືຊົງໄວ້ເພື່ອພຣະສາດສະດາຕະຫຼອດ ໗ ວັນ

[๙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຫຍ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຫຍ້າ

[๑๐] ໃນກັບທີ ๖๕ ນັບຈາກກັບນີ້ໄປ

ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ພຣະນາມວ່າມ ທັດທະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນະສັນຖາຣະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິນະສັນຖາຣະທາຍະກະເຖຣາປະທານທີ ໘ ຈົບ**

## ๙. ຂັນທະຜຸນລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຂັນທະຜຸນລິຍະເຖຣະ

(ພຣະຂັນທະຜຸນລິຍະເຖຣະ ເມື່ອປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘] ພຣະສະຖູບຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຜຸດສະ
ໄດ້ມີຢູ່ໃນປ່າມະຫາວັນ
ໃນຄັ້ງນັ້ນ ຕົ້ນໄມ້ກໍງອກຂຶ້ນ
ຝູງຊ້າງພາກັນມາຫັກມ້າງ

[໑๙] ຂ້າພະເຈົ້າເຮັດບ່ອນສູງໂນນໃຫ້ຮາບພຽງແລ້ວໄດ້ໃສ່ກ້ອນປູນຂາວ
ຍິນດີດ້ວຍຄຸນຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຜູ້ເປັນທີ່ເຄົາລົບຂອງໂລກທັງ ๓

[໑໔] ໃນກັບທີ ໙໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໃສ່ກ້ອນປູນຂາວ
[໑໕] ໃນກັບທີ ໗໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ ພຣະນາມວ່າ ຊິຕະເສນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຂັນທະຜຸນລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຂັນຖະຜຸນລິຍະເຖຣາປະທານທີ ໓ ຈົບ**

# ໔. ອະໂສກະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະໂສກະປູຊະກະເຖຣະ

(ພຣະອະໂສກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ຄັ້ງນັ້ນ ໄດ້ມີພຣະຣາດຊະອຸທະຍານຢູ່ໃນນະຄອນຕິປຸຣະອັນໜ້າຣື່ນຣົມ
ຂ້າພະເຈົ້າເປັນຄົນຮັກສາພຣະຣາດຊະອຸທະຍານຢູ່ໃນນະຄອນນັ້ນ
ເປັນຄົນຮັບໃຊ້ຂອງພຣະຣາຊາ

[໑໘] ໄດ້ມີພຣະສະຍຳພູພຸດທະເຈົ້າ ຜູ້ມີພຣະຣັດສະໝີ ພຣະນາມວ່າ ປະທຸມະ
ພຣະສາຍາບໍ່ປະລະພຣະອົງຜູ້ເປັນມຸນີ
ຜູ້ປະທັບນັ່ງຢູ່ເທິງດອກບົວຂາວ

[໑໙] ຂ້າພະເຈົ້າເຫັນຕົ້ນອະໂສກມີດອກບານເປັນພວງ ໜ້າເບິ່ງຂະໜາດ
ຈຶ່ງບູຊາພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ປະເສີດ

[໔໐] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໑] ໃນກັບທີ ໗໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ ພຣະນາມວ່າ ອະຣະນັນຊະຫະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອະໂສກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ຢ່າງນີ້

**ອະໂສກະປູຊະກະເຖຣາປະທານທີ ໔ ຈົບ**

# ໕. ອັງໂກລະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັງໂກລະກະເຖຣະ

(ພຣະອັງໂກລະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຂ້າພະເຈົ້າເຫັນຕົ້ນປູ່ ມີດອກບານສະພັ່ງ
ມີດອກສວຍງາມເປັນພວງ
ຈຶ່ງໄດ້ເກັບດອກໄມ້ນັ້ນໄປສູ່ສຳນັກຂອງພຣະພຸດທະເຈົ້າ

[໔໔] ສະໄໝນັ້ນ ພຣະມະຫາມຸນີພຣະນາມວ່າສິດທັດຖະ ຊົງຫຼີກຫຼີກຢູ່
ຂ້າພະເຈົ້າຈຶ່ງຄອຍຖ້າບໍ່ດົນຫຼາຍແລ້ວ ໂຮຍດອກໄມ້ລົງໃນຖ້ຳ

[໔໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] ໃນກັບທີ ໓໖ ນັບແຕ່ພັດທະກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ເທວະຄັດຊິຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັງໂກລະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັງໂກລະກະເຖຣາປະທານທີ ໕ ຈົບ**

# ໖. ກິສະລະຍະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກິສະລະຍະປູຊະກະເຖຣະ

(ພຣະກິສະລະຍະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ສວນດອກໄມ້ຂອງຂ້າພະເຈົ້າໄດ້ມີຢູ່ໃນນະຄອນທະວາຣະວະດີ
ໃນສວນດອກໄມ້ນັ້ນເອງ ມີນ້ຳບໍ່ ແລະຕົ້ນໄມ້ຂຶ້ນງອກງາມ

[໔໙] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ກ້າແຂງດ້ວຍກຳລັງຂອງພຣະອົງ ບໍ່ຊົງພ່າຍແພ້
ພຣະອົງເມື່ອຈະຊົງອະນຸເຄາະຂ້າພະເຈົ້າ ຈຶ່ງສະເດັດໄປໃນອາກາດ

[໕໐] ຂ້າພະເຈົ້າບໍ່ເຫັນອັນໃດ ໆ ອື່ນທີ່ຄວນຈະບູຊາພຣະອົງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເຫັນແຕ່ໃບອ່ອນຂອງຕົ້ນອະໂສກ
ຈຶ່ງຈັບໂຍນຂຶ້ນໄປເທິງອາກາດ

[໕໑] ໃບອ່ອນເຫຼົ່ານັ້ນ ຕາມໄປເບື້ອງພຣະປະຣິດສະດາງ
ຂອງພຣະພຸດທະເຈົ້າ ເຊິ່ງກຳລັງສະເດັດໄປ
ຂ້າພະເຈົ້າເຫັນດັ່ງນັ້ນແລ້ວ ຈຶ່ງຕື່ນເຕັ້ນວ່າ
ຊ່າງໜ້າອັດສະຈັນ ຄວາມໂອລານຂອງພຣະພຸດທະເຈົ້າ

[໕໔] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ໃບໄມ້ອ່ອນບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໓] ໃນກັບທີ ໔໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ເອກິດສະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກິສະລະຍະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກິສະລະຍະປູຊະກະເຖຣາປະທານທີ ໖ ຈົບ**

# ໗. ຕິນະທຸກະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິນະທຸກະທາຍະກະເຖຣະ

(ພຣະຕິນະທຸກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ຂ້າພະເຈົ້າເປັນລີງ ມີກຳລັງແຂງແຮງ
ທ່ຽວໄປຕາມຮ່ອມພູເຂົາແລະລຳທານ
ໄດ້ເຫັນຕົ້ນໝາກພັບເປັນໝາກ
ຈຶ່ງຫວນຣະລຶກເຖິງພຣະພຸດທະເຈົ້າ ຜູ້ປະເສີດທີ່ສຸດ

[໓໖] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ອອກຄົ້ນຫາພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ຊົງເປັນຜູ້ນຳສັດໂລກ
ຊົງເຖິງບ່ອນສຸດພົບທັງ ໓ ຕະຫຼອດ ໔-໓ ວັນ

[໓໗] ພຣະສາດສະດາຜູ້ປະເສີດໃນໂລກ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ
ຈຶ່ງສະເດັດມາຍັງສຳນັກຂອງຂ້າພະເຈົ້າ
ພ້ອມດ້ວຍພຣະຂີນາສົບຫຼາຍພັນອົງ

[໓໘] ຂ້າພະເຈົ້າເກີດຄວາມປາໂມດແລ້ວ
ຖືໝາກໄມ້ເຂົ້າໄປຖວາຍ ພຣະຜູ້ມີພຣະພາກເຈົ້າຜູ້ສັບພັນຍູ
ປະເສີດກວ່າເຈົ້າລັດທິທັງຫຼາຍ ຊົງຮັບໄວ້ແລ້ວ

[໓໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໐] ໃນກັບທີ ໕໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ອຸປະນັນທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນະທຸກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ຕິນະທຸກະທາຍະກະເຖຣາປະທານທີ ๗ ຈົບ**

## ๘. ຄິຣິເນລະມຸດຖິປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄິຣິເນລະມຸດຖິປູຊະກະເຖຣະ

(ພຣະຄິຣິເນລະມຸດຖິປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໒] ພຣະຜູ້ມີພຣະພາກຊິນນະເຈົ້າພຣະນາມວ່າ ສຸເມທະ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ຊົງຕັ້ງຄວາມພຽນ
ເພື່ອຊົງອະນຸເຄາະໝູ່ຊົນຜູ້ເກີດໃນພາຍຫຼັງ

[໔໓] ຂ້າພະເຈົ້າຈຶ່ງໃຊ້ດອກອັນຊັນຊຽວກຳມືໜຶ່ງ
ບູຊາພຣະພຸດທະເຈົ້າ ພຣະອົງນັ້ນ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່
ເຊິ່ງກຳລັງສະເດັດຈົງກົມຢູ່

[໔໔] ດ້ວຍຈິດທີ່ເຫຼື້ອມໃສນັ້ນ ຂ້າພະເຈົ້າຖືກກຸສົນມູນຕັກເຕືອນແລ້ວ
ຈຶ່ງບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໓໐,໐໐໐ ກັບ

[໔໕] ໃນກັບທີ ໑໔໓ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ສຸເນລະ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ๘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄິຣິເນລະມຸດຖິປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄິຣິເນລະມຸດຖິປູຊະກະເຖຣາປະທານທີ ๘ ຈົບ**

# ๗. ຕິກັນຖິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິກັນຖິປຸບຜິຍະເຖຣະ

(ພຣະຕິກັນຖິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ພຣະຜູ້ມີພຣະພາກເຈົ້າຜູ້ ສະຍຳພູຊິນນະເຈົ້າ
ຜູ້ບໍ່ຊິງພ່າຍແພ້ ພຣະນາມວ່າສຸມັງຄະລະ
ສະເດັດອອກຈາກປ່າໃຫຍ່ ເຂົ້າໄປສູ່ນະຄອນ

[໔໘] ພຣະສຳມາສຳພຸດທະເຈົ້າຜູ້ເປັນມຸນີພຣະອົງນັ້ນ
ສະເດັດທ່ຽວບິນທະບາດແລ້ວ
ສະເດັດອອກຈາກນະຄອນ ຊົງເຮັດພັດຕະກິດສຳເລັດ
ແລ້ວປະທັບຢູ່ໃນປ່າ

[໔໙] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ປະຄອງດອກຄ້າ ๓ ດອກ ບູຊາພຣະພຸດທະເຈົ້າ
ຜູ້ເປັນສະຍຳພູ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕໐] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໑] ໃນກັບທີ ໘໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ອະປະເສລາ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ

[໕໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິກັນຖິປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິກັນຖິປຸບຜິຍະເຖຣາປະທານທີ ๗ ຈົບ**

# ໑໐. ຍູຖິກະປຸບພິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຍູຖິກະປຸບພິຍະເຖຣະ

(ພຣະຍູຖິກະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໓] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຄວນຮັບເຄື່ອງບູຊາ ຊົງມີຈັກຂຸ
ສະເດັດອອກຈາກປ່າໃຫຍ່ ດຳເນີນໄປສູ່ວິຫານ

[໕໔] ຂ້າພະເຈົ້າໃຊ້ມືທັງ ໔ ປະຄອງດອກຄັດເຄົ້າຊັ້ນດີ
ບູຊາພຣະພຸດທະເຈົ້າ
ຜູ້ມີພຣະທະໄທປະກອບດ້ວຍເມດຕາ ຜູ້ຄົງທີ່

[໕໕] ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຂ້າພະເຈົ້າສະເຫວີຍສົມບັດແລ້ວ
ບໍ່ໄປເກີດໃນທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໕໖] ໃນກັບທີ ໕໐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ສະມິດນັນທະນະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໕໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຍູຖິກະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຍູຖິກະປຸບພິຍະເຖຣາປະທານທີ ໑໐ ຈົບ**

**ຕະມາລະປຸບພິຍະວັກທີ ໔໐ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຕະມາລະປຸບຜິຍະເຖຣາປະທານ
໒. ຂັນຖະຜຸນະລິຍະເຖຣາປະທານ
໓. ອັງໂກລະກະເຖຣາປະທານ
໔. ຕິນະທຸກະທາຍະກະເຖຣາປະທານ
໕. ຕິກັນຖິປຸບຜິຍະເຖຣາປະທານ
໖. ຕິນະສັນຖາຣະທາຍະກະເຖຣາປະທານ
໗. ອະໂສກະປູຊະກະເຖຣາປະທານ
໘. ກິສະລະຍະປູຊະກະເຖຣາປະທານ
໙. ຄິຣີເນລະມຸດຖິປູຊະກະເຖຣາປະທານ
໑໐. ຍູຖິກະປຸບຜິຍະເຖຣາປະທານ

**ແລະມີຄາຖາ ໕໙ ຄາຖາ**

**ລວມວັກໄດ້ ໑໐ ວັກ ຄື**

໑. ພິກຂະທາຍີວັກ
໒. ເສເຣີຍຍະວັກ
໓. ສັດຕະວັກ
໔. ສຸປາຣິຈະຣິຍະວັກ
໕. ກຸຕະຊະປຸບຜິຍະວັກ
໖. ມະຫາປະຣິວາຣະວັກ
໗. ໂສພິຕະວັກ
໘. ພັນທຸຊີວະກະວັກ
໙. ກຸມຸທະວັກ
໑໐. ຕະມາລະປຸບຜິຍະວັກ

ທ່ານລວມໄວ້ໃນ ໑໐ ວັກນີ້ມີຄາຖາ ໘໘໘ ຄາຖາ

**ໝວດ ໑໐ ແຫ່ງວັກມີພິກຂະທາຍີວັກເປັນຕົ້ນ ຈົບ**

**໑໐໐ ເລື້ອງ ໝວດທີ ໔ ຈົບບໍລິບູນ**

# ໔໑. ກະນິກາຣະປຸບຜິຍະວັກ

## ໝວດວ່າດ້ວຍພຣະກະນິກາຣະປຸບຜິຍະເປັນຕົ້ນ

## ໑. ກະນິກາຣະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກະນິກາຣະປຸບຜິຍະເຖຣະ

(ພຣະກະນິກາຣະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຄັ້ງນັ້ນ ຂ້າພະເຈົ້າເຫັນຕົ້ນກັນນິກາ
ມີດອກບານສະພັ່ງ
ຈຶ່ງເກັບມາບູຊາພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ
ຜູ້ຂ້າມໂອຄະໄດ້ແລ້ວ ຜູ້ຄົງທີ່

[໒] ໃນກັບທີ ໙໒ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓] ໃນກັບທີ ໓໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດຜາກົດພຣະນາມວ່າ ອະຣຸນະປາລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກະນິກາຣະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ກະນິກາຣະປຸບຜິຍະເຖຣາປະທານທີ ໑ ຈົບ**

# ໘. ມິເນລະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມິເນລະປຸບຜິຍະເຖຣະ

(ພຣະມິເນລະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິຂີ
ມີພຣະສະຫວິວັນດັ່ງຄຳ
ມີພຣະຣັດສະໝີເສີດສາຍດັ່ງດວງອາທິດ
ມີພຣະຫະໄທປະກອບດ້ວຍເມດຕາ ມີພຣະສະຕິ ສະເດັດຂຶ້ນບ່ອນຈົງກົມ

[໖] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ຊົມເຊີຍພຣະຍານທີ່ລ້ຳເລີດແລ້ວ
ຈຶ່ງໄດ້ປະຄອງດອກທຽນຂາວບູຊາພຣະພຸດທະເຈົ້າ

[໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘] ໃນກັບທີ ໘໙ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ສຸເມຄະຄະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມິເນລະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້ແລ

**ມິເນລະປຸບຜິຍະເຖຣາປະທານທີ ໘ ຈົບ**

# ໓. ກິງກະນິກະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກິງກະນິກະປຸບຜິຍະເຖຣະ

(ພຣະກິງກະນິກະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ພຣະຜູ້ມີພຣະພາກເຈົ້າຜູ້ສັບພັນຍູ ຊົງເປັນຜູ້ນຳສັດໂລກ
ຜູ້ເຊັ່ນກັບຄຳມີຄ່າ ຊົງຮ້ອນພຣະວໍຣະກາຍ
ຈຶ່ງສະເດັດລົງນ້ຳ ສົງນ້ຳຢູ່

[໑໑] ຂ້າພະເຈົ້າມີຈິດເບີກບານ ມີໃຈຍິນດີ
ຈຶ່ງໄດ້ປະຄອງດອກກະດິ່ງທອງບູຊາພຣະພຸດທະເຈົ້າພຣະນາມວ່າວິປັດສີ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໑໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໓] ໃນກັບທີ ໔໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າພິມະຣົດ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກິງກະນິກະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກິງກະນິກະປຸບຜິຍະເຖຣາປະທານທີ ໓ ຈົບ**

# ໔. ຕະຣະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕະຣະນິຍະເຖຣະ

(ພຣະຕະຣະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ກໍພຣະຜູ້ມີພຣະພາກເຈົ້າພຣະນາມວ່າອັດຖະທັດສີ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຊົງອົງອາດກວ່ານໍຣະຊົນ
ມີໝູ່ພຣະສາວົກແວດລ້ອມ ສະເດັດໄປສູ່ຝັ່ງແມ່ນ້ຳຄົງຄາ

[໑໖] ແມ່ນ້ຳຄົງຄາມີນ້ຳເຕັມປ່ຽມພຽງຂອບຝັ່ງ
ກາດື່ມກິນໄດ້ ຂ້າມໄດ້ຍາກ
ຂ້າພະເຈົ້າພາພຣະພຸດທະເຈົ້າຜູ້ສູງສຸດແຫ່ງເທວະດາແລະມະນຸດ
ແລະໝູ່ພິກຂຸສົ່ງຂ້າມ

[໑໗] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການພາພຣະພຸດທະເຈົ້າສົ່ງຂ້າມ (ແມ່ນ້ຳ)

[໑໘] ໃນກັບທີ ໑໑໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໕ ຊາດ
ພຣະນາມວ່າສັບໂພພະວະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໙] ໃນພົບສຸດທ້າຍ ຂ້າພະເຈົ້າເກີດໃນຕະກູນພາມ
ໄດ້ອອກບວດໃນສາດສະໜາຂອງພຣະສາດສະດາ ພ້ອມກັບສະຫາຍ ໓ ຄົນ

[໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕະຣະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕະຣະນິຍະເຖຣາປະທານທີ ໔ ຈົບ**

# ໕. ນິກຄຸນທິປູບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນິກຄຸນທິປູບຜິຍະເຖຣະ

(ພຣະນິກຄຸນທິປູບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑] ຂ້າພະເຈົ້າເປັນຄົນວັດໄດ້ປະຄອງດອກເຄືອເຂົາບູຊາ
ພຣະຜູ້ມີພຣະພາກພຸດທະເຈົ້າພຣະນາມວ່າ ວິປັດສີ

[໔໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໓] ໃນກັບທີ ໓໕ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ມີພຣະນາມວ່າມະຫາປະຕາປະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນິກຄຸນທິປູບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ນິກຄຸນທິປູບພິຍະເຖຣາປະທານທີ ໕ ຈົບ**

## ໖. ອຸທະກະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸທະກະທາຍະກະເຖຣະ

(ພຣະອຸທະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງ
ກ່າວວ່າ)

[໔໕] ຂ້າພະເຈົ້າໄດ້ເຫັນພຣະຜູ້ມີພຣະພາກເຈົ້າຜູ້ສະງົບ
ຜ່ອງໃສບໍ່ຂຸ່ນມົວ ສະເຫວີຍຢູ່
ຈຶ່ງໄດ້ໃຊ້ໝໍ້ຕັກນໍ້າຖວາຍແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ

[໔໖] ວັນນີ້ ຂ້າພະເຈົ້າເປັນຜູ້ບໍ່ເສົ້າໝອງ
ປາສະຈາກມົນທິນ ສິ້ນຄວາມສົງໄສ
ຜົນຍ່ອມເກີດແກ່ຂ້າພະເຈົ້າໃນພົບທີ່ເກີດຢູ່

[໔໗] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍນໍ້າໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍນໍ້າ

[໔໗] ໃນກັບທີ ໖໑ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ວິມະລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸທະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸທະກະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ສະລະມາລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສະລະມາລິຍະເຖຣະ

(ພຣະສະລະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໐] ຂ້າພະເຈົ້າ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ເປັນສາຣະຖີຝຶກນໍຣະຊົນ ຮຸ່ງເຮືອງດັ່ງດອກກັນນິກາ
ປະທັບນັ່ງໃນລະຫວ່າງພູເຂົາ ຊົງເຮັດທິດທັງປວງໃຫ້ສະຫວ່າງສະໄຫວຢູ່

[໓໑] ຄັ້ງນັ້ນ ຂ້າພະເຈົ້າໄດ້ໂກ່ງທະນູ ພາດລູກສອນ
ຍິງດອກໄມ້ຕັດກ້ານແລ້ວນໍາໄປບູຊາພຣະພຸດທະເຈົ້າ

[໓໔] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໓] ໃນກັບທີ ໕໑ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າຊຸຕິນທະຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະລະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະລະມາລິຍະເຖຣາປະທານທີ ໗ ຈົບ**

# ໘. ໂກຣັນທະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂກຣັນທະປຸບຜິຍະເຖຣະ

(ພຣະໂກຣັນທະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ຂ້າພະເຈົ້າໄດ້ເຫັນຮອຍພຣະບາດ
ເຊິ່ງປະດັບດ້ວຍເຄື່ອງປະດັບຄືກົງຈັກ
ທີ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ຊົງຢຽບໄວ້
ຈຶ່ງຍ່າງນຳຮອຍພຣະບາດໄປ

[໓໖] ຂ້າພະເຈົ້າໄດ້ເຫັນຕົ້ນທອນໄກ່ ມີດອກບານ
ຈຶ່ງນຳໄປບູຊາພ້ອມທັງຮາກ ມີຈິດຮ່າເຣິງເບີກບານ
ຈຶ່ງໄດ້ໄຫວ້ຮອຍພຣະບາດທີ່ລ້ຳເລີດ

[໓໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໘] ໃນກັບທີ ໕໗ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ວິຕະມະລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂກຣັນທະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂກຣັນທະປຸບພິຍະເຖຣາປະທານທີ ໗ ຈົບ**

## ໙. ອາທານະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອາທານະທາຍະກະເຖຣະ

(ພຣະອາທານະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຂ້າພະເຈົ້າຖວາຍຕົນບາດແດ່ ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ສິຂີ ຜູ້ເປັນເຜົ່າພັນຂອງໂລກ
ຂ້າພະເຈົ້າໄດ້ຄອງພື້ນແຜ່ນດິນນີ້ໄວ້ທັງໝົດ

[໔໑] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຊົງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໔໒] ໃນກັບທີ ໒໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ
ພຣະນາມວ່າ ສະມັນຕະວະນະ ມີພະລານຸພາບຫຼາຍ

[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາທານະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາທານະທາຍະກະເຖຣາປະທານທີ ໙ ຈົບ**

# ໑໐. ປາປະນິວາຣິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປາປະນິວາຣິຍະເຖຣະ

(ພຣະປາປະນິວາຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໔] ກໍຂ້າພະເຈົ້າມີຈິດຜ່ອງໃສ ໄດ້ຖວາຍຮົ່ມຄັນໜຶ່ງ
ແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ
ຜູ້ເປັນເທບຍິ່ງກວ່າເທບ ຜູ້ຄົງທີ່
[໘໕] ຂ້າພະເຈົ້າກັ້ນບາບແລ້ວ ສ້າງກຸສົນໃຫ້ເຖິງພ້ອມແລ້ວ
ເທວະດາທັງຫຼາຍກໍໄດ້ກັ້ນຮົ່ມໄວ້ໃນອາກາດ
ນີ້ເປັນຜົນແຫ່ງບຸບພະກຳ
[໘໖] ຈິດດວງສຸດທ້າຍຂອງຂ້າພະເຈົ້າຍ່ອມແລ່ນໄປ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຊົງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ
[໘໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຮົ່ມໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຮົ່ມ
[໘໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໘ ຊາດ
ມີພຣະນາມວ່າ ມະຫານິທານະ
ຊົງເປັນໃຫຍ່ໃນໝູ່ຊົນ

[໘໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປາປະນິວາຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປາປະນິວາຣິຍະເຖຣາປະທານທີ ໑໐ ຈົບ**

**ກະນິກາຣະປຸບຜິຍະວັກທີ ໔໑ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື



**ມີຄາຖາ ໔໗ ຄາຖາ**

# ໔໘. ທັດຖິວັກ

## ໝວດວ່າດ້ວຍພຣະທັນຖິເປັນຕົ້ນ

## ໑. ທັດຖິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທັດຖິທາຍະກະເຖຣະ

(ພຣະທັດຖິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ຖວາຍຊ້າງເຊືອກເຊິ່ງປະເສີດ ມີງາງາມ
ຄວນເປັນຣາດຊະພາຫະນະແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ຄົງທີ່

[໔] ຂ້າພະເຈົ້າບັນລຸສັນຕິບົດອັນເປັນປະໂຫຍດສູງສຸດອັນປະເສີດ
ຍ້ອນຂ້າພະເຈົ້າໄດ້ຖວາຍຊ້າງແດ່ພຣະຜູ້ມີພຣະພາກເຈົ້າ
ຜູ້ສະແຫວງຫາປະໂຫຍດເກື້ອກູນແກ່ສັດໂລກທັງປວງ

[໓] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຊ້າງໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຊ້າງ

[໔] ໃນກັບທີ ກ໗ (ນັບຈາກກັບນີ້ໄປ)

ໄດ້ເປັນພຣະເຈົ້າຈັກກະພັດ ໑໗ ຊາດ
ພຣະນາມວ່າ ສະມັນຕະປາສາທິກະ ມີພະລານຸພາບຫຼາຍ

[໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທັດຖິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທັດຖິທາຍະກະເຖຣາປະທານທີ ໑ ຈົບ**

# ໔. ປານະທິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປານະທິທາຍະກະເຖຣະ

(ພຣະປານະທິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖] ຂ້າພຣະອົງໄດ້ຖວາຍເກີບແດ່ ພຣະຜູ້ມີພຣະພາກເຈົ້າ
ຜູ້ປະທັບຢູ່ໃນປ່າ ຊົງເຂົ້າຊານ ມີພຣະຫະໄທປະກອບດ້ວຍເມດຕາ
ມີເດດ ຊົງທຳ ຊົງອົບຣົມພຣະອົງແລ້ວ

[໗] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ດ້ວຍຜົນກຳນັ້ນ ຂ້າພຣະອົງຈຶ່ງໄດ້ໃຊ້ສອຍຍານທິບ
ນີ້ເປັນຜົນແຫ່ງບຸບພະກຳ

[໘] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພຣະອົງໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເກີບຄູ່ໜຶ່ງ
[໙] ໃນກັບທີ ໗໗ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດ ໘ ຊາດ
ພຣະນາມວ່າ ສຸຍານະ ມີພະລານຸພາບຫຼາຍ
[໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປານະທິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປານະທິທາຍະກະເຖຣາປະທານທີ ໘ ຈົບ**

## ໙. ສັດຈະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັດຈະສັນຍະກະເຖຣະ

(ພຣະສັດຈະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ເວດສະພູ
ມີໝູ່ພິກຂຸແວດລ້ອມ ຊົງສະແດງອະຣິຍະສັດຊ່ອຍມະຫາຊົນໃຫ້ສະງົບເຢັນ

[໑໒] ຂ້າພະເຈົ້າເຖິງຄວາມເປັນຄົນໜ້າສົງສານຢ່າງຍິ່ງ
ໄດ້ໄປສູ່ບ່ອນປະຊຸມ ນັ່ງຟັງທຳຂອງພຣະສາດສະດາ

[໑໓] ຂ້າພະເຈົ້າ ເມື່ອຟັງທຳຂອງພຣະສາດສະດານັ້ນແລ້ວ
ເມື່ອຕາຍໄດ້ໄປເກີດໃນເທວະໂລກ ຢູ່ໃນເທບບຸຣີນັ້ນຕະຫຼອດ ໓໐ ກັບ

[໑໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງສັດຈະສັນຍາ (ການໄດ້ຄວາມຊົງຈຳໃນສັດຈະ)

[໑໕] ໃນກັບທີ ໔໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ມີພຣະນາມວ່າ ເອກະຜຸດສິຕະ
ຊົງເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັດຈະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດຈະສັນຍະກະເຖຣາປະທານທີ ໙ ຈົບ**

# ໔. ເອກະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກະສັນຍະກະເຖຣະ

(ພຣະເອກະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ຂ້າພະເຈົ້າໄດ້ເຫັນຜ້າບັງສຸກູນຂອງພຣະສາດສະດາ
ແຂວນຢູ່ເທິງປາຍໄມ້ ຈຶ່ງໄດ້ປະຄອງອັນຊະລີໄຫວ້ຜ້າບັງສຸກູນ

[໑໘] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໙] ໃນກັບທີ ໘໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ມີພຣະນາມວ່າອະມິຕາພະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະສັນຍະກະເຖຣາປະທານທີ ໔ ຈົບ**

# ໕. ຣັງສິສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຣັງສິສັນຍະກະເຖຣະ

(ພຣະຣັງສິສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໒໑] ພຣະພຸດທະເຈົ້າຜູ້ມີພຣະຣັດສະໝີຣຸ່ງເຮືອງ
ເໝືອນດວງອາທິດອຸໄທແລະດວງຈັນ
ອົງອາດດັ່ງເສືອໂຄ່ງ ມີຊາດຕະກູນປະເສີດ
ປະທັບຢູ່ໃນລະຫວ່າງພູເຂົາ

[໔໘] ອານຸພາບຂອງພຣະພຸດທະເຈົ້ານັ້ນ
ຮຸ່ງເຮືອງຢູ່ໃນລະຫວ່າງພູເຂົາ
ຂ້າພະເຈົ້າກະທຳຈິດໃຫ້ເຫຼື້ອມໃສໃນພຣະອັດສະໝີແລ້ວ
ບັນເທີງຢູ່ໃນສະຫວັນຕະຫຼອດໜຶ່ງກັບ

[໔໙] ໃນກັບທີ່ເຫຼືອ ຂ້າພະເຈົ້າພ່ຳເພັງກຸສົນດ້ວຍຈິດທີ່ເຫຼື້ອມໃສນັ້ນ
ແລະດ້ວຍການຣະລຶກເຖິງພຣະພຸດທະເຈົ້າ

[໔໘] ໃນກັບທີ ໓໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໄດ້ຄວາມຊົງຈຳໃນພຣະພຸດທະເຈົ້າ

[໔໕] ໃນກັບທີ ໕໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ມີພຣະນາມວ່າ ສຸຊາຕະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຣັງສີສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຣັງສີສັນຍະກະເຖຣາປະທານທີ ໕ ຈົບ**

## ໖. ສັນທິຕະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັນທິຕະເຖຣະ

(ພຣະສັນທິຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ຂ້າພະເຈົ້າຫວນຣະລຶກຂຶ້ນໄດ້ຄວາມຊົງຈຳຢ່າງໜຶ່ງ
ເຊິ່ງເປັນໄປໃນພຣະພຸດທະເຈົ້າ
ຢູ່ຕົ້ນອັດສັດຖະພຶກ ມີປະກາຍຂຽວສົດ ງອກງາມດີ

[໔໘] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ

ຍ້ອນອຳນາດແຫ່ງຄວາມຊົງຈຳນັ້ນ
ຂ້າພະເຈົ້າຈຶ່ງໄດ້ບັນລຸຄວາມສິ້ນອາສະວະ

[໔໙] ໃນກັບທີ ໑໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ອະນິດທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັນທິຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັນທິຕະເຖຣາປະທານທີ ໖ ຈົບ**

## ໗. ຕາລະວັນຕະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕາລະວັນຕະທາຍະກະເຖຣະ

(ພຣະຕາລະວັນຕະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າໄດ້ຖວາຍວີໃບຕານແດ່ ພຣະພຸດທະເຈົ້າພຣະນາມວ່າ ຕິດສະ
ຜູ້ຊົງມີທິບພະຈັກຂຸ ເພື່ອຕ້ອງການໃຫ້ດັບຄວາມຮ້ອນໃນລະດູຮ້ອນ
ເພື່ອໃຫ້ຄວາມຮ້ອນຮົນສະງົບໄປ

[໕໒] ຂ້າພະເຈົ້າໄດ້ດັບໄຟຄືຣາຄະ ໄຟຄືໂທສະ ແລະໄຟຄືໂມຫະ
ທີ່ຍິ່ງກວ່າຄວາມຮ້ອນນັ້ນຢ່າງສະນິດ
ນີ້ເປັນຜົນແຫ່ງການຖວາຍວີໃບຕານ

[໕໓] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໕໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ

ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍວິໃບຕານ

[໓໕] ໃນກັບທີ ໖໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ມະຫາຣາມ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕາລະວັນຕະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕາລະວັນຕະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ອັກກັນຕະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອັກກັນຕະສັນຍະກະເຖຣະ

(ພຣະອັກກັນຕະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງ
ກ່າວວ່າ)

[໓໗] ຂ້າພະເຈົ້າຈັບຜ້າສາດົກຜືນນ້ອຍ (ຜ້າອັດບາດ)
ໃນຜ້າຫົ່ມຂອງພຣະອຸປັດຊາ
ກຳລັງພ່ຳສຶກສາມົນ ເພື່ອບັນລຸວິຊາສູນຝີ

[໓໘] ໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ຕິດສະ ຜູ້ປາສະຈາກທຸລິຄືກິເລດ
ຜູ້ສົມຄວນຮັບເຄື່ອງບູຊາ ຜູ້ອົງອາດ ຜູ້ປະເສີດ ຜູ້ລ້ຳເລີດ
ຜູ້ຕັດສະຮູ້ດີແລ້ວ ເໝືອນພະຍາຄົດຊະສານໂຕປະເສີດ

[໓໙] ຜູ້ເປັນນໍຣະຊົນສູງສຸດ ຜູ້ລ້ຳເລີດ ຊົງມີຄວາມພຽນຫຼາຍ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ຊົງຢຽບຜ້າສາດົກຜືນນ້ອຍທີ່ຂ້າພະເຈົ້າປູໄວ້

[໔໐] ເມື່ອຂ້າພະເຈົ້າໄດ້ເຫັນພຣະອົງຜູ້ສ່ອງແສງສະຫວ່າງໃນໂລກ

ປາສະຈາກມົນທິນ ດັ່ງດວງຈັນ (ໃນວັນເພັງ)
ຈຶ່ງໄດ້ຖວາຍອະພິວາດພຣະບາດຂອງພຣະສາດສະດາດ້ວຍຈິດທີ່ຜ່ອງໃສ

[໔໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜ້າສາດົກຜືນນ້ອຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າສາດົກຜືນນ້ອຍ

[໔໒] ໃນກັບທີ ໓໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ມີພຣະນາມວ່າ ສຸນັນທະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັກກັນຕະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ອັກກັນຕະສັນຍະກະເຖຣາປະທານທີ ๘ ຈົບ**

## ໙. ສັບປິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັບປິທາຍະກະເຖຣະ

(ພຣະສັບປິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ຂ້າພະເຈົ້ານັ່ງຢູ່ໃນຜາສາດຫຼັງປະເສີດ ມີໝູ່ນາຣີແວດລ້ອມ
ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ສະຫງົບ ຊົງພຣະປະຊວນ ຈຶ່ງນິມົນເຂົ້າເຮືອນ

[໔໕] ພຣະອົງຜູ້ມີຄວາມພຽນຫຼາຍ ຜູ້ເປັນເທບຍິ່ງກວ່າເທບ
ຊົງອົງອາດກວ່ານໍຣະຊົນ ສະເດັດເຂົ້າໄປແລ້ວ
ຂ້າພະເຈົ້າໄດ້ຖວາຍເນີຍໃສ ແລະນ້ຳມັນແດ່ ພຣະພຸດທະເຈົ້າ
ພຣະນາມວ່າ ສິດທັດຖະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໖] ຂ້າພະເຈົ້າໄດ້ເຫັນພຣະອົງມີຄວາມກະວົນກະວາຍສະຫງົບຣະງັບ
ມີອິນຊີຄືພຣະພັກຜ່ອງໃສ

ຈຶ່ງຖວາຍອະພິວາດພຣະບາດຂອງພຣະສາດສະດາ
ແລ້ວໃຫ້ປະກາດໄປໃນນະຄອນ

[໔໗] ພຣະຊິນນະເຈົ້າຜູ້ເຖິງທີ່ສຸດແຫ່ງລິດ ຊົງເຫັນຂ້າພະເຈົ້າຜູ້ເຫຼື້ອມໃສ
ຈຶ່ງສະເດັດເຫາະຂຶ້ນສູ່ນະພາກາດ ດັ່ງພະຍາຫົງໃນທ້ອງຟ້າ

[໔໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເນີຍໃສແລະນ້ຳມັນ

[໔໙] ໃນກັບທີ ໑໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ທຸຕິເທບ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັບປິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັບປິທາຍະກະເຖຣາປະທານທີ ໙ ຈົບ**

## ໑໐. ປາປະນິວາຣິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປາປະນິວາຣິຍະເຖຣະ

(ພຣະປາປະນິວາຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າແຜ້ວຖາງສະຖານທີ່ຍ່າງຈົງກົມຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ປິຍະທັດສີ ມຸງບັງດ້ວຍໄມ້ອໍ້ ປ້ອງກັນລົມແລະແດດ

[໕໒] ຂ້າພະເຈົ້າພ່ຳເພັງກຸສົນໃຫ້ເຖິງພ້ອມເພື່ອຕ້ອງການເວັ້ນຈາກບາບ
ຕັ້ງຄວາມພຽນໃນສາດສະໜາຂອງພຣະສາດສະດາເພື່ອລະກິເລດທັງຫຼາຍ

[໕໓] ໃນກັບທີ ໑໑ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ຜາກົດພຣະນາມວ່າ ອັກຄິເຕຊະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປາປະນິວາຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປາປະນິວາຣິຍະເຖຣາປະທານທີ ໑໐ ຈົບ**

**ຫັດຖິວັກທີ ໔໘ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຫັດຖິທາຍະກະເຖຣາປະທານ
໒. ສັດຈະສັນຍະກະເຖຣາປະທານ
໕. ຣັງສີສັນຍະກະເຖຣາປະທານ
໗. ຕາລະວັນຕະທາຍະກະເຖຣາປະທານ
໙. ສັບປິທາຍະກະເຖຣາປະທານ
໘. ປານະທິທາຍະກະເຖຣາປະທານ
໔. ເອກະສັນຍະກະເຖຣາປະທານ
໖. ສັນທິຕະເຖຣາປະທານ
໘. ອັກກັນຕະສັນຍະກະເຖຣາປະທານ
໑໐. ປາປະນິວາຣິຍະເຖຣາປະທານ

**ມີຄາຖາ ໕໔ ຄາຖາ ຢ່າງນີ້ແລ**

# ໔໒. ອາລຳພະນະທາຍະກະວັກ

## ໝວດວ່າດ້ວຍພຣະອາລຳພະນະທາຍະກະເປັນຕົ້ນ

## ໑. ອາລຳພະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອາລຳພະນະທາຍະກະເຖຣະ

(ພຣະອາລຳພະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ຖວາຍຮາວຈັບຂົວແດ່ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ອັດຖະທັດສີ ຜູ້ຈະເລີນທີ່ສຸດໃນໂລກ
ຜູ້ຄົງທີ່ ຊຶ່ງເປັນຈອມແຫ່ງເທວະດາແລະມະນຸດ

[໔]	ຂ້າພະເຈົ້າປົກຄອງແຜ່ນດິນອັນກວ້າງຂວາງຮອດຝັ່ງສາຄອນ
ແຜ່ຄວາມຍິ່ງໃຫຍ່ໄປໃນສັດທັງຫຼາຍ ແລະໃນແຜ່ນດິນ

[໓]	ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໔]	ໃນກັບທີ ໗໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໓ ຊາດ
ພຣະນາມວ່າ ເອກາທັດສິຕະ ມີພະລານຸພາບຫຼາຍ

[໕]	ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອາລໍາພະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາລໍາພະນະທາຍະກະເຖຣາປະທານທີ ໑ ຈົບ**

## ໔. ອະຊິນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະຊິນະທາຍະກະເຖຣະ

(ພຣະອະຊິນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖]	ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າເປັນຄົນຄອຍຖ້າຕ້ອນຮັບໝູ່ຄະນະ ໄດ້ເຫັນພຣະພຸດທະເຈົ້າ
ຜູ້ປາສະຈາກທຸລິຄືກິເລດ ຜູ້ສົມຄວນຮັບເຄື່ອງບູຊາ

[໗]	ຂ້າແຕ່ ພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ຂ້າພຣະອົງໄດ້ຖວາຍແຜ່ນໜັງແດ່ ພຣະພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ເປັນເຜົ່າພັນຂອງໂລກ ດ້ວຍຜົນກໍານັ້ນ

[๗] ข้าพะเจ้าจึ่งได้สะเຫວີຍສົມບັດ ເຜົາກິເລດທັງຫຼາຍໄດ້ແລ້ວ
ຊົງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[๘] ໃນກັບທີ ๓๑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໜັງສັດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໜັງສັດ

[๑๐] ໃນກັບທີ ๕๐ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ພຣະນາມວ່າ ສຸທາຍະກະ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ
[๑๑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ๔ ວິໂມກ ๘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອະຊິນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະຊິນະທາຍະກະເຖຣາປະທານທີ ๘ ຈົບ**

## ๙. ທະເວຣັດຕະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທະເວຣັດຕະນິຍະເຖຣະ

(ພຣະທະເວຣັດຕະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๑๘] ເມື່ອກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ
ໄດ້ເຫັນພຣະພຸດທະເຈົ້າ ຜູ້ປາສະຈາກທຸລີຄືກິເລດ
ຜູ້ສົມຄວນຮັບເຄື່ອງບູຊາ ໃນປ່າດົງທຶບ
[๑๙] ຂ້າພະເຈົ້າຈຶ່ງຖວາຍຕ່ອນຊີ້ນແດ່ພຣະພຸດທະເຈົ້າ
ພຣະນາມວ່າ ວິປັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພະເຈົ້າໄດ້ສະເຫວີຍອິສະຣິຍະຍົດໃນໂລກ (ນີ້) ພ້ອມທັງເທວະໂລກ

[๑๘] ດ້ວຍຜົນແຫ່ງການຖວາຍຊີ້ນນີ້ ຣັດຕະນະຈຶ່ງບັງເກີດແກ່ຂ້າພະເຈົ້າ
ຣັດຕະນະ ๘ ປະການໃນໂລກເກີດແກ່ຂ້າພະເຈົ້າ ເພື່ອບັນລຸທຳໃນປັດຈຸບັນ

[໑໕] ຍ້ອນຜົນແຫ່ງການຖວາຍຊີ້ນ ຂ້າພະເຈົ້າສະເຫວີຍຣັດຕະນະທັງໝົດນັ້ນ
ຄືໂຕຂອງຂ້າພະເຈົ້າອ່ອນນຸ້ມ ແລະປັນຍາຂອງຂ້າພະເຈົ້າກໍລະອຽດເລິກເຊິ່ງ

[໑໖] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຊີ້ນໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຊີ້ນ

[໑໗] ໃນກັບທີ ໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ມີພຣະນາມວ່າ ມະຫາໂຣຫິຕະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທະເວຣັດຕະນີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທະເວຣັດຕະນີຍະເຖຣາປະທານທີ ໓ ຈົບ**

# ໔. ອາຣັກຂະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອາຣັກຂະທາຍະກະເຖຣະ

(ພຣະອາຣັກຂະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໙] ຂ້າພະເຈົ້າໄດ້ໃຫ້ສ້າງແທ່ນໄພທີ (ທີ່ວາງເຄື່ອງສັກກາຣະບູຊາ)
ຖວາຍແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ແລະໄດ້ຖວາຍອາຣັກຂາແດ່ພຣະສຸຄົດເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
[໒໐] ດ້ວຍຜົນກຳພິເສດນັ້ນ ຂ້າພະເຈົ້າຈຶ່ງບໍ່ເຫັນໄພທີ່ໜ້າຫວາດສຽວເລີຍ
ຄວາມສະດຸ້ງຢ້ານກໍບໍ່ມີແກ່ຂ້າພະເຈົ້າຜູ້ເກີດແລ້ວໃນພົບໃດ ໆ
[໒໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໃຫ້ສ້າງແທ່ນໄພທີໄວ້ໃນການກ່ອນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງແທ່ນໄພທີຖວາຍ

[๔๔] ໃນກັບທີ ໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ອະປັດເສນ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[๔๓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາຣັກຂະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາຣັກຂະທາຍະກະເຖຣາປະທານທີ ໔ ຈົບ**

## ๕. ອັບພະຍາທິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອັບພະຍາທິກະເຖຣະ

(ພຣະອັບພະຍາທິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๔๔] ຂ້າພະເຈົ້າໄດ້ຖວາຍໂຮງໄຟແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ໄດ້ຖວາຍບ່ອນຢູ່ ແລະ ເຄື່ອງຮອງຮັບນ້ຳຮ້ອນແກ່ພິກຂຸຜູ້ອາພາດ

[๔๕] ຍ້ອນຜົນກຳນັ້ນໄດ້ເນຣະມິດອັດຕະພາບຂອງຂ້າພະເຈົ້າໄວ້ດີແລ້ວ
ຂ້າພະເຈົ້າຈຶ່ງບໍ່ຮູ້ຈັກຄວາມປ່ວຍໄຂ້ເລີຍ
ນີ້ເປັນຜົນແຫ່ງບຸນກຳ

[๔๖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໂຮງໄຟໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໂຮງໄຟ

[๔๗] ໃນກັບທີ ໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ຊົງເປັນໃຫຍ່ໃນໝູ່ຊົນ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[๔๘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັບພະຍາທິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັບພະຍາທິກະເຖຣາປະທານທີ ໕ ຈົບ**

## ໖. ວະກຸລະປຸບພິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວະກຸລະປຸບພິຍະເຖຣະ

(ພຣະວະກຸລະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໙] ຊົນທັງຫຼາຍ ຮູ້ຈັກຊື່ຂ້າພະເຈົ້າວ່າ ນາຣະທະ
ຮູ້ຈັກຂ້າພະເຈົ້າວ່າກັດສະປະໂດຍໂຄດ
ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ເລີດກວ່າສະມະນະທັງຫຼາຍ ເຊິ່ງເທວະດາສັກກາຣະແລ້ວ

[໕໐] ຊົງໄວ້ເຊິ່ງອະນຸພະຍັນຊະນະ ຜູ້ສົມຄວນຮັບເຄື່ອງບູຊາ
ຂ້າພະເຈົ້າຈຶ່ງຍົກປະຄອງດອກພິກຸນຂຶ້ນບູຊາພຣະພຸດທະເຈົ້າ

[໕໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໒] ໃນກັບທີ ກ໔ ນັບຈາກກັບນີ້ໄປ
ໄດ້ເປັນກະສັດພຣະນາມວ່າ ໂຣມະສະ
ຊົງເຄື່ອງປະດອກໄມ້
ມີຍານ ກຳລັງພົນ ແລະພາຫະນະພຽບພ້ອມ

[໕໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວະກຸລະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວະກຸລະປຸບພິຍະເຖຣາປະທານທີ ໖ ຈົບ**

# ໗. ໂສວັນນະວະຕັງສະກິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂສວັນນະວະຕັງສະກິຍະເຖຣະ

(ພຣະໂສວັນນະວະຕັງສະກິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ຂ້າພະເຈົ້າຍ່າງຢູ່ສວນ ໄດ້ເຫັນພຣະພຸດທະເຈົ້າ
ຊົງເປັນຜູ້ນຳສັດໂລກ ຈຶ່ງໄດ້ຖືມາໄລປະດັບຫົວ
ທີ່ເຮັດດ້ວຍຄຳ ເຊິ່ງປະດິດຢ່າງງົດງາມ

[໓໕] ຂຶ້ນຂີ່ຊ້າງຟ້າວໄປບູຊາພຣະພຸດທະເຈົ້າ
ພຣະນາມວ່າ ສິຂີ ຜູ້ເປັນເຜົ່າພັນຂອງໂລກ

[໓໖] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໗] ໃນກັບທີ ໔໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງ ມີພຣະນາມວ່າ ມະຫາຕາປະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂສວັນນະວະຕັງສະກິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ໂສວັນນະວະຕັງສະກິຍະເຖຣາປະທານທີ ໗ ຈົບ**

# ໘. ມິນຊະວະຕັງສະກິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມິນຊະວະຕັງສະກິຍະເຖຣະ

(ພຣະມິນຊະວະຕັງສະກິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໙] ເມື່ອພຣະຜູ້ມີພຣະພາກເຈົ້າຜູ້ເປັນບ່ອນເພິ່ງຂອງສັດໂລກພຣະນາມວ່າ ສິຂີ
ຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ທຳການບູຊາຕົ້ນໂພທີ່ຫ້ອຍລົງມາດ້ວຍມາໄລປະດັບຫົວ

[໔໐] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ທຳການບູຊາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຕົ້ນໂພ

[໔໑] ໃນກັບທີ ໔໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ເມຄັບພະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມິນຊະວະຕັງສະກິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ມິນຊະວະຕັງສະກິຍະເຖຣາປະທານທີ ໘ ຈົບ**

## ໙. ສຸກະຕາເວລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸກະຕາເວລິຍະເຖຣະ

(ພຣະສຸກະຕາເວລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງດອກໄມ້ມີນາມວ່າ ອະສິຕະ
ໄດ້ຖືພວງມາໄລໄປເພື່ອນ້ອມຖວາຍແດ່ ພຣະຣາຊາ

[໔໔] ຍັງບໍ່ທັນເຖິງພຣະຣາຊາ ກໍໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ຊົງເປັນຜູ້ນຳ ຂ້າພະເຈົ້າມີຈິດຮ່າເຣີງ ເບີກບານ
ໄດ້ຍົກຂຶ້ນບູຊາພຣະພຸດທະເຈົ້າ

[໔໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] ໃນກັບທີ ໔໕ ນັບຈາກກັບນີ້ໄປ

ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ເວພາລະ
ມີກຳລັງຫຼາຍ ມີພະລານຸພາບຫຼາຍ
[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸກະຕາເວລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸກະຕາເວລິຍະເຖຣາປະທານທີ ໙ ຈົບ**

## ໑໐. ເອກະວັນທະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະວັນທະນິຍະເຖຣະ

(ພຣະເອກະວັນທະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໄຫວ້ພຣະພຸດທະເຈົ້າ ຜູ້ປະເສີດທີ່ສຸດພຣະນາມວ່າ ເວດສະພູ
ຜູ້ອົງອາດ ສາມາດ ມີຄວາມພຽນ ຊົງຊະນະວິເສດ
[໔໙] ໃນກັບທີ ๓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍອະພິວາດ
[໕໐] ໃນກັບທີ ໒໔ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ວິກະຕານັນທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໕໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະວັນທະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະວັນທະນິຍະເຖຣາປະທານທີ ໑໐ ຈົບ**

**ອາລຳພະນະທາຍະກະວັກທີ ໔๓ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອາລຳພະນະທາຍະກະເຖຣາປະທານ | ໒. ອະຊິນະທາຍະກະເຖຣາປະທານ |
| ໓. ທະເວຣັດຕະນິຍະເຖຣາປະທານ | ໔. ອາຣັກຂະທາຍະກະເຖຣາປະທານ |
| ໕. ອັບພະຍາທິກະເຖຣາປະທານ | ໖. ອະກຸລະປຸບພິຍະເຖຣາປະທານ |
| ໗. ໂສວັນນະອະຕັງສະກິຍະເຖຣາປະທານ | ໘. ມິນຊະອະຕັງສະກິຍະເຖຣາປະທານ |
| ໙. ສຸກະຕາເວລິຍະເຖຣາປະທານ | ໑໐. ເອກະວັນທະນິຍະເຖຣາປະທານ |

ທ່ານຜູ້ເຫັນປະໂຫຍດທັງຫຼາຍຄິດໄລ່ຄາຖາໄດ້ ໕໕ ຄາຖາ ແນວນີ້ແລ

# ໒໔. ອຸທະກາສະນະທາຍະກະວັກ

## ໝວດວ່າດ້ວຍພຣະອຸທະກາສະນະທາຍະກະເປັນຕົ້ນ

## ໑. ອຸທະກາສະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸທະກາສະນະທາຍະກະເຖຣະ

(ພຣະອຸທະກາສະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າອອກຈາກປະຕູອາຣາມແລ້ວ
ໄດ້ປູແຜ່ນແປ້ນສຳລັບນັ່ງໄວ້
ແລະໄດ້ຕັ້ງນ້ຳສົມ ນ້ຳໃຊ້ໄວ້ ເພື່ອບັນລຸປະໂຫຍດສູງສຸດ

[໒] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປູອາສະນະແລະຕັ້ງນ້ຳໄວ້

[໓] ໃນກັບທີ ໑໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ອະພິສາມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸທະກາສະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸທະກາສະນະທາຍະກະເຖຣາປະທານທີ ໑ ຈົບ**

## ໒. ພາຊະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພາຊະນະທາຍະກະເຖຣະ

(ພຣະພາຊະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງໝໍ້ຢູ່ໃນນະຄອນພັນທຸມະດີ
ຂ້າພະເຈົ້າໄດ້ແບ່ງພາຊະນະຖວາຍແດ່ ພິກຂຸສົງໃນນະຄອນນັ້ນສະເໝີ ໆ
[໖] ໃນກັບທີ ໙໑ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ແບ່ງພາຊະນະຖວາຍພິກຂຸສົງໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພາຊະນະ
[໗] ໃນກັບທີ ໕໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ອະນັນຕະຊະລິ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະພາຊະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພາຊະນະທາຍະກະເຖຣາປະທານທີ ໒ ຈົບ**

## ໓. ສາລະປຸບຜິຍະເຖຣະປະທານ

## ປະຫວັດໃນອະດີດຊາດຂອງພຣະສາລະປຸບຜິຍະເຖຣະ

(ພຣະສາລະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙] ຄັ້ງນັ້ນ ຂ້າພະເຈົ້າເປັນຄົນເຮັດເຂົ້າໜົມຂາຍຢູ່ໃນນະຄອນອະຣຸນະວະດີ
ຂ້າພະເຈົ້າໄດ້ເຫັນພຣະຊິນນະເຈົ້າພຣະນາມວ່າ ສິຂີ
ກຳລັງສະເດັດໄປທາງປະຕູ (ເຮືອນ) ຂອງຂ້າພະເຈົ້າ

[໑໐] ຂ້າພະເຈົ້າມີໃຈຜ່ອງໃສຈຶ່ງຮັບບາດຂອງພຣະພຸດທະເຈົ້າ
ເຊິ່ງສະເດັດມາເຖິງພໍດີແລ້ວໄດ້ຖວາຍດອກສາລະແດ່ພຣະອົງ

[໑໑] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍດອກໄມ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກສາລະ

[໑໒] ໃນກັບທີ ໑໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ອະມິຕັນຊະລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສາລະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສາລະປຸບຜິຍະເຖຣາປະທານທີ ໓ ຈົບ**

# ໔. ກິລັນຊະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກິລັນຊະທາຍະກະເຖຣະ

(ພຣະກິລັນຊະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງຈັກສານຢູ່ໃນຕິວະຣານະຄອນ ໜ້າຣື່ນຣົມ
ໝູ່ຊົນໃນນະຄອນນັ້ນເຫຼື້ອມໃສໃນພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ສ່ອງໂລກໃຫ້ສະຫວ່າງ

[໑໕] ໝູ່ຊົນທ່ຽວສະແຫວງຫາສາດລຳແພນ
ເພື່ອບູຊາພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ຂ້າພະເຈົ້າໄດ້ໃຫ້ສາດລຳແພນແກ່ໝູ່ຊົນນັ້ນຜູ້ກະທຳການບູຊາພຣະພຸດທະເຈົ້າ

[๑๗]    ໃນກັບທີ ๗๔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍສາດລຳແພນ

[๑๘]    ໃນກັບທີ ๘๘ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ຊະລັນທະຣະ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ

[๑๙]    ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ๔ ວິໂມກ ๘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກິລັນຊະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກິລັນຊະທາຍະກະເຖຣາປະທານທີ ๔ ຈົບ**

## ๕. ເວທິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເວທິທາຍະກະເຖຣະ

(ພຣະເວທິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๑๗]    ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຫ້ຊ່າງສ້າງແທ່ນໄພທີໄວ້ທີ່ຕົ້ນໂພ
ເຊິ່ງເປັນຕົ້ນໄມ້ປະເສີດຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ

[๔๐]    ໃນກັບທີ ๗๑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຫ້ຊ່າງສ້າງແທ່ນໄພທີໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງແທ່ນໄພທີ

[๔๑]    ໃນກັບທີ ๑๑ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ສູຣິຍະສະມະ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເວທິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເວທິທາຍະກະເຖຣາປະທານທີ ໕ ຈົບ**

# ໖. ວັນນະກາຣະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະວັນນະກາຣະກະເຖຣະ

(ພຣະວັນນະກາຣະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງທາສີຢູ່ໃນນະຄອນອະຣູນະວະດີ
ໄດ້ແຕ້ມສີຜ້າທີ່ພຣະເຈດີໃຫ້ມີສີຕ່າງ ໆ

[໔໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ແຕ້ມສີຜ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການແຕ້ມສີ

[໔໕] ໃນກັບທີ ໔໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ຈັນທະສະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວັນນະກາຣະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວັນນະກາຣະກະເຖຣາປະທານທີ ໖ ຈົບ**

# ໗. ປິຍາລະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປິຍາລະປຸບຜິຍະເຖຣະ

(ພຣະປິຍາລະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ເມື່ອກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ
ທ່ຽວຢູ່ໃນປ່າດົງທຶບ ເຫັນຕົ້ນໝາກຫາດ
ມີດອກບານສະພັ່ງ ຈຶ່ງເກັບມາໂຮຍລົງໃສ່ທາງຍ່າງ
ຂ້າພະເຈົ້າມີໃຈຜ່ອງໃສ ຮັບບາດຂອງພຣະພຸດທະເຈົ້າ
ເຊິ່ງກຳລັງສະເດັດດຳເນີນຢູ່ທີ່ຫົນທາງ
ແລ້ວໄດ້ຖວາຍດອກໝາກຫາດແດ່ ພຣະອົງ

[໔໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປິຍາລະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ປິຍາລະປຸບຜິຍະເຖຣາປະທານທີ ໗ ຈົບ**

# ໘. ອຳພະຍາຄະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຳພະຍາຄະທາຍະກະເຖຣະ

(ພຣະອຳພະຍາຄະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ຂ້າພະເຈົ້າເປັນຜູ້ສະຫຼາດໃນສິລະປະຂອງຕົນ ໄດ້ເຂົ້າໄປສູ່ປ່າດົງທຶບ
ໄດ້ເຫັນພຣະພຸດທະເຈົ້າກຳລັງສະເດັດດຳເນີນຢູ່ ຈຶ່ງຖວາຍໝາກມ່ວງ

[໓໑] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກມ່ວງ

[໓໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຳພະຍາຄະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຳພະຍາຄະທາຍະກະເຖຣາປະທານທີ ໘ ຈົບ**

## ໗. ຊະຄະຕິກາຣະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຊະຄະຕິກາຣະກະເຖຣະ

(ພຣະຊະຄະຕິກາຣະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໓] ເມື່ອພຣະຜູ້ມີພຣະພາກເຈົ້າຜູ້ເປັນບ່ອນເພິ່ງຂອງໂລກ
ພຣະນາມວ່າ ອັດຖະທັດສີ ຊຶ່ງເປັນນໍຣະຊົນຜູ້ສູງສຸດ
ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ໃຫ້ສ້າງຊານຣອບພຣະສະຖູບ
ອັນປະເສີດຂອງພຣະພຸດທະເຈົ້າ

[໓໔] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງຊານຣອບ

[໓໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຊະຄະຕິກາຣະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຊະຄະຕິກາຣະກະເຖຣາປະທານທີ ໗ ຈົບ**

# ໑໐. ວາສິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະວາສິທາຍະກະເຖຣະ

(ພຣະວາສິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໖] ເມື່ອກ່ອນ ຂ້າພະເຈົ້າເປັນຊ່າງຄຳຢູ່ໃນຕິວະຣານະຄອນທີ່ລ້ຳເລີດ
ຂ້າພະເຈົ້າໄດ້ຖວາຍມິດເຫຼັ້ມໜຶ່ງແດ່ ພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນພຣະສະຍຳພູ ຜູ້ບໍ່ຊິງພ່າຍແພ້

[໓໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍມິດໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍມິດ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະວາສິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວາສິທາຍະກະເຖຣາປະທານທີ ໑໐ ຈົບ**

**ອຸທະກາສະນະທາຍະກະວັກທີ ໘໔ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ອຸທະກາສະນະທາຍະກະເຖຣາປະທານ
໒. ສາລະປຸບຜິຍະເຖຣະປະທານ
໓. ເວທິທາຍະກະເຖຣາປະທານ
໔. ປິຍາລະປຸບຜິຍະເຖຣາປະທານ
໕. ຊະຄະຕິກາຣະກະເຖຣາປະທານ
໖. ພາຊະນະທາຍະກະເຖຣາປະທານ
໗. ກິລັນຊະທາຍະກະເຖຣາປະທາ
໘. ວັນນະກາຣະກະເຖຣາປະທານ
໙. ອຳພະຍາຄະທາຍະກະເຖຣາປະທານ
໑໐. ວາສິທາຍະກະເຖຣາປະທານ

ແລະມີຄາຖາ ໓໘ ຄາຖາ ແນວນີ້ແລ

# ໔໕. ຕູວະຣະທາຍິວັກ

## ໝວດວ່າດ້ວຍພຣະຕູວະຣະທາຍິເປັນຕົ້ນ

## ໑. ຕຸວະຣັດຖິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພdຣະຕຸວະຣັດຖິທາຍະກະເຖຣະ

(ພຣະຕຸວະຣັດຖິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ
ອາໄສຢູ່ໃນປ່າດົງທຶບ ຂ້າພະເຈົ້າໄດ້ເຫັນຖົ່ວແດງນັ້ນແລ້ວ
ຈຶ່ງໄດ້ນຳມາຖວາຍແດ່ ພຣະສົງ

[໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍກ້ອນຖົ່ວແດງ

[໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕຸວະຣັດຖິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

## ໒. ນາຄະເກສະຣິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນາຄະເກສະຣິຍະເຖຣະ

(ພຣະນາຄະເກສະຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔] ຂ້າພະເຈົ້າດຶງສາຍທະນູແລ້ວ ເຂົ້າໄປສູ່ທ່າມກາງປ່າ
ໄດ້ເຫັນຕົ້ນບຸນນາກມີດອກເປັນພວງ ຂຶ້ນຢູ່ໃກ້ທາງຍ່າງ

[໕] ຈຶ່ງໃຊ້ມືທັງ ໒ ປະຄອງ

ທຳອັນຊະລີໄວ້ເໜືອຫົວແລ້ວ
ໄດ້ບູຊາພຣະພຸດທະເຈົ້າພຣະນາມວ່າ ຕິດສະ ຜູ້ເປັນເຜົ່າພັນຂອງໂລກ

[໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗] ໃນກັບທີ ໗໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ມີພຣະນາມວ່າ ສະໂມກະຂະຣະນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນາຄະເກສະຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນາຄະເກສະຣິຍະເຖຣາປະທານທີ ໔ ຈົບ**

# ໕. ນະລິນະເກສະຣິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນະລິນະເກສະຣິຍະເຖຣະ

(ພຣະນະລິນະເກສະຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙] ຂ້າພະເຈົ້າເປັນນົກການ້ຳ ທ່ຽວຢູ່ໃນທ່າມກາງສະທຳມະຊາດ
ຄັ້ງນັ້ນ ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ ຜູ້ເປັນເທບຍິ່ງກວ່າເທບ
ສະເດັດເທາະໄປໃນອາກາດ

[໑໐] ຂ້າພະເຈົ້າມີໃຈຜ່ອງໃສ ຈຶ່ງໃຊ້ຈະງອຍປາກ
ຄາບດອກບົວມາບູຊາພຣະພຸດທະເຈົ້າພຣະນາມວ່າ ຕິດສະ
ຜູ້ເປັນເຜົ່າພັນຂອງໂລກ

[໑໑] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໔] ໃນກັບທີ ໑໓ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ສັດຕະປັດຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນະລິນະເກສະຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນະລິນະເກສະຣິຍະເຖຣາປະທານທີ ໓ ຈົບ**

# ໔. ວິຣະວິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະວິຣະວິປຸບຜິຍະເຖຣະ

(ພຣະວິຣະວິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນໍາສັດໂລກ
ສະເດັດດໍາເນີນໄປພ້ອມດ້ວຍພຣະຂີນາສົບຫຼາຍພັນອົງ
ຂ້າພະເຈົ້າໄດ້ປະຄອງດອກທ້າວຍາຍມ່ອມບູຊາພຣະພຸດທະເຈົ້າ

[໑໕] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວິຣະວິປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວິຣະວິປຸບຜິຍະເຖຣາປະທານທີ ໔ ຈົບ**

# ໕. ກຸຕິທູປະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກຸຕິທູປະກະເຖຣະ

(ພຣະກຸຕິທູປະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ຂ້າພະເຈົ້າເປັນຄົນຮັກສາພຣະຄັນທະກຸດຕິຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ສິດທັດຖະ ຂ້າພະເຈົ້າມີຈິດເຫຼື້ອມໃສ
ອົບພຣະຄັນທະກຸດຕິໃຫ້ຫອມດ້ວຍມືທັງ ໔ ຂອງຕົນ ຕາມການອັນສົມຄວນ

[໑໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການອົບພຣະກຸດຕິ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກຸຕິທູປະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸຕິທູປະກະເຖຣາປະທານທີ ໕ ຈົບ**

# ໖. ປັດຕະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປັດຕະທາຍະກະເຖຣະ

(ພຣະປັດຕະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຂ້າພະເຈົ້າມີການຝຶກຢ່າງດີເລີດ
ໄດ້ຖວາຍບາດແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ຊື່ຕົງ ຜູ້ຄົງທີ່

[໔໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບາດ

[໔໔]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
　　ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັດຕະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັດຕະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ທາຕຸປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທາຕຸປູຊະກະເຖຣະ

(ພຣະທາຕຸປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑]　　ເມື່ອພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນບ່ອນເພິ່ງຂອງໂລກ
　　ພຣະນາມວ່າ ສິດທັດຖະ
　　ຊົງເປັນນໍຣະຊົນຜູ້ສູງສຸດ ສະເດັດດັບຂັນທະປະຣິນິບພານແລ້ວ
　　ຂ້າພະເຈົ້າໄດ້ພຣະທາດອົງໜຶ່ງຂອງພຣະຜູ້ມີພຣະພາກເຈົ້າ
　　ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໔໔]　　ຂ້າພະເຈົ້າໄດ້ເກັບພຣະທາດຂອງພຣະພຸດທະເຈົ້າ
　　ຜູ້ເປັນເຜົ່າພັນແຫ່ງດວງອາທິດນັ້ນໄວ້ບູຊາຕະຫຼອດ ໕ ປີ
　　ເໝືອນບໍາຣຸງພຣະອົງຜູ້ຊົງເປັນນໍຣະຊົນຜູ້ສູງສຸດເຊິ່ງຍັງຊົງພະຊົນຢູ່

[໔໕]　　ໃນກັບທີ ໗໔ ນັບຈາກກັບນີ້ໄປ
　　ຂ້າພະເຈົ້າໄດ້ບູຊາພຣະທາດໄວ້
　　ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
　　ນີ້ເປັນຜົນແຫ່ງການບໍາຣຸງພຣະທາດ

[໔໖]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
　　ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະທາຕຸປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທາຕຸປູຊະກະເຖຣາປະທານທີ ໗ ຈົບ**

# ໗. ສັດຕະສັດຕະລິປຸບຜະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັດຕະສັດຕະລິປຸບຜະປູຊະກະເຖຣະ

(ພຣະສັດຕະສັດຕະລິປຸບຜະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໗] ຄັ້ງນັ້ນ ຂ້າພະເຈົ້າໄດ້ວາງດອກມະລິຊ້ອນ ໆ ດອກໄວ້ເທິງຫົວແລ້ວ
ບູຊາພຣະພຸດທະເຈົ້າພຣະນາມວ່າ ເວດສະພູ ຊຶ່ງເປັນນໍຣະຊົນຜູ້ສູງສຸດ

[໔໘] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະສັດຕະສັດຕະລິປຸບຜະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດຕະສັດຕະລິປຸບຜະປູຊະກະເຖຣາປະທານທີ ໗ ຈົບ**

# ໙. ພິມພິຊາລິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພິມພິຊາລິປຸບຜິຍະເຖຣະ

(ພຣະພິມພິຊາລິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເປັນພຣະສະຍໍາພູ ເປັນບຸກຄົນຜູ້ເລີດ
ຊົງປະກາດສັດຈະ ໔ ສະແດງອະມະຕະບົດ

[໕໑] ຄັ້ງນັ້ນ ຂ້າພະເຈົ້າຮິບໂຮມດອກໝາກກ່ຳຫຼວງໄວ້ຫຼາຍແລ້ວ
ບູຊາພຣະພຸດທະເຈົ້າຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ຄົງທີ່

[໓໘] ໃນກັບທີ ໖໘ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດພຣະນາມຄືກັນວ່າ ກິຍະສະເກສະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໓໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພິມພິຊາລິປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພິມພິຊາລິປຸບພິຍະເຖຣາປະທານທີ ໙ ຈົບ**

## ໑໐. ອຸດທາລະທາຍະກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະອຸດທາລະທາຍະກະເຖຣະ

(ພຣະອຸດທາລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ພຣະປັດເຈກພຸດທະເຈົ້າພຣະນາມວ່າ ກຸກກຸທະ
ຊຶ່ງເປັນພຣະສະຍຳພູ ຜູ້ບໍ່ຊຶ່ງພ່າຍແພ້
ສະເດັດອອກຈາກປ່າໃຫຍ່ແລ້ວ ເຖິງແມ່ນ້ຳໃຫຍ່ຕາມລຳດັບ
[໓໕] ຄັ້ງນັ້ນ ຂ້າພະເຈົ້າມີໃຈເຫຼື້ອມໃສ
ໄດ້ຖືດອກຣາຊະພຶກ (ດອກຄູນ) ມາຖວາຍພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນພຣະສະຍຳພູ ຜູ້ສັງລວມອິນຊີເປັນຢ່າງດີ ຜູ້ຊື່ຕົງ
[໓໖] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກໄມ້
[໓໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸດທາລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸດທາລະທາຍະກະເຖຣາປະທານທີ ໑໐ ຈົບ**

**ຕູວະຣະທາຍິວັກທີ ໔໕ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື



ບັນດິດທັງຫຼາຍນັບຄາຖາໄດ້ ៣໗ ຄາຖາ ແນວນີ້ແລ

# ៤៦. ໂຖມະກະວັກ

## ໝວດວ່າດ້ວຍພຣະໂຖມະກະເປັນຕົ້ນ

## ໑. ໂຖມະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂຖມະກະເຖຣະ

(ພຣະໂຖມະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າຢູ່ໃນເທວະໂລກ
ໄດ້ຟັງທຳຂອງພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ແລ້ວເບີກບານໃຈ ໄດ້ກ່າວຄຳນີ້ວ່າ

[໒] ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ ຂໍນອບນ້ອມແດ່ພຣະອົງ
ຂ້າແຕ່ພຣະອົງຜູ້ເປັນບຸຣຸດສູງສຸດ ຂໍນອບນ້ອມແດ່ພຣະອົງ
ພຣະອົງຊົງສະແດງອະມະຕະບົດ
ຊົງຊ່ອຍຊົນຈຳນວນຫຼາຍໃຫ້ຂ້າມ (ວັດຕະສົງສານ) ໄດ້

[៣] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ກ່າວວາຈາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນ

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂຖມະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂຖມະກະເຖຣາປະທານທີ ໑ ຈົບ**

## ໘. ເອກາສະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກາສະນະທາຍະກະເຖຣະ

(ພຣະເອກາສະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕] ຂ້າພະເຈົ້າກັບໂຂມະທາຍະກະຕ້ອງການຈະສ້າງກຸສົນອັນຍິ່ງໃຫຍ່ໄວ້
ໃນສາດສະໜາຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຈຶ່ງລະເພດເທວະດາມາໃນມະນຸດໂລກນີ້

[໖] ຂ້າພະເຈົ້າມີໃຈຜ່ອງໃສ ໄດ້ຖວາຍພິກສາແກ່ພຣະເຖຣະນາມວ່າ ເທວະລະ
ຜູ້ເປັນສາວົກຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ

[໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບິນທະບາດ

[໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກາສະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກາສະນະທາຍະກະເຖຣາປະທານທີ ໘ ຈົບ**

# ໓. ຈິຕະກະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈິຕະກະປູຊະກະເຖຣະ

(ພຣະຈິຕະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙] ພຣະສຳພຸດທະເຈົ້າພຣະນາມວ່າ ອານັນທະ
ຜູ້ເປັນພຣະສະຍຳພູ ຜູ້ບໍ່ຊິງພ່າຍແພ້
ສະເດັດດັບຂັນທະປະຣິນິບພານແລ້ວໃນປ່າດົງທຶບທີ່ປາສະຈາກມະນຸດ

[໑໐] ຄັ້ງນັ້ນ ຂ້າພະເຈົ້າຈາກເທວະໂລກມາໃນມະນຸດໂລກນີ້
ໄດ້ທຳຈິຕະການທານແລ້ວຖວາຍເພີງພຣະສະຣີຣະໃນບ່ອນນັ້ນ
ແລະໄດ້ກະທຳສັກກາຣະ

[໑໑] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈິຕະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈິຕະກະປູຊະກະເຖຣາປະທານທີ ໓ ຈົບ**

# ໔. ຈຳປະກະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈຳປະກະປຸບຜິຍະເຖຣະ

(ພຣະຈຳປະກະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ວິກະນະ
ໃນທ່າມກາງພູເຂົາລູກນັ້ນ
ມີພຣະສະມະນະຜູ້ອົບຮົມອິນຊີດີແລ້ວ ອາໄສຢູ່

[໑໔] ຂ້າພະເຈົ້າໄດ້ເຫັນພຣະອົງຜູ້ສະງົບຣະງັບ
ຈຶ່ງມີໃຈຜ່ອງໃສ ໄດ້ຖືດອກຈຳປາ ໓ ດອກ ໂຮຍລົງບູຊາ
[໑໕] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈຳປະກະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈຳປະກະປຸບຜິຍະເຖຣາປະທານທີ ໔ ຈົບ**

# ໕. ສັດຕະປາຕະລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັດຕະປາຕະລິຍະເຖຣະ

(ພຣະສັດຕະປາຕະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ຮຸ່ງເຮືອງດັ່ງດອກກັນນິກາ
ປະທັບນັ່ງຢູ່ລະຫວ່າງພູເຂົາ
ຈຶ່ງໄດ້ເກັບດອກແຄຝອຍ ໗ ດອກມາບູຊາພຣະພຸດທະເຈົ້າ
[໑໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັດຕະປາຕະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດຕະປາຕະລິຍະເຖຣາປະທານທີ ໕ ຈົບ**

# ໖. ອຸປາທະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸປາທະນະທາຍະກະເຖຣະ

(ພຣະອຸປາທະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຄັ້ງນັ້ນ ຂ້າພະເຈົ້າມີຊື່ວ່າຈັນທະນະ ເປັນບຸດຂອງພຣະສຳພຸດທະເຈົ້າ
ຂ້າພະເຈົ້າໄດ້ຖວາຍເກີບຄູ່ໜຶ່ງ ດ້ວຍປາຖະໜາວ່າ
ຂໍທ່ານຈົ່ງຊ່ອຍໃຫ້ຂ້າພະເຈົ້າບັນລຸພຣະໂພທິຍານດ້ວຍເທີ້ນ

[໔໑] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເກີບໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເກີບ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸປາທະນະທາຍະກະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸປາທະນະທາຍະກະເຖຣາປະທານທີ ໖ ຈົບ**

# ໗. ມັນຊະຣີປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມັນຊະຣີປູຊະກະເຖຣະ

(ພຣະມັນຊະຣີປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຂ້າພະເຈົ້າເຮັດພຸ່ມດອກໄມ້ແລ້ວ ຍ່າງໄປເທິງຖະໜົນ
ໄດ້ເຫັນພຣະພຸດທະເຈົ້າຜູ້ເລີດກວ່າສະມະນະທັງຫຼາຍ ມີໝູ່ພິກຂຸແວດລ້ອມ

[໔໔] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ແລະມີປີຕິຢ່າງຍິ່ງ
ຈຶ່ງປະຄອງດອກໄມ້ດ້ວຍມືທັງ ໒ ຍົກຂຶ້ນບູຊາພຣະພຸດທະເຈົ້າ

[໔໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໔໖] ໃນກັບທີ ໑໓ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ໂຊຕະຍະ
ເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມັນຊະຣິປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມັນຊະຣິປູຊະກະເຖຣາປະທານທີ ໗ ຈົບ**

## ໘. ປັນນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປັນນະທາຍະກະເຖຣະ

(ພຣະປັນນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ຂ້າພະເຈົ້ານຸ່ງຫົ່ມຜ້າເປືອກໄມ້
ມີໃບໄມ້ທີ່ບໍ່ມີຣົດເຄັມເປັນອາຫານ
ແລະສັງລວມໃນຂໍ້ປະຕິບັດທີ່ປະພຶດຕາມການນິຍົມ
ອາໄສຢູ່ທີ່ພູເຂົາຫິມະພານ

[໔໙] ເມື່ອເຖິງເວລາອາຫານເຊົ້າ ພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ສະເດັດມາຫາຂ້າພະເຈົ້າ ຂ້າພະເຈົ້າເຫຼື້ອມໃສ
ຈຶ່ງໄດ້ຖວາຍອາຫານນັ້ນແດ່ ພຣະພຸດທະເຈົ້າດ້ວຍມືທັງ ໔ ຂອງຕົນ

[໕໐] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໃບໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໃບໄມ້

[໓໑] ໃນກັບທີ ໔໗ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ຍະທັດຖິຍະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປັນນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນນະທາຍະກະເຖຣາປະທານທີ ໘ ຈົບ**

## ໙. ກຸຕິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກຸຕິທາຍະກະເຖຣະ

(ພຣະກຸຕິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໓] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າສະເດັດທ່ຽວໄປຕາມປ່າ
ປະທັບຢູ່ທີ່ເຫງົ້າໄມ້
ຂ້າພະເຈົ້າໄດ້ສ້າງປັນນະສາລາ
ຖວາຍແດ່ ພຣະອົງຜູ້ບໍ່ຊົງພ່າຍແພ້
[໓໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍກຸດຕິໃບໄມ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍກຸດຕິ
[໓໕] ໃນກັບທີ ໓໘ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມະຫາຊົນພາກັນຂະໜານພຣະນາມວ່າອະພິວັດສີ ທຸກ ໆ ຊາດ
[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກຸຕິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸຕິທາຍະກະເຖຣາປະທານທີ ໙ ຈົບ**

# ໑໐. ອັກຄະປຸບພີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັກຄະປຸບພີຍະເຖຣະ

(ພຣະອັກຄະປຸບພີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໗] ຂ້າພະເຈົ້າໄດ້ເຫັນພຣະສຳພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ມີພຣະສະຫວີວັນດັ່ງຄຳ ປະທັບນັ່ງຢູ່ລະຫວ່າງພູເຂົາ
ຮຸ່ງເຮືອງດ້ວຍພຣະຣັດສະໝີເໝືອນກອງເພີງ

[໓໘] ຂ້າພະເຈົ້າຖືດອກບົວ
ເຂົ້າໄປເຝົ້າພຣະອົງຜູ້ເປັນນໍຣະຊົນຜູ້ສູງສຸດ
ມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ບູຊາພຣະພຸດທະເຈົ້າ

[໓໙] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໐] ໃນກັບທີ ໔໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ມິດຕະຄາສະກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັກຄະປຸບພີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັກຄະປຸບພີຍະເຖຣາປະທານທີ ໑໐ ຈົບ**

**ໂຖມະກະວັກທີ ໔໖ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ໂຖມະກະເຖຣາປະທານ
໒. ຈິຕະກະປູຊະກະເຖຣາປະທານ
໓. ສັດຕະປາຕະລິຍະເຖຣາປະທານ
໗. ມັນຊະຣິປູຊະກະເຖຣາປະທານ
໙. ກຸຕິທາຍະກະເຖຣາປະທານ
໔. ເອກາສະນະທາຍະກະເຖຣາປະທານ
໕. ຈຳປະກະປຸບຜິຍະເຖຣາປະທານ
໖. ອຸປາຫະນະທາຍະກະເຖຣາປະທານ
໘. ປັນນະທາຍະກະເຖຣາປະທານ
໑໐. ອັກຄະປຸບຜິຍະເຖຣາປະທານ

**ແລະໃນວັກນີ້ ນັບຄາຖາໄດ້ ໔໑ ຄາຖາ**

# ໔໗. ປະທຸມຸກເຂປະວັກ

## ໝວດວ່າດ້ວຍການວາງດອກປະທຸມຖວາຍເປັນຕົ້ນ

## ໑. ອາກາສຸກຂິປິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອາກາສຸກຂິປິຍະເຖຣະ

(ພຣະອາກາສຸກຂິປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າຖືດອກບົວ ໔ ດອກ ເຂົ້າໄປເຝົ້າພຣະພຸດທະເຈົ້າ
ພຣະນາມວ່າ ສິດທັດຖະ ຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ອົງອາດກວ່ານໍຣະຊົນ ກຳລັງສະເດັດໄປລະຫວ່າງຮ້ານຕະຫຼາດ

[໔] ຂ້າພະເຈົ້າໄດ້ວາງດອກບົວດອກໜຶ່ງໄວ້
ແທບພຣະບາດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ອີກດອກໜຶ່ງຂ້າພະເຈົ້າຈັບໂຍນຂຶ້ນໄປເທິງອາກາດ

[໓] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກໄມ້

[໔] ໃນກັບທີ ໓໔ ນັບຈາກກັບນີ້ໄປ

ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ອັນຕະລິກຂະກອນ
ເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອາກາສຸກຂິປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາກາສຸກຂິປິຍະເຖຣາປະທານທີ ໑ ຈົບ**

## ໘. ເຕລະມັກຂິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເຕລະມັກຂິຍະເຖຣະ

(ພຣະເຕລະມັກຂິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ອົງອາດກວ່ານໍຣະຊົນ ສ ະເດັດດັບຂັນທະປະຣິນິບພານແລ້ວ
ຄັ້ງນັ້ນ ຂ້າພະເຈົ້າໃຊ້ນ້ຳມັນທາທີ່ແທ່ນໄພທີແຫ່ງຕົ້ນໂພ

[໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ທານນ້ຳມັນໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການທານນ້ຳມັນ

[໘] ໃນກັບທີ ໘໔ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ສຸຈະສະວິ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເຕລະມັກຂິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເຕລະມັກຂິຍະເຖຣາປະທານທີ ໘ ຈົບ**

# ໓. ອັດທະຈັນທິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັດທະຈັນທິຍະເຖຣະ

(ພຣະອັດທະຈັນທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ຂ້າພະເຈົ້າໄດ້ຖວາຍອັດທະຈັນໄວ້ທີ່ຕົ້ນໂພອັນປະເສີດ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ

[໑໑] ໃນກັບທີ ໙໒ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາດ້ວຍອັດທະຈັນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຕົ້ນໂພ

[໑໒] ໃນກັບທີ ໒໕ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ເທວະລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັດທະຈັນທິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັດທະຈັນທິຍະເຖຣາປະທານທີ ໓ ຈົບ**

# ໔. ທີປະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທີປະທາຍະກະເຖຣະ

(ພຣະທີປະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ຄັ້ງນັ້ນ ຂ້າພະເຈົ້າເປັນເທບພະບຸດ ລົງມາຍັງແຜ່ນດິນ ມີໃຈເຫຼື້ອມໃສ
ໄດ້ຖວາຍປະທີບ ໕ ດວງ ດ້ວຍມືທັງ ໒ ຂອງຕົນ

[໑໕] ໃນກັບທີ ໙໔ ນັບຈາກກັບນີ້ໄປ

ຂ້າພະເຈົ້າໄດ້ຖວາຍປະທີບໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍປະທີບ

[໑໖] ໃນກັບທີ ໕໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງມີນາມວ່າ ສະມັນຕະຈັກຂຸ
ເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໑໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທີປະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທີປະທາຍະກະເຖຣາປະທານທີ ໔ ຈົບ**

# ໕. ວິລາລິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະວິລາລິທາຍະກະເຖຣະ

(ພຣະວິລາລິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘] ໃນບ່ອນບໍ່ໄກພູເຂົາຫິມະພານມີພູໜ່ວຍໜຶ່ງຊື່ ໂຣມະສະ
ພຣະຜູ້ມີພຣະພາກເຈົ້າຜູ້ສະງົບ ຜູ້ອົບຮົມອິນຊີແລ້ວປະທັບຢູ່ທີ່ຕີນພູເຂົານັ້ນ

[໑໙] ຂ້າພະເຈົ້າໄດ້ຖືມັນມີເສືອໄປຖວາຍແດ່ ພຣະສະມະນະ
ພຣະຜູ້ມີພຣະພາກເຈົ້າ ຊຶ່ງມີຄວາມພຽນຫຼາຍ ຊຶ່ງເປັນພຣະສະຍໍາພູ
ຜູ້ບໍ່ຊຶ່ງພ່າຍແພ້ ຕັດອະນຸໂມທະນາ ວ່າ

[໒໐] ທ່ານມີໃຈຜ່ອງໃສ ຖວາຍມັນມີເສືອແກ່ເຮົາ
ຜົນຈະບັງເກີດແກ່ທ່ານໃນພົບທີ່ທ່ານເກີດ

[໒໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍມັນມີເສືອໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍມັນມີເສືອ

[໔໔]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
　　ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວິລາລິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ວິລາລິທາຍະກະເຖຣາປະທານທີ ໕ ຈົບ**

# ໖. ມັດສະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມັດສະທາຍະກະເຖຣະ

(ພຣະມັດສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓]　　ຄັ້ງນັ້ນ ຂ້າພະເຈົ້າເປັນນົກອອກ
　　ອາໄສຢູ່ໃກ້ຝັ່ງແມ່ນ້ຳຈັນທະພາຄາ
　　ຂ້າພະເຈົ້າໄດ້ຄາບປາໂຕໃຫຍ່ມາຖວາຍ
　　ແດ່ພຣະມຸນີພຣະນາມວ່າສິດທັດຖະ

[໔໔]　　ໃນກັບທີ ໗໔ ນັບຈາກກັບນີ້ໄປ
　　ຂ້າພະເຈົ້າໄດ້ຖວາຍປາໄວ້ໃນຄັ້ງນັ້ນ
　　ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
　　ນີ້ເປັນຜົນແຫ່ງການຖວາຍປາ

[໔໕]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
　　ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມັດສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມັດສະທາຍະກະເຖຣາປະທານທີ ໖ ຈົບ**

# ໗. ຊະວະຫັງສະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຊະວະຫັງສະກະເຖຣະ

(ພຣະຊະວະຫັງສະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๘๓] ຄັ້ງນັ້ນ ຂ້າພະເຈົ້າເປັນພານປ່າອາໄສຢູ່ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ສະເດັດເຫາະໄປໃນອາກາດ

[๘๗] ຂ້າພະເຈົ້າປະຄອງອັນຊະລີແນມເບິ່ງພຣະມະຫາມຸນີຢູ່
ກະທຳຈິດຂອງຕົນໃຫ້ເຫຼື້ອມໃສແລ້ວ
ໄດ້ຖວາຍອະພິວາດພຣະອົງຜູ້ຊົງເປັນຜູ້ນຳສັດໂລກ

[๘๒] ໃນກັບທີ ๗๘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍອະພິວາດພຣະຜູ້ອົງອາດກວ່ານໍຣະຊົນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍອະພິວາດ

[๘๙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ๘ ວິໂມກ ๒
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຊະວະຫັງສະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຊະວະຫັງສະກະເຖຣາປະທານທີ ๗ ຈົບ**

## ๒. ສະລະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສະລະປຸບຜິຍະເຖຣະ

(ພຣະສະລະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๖๐] ຄັ້ງນັ້ນ ຂ້າພະເຈົ້າເປັນກິນນະຣະອາໄສຢູ່ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ຮຸ່ງເຮືອງຜ່ອງໃສດ້ວຍພຣະຣັດສະໝີ

[๖๑] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ແລະມີປີຕິຢ່າງຍິ່ງ
ຈຶ່ງຖືດອກຊ້າງນ້າວມາໂຮຍລົງບູຊາພຣະພຸດທະເຈົ້າພຣະນາມວ່າ ວິປັດສີ

[๖๘] ໃນກັບທີ ๗๑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະລະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະລະປຸບພິຍະເຖຣາປະທານທີ ໘ ຈົບ**

## ໙. ອຸປາຄະຕະທາສະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸປາຄະຕະທາສະນິຍະເຖຣະ

(ພຣະອຸປາຄະຕະທາສະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ມີສະທີ່ສ້າງຢ່າງດີຢູ່ທ່າມກາງພູເຂົາຫິມະພານ
ຂ້າພະເຈົ້າເປັນຜີເສື້ອນ້ຳ ມີນິໄສມັກຢູ່ໃຕ້ (ນ້ຳ) ເປັນຕາຢ້ານ ອາໄສຢູ່ໃນສະນັ້ນ

[໓໕] ພຣະພຸດທະເຈົ້າພຣະນາມວ່າວິປັດສີ ຜູ້ຊົງອະນຸເຄາະ
ປະກອບດ້ວຍພຣະກະລຸນາ ເປັນຜູ້ນຳສັດໂລກ
ພຣະອົງປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງສະເດັດມາໃນສຳນັກຂອງຂ້າພະເຈົ້າ

[໓໖] ຂ້າພະເຈົ້າໄດ້ເຫັນພຣະຜູ້ມີພຣະພາກເຈົ້າຜູ້ມີຄວາມພຽນຫຼາຍ
ຜູ້ເປັນເທບຍິ່ງກວ່າເທບ ອົງອາດກວ່ານໍຣະຊົນ ສະເດັດມາໃກ້
ຈຶ່ງອອກຈາກບ່ອນຢູ່ອາໄສແລ້ວໄດ້ໄຫວ້ພຣະສາດສະດາ

[໓໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໄຫວ້ພຣະສາດສະດາຜູ້ສູງສຸດແຫ່ງມະນຸດຊາດ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໄຫວ້

[໓໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸປາຄະຕະຫາສະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸປາຄະຕະຫາສະນິຍະເຖຣາປະທານທີ ໙ ຈົບ**

## ໑໐. ຕະຣະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕະຣະນິຍະເຖຣະ

(ພຣະຕະຣະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໙] ພຣະສາດສະດາສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ມີພຣະສະຫວີວັນດັ່ງຄຳ ຊົງເປັນຜູ້ນຳ
ມີໝູ່ພິກຂຸແວດລ້ອມປະທັບຢືນຢູ່ທີ່ຝັ່ງແມ່ນ້ຳ

[໔໐] ເຮືອສຳລັບຂ້າມໃນຫ້ວງມະຫັນນົບນັ້ນບໍ່ມີ
ຂ້າພະເຈົ້າຈຶ່ງຂຶ້ນຈາກແມ່ນ້ຳ
ພາພຣະສາດສະດາຜູ້ຊົງເປັນຜູ້ນຳສັດໂລກສົ່ງຂ້າມໄປ

[໔໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າພາພຣະສາດສະດາຜູ້ສູງສຸດກວ່ານໍຣະຊົນສົ່ງຂ້າມ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການພາສົ່ງຂ້າມ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕະຣະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕະຣະນິຍະເຖຣາປະທານທີ ໑໐ ຈົບ**

**ປະທຸມຸກເຂປະວັກທີ ໔໗ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ອາກາສຸກຂິປິຍະເຖຣາປະທານ
໒. ອັດທະຈັນທິຍະເຖຣາປະທານ
໓. ວິລາລິທາຍະກະເຖຣາປະທານ
໗. ຊະວະຫັງສະກະເຖຣາປະທານ
໕. ອຸປາຄະຕະທາສະນິຍະເຖຣາປະທານ
໖. ເຕລະມັກຂິຍະເຖຣາປະທານ
໔. ທີປະທາຍະກະເຖຣາປະທານ
໘. ມັດສະທາຍະກະເຖຣາປະທານ
໙. ສະລະປຸບພິຍະເຖຣາປະທານ
໑໐. ຕະຣະນິຍະເຖຣາປະທານ

**ແລະໃນວັກນີ້ນັບຄາຖາໄດ້ ໔໔ ຄາຖາ**

# ໔໙. ສຸວັນນະພິບໂພຫະນະວັກ

## ໝວດວ່າດ້ວຍການຖວາຍໝອນຄຳເປັນຕົ້ນ

## ໑. ສຸວັນນະພິບໂພຫະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸວັນນະພິບໂພຫະນິຍະເຖຣະ

(ພຣະສຸວັນນະພິບໂພຫະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າເຫຼື້ອມໃສ ໄດ້ຖວາຍອາສະນະຜືນໜຶ່ງ
ແລະໄດ້ຖວາຍໝອນດ້ວຍມືທັງ ໔ ຂອງຕົນ
ເພື່ອບັນລຸປະໂຫຍດສູງສຸດ

[໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝອນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝອນ

[໓] ໃນກັບທີ ໖໓ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ອະສະມະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸວັນນະພິບໂພທະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸວັນນະພິບໂພທະນິຍະເຖຣາປະທານທີ ໑ ຈົບ**

## ໔. ຕິລະມຸດຖິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິລະມຸດຖິຍະເຖຣະ

(ພຣະຕິລະມຸດຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕] ພຣະສາດສະດາຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ຊົງຮູ້ຄວາມຄິດຂອງຂ້າພະເຈົ້າ
ບັນດານກາຍເຂົ້າໄປດ້ວຍມະໂນມະຍິດທິ

[໖] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄຫວ້ພຣະສາດສະດາຜູ້ເປັນບຸຣຸດຜູ້ສູງສຸດ
ເຊິ່ງສະເດັດເຂົ້າມາ ແລ້ວໄດ້ຖວາຍງາກຳມືໜຶ່ງ

[໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍງາກຳມືໜຶ່ງ

[໘] ໃນກັບທີ ໑໖ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ຄັນທິຍະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິລະມຸດຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິລະມຸດຖິຍະເຖຣາປະທານທີ ໔ ຈົບ**

# ໓. ຈັງໂກຕະກິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈັງໂກຕະກິຍະເຖຣະ

(ພຣະຈັງໂກຕະກິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ພຣະສາດສະດາພຣະນາມວ່າ ສິດທັດຖະ
ປະທັບຢູ່ລະຫວ່າງພູເຂົາໃກ້ມະຫາສະມຸດ ຂ້າພະເຈົ້າໄດ້ເຂົ້າໄປເຝົ້າແລ້ວ
ທຳບຸນມີການຂາບໄຫວ້ເປັນຕົ້ນ ໄດ້ຖວາຍຜະອົບດອກໄມ້
[໑໑] ເມື່ອຂ້າພະເຈົ້າຖວາຍຜະອົບດອກໄມ້ແດ່ ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ສິດທັດຖະ ຜູ້ເປັນພຣະສະຍຳພູ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຊົງອະນຸເຄາະແລ້ວ
ຈຶ່ງບັນເທີງຢູ່ໃນສະຫວັນຕະຫຼອດໜຶ່ງກັບ
[໑໘] ໃນກັບທີ ໗໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜະອົບດອກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜະອົບດອກໄມ້
[໑໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຈັງໂກຕະກິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈັງໂກຕະກິຍະເຖຣາປະທານທີ ໓ ຈົບ**

# ໔. ອັບພັນຊະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັບພັນຊະນະທາຍະກະເຖຣະ

(ພຣະອັບພັນຊະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂກນທັນຍະ
ຜູ້ປາສະຈາກຣາຄະ ຜູ້ຄົງທີ່ ມີພຣະຫະໄທບໍ່ຫຍາບ
ບໍ່ມີທຳເຄື່ອງເຮັດໃຫ້ລ້າຊ້າ ມີປົກກະຕິເພ່ງຊານ

[໑໕] ຂ້າພະເຈົ້າໄດ້ຖວາຍຢາຍອດຕາແດ່ ພຣະອົງຜູ້ລ່ວງເລີຍໂມຫະທັງປວງ
ຊົງສະແຫວງຫາປະໂຫຍດເກື້ອກູນແກ່ສັດໂລກທັງມວນ
ຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ຄົງທີ່

[໑໖] ໃນກັບທີຫາປະມານບໍ່ໄດ້ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຢາຍອດຕາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຢາຍອດຕາ

[໑໗] ໃນກັບທີ ໑໕ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ຈິຣັບປະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອັບພັນຊະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັບພັນຊະນະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ເອກັນຊະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກັນຊະລິຍະເຖຣະ

(ພຣະເອກັນຊະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໙] ຂ້າພະເຈົ້າໄດ້ຖວາຍໂອກາດບ່ອນຢູ່
ແດ່ພຣະສະມະນະຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຜູ້ປະທັບນັ່ງເທິງເຄື່ອງປູໃບໄມ້ທີ່ຕິດກັນໃກ້ຕົ້ນໝາກເດື່ອ

[໒໐] ຂ້າພະເຈົ້າປະຄອງອັນຊະລີແລ້ວ
ປູເຄື່ອງປູດອກໄມ້ຖວາຍພຣະຜູ້ມີພຣະພາກເຈົ້ານາມວ່າ ຕິດສະ
ຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ເປັນບ່ອນເພິ່ງຂອງໂລກ ຜູ້ຄົງທີ່

[໒໑] ໃນກັບທີ ໙໒ ນັບຈາກກັບນີ້ໄປ

ຂ້າພະເຈົ້າໄດ້ເຮັດເຄື່ອງປູດອກໄມ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຄື່ອງປູ

[໔໔] ໃນກັບທີ ໑໔ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດພຣະນາມວ່າ ເອກະອັນຊະລິກະ
ເປັນໃຫຍ່ໃນມະນຸດ ມີພະລານຸພາບຫຼາຍ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກັນຊະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກັນຊະລິຍະເຖຣາປະທານທີ ໕ ຈົບ**

## ໖. ໂປຕະຖະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂປຕະຖະທາຍະກະເຖຣະ

(ພຣະໂປຕະຖະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ຂ້າພະເຈົ້າຜາຣົບພຣະສາດສະດາ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ພຣະທຳ ແລະພຣະສົງ
ໄດ້ຖວາຍຜ້າເປືອກໄມ້ໄວ້ໃນພຣະຣັດຕະນະໄຕຣ
ຜູ້ເປັນທັກຂິໄນຍະບຸກຄົນຜູ້ເລີດ

[໔໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າເປືອກໄມ້

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂປຕະຖະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂປຕະຖະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ຈິຕະກະປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຈິຕະກະປູຊະກະເຖຣະ

(ພຣະຈິຕະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໗] ຂ້າພະເຈົ້າທ່ຽວໄປຕາມກະແສນ້ຳ ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ເກັບດອກເຄືອເຂົາ ໗ ດອກ ມາບູຊາເປັນຈິຕະກາທານ

[໘໘] ໃນກັບທີ ໗໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາຈິຕະກາທານໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຈິຕະກາທານ

[໘໙] ໃນກັບທີ ໕໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ປະຕິຊັກຄະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໙໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈິຕະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈິຕະກະປູຊະກະເຖຣາປະທານທີ ໗ ຈົບ**

## ໘. ອາລຸວະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອາລຸວະທາຍະກະເຖຣະ

(ພຣະອາລຸວະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໑] ໃນບ່ອນບໍ່ໄກພູເຂົາຫິມະພານມີແມ່ນ້ຳສາຍໃຫຍ່ໜ້າເບິ່ງ
ໃນບ່ອນໃກ້ແມ່ນ້ຳນັ້ນຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ປາສະຈາກຣາຄະ ມີພຣະຣັດສະໝີສຸກໃສໜ້າເບິ່ງ
ຜູ້ປະກອບໃນຄວາມສະຫງົບຢ່າງຍິ່ງ

[໓໔] ເມື່ອເຫັນແລ້ວ ຂ້າພະເຈົ້າມີຄວາມປະຫຼາດໃຈ
ເຫຼື້ອມໃສ ຈຶ່ງໄດ້ຖວາຍຫົວມັນແກ່ພຣະອົງດ້ວຍມືທັງ ໔ ຂອງຕົນ

[໓໓] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຫົວມັນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຫົວມັນ

[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາລຸວະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາລຸວະທາຍະກະເຖຣາປະທານທີ ໘ ຈົບ**

## ໙. ປຸນທະຣີກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປຸນທະຣີກະເຖຣະ

(ພຣະປຸນທະຣີກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ຄັ້ງນັ້ນ ໄດ້ມີພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຣມະສະ
ຜູ້ເປັນພຣະສະຍໍາພູ ມີພຣະຣັດສະໝີສຸກໃສ
ຂ້າພະເຈົ້າມີໃຈຜ່ອງໃສ ໄດ້ຖວາຍດອກບົວຂາວແດ່ພຣະອົງ

[໓໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍດອກບົວຂາວໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກບົວຂາວ

[໓໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປຸນທະຣີກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸນທະຣີກະເຖຣາປະທານທີ ໙ ຈົບ**

## ໑໐. ຕະຣະນິຍະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະຕະຣະນິຍະເຖຣະ

(ພຣະຕະຣະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗] ຂ້າພະເຈົ້າມີໃຈເຫຼື້ອມໃສ ໄດ້ຮ່ວມມືຊ່ອຍກັນສ້າງຂົວ
ຢູ່ທາງໃຫຍ່ເຊິ່ງບໍ່ຮາບພຽງ ເພື່ອຕ້ອງການໃຫ້ຊາວໂລກຂ້າມ
[໓໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຮ່ວມສ້າງຂົວໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໃຫ້ຮ່ວມ (ສ້າງ) ຂົວ
[໔໐] ໃນກັບທີ ໕໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ສະໂມກະຕະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕະຣະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕະຣະນິຍະເຖຣາປະທານທີ ໑໐ ຈົບ**
**ສຸວັນນະພິບໂພທະນະວັກທີ ໔໘ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື



**ແລະໃນວັກນີ້ນັບຄາຖາໄດ້ ໔໔ ຄາຖາ**

**ພານະວານທີ ໑໑ ຈົບ**

# ໔໙. ປັນນະທາຍະກະວັກ

## ໝວດວ່າດ້ວຍຜູ້ຖວາຍໃບໄມ້ເປັນຕົ້ນ

## ໑. ປັນນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປັນນະທາຍະກະເຖຣະ

(ພຣະປັນນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້ານັ່ງຢູ່ໃນປັນນະສາລາ ບໍລິໂພກຜັກເປັນອາຫານ
ພຣະຜູ້ມີພຣະພາກເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ສະເດັດເຂົ້າມາຍັງປັນນະສາລາ ໃກ້ຂ້າພະເຈົ້າ

[໒] ຂ້າພະເຈົ້າໄດ້ຖວາຍໃບໄມ້ແດ່ ພຣະອົງມີນາມວ່າ ສິດທັດຖະ
ຜູ້ສ່ອງໂລກໃຫ້ສະຫວ່າງສະໄຫວ ຊົງບຳລຸງສັດໂລກທັງປວງ
ປະທັບນັ່ງຢູ່ເທິງເຄື່ອງປູໃບໄມ້

[໓] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໃບໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໃບໄມ້

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປັນນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັນນະທາຍະກະເຖຣາປະທານທີ ໑ ຈົບ**

## ໒. ຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຜະລະທາຍະກະເຖຣະ

(ພຣະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ

ຊຶ່ງສັນໂດດສະເໝີດ້ວຍພູເຂົາສິເນຣຸ ຊຶ່ງໄວ້ເຊັ່ນກັບທໍຣະນີ
ສະເດັດອອກຈາກສະມາທິແລ້ວເຂົ້າມາຫາຂ້າພະເຈົ້າເພື່ອພິກສາ

[๖] ໝາກສົ້ມມໍ ໝາກຂາມປ້ອມ
ໝາກມ່ວງ ໝາກຫວ້າ ໝາກສົ້ມມໍພິເພກ ໝາກກະເບົາ
ໝາກກະບາກ (ຮົກຟ້າ) ໝາກຕູມ ແລະໝາກຜາງ

[๗] ຂ້າພະເຈົ້າມີໃຈຜ່ອງໃສໄດ້ຖວາຍໝາກໄມ້ນັ້ນທຸກຊະນິດ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຊຶ່ງອະນຸເຄາະສັດໂລກທັງປວງ

[๘] ໃນກັບທີ ๙๔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້
[๙] ໃນກັບທີ ๕๗ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ເອກັດຊະ
ສົມບູນດ້ວຍຣັດຕະນະ ๗ ປະການ ມີພະລານຸພາບຫຼາຍ
[๑๐] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ๔ ວິໂມກ ๘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜະລະທາຍະກະເຖຣາປະທານທີ ๘ ຈົບ**

## ๙. ປັດຈຸກຄະມະນີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປັດຈຸກຄະມະນີຍະເຖຣະ

(ພຣະປັດຈຸກຄະມະນີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๑๑] ພຣະຜູ້ມີພຣະພາກເຈົ້າ ຜູ້ອົງອາດກວ່ານໍຣະຊົນ
ກໍາລັງສະເດັດມາເໝືອນພະຍາຣາດຊະສີທ່ອງທ່ຽວໄປໃນປ່າ
ເໝືອນມ້າອາຊາໄນໂຕອົງອາດ ເໝືອນຕົ້ນຮົກຟ້າທີ່ງອກງາມ

[໑໔] ຂ້າພະເຈົ້າມີໃຈຜ່ອງໃສໄດ້ກະທຳການຕ້ອນຮັບ
ພຣະພຸດທະເຈົ້າພຣະນາມວ່າສິດທັດຖະ ຜູ້ສ່ອງໂລກໃຫ້ສະຫວ່າງສະໄຫວ
ຊົງບຳລຸງສັດໂລກທັງປວງ

[໑໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຕ້ອນຮັບພຣະຜູ້ມີພຣະພາກເຈົ້າ ຜູ້ອົງອາດກວ່ານໍຣະຊົນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຕ້ອນຮັບ

[໑໔] ໃນກັບທີ ໔໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງມີພຣະນາມວ່າ ປະຣິວາຣະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໑໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັດຈຸກຄະມະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັດຈຸກຄະມະນິຍະເຖຣາປະທານທີ ໓ ຈົບ**

## ໔. ເອກະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະປຸບຜິຍະເຖຣະ

(ພຣະເອກະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖] ຄັ້ງນັ້ນ ຂ້າພະເຈົ້າເປັນຜີສາດຢູ່ທີ່ປະຕູເມືອງດ້ານທິດໃຕ້
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ມີພຣະຣັດສະໝີຮຸ່ງເຮືອງດັ່ງດວງຈັນ

[໑໗] ຂ້າພະເຈົ້າຈຶ່ງໄດ້ຖວາຍດອກໄມ້ດອກໜຶ່ງແດ່ ພຣະພຸດທະເຈົ້າ
ພຣະນາມວ່າ ວິປັດສີ ຜູ້ເປັນນໍຣະຊົນຜູ້ເລີດ
ຊົງສະແຫວງຫາປະໂຫຍດເກື້ອກູນແກ່ສັດໂລກທັງປວງ
ຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ ຜູ້ຄົງທີ່

[໑໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍດອກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະປຸບຜິຍະເຖຣາປະທານທີ ໔ ຈົບ**

## ໕. ມະຄະວະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມະຄະວະປຸບຜິຍະເຖຣະ

(ພຣະມະຄະວະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໒໐] ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສະຍຳພູ ຜູ້ບໍ່ຊົງພ່າຍແພ້
ພຣະອົງມີອິນຊີຜ່ອງໃສ ບໍ່ຂຸ່ນມົວ
ເຂົ້າສະມາທິຢູ່ໃກ້ຝັ່ງແມ່ນ້ຳນັມມະທາ
[໒໑] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ເປັນພຣະສະຍຳພູ ຜູ້ບໍ່ຊົງພ່າຍແພ້ແລ້ວ ເຫຼື້ອມໃສ ມີໃຈຍິນດີ
ໄດ້ບູຊາພຣະອົງດ້ວຍດອກມະຄະວະ (ດອກແຊ່ມ້າພຣະອິນ)
[໒໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໒໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມະຄະວະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມະຄະວະປຸບຜິຍະເຖຣາປະທານທີ ໕ ຈົບ**

# ໖. ອຸປັດຖາຍິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸປັດຖາຍິກະເຖຣະ

(ພຣະອຸປັດຖາຍິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໔] ພຣະພຸດທະເຈົ້າຜູ້ມະຫານາຄະ ຜູ້ສົມຄວນຮັບເຄື່ອງບູຊາ
ຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ກໍາລັງສະເດັດດໍາເນີນຢູ່ທີ່ຖະໜົນ

[໘໕] ຂ້າພະເຈົ້າໄດ້ມອບໃຫ້ທູນນິມົນແລ້ວ
ຈຶ່ງໄດ້ຖວາຍຄົນອຸປັດຖາກແດ່ ພຣະພຸດທະເຈົ້າພຣະອົງນັ້ນ
ພຣະນາມວ່າ ສິດທັດຖະ ຜູ້ສະແຫວງຫາປະໂຫຍດເກື້ອກູນແກ່ສັດໂລກທັງປວງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໘໖] ພຣະມະຫາມຸນີສໍາມາສໍາພຸດທະເຈົ້າຊົງຮັບແລ້ວຊົງສັ່ງມອບຄືນ
ໄດ້ສະເດັດລຸກຈາກອາສະນະນັ້ນແລ້ວ
ອວ່າຍພຣະພັກສະເດັດຫຼີກໄປທາງທິດຕາເວັນອອກ

[໘໗] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຄົນອຸປັດຖາກໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຄົນອຸປັດຖາກ

[໘໘] ໃນກັບທີ ໕໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ພະລະເສນະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໘໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸປັດຖາຍິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸປັດຖາຍິກະເຖຣາປະທານທີ ໖ ຈົບ**

# ໗. ອະປະທານິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະປະທານິຍະເຖຣະ

(ພຣະອະປະທານິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໐] ຂ້າພະເຈົ້າເຫຼື້ອມໃສແລ້ວ
ໄດ້ສັນເສີນປະຫວັດໃນອະດີດຊາດຂອງພຣະສຸຄົດເຈົ້າທັງຫຼາຍ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ແລະໄດ້ຂາບພຣະຍຸຄົນບາດດ້ວຍຂະໜ່ອມດ້ວຍມືທັງ ໔ ຂອງຕົນ

[໕໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນເສີນປະຫວັດໃນອະດີດຊາດຂອງພຣະສຸຄົດເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະປະທານິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະປະທານິຍະເຖຣາປະທານທີ ໗ ຈົບ**

# ໘. ສັດຕາຫະປັບພະຊິຕະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັດຕາຫະປັບພະຊິຕະເຖຣະ

(ພຣະສັດຕາຫະປັບພະຊິຕະເຖຣະເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໕] ສົງສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຜູ້ທີ່ມະຫາຊົນສັກກາຣະນັບຖືແລ້ວ ເມື່ອກ່ອນ
ຂ້າພະເຈົ້າໄດ້ເຖິງຄວາມວິບັດແຕກຈາກຍາດພີ່ນ້ອງ

[໕໔] ຂ້າພະເຈົ້າເຂົ້າບວດ ກໍເພື່ອຄວາມສະງົບຣະງັບຄວາມພິນາດນັ້ນ
ຍິນດີໃນການບວດນັ້ນໄດ້ພຽງ ໗ ວັນ
ກໍຍ້ອນຄວາມເປັນຜູ້ຕ້ອງການໃນສັດຖຸສາດ

[໓໕] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບວດໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບວດ

[໓໖] ໃນກັບທີ ໖໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໆ ຊາດ
ຜາກົດນາມວ່າ ສຸເນກຂຳມະ
ຊຶ່ງເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໓໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັດຕາທະປັບພະຊິຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດຕາທະປັບພະຊິຕະເຖຣາປະທານທີ ໘ ຈົບ**

# ໙. ພຸດທຸປັດຖາຍິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພຸດທຸປັດຖາຍິກະເຖຣະ

(ພຣະພຸດທຸປັດຖາຍິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໘] ຄັ້ງນັ້ນ ຂ້າພະເຈົ້າ (ແລະ)
ບິດາຂອງຂ້າພະເຈົ້າ (ກໍມີຊື່ວ່າເວທຳພິນິຄືກັນ)
ບິດາຈູງມືຂ້າພະເຈົ້າພາໄປມອບຖວາຍແດ່ ພຣະມະຫາມຸນີ

[໓໙] ພຣະພຸດທະເຈົ້າທັງຫຼາຍຜູ້ຊຶ່ງເປັນຜູ້ນຳຊັ້ນເລີດຂອງໂລກເຫຼົ່ານີ້
ຊຶ່ງມຸ້ງໝາຍຂ້າພະເຈົ້າ ຂ້າພະເຈົ້າເຫຼື້ອມໃສ
ໄດ້ບຳຣຸງພຣະພຸດທະເຈົ້າເຫຼົ່ານັ້ນໂດຍເຄົາລົບດ້ວຍມືທັງ ໔ ຂອງຕົນ

[໔໐] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບຳຣຸງພຣະພຸດທະເຈົ້າທັງຫຼາຍໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບຳຣຸງ

[໔໑] ໃນກັບທີ ໒໓ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ເປັນຈັກກະພັດ ໔ ຊາດ
ພຣະນາມວ່າສະມະນຸປັດຖາກະ ມີພະລານຸພາບຫຼາຍ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພຸດທຸປັດຖາຍິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພຸດທຸປັດຖາຍິກະເຖຣາປະທານທີ ໙ ຈົບ**

## ໑໐. ປຸບພັງຄະມະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປຸບພັງຄະມະນິຍະເຖຣະ

(ພຣະປຸບພັງຄະມະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ພວກຂ້າພະເຈົ້າ ໗໔,໐໐໐ ຄົນ
ບໍ່ມີຄວາມກັງວົນໄດ້ອອກບວດເພື່ອບັນລຸປະໂຫຍດສູງສຸດ
ຂ້າພະເຈົ້າເປັນຫົວໜ້າຂອງຄົນເຫຼົ່ານັ້ນ

[໔໔] ຄົນເຫຼົ່ານັ້ນຍັງມີຣາຄະ (ໂທສະ) ແລະໂມຫະ
ເຫຼື້ອມໃສ ບໍ່ຂຸ່ນມົວ ບຳຣຸງຂ້າພະເຈົ້າຜູ້ຜ່ອງໃສ ໂດຍເຄົາລົບ
ດ້ວຍມືທັງ ໒ ຂອງຕົນ ໆ

[໔໕] ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສະຍຳພູ ຜູ້ຂີນາສົບ
ຊົງຄາຍໂທສະໄດ້ແລ້ວ ກະທຳກິດທີ່ຄວນກະທຳສຳເລັດແລ້ວ ບໍ່ມີອາສະວະ
ບໍ່ຊົງພ່າຍແພ້ ຊົງແຜ່ເມດຕາຈິດໄປ
[໔໖] ພວກຂ້າພະເຈົ້າບຳຣຸງພຣະສຳມາສຳພຸດທະເຈົ້າເຫຼົ່ານັ້ນ
ເປັນຜູ້ມີສະຕິ ສິ້ນຊີວິດແລ້ວ ໄດ້ໄປເກີດເປັນເທວະດາ
[໔໗] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຮັກສາສີນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັງລວມ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະປຸບພັງຄະມະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸບພັງຄະມະນິຍະເຖຣາປະທານທີ ໑໐ ຈົບ**

**ປັນນະທາຍະກະວັກທີ ໔໙ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ປັນນະທາຍະກະເຖຣາປະທານ
໒. ປັດຈຸກຄະມະນິຍະເຖຣາປະທານ
໕. ມະຄະວະປຸບພີຍະເຖຣາປະທານ
໗. ອະປະທານິຍະເຖຣາປະທານ
໙. ພຸດທຸປັດຖາຍິກະເຖຣາປະທານ
໒. ຜະລະທາຍະກະເຖຣາປະທານ
໔. ເອກະປຸບພີຍະເຖຣາປະທານ
໖. ອຸປັດຖາຍິກະເຖຣາປະທານ
໘. ສັດຕາທະປັບພະຊິຕະເຖຣາປະທານ
໑໐. ປຸບພັງຄະມະນິຍະເຖຣາປະທານ

**ແລະທ່ານໄດ້ກ່າວຄາຖາໄວ້ ໔໗ ຄາຖາ**

# ໓໐. ຈິຕະກະປູຊະກະວັກ

## ໝວດວ່າດ້ວຍພຣະຈິຕະກະປູຊະກະະເປັນຕົ້ນ

## ໑. ຈິຕະກະປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຈິຕະກະປູຊະກະເຖຣະ

(ພຣະຈິຕະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຄັ້ງນັ້ນ ຂ້າພະເຈົ້າເປັນພານມີນາມວ່າ ອະຊິຕະ
ປະສົງຈະທໍາການບູຊາ ຈຶ່ງຮີບໂຮມດອກໄມ້ຕ່າງ ໆ ໄວ້

[໒] ຂ້າພະເຈົ້າໄດ້ເຫັນຈິຕະກາທານຂອງພຣະພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ເປັນເຜົ່າພັນຂອງໂລກ ທີ່ກໍາລັງລຸກສະຫວ່າງແຈ້ງຢູ່
ຈຶ່ງນໍາດອກໄມ້ນັ້ນມາໂຮຍລົງໃສ່ຈິຕະກາທານ

[໓] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔] ໃນກັບທີ ໔໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ມີພຣະນາມວ່າ ສຸປັດຊະລິຕະ
ເປັນໃຫຍ່ໃນໝູ່ມະນຸດ ມີພະລານຸພາບຫຼາຍ

[໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຈິຕະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈິຕະກະປູຊະກະເຖຣາປະທານທີ ໑ ຈົບ**

# ໔. ປຸບຜະທາຣະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸບຜະທາຣະກະເຖຣະ

(ພຣະປຸບຜະທາຣະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖] ຂ້າພະເຈົ້ານຸ່ງຜ້າເປືອກໄມ້ ຫົ່ມໜັງສັດ
ອະພິນຍາ ໕ ບັງເກີດແລ້ວ ລູບຄຳດວງຈັນໄດ້

[໗] ຂ້າພະເຈົ້າໄດ້ເຫັນພຣະສາດສະດາພຣະນາມວ່າ ວິປັດສີ
ຜູ້ສ່ອງໂລກໃຫ້ສະຫວ່າງ ເຊິ່ງສະເດັດມາເຖິງສຳນັກຂ້າພະເຈົ້າ
ຂ້າພະເຈົ້າຈຶ່ງຍົກດອກແຄຝອຍຂຶ້ນບູຊາພຣະອົງ

[໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຍົກດອກໄມ້ຂຶ້ນບູຊາ

[໙] ໃນກັບທີ ໘໗ ນັບຈາກກັບນີ້ໄປ

ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າສະມັນຕະທະຣະນະ
ເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປຸບຜະທາຣະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸບຜະທາຣະກະເຖຣາປະທານທີ ໔ ຈົບ**

## ໓. ສັດຕະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັດຕະທາຍະກະເຖຣະ

(ພຣະສັດຕະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑] ຄັ້ງນັ້ນ ບຸດຂອງຂ້າພະເຈົ້າອອກບວດແລ້ວ ນຸ່ງຫົ່ມຜ້າກາສະຍະ
ເຂົ້າບັນລຸຄວາມເປັນພຣະພຸດທະເຈົ້າ ອັນຊາວໂລກບູຊາ
ສະເດັດດັບຂັນທະປະຣິນິບພານແລ້ວ

[໑໒] ຂ້າພະເຈົ້າຄົ້ນຫາບຸດຂອງຕົນໄປທາງເບື້ອງຫຼັງ
ໄປເຖິງຈິຕະກາທານແຫ່ງບຸດຜູ້ຍິ່ງໃຫຍ່ປະຣິນິບພານແລ້ວ

[໑໓] ຂ້າພະເຈົ້າປະຄອງອັນຊະລີໄຫວ້ຈິຕະກາທານທີ່ປ່າຊ້ານັ້ນ
ແລະຍົກສັດຂາວຂຶ້ນບູຊາໃນຄັ້ງນັ້ນ

[໑໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍສັດ

[໑໕] ໃນກັບທີ ໔໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໆ ຊາດ ມີພຣະນາມວ່າ ມະຫານະທະ
ເປັນໃຫຍ່ໃນໝູ່ຊົນ ມີພະລານຸພາບຫຼາຍ

[໑໖]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັດຕະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດຕະທາຍະກະເຖຣາປະທານທີ ໓ ຈົບ**

## ໔. ສັດທະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັດທະສັນຍະກະເຖຣະ

(ພຣະສັດທະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗]	ເມື່ອດວງອາທິດຍັງບໍ່ຂຶ້ນ
ຂ້າພະເຈົ້າໄດ້ມີຄວາມເຫຼື້ອມໃສຢ່າງເຫຼືອລົ້ນວ່າ
ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ມີຜາກົດໃນໂລກ

[໑໘]	ຂ້າພະເຈົ້າໄດ້ຟັງແຕ່ສຽງໃນຄວາມຜາກົດນັ້ນ
ແຕ່ບໍ່ໄດ້ເຫັນພຣະຊິນນະເຈົ້າພຣະອົງນັ້ນ ເຖິງເວລາຈະສິ້ນຊີວິດ
ໄດ້ຣະລຶກເຖິງຄວາມຊົງຈຳໃນພຣະພຸດທະເຈົ້າ

[໑໙]	ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໒໐]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັດທະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດທະສັນຍະກະເຖຣາປະທານທີ ໔ ຈົບ**

# ໕. ໂຄສີສະນິກະເຂປະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂຄສີສະນິກະເຂປະກະເຖຣະ

(ພຣະໂຄສີສະນິກະເຂປະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑] ຂ້າພະເຈົ້າອອກຈາກປະຕູອາຣາມແລ້ວ
ໄດ້ປູ (ກ່າຍ) ໄມ້ຈັນເຫຼືອງໄວ້ (ເພື່ອໃຫ້ສົງຍ່າງ)
ຂ້າພະເຈົ້າໄດ້ສະເຫວີຍກຳຂອງຕົນ
ນີ້ເປັນຜົນແຫ່ງບຸບພະກຳ

[໔໒] ມ້າສິນທົບອາຊາໄນ ເປັນພາຫະນະແລ່ນໄວຄືລົມພັດ
ຂ້າພະເຈົ້າໄດ້ສະເຫວີຍຜົນນັ້ນທັງໝົດ
ນີ້ເປັນຜົນແຫ່ງການປູດ້ວຍໄມ້ຈັນເຫຼືອງ

[໔໓] ໂອ ນໍ! ແມ່ນກຸສົນສົມພານພຽງແຕ່ເລັກໜ້ອຍ
ທີ່ຂ້າພະເຈົ້າເຮັດໄວ້ໃນບຸນເຂດທີ່ດີນີ້ (ກັບ) ໃຫ້ຜົນຫຼາຍແທ້ນໍ
ກຸສົນສົມພານອື່ນບໍ່ເຖິງສ່ຽວແຫ່ງກຸສົນສົມພານ
ທີ່ຂ້າພະເຈົ້າເຮັດໄວ້ໃນພຣະສົງເລີຍ

[໔໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ປູໄມ້ຈັນເຫຼືອງໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປູໄມ້ຈັນເຫຼືອງ

[໔໕] ໃນກັບທີ ໗໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດມີພຣະນາມວ່າ ສຸປະຕິດຖິຕະ
ມີເດດຫຼາຍ ມີພະລານຸພາບຫຼາຍ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະໂຄສີສະນິກະເຂປະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂຄສີສະນິກະເຂປະກະເຖຣາປະທານທີ ໕ ຈົບ**

# ໖. ປະທະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະທະປູຊະກະເຖຣະ

(ພຣະປະທະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໗] ຄັ້ງນັ້ນ ຂ້າພະເຈົ້າເປັນກິນນະຣະອາໄສຢູ່ທີ່ພູເຂົາຫິມະພານ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ມີພຣະຣັດສະໝີຮຸ່ງເຮືອງເໝືອນດວງຈັນ

[໔໘] ເວລານັ້ນ ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ຊົງເປັນຜູ້ນຳສັດໂລກແລ້ວໄດ້ໃຊ້ (ນ້ຳ)
ແກ່ນຈັນແລະເກດສະໜາຫົດລົງໃສ່ພຣະບາດ

[໔໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະບາດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະບາດ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປະທະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທະປູຊະກະເຖຣາປະທານທີ ໖ ຈົບ**

# ໗. ເທສະກິດຕະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເທສະກິດຕະກະເຖຣະ

(ພຣະເທສະກິດຕະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ຄັ້ງນັ້ນ ຂ້າພະເຈົ້າເປັນພານມີນາມວ່າ ອຸປະສາລະກະກະ
ເຂົ້າໄປສູ່ປ່າດົງທຶບ ໄດ້ເຫັນພຣະພຸດທະເຈົ້າຜູ້ເປັນບ່ອນເພິ່ງຂອງສັດໂລກ
ຊົງອົງອາດກວ່ານໍຣະຊົນ

[໓໔] ຜູ້ສົມຄວນຮັບເຄື່ອງບູຊາຂອງຊາວໂລກ
ແລ້ວຈຶ່ງຊາບແທບພຣະຍຸຄົນບາດ
ພຣະພຸດທະເຈົ້າຊົງຮູ້ວ່າ ຂ້າພະເຈົ້າມີຈິດເຫຼື້ອມໃສແລ້ວ ກໍຊົງຫາຍໄປ

[໓໓] ຂ້າພະເຈົ້າອອກຈາກປ່າດົງທຶບແລ້ວ
ຫວນຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ສັນເສີນພູມີພາກນັ້ນແລ້ວ
ບັນເທີງຢູ່ໃນສະຫວັນຕະຫຼອດໜຶ່ງກັບ

[໓໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນເສີນພູມີພາກໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນ

[໓໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເທສະກິດຕະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເທສະກິດຕະກະເຖຣາປະທານທີ ၇ ຈົບ**

## ໘. ສະຣະນະຄະມະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະຣະນະຄະມະນິຍະເຖຣະ

(ພຣະສະຣະນະຄະມະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໖] ຄັ້ງນັ້ນ ຂ້າພະເຈົ້າເປັນນາຍພານເນື້ອອາໄສຢູ່ໃກ້ພູເຂົາຫິມະພານ
ໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່າ ນໍຣະຊົນ

[໓໗] ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າແລ້ວ
ທຳການຂວນຂວາຍຊ່ວຍເຫຼືອ
ໄດ້ເຖິງພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຜູ້ຄົງທີ່ວ່າ ເປັນສະຣະນະ

[໓໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຖິງພຣະພຸດທະເຈົ້າເປັນສະຣະນະ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງສະຣະນະ

[໓໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະຣະນະຄະມະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະຣະນະຄະມະນິຍະເຖຣາປະທານທີ ໘ ຈົບ**

## ໙. ອໍາພະປິນທິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອໍາພະປິນທິຍະເຖຣະ

(ພຣະອໍາພະປິນທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຂ້າພະເຈົ້າເປັນທານົບ (ອະສູນ) ມີນາມຜາກົດວ່າ ໂຣມະສະ
ຂ້າພະເຈົ້າໄດ້ຖວາຍໝາກມ່ວງແດ່ພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກມ່ວງໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກມ່ວງ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອໍາພະປິນທິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອໍາພະປິນທິຍະເຖຣາປະທານທີ ໙ ຈົບ**

# ໑໐. ອະນຸສັງສາວະກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະອະນຸສັງສາວົກເຖຣະ

(ພຣະອະນຸສັງສາວົກເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຂ້າພະເຈົ້າໄດ້ເຫັນພຣະຜູ້ມີພຣະພາກຊິນນະເຈົ້າ
ພຣະນາມວ່າວິປັດສີ ກຳລັງສະເດັດທ່ຽວບິນທະບາດ
ຈຶ່ງໄດ້ຖວາຍພິກສາຈອງໜຶ່ງແດ່ພຣະອົງ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໔໔] ຄັ້ງນັ້ນ ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ຖວາຍອະພິວາດ
(ແລະ) ໄດ້ປະກາດພຣະພຸດທະເຈົ້າໃຫ້ມະຫາຊົນຮູ້
ເພື່ອບັນລຸປະໂຫຍດສູງສຸດ

[໔໕] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ປະກາດໃຫ້ມະຫາຊົນຮູ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປະກາດ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະນຸສັງສາວົກເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະນຸສັງສາວະກະເຖຣາປະທານທີ ໑໐ ຈົບ**
**ຈິຕະກະປູຊະກະວັກທີ ໓໐ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຈິຕະກະປູຊະກະເຖຣາປະທານ
໒. ປຸບຜະທາຣະກະເຖຣາປະທານ
໓. ສັດຕະທາຍະກະເຖຣາປະທານ
໔. ສັດທະສັນຍະກະເຖຣາປະທານ
໕. ໂຄສີສະນິກເຂປະກະເຖຣາປະທານ
໖. ປະທະປູຊະກະເຖຣາປະທານ
໗. ເທສະກິດຕິກະເຖຣາປະທານ
໘. ສະຣະນະຄະມະນິຍະເຖຣາປະທານ
໙. ອຳພະປິນທິຍະເຖຣາປະທານ
໑໐. ອະນຸສັງສາວະກະເຖຣາປະທານ

**ບັນດິດຄິດໄລ່ຄາຖາໄດ້ ໔໗ ຄາຖາ**

## ລວມວັກໄດ້ ໑໐ ວັກ ຄື

| | |
|---|---|
| ໑. ກະນິກາຣະປຸບພີຍະວັກ | ໖. ຫັດຖີວັກ |
| ໒. ອາລຳພະນະທາຍະກະວັກ | ໗. ອຸທະກາສະນະທາຍະກະວັກ |
| ໓. ຕູວະຣະທາຍິວັກ | ໘. ໂຖມະກະວັກ |
| ໔. ປະທຸມຸກເຂປະວັກ | ໙. ສຸວັນນະພິບໂພທະນະວັກ |
| ໕. ປັນນະທາຍະກະວັກ | ໑໐. ຈິຕະກະປູຊະກະວັກ |

ຄາຖາທັງໝົດມີ ໔໕໑ ຄາຖາ
ບັນດິດຜູ້ສະແດງອັດຖະ ຄິດໄລ່ລວມບົດທັງໝົດໄວ້ໄດ້ ໕,໕໗໔ ບົດ
ໝວດ ໑໐ ແຫ່ງວັກມີກະນິກາຣະປຸບພີຍະວັກເປັນຕົ້ນ ຈົບ
໑໐໐ ເລື້ອງ ໝວດທີ ໒ ຈົບບໍລິບູນ

# ໒໑. ປະທຸມະເກສະຣິຍະວັກ

## ໝວດວ່າດ້ວຍພຣະປະທຸມະເກສະຣິຍະເປັນຕົ້ນ

## ໑. ປະທຸມະເກສະຣິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປະທຸມະເກສະຣິຍະເຖຣະ

(ພຣະປະທຸມະເກສະຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອກ່ອນ ຂ້າພະເຈົ້າເປັນຊ້າງພາຍຕະກູນມາຕັງຄະ
ອາໄສຢູ່ໃກ້ບ່ອນຢູ່ໝູ່ລືສີ (ຄືພຣະປັດເຈກພຸດທະເຈົ້າ)
ຂ້າພະເຈົ້າມີຄວາມເຫຼື້ອມໃສໃນພຣະປັດເຈກພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຈຶ່ງໄດ້ໂຮຍເກສອນດອກບົວລົງບູຊາ

[໒] ຂ້າພະເຈົ້າທຳຈິດໃຫ້ເຫຼື້ອມໃສໃນພຣະປັດເຈກຊິນນະເຈົ້າ
ຜູ້ປະເສີດທີ່ສຸດ ຜູ້ກຳຈັດຣາຄະແລ້ວ ຜູ້ຄົງທີ່ເຫຼົ່ານັ້ນ
ແລ້ວບັນເທີງຢູ່ໃນສະຫວັນຕະຫຼອດກັບໜຶ່ງ

[໓] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໂຮຍເກສອນດອກບົວບູຊາພຣະພຸດທະເຈົ້າໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປະທຸມະເກສະຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທຸມະເກສະຣິຍະເຖຣາປະທານທີ ໑ ຈົບ**

## ໔. ສັບພະຄັນທິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັບພະຄັນທິຍະເຖຣະເປັນຕົ້ນ

(ພຣະສັບພະຄັນທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔] ຂ້າພະເຈົ້າໄດ້ຖວາຍຂອງຫອມ ແລະດອກໄມ້ແດ່ ພຣະພຸດທະເຈົ້າ
ພຣະນາມວ່າ ວິປັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ຖວາຍຜ້າໄໝຢ່າງດີແດ່ພຣະອົງຜູ້ຊື່ຕົງ

[໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຂອງຫອມໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຂອງຫອມ

[໗] ໃນກັບທີ ໑໕ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ສຸເຈລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັບພະຄັນທິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັບພະຄັນທິຍະເຖຣາປະທານທີ ໔ ຈົບ**

# ໓. ປະຣະມັນນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະຣະມັນນະທາຍະກະເຖຣະ

(ພຣະປະຣະມັນນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ໂຊດຊວງດັ່ງດອກກັນນິກາ
ມີພຣະຣັດສະໝີຮຸ່ງເຮື່ອງດັ່ງດວງອາທິດອຸໄທ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ

[໑໐] ຂ້າພະເຈົ້າປະນົມມື ນໍາສະເດັດມາຍັງເຮືອນຂອງຕົນ
ເມື່ອນໍາສະເດັດພຣະສໍາມາສໍາພຸດທະເຈົ້າມາເຖິງແລ້ວ
ໄດ້ຖວາຍເຂົ້າຢ່າງດີເລີດ

[໑໑] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເຂົ້າຢ່າງດີເລີດໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າຢ່າງດີເລີດ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປະຣະມັນນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະຣະມັນນະທາຍະກະເຖຣາປະທານທີ ໓ ຈົບ**

# ໔. ທໍາມະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທໍາສັນຍະກະເຖຣະ

(ພຣະທໍາສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ໄດ້ມີການສະຫຼອງຕົ້ນມະຫາໂພແຫ່ງພຣະຜູ້ມີພຣະພາກເຈົ້າ

ພຣະນາມວ່າ ວິປັດສີ ພຣະສຳມາສຳພຸດທະເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ຜາກົດຄືດັ່ງວ່າປະທັບຢູ່ທີ່ຕົ້ນໂພ

[໑໔] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີໝູ່ພິກຂຸແວດລ້ອມ
ຊົງເປ່ງອາສະພິວາຈາ ປະກາດສັດຈະ ໔

[໑໕] ພຣະສຳມາສຳພຸດທະເຈົ້າຜູ້ທຳລາຍກິເລດເໝືອນຫຼັງຄາໄດ້ແລ້ວ
ຊົງສະແດງໂດຍຫຍໍ້ ແລະຊົງສະແດງໂດຍພິດສະດານ
ຊົງຊ່ອຍມະຫາຊົນໃຫ້ສະງົບເຢັນ

[໑໖] ຂ້າພະເຈົ້າໄດ້ຟັງທຳຂອງພຣະອົງ ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່
ຖວາຍອະພິວາດແທບພຣະບາດຂອງພຣະສາດສະດາແລ້ວ
ອວ່າຍໜ້າຫຼີກໄປທາງທິດເໜືອ

[໑໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຟັງທຳໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຟັງທຳ

[໑໘] ໃນກັບທີ ໖໖ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງມີພຣະນາມວ່າ ສຸຕະວາ
ເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທຳສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທຳມະສັນຍະກະເຖຣາປະທານທີ ໔ ຈົບ**

## ໕. ຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຜະລະທາຍະກະເຖຣະ

(ພຣະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຄັ້ງນັ້ນ ມີອາສົມຢູ່ທີ່ຝັ່ງແມ່ນ້ຳພາຄີຣະຖີ
ຂ້າພະເຈົ້າຖືໝາກໄມ້ຍ່າງມາສູ່ອາສົມນັ້ນຊ້າ ໆ

[໔໑] ໃນບ່ອນນັ້ນ ຂ້າພະເຈົ້າໄດ້ພົບພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ມີພຣະຣັດສະໝີຮຸ່ງເຮືອງດັ່ງດວງຈັນ
ຈຶ່ງໄດ້ຖວາຍໝາກໄມ້ຂອງຂ້າພະເຈົ້າທີ່ມີຢູ່ທັງໝົດແດ່ພຣະສາດສະດາ

[໔໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜະລະທາຍະກະເຖຣາປະທານທີ ໕ ຈົບ**

## ໖. ສຳປະສາທິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຳປະສາທິກະເຖຣະ

(ພຣະສຳປະສາທິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ຂ້າແຕ່ພຣະອົງຜູ້ເປັນພຸດທະວີຣະເຈົ້າ ຂໍນອບນ້ອມແດ່ພຣະອົງ
ພຣະອົງລຸດພົ້ນແລ້ວໃນທີ່ທັງປວງ
ຂ້າພຣະອົງເປັນຜູ້ເຖິງຄວາມວິບັດ
ຂໍພຣະອົງໄດ້ໂຜດເປັນບ່ອນເພິ່ງຂອງຂ້າພຣະອົງດ້ວຍເທີ້ນ

[໔໕] ພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຫາບຸກຄົນປຽບບໍ່ໄດ້ໃນໂລກ
ຊົງພະຍາກອນຂ້າພຣະອົງວ່າ
ພຣະສົງຜູ້ສະເໝີດ້ວຍມະຫາສະມຸດ ຜູ້ປະເສີດ ຫາປະມານບໍ່ໄດ້

[໔໕] ທ່ານຈຶ່ງທຳຈິດໃຫ້ເຫຼື້ອມໃສໃນພຣະສົງແລ້ວ
ຈຶ່ງຫວ່ານປູກພຶດຊະນິດດີໄວ້ໃນພຣະສົງນັ້ນ
ຜູ້ປາສະຈາກທຸລິຄືກິເລດ
ເປັນເນື້ອນາບຸນທີ່ໃຫ້ຜົນບໍ່ສິ້ນສຸດ

[໔໗] ພຣະອົງເປັນພຣະສັບພັນຍູຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ເມື່ອຕັດດັ່ງນີ້
ຊົງພ່ຳສອນຂ້າພະເຈົ້າແນວນີ້ແລ້ວ ສະເດັດເຫາະຂຶ້ນສູ່ອາກາດ

[໔໘] ເມື່ອພຣະສັບພັນຍູຜູ້ອົງອາດກວ່ານໍຣະຊົນ
ພໍສະເດັດໄປໄດ້ບໍ່ດົນ ຂ້າພະເຈົ້າກໍສິ້ນຊີວິດ
ແລ້ວໄດ້ໄປເກີດໃນສະຫວັນຊັ້ນດຸສິດ

[໔໙] ຄັ້ງນັ້ນ ຂ້າພະເຈົ້າທຳຈິດໃຫ້ເຫຼື້ອມໃສ
ໃນພຣະສົງຜູ້ປາສະຈາກທຸລິຄືກິເລດ
ເປັນເນື້ອນາບຸນທີ່ໃຫ້ຜົນບໍ່ສິ້ນສຸດ
ແລ້ວບັນເທີງຢູ່ໃນສະຫວັນຕະຫຼອດກັບໜຶ່ງ

[໕໐] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມເຫຼື້ອມໃສໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມເຫຼື້ອມໃສ

[໕໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຳປະສາທິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຳປະສາທິກະເຖຣາປະທານທີ ໖ ຈົບ**

# ໗. ອາຣາມະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອາຣາມະທາຍະກະເຖຣະ

(ພຣະອາຣາມະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໘] ຂ້າພະເຈົ້າໄດ້ສ້າງອາຣາມຖວາຍ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ໃກ້ໝູ່ໄມ້ມີເງົາຮົ່ມເຢັນ ມີຝູງນົກເຂົ້າຢູ່ອາໄສ

[໕໙] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ຜູ້ສົມຄວນຮັບເຄື່ອງບູຊາ ຈຶ່ງນ້ອມຖວາຍອາຣາມແດ່ ພຣະອົງ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ

[໕໔] ຂ້າພະເຈົ້າມີຈິດຮ່າເຣີງ ເບີກບານ
ໄດ້ຖວາຍໝາກໄມ້ ແລະດອກໄມ້
ຕໍ່ຈາກນັ້ນ ຂ້າພະເຈົ້າກໍເກີດຄວາມເຫຼື້ອມໃສນ້ອມຖວາຍທານນັ້ນ

[໕໕] ຂ້າພະເຈົ້າມີໃຈຜ່ອງໃສໄດ້ຖວາຍທານແດ່ພຣະພຸດທະເຈົ້າ
ຜົນທານນັ້ນບັງເກີດແກ່ຂ້າພະເຈົ້າໃນເມື່ອຂ້າພະເຈົ້າເກີດຢູ່ໃນພົບ

[໕໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍອາຣາມໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍອາຣາມ

[໕໗] ໃນກັບທີ ໕໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ມີພຣະນາມວ່າ ມຸທຸສີຕະລະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາຣາມະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາຣາມະທາຍະກະເຖຣາປະທານທີ ໗ ຈົບ**

# ໗. ອະນຸເລປະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະນຸເລປະທາຍະກະເຖຣະ

(ພຣະອະນຸເລປະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໗] ຂ້າພະເຈົ້າໄດ້ເຫັນສາວົກຂອງພຣະພຸດທະເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ເປັນມຸນີ ຈຶ່ງໄດ້ເຂົ້າໄປຫາທ່ານ
ເຊິ່ງກຳລັງກະທຳການກໍ່ສ້າງຢູ່ທີ່ສີມາ

[໔໐] ແລະເມື່ອການກໍ່ສ້າງສຳເລັດແລ້ວ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີໃນໝູ່ພຣະສາວົກ
ຜູ້ເປັນເນື້ອນາບຸນອັນປະເສີດ ຈຶ່ງໄດ້ຖວາຍການສາບທາ

[໔໑] ໃນກັບທີ ໑໑໗ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສາບທາ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອະນຸເລປະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ອະນຸເລປະທາຍະກະເຖຣາປະທານທີ ໗ ຈົບ**

# ໘. ພຸດທະສັນຍິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພຸດທະສັນຍິກະເຖຣະ

(ພຣະພຸດທະສັນຍິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໓] ພຣະພຸດທະເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ຜູ້ອົງອາດກວ່ານໍຣະຊົນ
ຜູ້ມີພຣະຣັດສະໝີຮຸ່ງເຮືອງດັ່ງດວງອາທິດອຸໄທ
ແລະດັ່ງດວງຈັນ ສະເດັດໄປຕາມປ່າ

[໔໔]　ຊົງເປັນຜູ້ນໍາສັດໂລກ ພຣະນາມວ່າ ສິດທັດຖະ
ຊົງເປັນຜູ້ນໍາສັດໂລກ ຂ້າພະເຈົ້າໄດ້ຝັນເຫັນຈຶ່ງທໍາຈິດໃຫ້ເຫຼື້ອມໃສ
ໃນພຣະອົງແລ້ວ (ຫຼັງຈາກຕາຍໄປ) ໄດ້ເຂົ້າເຖິງສຸຄະຕິພົບ

[໔໕]　ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈໍາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈໍາໃນພຣະພຸດທະເຈົ້າ

[໔໖]　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພຸດທະສັນຍິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພຸດທະສັນຍິກະເຖຣາປະທານທີ ໙ ຈົບ**

## ໑໐. ປັບພາຣະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປັບພາຣະທາຍະກະເຖຣະ

(ພຣະປັບພາຣະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ
ກ່າວວ່າ)

[໔໗]　ຂ້າພະເຈົ້າໄດ້ຊໍາຣະ ປັດ ລ້າງ ຖູ ຖໍ້າ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປິຍະທັດສີ
ແລະໄດ້ຕັ້ງໝໍ້ນໍ້າສໍາລັບສັນໄວ້ຖວາຍແດ່ພຣະອົງຜູ້ຄົງທີ່

[໔໘]　ພຣະພຸດທະເຈົ້າຜູ້ມະຫາມຸນີພຣະນາມວ່າ ປິຍະທັດສີ
ຊົງພະຍາກອນເລື້ອງນັ້ນແກ່ຂ້າພະເຈົ້າວ່າ
ຈັກມີຜາສາດ ໗ ຊັ້ນ ສູງພັນຊົ່ວລູກທະນູ
ສະພັ່ງໄປດ້ວຍທຸງ ເຫຼື້ອມໄປດ້ວຍແກ້ວມະນີສີຂຽວ

[໔໙]　ຜາສາດ ແລະແກ້ວນັບປະມານບໍ່ໄດ້ ຈັກບັງເກີດຂຶ້ນ
ເມື່ອຂ້າພະເຈົ້າຖວາຍທານຄືການທໍາຄວາມສະອາດຖໍ້າແລ້ວ
ບັນເທີງຢູ່ໃນສະຫວັນຕະຫຼອດ ໑ ກັບ

[໕໐] ໃນກັບທີ ໒໘ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ສຸພຸດທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໕໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັບພາຣະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ປັບພາຣະທາຍະກະເຖຣາປະທານທີ ໑໐ ຈົບ**

**ປະທຸມະເກສະຣິຍະວັກທີ ໒໑ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະທຸມະເກສະຣິຍະເຖຣາປະທານ | ໖. ສັບພະຄັນທິຍະເຖຣາປະທານ |
| ໒. ປະຣະມັນນະທາຍະກະເຖຣາປະທານ | ໗. ທໍາມະສັນຍະກະເຖຣາປະທານ |
| ໓. ຜະລະທາຍະກະເຖຣາປະທານ | ໘. ສໍາປະສາທິກະເຖຣາປະທານ |
| ໔. ອາຣາມະທາຍະກະເຖຣາປະທານ | ໙. ອະນຸເລປະທາຍະກະເຖຣາປະທານ |
| ໕. ພຸດທະສັນຍິກະເຖຣາປະທານ | ໑໐. ປັບພາຣະທາຍະກະເຖຣາປະທານ |

**ແລະທ່ານກ່າວຄາຖາໄວ້ ໕໑ ຄາຖາ**

# ໕໔. ອາຣັກຂະທາຍະກະວັກ

## ໝວດວ່າດ້ວຍພຣະອາຣັກຂະທາຍະກະເປັນຕົ້ນ

## ໑. ອາຣັກຂະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອາຣັກຂະທາຍະກະເຖຣະ

(ພຣະອາຣັກຂະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໃຫ້ສ້າງຮົ້ວ ແລະໄດ້ຖວາຍອາຣັກຂາ
ແດ່ພຣະມຸນີພຣະນາມວ່າ ທຳມະທັດສີ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜ຺ູ້ຄົງທີ່

[໒] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງໄດ້ບັນລຸຄວາມສິ້ນອາສະວະ ຍ້ອນຜົນກຳວິເສດນັ້ນ

[໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາຣັກຂະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອາຣັກຂະທາຍະກະເຖຣາປະທານທີ ໑ ຈົບ**

## ໒. ໂພຊະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂພຊະນະທາຍະກະເຖຣະ

(ພຣະໂພຊະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ
ກ່າວວ່າ)

[໔] ພຣະຊິນນະເຈົ້າຍ່ອມຮຸ່ງເຮືອງທຸກເມື່ອ ຄືທົ່ນຕົ້ນຮັງທີ່ເກີດດີ
ເໝືອນໄມ້ອັນຊັນທີ່ກຳລັງຂຶ້ນງາມ (ແລະ) ເໝືອນສາຍຮຸ້ງໃນອາກາດ

[໕] ຂ້າພະເຈົ້າມີໃຈຜ່ອງໃສ
ໄດ້ຖວາຍໂພຊະນະແດ່ພຣະອົງຜູ້ເປັນເທບຍິ່ງກວ່າເທບ
ພຣະນາມວ່າ ເວດສະພູ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໖] ພຣະສະຍຳພູພຸດທະເຈົ້າຜູ້ບໍ່ຊົງພ່າຍແພ້
ຊົງອະນຸໂມທະນາທານຂອງຂ້າພະເຈົ້ານັ້ນວ່າ
ຜົນຈົ່ງບັງເກີດແກ່ທ່ານໃນພົບທີ່ເກີດເທີ້ນ

[໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໂພຊະນະ

[໘] ໃນກັບທີ ໔໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ອະມິດຕະກະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂພຊະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂພຊະນະທາຍະກະເຖຣາປະທານທີ ໔ ຈົບ**

# ໙. ຄະຕະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຄະຕະສັນຍະກະເຖຣະ

(ພຣະຄະຕະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐] ໃນອາກາດບໍ່ຜາກົດຮອຍຕີນ ຂ້າພະເຈົ້າໄດ້ເຫັນພຣະຊິນນະເຈົ້າ
ພຣະນາມວ່າ ສິດທັດຖະສະເດັດເຫາະໄປ
ຍັງໝູ່ເທວະດາຊັ້ນຕາວະຕິງສາທາງອາກາດໃນທ້ອງຟ້າ

[໑໑] ຂະນະນັ້ນ ຂ້າພະເຈົ້າໄດ້ເຫັນຊາຍຈີວອນ

ຂອງພຣະສຳມາສຳພຸດທະເຈົ້າສະບັດປິວໄປຕາມລົມ
ຈຶ່ງມີຄວາມຍິນດີໃຈເປັນຢ່າງຫຼາຍ
ຍ້ອນໄດ້ເຫັນພຣະມຸນີສະເດັດໄປ

[໑໘] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນພຣະພຸດທະເຈົ້າ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄະຕະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄະຕະສັນຍະກະເຖຣາປະທານທີ ໓ ຈົບ**

# ໔. ສັດຕະປະທຸມິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັດຕະປະທຸມິຍະເຖຣະ

(ພຣະສັດຕະປະທຸມິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ຂ້າພະເຈົ້າເປັນພານມີນາມວ່າ ເນສາທະ
ໃຊ້ດອກໄມ້ຮ້ອຍກັບປັດອາສົມ ອາໄສຢູ່ທີ່ຝັ່ງແມ່ນ້ຳ

[໑໕] ຄວາມຊື່ນຊົມເກີດຂຶ້ນແກ່ຂ້າພະເຈົ້າ
ຍ້ອນໄດ້ເຫັນພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ມີພຣະສະຫວີວັນດັ່ງຄຳ
ຊົງເປັນຜູ້ນຳສັດໂລກ ກຳລັງສະເດັດໄປທາງປ່າ

[໑໖] ຂ້າພະເຈົ້າຕ້ອນຮັບພຣະສຳມາສຳພຸດທະເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ
ຈຶ່ງນຳສະເດັດພຣະອົງມາຍັງອາສົມແລ້ວ
ບູຊາດ້ວຍດອກບົວງາມ

[໑໗]    ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໘]    ໃນກັບທີ ໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໔ ຊາດ ພຣະນາມວ່າ ປາສະປາວະຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໙]    ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັດຕະປະທຸມີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດຕະປະທຸມີຍະເຖຣາປະທານທີ ໔ ຈົບ**

# ໕. ປຸບຜາສະນະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸບຜາສະນະທາຍະກະເຖຣະ

(ພຣະປຸບຜາສະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໒໐]    ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ບໍ່ຊິງພ່າຍແພ້ ຜູ້ມີພຣະສະຫວີວັນດັ່ງຄຳ
ມີພຣະຣັດສະໝີຮຸ່ງເຮືອງດັ່ງດວງອາທິດ
ສະເດັດດຳເນີນຢູ່ໃນບ່ອນບໍ່ໄກ

[໒໑]    ຂ້າພະເຈົ້າມີຈິດຜ່ອງໃສຕ້ອນຮັບພຣະອົງແລ້ວ
ທູນນິມົນສະເດັດເຂົ້າມາຍັງອາສົມແລ້ວ
ໄດ້ຖວາຍອາສະນະດອກໄມ້

[໒໒]    ຄັ້ງນັ້ນ ຂ້າພະເຈົ້າປະນົມມືແລ້ວ
ເກີດຄວາມພໍໃຈ ກະທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ
ນ້ອມນຶກເຖິງກຳນັ້ນດ້ວຍຄວາມປາຖະໜາວ່າ

[໔໓] ບຸນກຸສົນໃດ ທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນພຣະສະຍຳພູ
ຜູ້ບໍ່ຊົງພ່າຍແພ້
ດ້ວຍບຸນກຸສົນທັງປວງນັ້ນ
ຂໍຂ້າພະເຈົ້າຈົ່ງເປັນຜູ້ປາສະຈາກມົນທິນໃນສາດສະໜາເທີ້ນ

[໔໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍອາສະນະດອກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍອາສະນະດອກໄມ້

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປຸບຜາສະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸບຜາສະນະທາຍະກະເຖຣາປະທານທີ ໕ ຈົບ**

## ໖. ອາສະນະສັນຖະວິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອາສະນະສັນຖະວິກະເຖຣະ

(ພຣະອາສະນະສັນຖະວິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໖] ຄັ້ງນັ້ນ ຂ້າພະເຈົ້າເປັນຜູ້ບອດ ທ່ຽວຄົ້ນຫາພຣະເຈດີຊື່ວ່າອຸດຕະມະ
ຂອງພຣະພຸດທະເຈົ້າພຣະນາມວ່າສິຂີ
ຜູ້ເປັນເຜົ່າພັນຂອງໂລກ ໃນໄພວັນເຊິ່ງເປັນປ່າໃຫຍ່

[໔໗] ຂ້າພະເຈົ້າອອກຈາກປ່າໃຫຍ່ ໄດ້ພົບພຣະບັນລັງ
ຈຶ່ງພາດຜ້າໜັງສັດບ່ຽງບ່າຂ້າງໜຶ່ງ
ປະນົມມືສັນເສີນພຣະພຸດທະເຈົ້າ ຜູ້ຊົງເປັນຜູ້ນຳສັດໂລກ

[໔໘] ເມື່ອສັນເສີນພຣະພຸດທະເຈົ້າເຊິ່ງເປັນຜູ້ນຳຊັ້ນເລີດຂອງໂລກ
ໃນສ່ວນກາງເວັນແລ້ວ ກໍມີຈິດຮ່າເຣີງ ເບີກບານ ໄດ້ເປັ່ງວາຈານີ້ວ່າ

[໔໙] ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ ຂໍນອບນ້ອມແດ່ພຣະອົງ

ຂ້າແຕ່ພຣະອົງຜູ້ເປັນບຸຣຸດຜູ້ສູງສຸດ ຂໍນອບນ້ອມແດ່ພຣະອົງ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ມີຄວາມພຽນສູງ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ພຣະອົງເປັນພຣະສັບພັນຍູ

[໓໐] ຂ້າພະເຈົ້າໄດ້ສັນເສີນພຣະພຸດທະເຈົ້າ
ພຣະນາມວ່າສິຂີ ດ້ວຍການທຳນິມິດອະພິວາດອາສະນະແລ້ວ
ອວ່າຍໜ້າຫຼີກໄປທາງທິດເໜືອ

[໓໑] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນເສີນພຣະພຸດທະເຈົ້າ
ຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນ

[໓໔] ໃນກັບທີ ໔໗ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດ ໗ ຊາດ ພຣະນາມວ່າ ອະຕຸລະຍະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອາສະນະສັນຖະວິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ
ແນວນີ້

**ອາສະນະສັນຖະວິກະເຖຣາປະທານທີ ໖ ຈົບ**

## ໗. ສັດທະສັນຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັດທະສັນຍະກະເຖຣະ

(ພຣະສັດທະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ພຣະຜູ້ມີພຣະພາກມະຫາວີນະເຈົ້າຜູ້ມີພຣະຮູບງາມ
ໜ້າເບິ່ງ ຊົງສະແດງອະມະຕະບົດຢູ່
ມີໝູ່ສາວົກແວດລ້ອມ ປະທັບຢູ່ໃນວິຫານຊັ້ນເລີດ

[໓໕] ຊຶ່ງສົ່ງເຄາະມະຫາຊົນດ້ວຍພຣະວາຈາທີ່ມ່ວນ
ໄດ້ມີສຽງກັງວານແຜ່ໄປກວ້າງຂວາງ ທົ່ວທັງເທວະດາແລະມະນຸດ

[໓໖] ຂ້າພະເຈົ້າໄດ້ຟັງສຽງກຶກກ້ອງແລ້ວ
ເຮັດຈິດໃຫ້ເຫຼື້ອມໃສໃນພຣະສຸຣະສຽງ
ຂອງພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ແລ້ວໄດ້ໄຫວ້ພຣະອົງຜູ້ຊຶ່ງເປັນຜູ້ນໍາສັດໂລກ

[໓໗] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈໍາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈໍາໃນພຣະພຸດທະເຈົ້າ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັດທະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດທະສັນຍະກະເຖຣາປະທານທີ ໗ ຈົບ**

## ໘. ຕິຣັງສິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິຣັງສິຍະເຖຣະ

(ພຣະຕິຣັງສິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໙] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ປະທັບນັ່ງຢູ່ລະຫວ່າງພູເຂົາ ເໝືອນຣາດຊະສີຜູ້ມີຊາດສູງ
ຊຶ່ງເຮັດທິດໃຫ້ສະຫວ່າງສະໄຫວດັ່ງກອງໄຟເທິງພູເຂົາ

[໔໐] ແລະໄດ້ເຫັນແສງສະຫວ່າງຂອງດວງອາທິດ
ແສງສະຫວ່າງຂອງດວງຈັນ
ແລະແສງສະຫວ່າງຂອງພຣະພຸດທະເຈົ້າ ຈຶ່ງເກີດປີຕິຊາບຊ່ານ

[໔໑] ເມື່ອຂ້າພະເຈົ້າໄດ້ເຫັນແສງສະຫວ່າງ ໓ ປະການແລ້ວ
ຈຶ່ງພາດຜ້າໜັງສັດບ່ຽງບ່າ
ກ່າວສັນເສີນພຣະສຳມາສຳພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກວ່າ

[໔໒] ດວງຈັນ ດວງອາທິດ
ແລະພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ສິ່ງທັງ ໓ ນີ້ແລ ສ່ອງແສງສະຫວ່າງໃນໂລກ
ບັນເທົາຄວາມມືດໃນໂລກ

[໔໓] ຂ້າພະເຈົ້າຍົກຂໍ້ອຸປະມາຂຶ້ນສັນເສີນພຣະມະຫາມຸນີ
ເມື່ອຂ້າພະເຈົ້າສັນເສີນພຣະຄຸນຂອງພຣະພຸດທະເຈົ້າແລ້ວ
ໄປບັນເທີງຢູ່ໃນສະຫວັນຕະຫຼອດກັບໜຶ່ງ

[໔໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນເສີນພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນ

[໔໕] ໃນກັບທີ ໖໑ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ຍານະຕະຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິຣັງສິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິຣັງສິຍະເຖຣາປະທານທີ ໘ ຈົບ**

## ໙. ນາລິປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນາລິປຸບຜິຍະເຖຣະ

(ພຣະນາລິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ຄັ້ງນັ້ນ ຂ້າພະເຈົ້າເປັນຊາວນາອາໄສຢູ່ໃກ້ຝັ່ງແມ່ນ້ຳສິນທຸ
ຂວນຂວາຍໃນວຽກງານຂອງຜູ້ອື່ນ
ອາໄສອາຫານຂອງຜູ້ອື່ນລ້ຽງຊີວິດ

[໔໘] ຂ້າພະເຈົ້າທ່ຽວໄປຕາມແມ່ນ້ຳສິນທຸ
ໄດ້ເຫັນພຣະຜູ້ມີພຣະພາກຊິນນະເຈົ້າພຣະນາມວ່າ ສິດທັດຖະ
ກຳລັງປະທັບນັ່ງເຂົ້າສະມາທິຢູ່ ດັ່ງດອກບົວບານ

[໔໙] ຄັ້ງນັ້ນ ຂ້າພະເຈົ້າໄດ້ເດັດດອກບົວພ້ອມທັງກ້ານ ໗ ດອກ
ໂຮຍບູຊາເໜືອພຣະສຽນຂອງພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນຂອງພຣະອາທິດ

[໕໐] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ມີພຣະທະໄທໝັ້ນຄົງໃນການເກື້ອກູນ
ບຽດບຽນໄດ້ຍາກ
ເໝືອນຊ້າງມາຕັງຄະຕົກມັນມີກຳລັງຫຼາຍ

[໕໑] ມີປັນຍາຮັກສາພຣະອົງ ຊົງອົບຮົມອິນຊີແລ້ວ
ຂ້າພະເຈົ້າໄດ້ປະຄອງອັນຊະລີຂາບໄຫວ້ພຣະສາດສະດາ

[໕໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນາລິປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນາລິປຸບຜິຍະເຖຣາປະທານທີ ໗ ຈົບ**

# ໑໐. ກຸມຸທະມາລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກຸມຸທະມາລິຍະເຖຣະ

(ພຣະກຸມຸທະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໔] ພຣະຜູ້ມີພຣະພາກເຈົ້າຜູ້ຊົງມີຄວາມພຽນຫຼາຍ
ພຣະນາມວ່າວິປັດສີ ຜູ້ອົງອາດ ປະເສີດ ແກ່ກ້າ
ຊົງຊະນະວິເສດ ສະແຫວງຫາຄຸນອັນຍິ່ງໃຫຍ່
ເໝືອນພະຍາຣາດຊະສີຜູ້ມີຊາດສູງ

[໕໕] ຜູ້ສົມຄວນຮັບເຄື່ອງບູຊາ ກຳລັງສະເດັດດຳເນີນຢູ່ຖະໜົນ
ຈຶ່ງຖືພວງດອກໂກມຸດໄປໂຮຍລົງບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໕໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກຸມຸທະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກຸມຸທະມາລິຍະເຖຣາປະທານທີ ໑໐ ຈົບ**
**ອາຣັກຂະທາຍະກະວັກທີ ໓໔ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ອາຣັກຂະທາຍະກະເຖຣາປະທານ
໒. ຄະຕະສັນຍະກະເຖຣາປະທານ
໓. ປຸບຜາສະນະທາຍະກະເຖຣາປະທານ
໔. ສັດທະສັນຍະກະເຖຣາປະທານ
໕. ນາລິປຸບຜິຍະເຖຣາປະທານ
໖. ໂພຊະນະທາຍະກະເຖຣາປະທານ
໗. ສັດຕະປະທຸມິຍະເຖຣາປະທານ
໘. ອາສະນະສັນຖະວິກະເຖຣາປະທານ
໙. ຕິຣັງສິຍະເຖຣາປະທານ
໑໐. ກຸມຸທະມາລິຍະເຖຣາປະທານ

**ມີຄາຖາ ໕໗ ຄາຖາ**

# ໖໖. ອຸມາປຸບຜິຍະວັກ

## ໝວດວ່າດ້ວຍພຣະອຸມາປຸບຜິຍະເປັນຕົ້ນ

## ໑. ອຸມາປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸມາປຸບຜິຍະເຖຣະ

(ພຣະອຸມາປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ບໍ່ຊົງພ່າຍແພ້ ຜູ້ເປັນນໍຣະຊົນຜູ້ສູງສຸດ
ມີພຣະຫະໄທໝັ້ນຄົງ ບໍ່ຫວັ່ນໄຫວ ກຳລັງເຂົ້າສະມາທິແລ້ວ

[໒] ຈຶ່ງໄດ້ຖືດອກສາມຫາວໄປບູຊາພຣະພຸດທະເຈົ້າ
ດອກສາມຫາວທັງໝົດມີຍອດລວມກັນ
ກ້ານຊີ້ຂຶ້ນຂ້າງເທິງ ດອກຍ້ອຍລົງຂ້າງລຸ່ມ

[໓] ເປັນເຄື່ອງປູດອກໄມ້ປະດິດສະຖານຢູ່ໃນອາກາດ
ເປັນເໝືອນມີຈິດດີ ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຂ້າພະເຈົ້າຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດຸສິດ

[໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕] ໃນກັບທີ ໕໕ ນັບຈາກກັບນີ້ໄປ
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງພຣະນາມວ່າ ສະມັນຕະສະທະນະ
ຊົງເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸມາປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ອຸມາປຸບຜິຍະເຖຣາປະທານທີ ໑ ຈົບ**

# ໘. ປູລິນະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປູລິນະປູຊະກະເຖຣະ

(ພຣະປູລິນະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗] ພຣະສາດສະດາຜູ້ອົງອາດກວ່ານໍຣະຊົນ
ສະຫວ່າງສະໄຫວເໝືອນດອກກັນນິກາ
ສະງ່າງາມຢູ່ເໝືອນມ້າອາຊາໄນ ຜູ້ອົງອາດ
ເໝືອນດາວປະກາຍພຶກຮຸ່ງເຮືອງຢູ່

[໘] ຂ້າພະເຈົ້າຈຶ່ງໄດ້ປະຄອງອັນຊະລີ ຊາບໄຫວ້ພຣະສາດສະດາ
ສັນເສີນພຣະສາດສະດາ ພໍໃຈການກະທຳຂອງຕົນ

[໙] ຂ້າພະເຈົ້າກຳຊາຍຂາວບໍລິສຸດກຳມືໜຶ່ງ
ໃສ່ຫໍ່ພົກມາໂຮຍລົງໃສ່ທາງສະເດັດດຳເນີນ
ຂອງພຣະສາດສະດາພຣະນາມວ່າວິປັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໐] ແຕ່ນັ້ນ ຂ້າພະເຈົ້າມີໃຈຜ່ອງໃສແບ່ງຊາຍເຄິ່ງໜຶ່ງ
ໂຮຍລົງໃນທີ່ພັກກາງເວັນຂອງພຣະອົງ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໑໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໂຮຍຊາຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໂຮຍຊາຍ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປູລິນະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປູລິນະປູຊະກະເຖຣາປະທານທີ ໘ ຈົບ**

## ໓. ທາສະຊະນະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທາສະຊະນະກະເຖຣະ

(ພຣະທາສະຊະນະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓] ຂ້າພະເຈົ້າໄດ້ເຫັນຜ້າບັງສຸກູນຂອງພຣະສາດສະດາຄ້ອງຢູ່ເທິງປາຍໄມ້
ຈຶ່ງປະນົມມື ແລ້ວເປ່ງວາຈາຂຶ້ນຢ່າງດັງ

[໑໔] ຄວາມຍິນດີເກີດຂຶ້ນແກ່ຂ້າພະເຈົ້າຍ້ອນໄດ້ເຫັນແຕ່ໄກ
ຂ້າພະເຈົ້າປະນົມມືແລ້ວ ກະທຳຈິດໃຫ້ເຫຼື້ອມໃສຢ່າງຍິ່ງ

[໑໕] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນພຣະພຸດທະເຈົ້າ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທາສະຊະນະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ໄວ້ ດ້ວຍປະການແນວນີ້

**ທາສະຊະນະກະເຖຣາປະທານທີ ໓ ຈົບ**

## ໔. ຍັນຍະສາມິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຍັນຍະສາມິກະເຖຣະ

(ພຣະຍັນຍະສາມິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ຂ້າພະເຈົ້າມີອາຍຸ ໗ ຂວບ ເປັນຜູ້ຈົບມົນ
ໄດ້ດຳຣົງວົງຕະກູນ ໄດ້ກະກຽມພິທີບູຊາຍັນ

[໑໘] ຄັ້ງນັ້ນ ຂ້າພະເຈົ້າຈະຂ້າສັດລ້ຽງ ໘໔,໐໐໐ ໂຕ
ຈຶ່ງໃຫ້ຄົນຈັບຜູກໄວ້ທີ່ຫຼັກໄມ້ແກ່ນ ກະກຽມເພື່ອຈະບູຊາຍັນ

[໑໙]	ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ມີພຣະຣັດສະໝີສະຫວາງແຈ້ງເໝືອນຖ່ານໄມ້ແຄນ ຮຸ່ງແຈ້ງຢູ່ປາກເບົ້າ
ເໝືອນດວງອາທິດອຸໄທ (ແລະ) ເໝືອນດວງຈັນໃນວັນເພັງ

[໔໐]	ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ໃຫ້ສຳເລັດປະໂຫຍດທຸກຢ່າງ
ຜູ້ມີປະໂຫຍດເກື້ອກູນອັນໄຕຣໂລກບູຊາ
ສະເດັດເຂົ້າມາຫາແລ້ວ ໄດ້ຕັດພຣະດຳຣັດນີ້ວ່າ

[໔໑]	ກຸມານ ເຮົາພໍໃຈການບໍ່ບຽດບຽນສັດທັງປວງ
ການງົດເວັ້ນຈາກການລັກເອົາ
ຈາກການປະພຶດນອກໃຈ
ແລະຈາກການດື່ມນ້ຳເມົາ

[໔໒]	ຄືຄວາມຍິນດີໃນການປະພຶດສະໝ່ຳສະເໝີ
ຄວາມເປັນພະຫູສູດ ແລະຄວາມເປັນຜູ້ກະຕັນຍູ
ທຳເຫຼົ່ານີ້ບັນດິດກໍສັນເສີນທັງໃນປັດຈຸບັນ ແລະອະນາຄົດ

[໔໓]	ທ່ານຈະເລີນທຳເຫຼົ່ານີ້
ຍິນດີໃນຄວາມເກື້ອກູນແກ່ສັດທັງປວງ
ທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າແລ້ວ
ຈິ່ງຈະເລີນມັກທີ່ສູງສຸດເທີ້ນ

[໔໔]	ພຣະສັບພັນຍູຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ເມື່ອຕັດດັ່ງນີ້
ຊົງພ່ຳສອນຂ້າພະເຈົ້າແນວນີ້ແລ້ວ ສະເດັດເຫາະຂຶ້ນສູ່ອາກາດ

[໔໕]	ຂ້າພະເຈົ້າຊຳຣະຈິດໃຫ້ບໍລິສຸດກ່ອນແລ້ວ
ເຮັດຈິດໃຫ້ເຫຼື້ອມໃສໃນພາຍຫຼັງ
ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຂ້າພະເຈົ້າຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດຸສິດ

[໔໖]	ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າກະທຳຈິດໃຫ້ເຫຼື້ອມໃສໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນພຣະພຸດທະເຈົ້າ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຍັນຍະສາມິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຍັນຍະສາມິກະເຖຣາປະທານທີ ໔ ຈົບ**

## ໕. ນິມິດຕະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນິມິດຕະສັນຍະກະເຖຣະ

(ພຣະນິມິດຕະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ຂ້າພະເຈົ້າອາໄສຢູ່ໃນອາສົມໃກ້ຝັ່ງແມ່ນ້ຳຈັນທະພາຄາ
ໄດ້ເຫັນກວາງຄຳກຳລັງຍ່າງຢູ່ໃນປ່າ

[໔໙] ຈຶ່ງທຳຈິດໃຫ້ເຫຼື້ອມໃສ (ຊື່ນຊົມ) ໃນກວາງຄຳ
ແລ້ວຣະລຶກເຖິງພຣະພຸດທະເຈົ້າ ຜູ້ຈະເລີນທີ່ສຸດໃນໂລກ
ຂ້າພະເຈົ້າຫວນຣະລຶກເຖິງພຣະພຸດທະເຈົ້າເຫຼົ່າອື່ນ

[໕໐] ຄືພຣະພຸດທະເຈົ້າໃນອະດີດ
ພຣະພຸດທະເຈົ້າໃນປັດຈຸບັນ ແລະພຣະພຸດທະເຈົ້າໃນອະນາຄົດ
ພຣະພຸດທະເຈົ້າ ໓ ຈຳພວກນັ້ນ
ຍ່ອມໄພໂຣດເໝືອນພະຍາເນື້ອ

[໕໑] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຄວາມຊົງຈຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມຊົງຈຳໃນພຣະພຸດທະເຈົ້າ

[໕໔] ໃນກັບທີ ໔໗ ນັບຈາກກັບນີ້ໄປ

ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງມີພຣະນາມວ່າ ອະຣັນຍະສັດຕະ
ເປັນໃຫຍ່ໃນແຜ່ນດິນ ມີພະລານຸພາບຫຼາຍ

[໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນິມິດຕະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນິມິດຕະສັນຍະກະເຖຣາປະທານທີ ໕ ຈົບ**

## ໖. ອັນນະສັງສາວະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອັນນະສັງສາວະກະເຖຣະ

(ພຣະອັນນະສັງສາວະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໔] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ສະເດັດໄປລະຫວ່າງຮ້ານຕະຫຼາດ ຜູ້ເປັນເໝືອນຄຳທີ່ມີຄ່າ
ມີພຣະລັກສະນະອັນປະເສີດ ໓໒ ປະການ

[໓໕] ພຣະນາມວ່າ ສິດທັດຖະ ຜູ້ໃຫ້ປະໂຫຍດທຸກຢ່າງສຳເລັດ
ຜູ້ບໍ່ຊົງຫວັ່ນໄຫວ ຜູ້ບໍ່ຊົງພ່າຍແພ້
ຂ້າພະເຈົ້ານ້ອມນະມັດສະການແລ້ວ
ທູນນິມົນພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ຜູ້ເປັນມະຫາມຸນີໃຫ້ສະເຫວີຍແລ້ວ

[໓໖] ຄັ້ງນັ້ນ ພຣະມຸນີຜູ້ປະກອບດ້ວຍພຣະກະລຸນາໃນໂລກ
ໄດ້ເຮັດໃຫ້ຂ້າພະເຈົ້າແຈ່ມໃສ
ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສ
ໃນພຣະພຸດທະເຈົ້າແລ້ວ
ໄປບັນເທີງຢູ່ໃນສະຫວັນຕະຫຼອດໜຶ່ງກັບ

[໓໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພິກສາ

[໓໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອັນນະສັງສາວະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັນນະສັງສາວະກະເຖຣາປະທານທີ ໖ ຈົບ**

## ໗. ນິກຄຸນທິປູບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນິກຄຸນທິປູບຜິຍະເຖຣະ

(ພຣະນິກຄຸນທິປູບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໙] ໃນການໃດ ເທວະດາຈະຈຸຕິຈາກໝູ່ເທບຍ້ອນສິ້ນອາຍຸ
ໃນການນັ້ນ ເທວະດາທັງຫຼາຍຜູ້ພອຍຍິນດີ
ຍ່ອມເປ່ງສຽງ ໓ ປະການວ່າ

[໔໐] ທ່ານຜູ້ຈະເລີນ ທ່ານຈາກບ່ອນນີ້ຈົ່ງໄປສູ່ສຸກຄະຕິ
ສູ່ຄວາມເປັນຜູ້ຢູ່ຮ່ວມກັບມະນຸດ ເປັນມະນຸດແລ້ວ
ຈົ່ງໄດ້ສັດທາຢ່າງປະເສີດໃນພຣະສັດທຳ

[໔໑] ສັດທາຂອງທ່ານເພິ່ງຕັ້ງໝັ້ນດຳຣົງຢູ່ ເປັນມູນໄວ້ ເປັນບ່ອນເພິ່ງ
ຢ່າຄອນແຄນໃນພຣະສັດທຳ
ທີ່ພຣະອະຣິຍະປະກາດໄວ້ດີແລ້ວຈົນຕະຫຼອດຊີວິດ

[໔໒] ຈົ່ງທຳກຸສົນທີ່ບໍ່ມີຄວາມບຽດບຽນ
ບໍ່ມີອຸປະທິທາງກາຍ ທາງວາຈາ ທາງໃຈ ໃຫ້ຫຼາຍເທີ້ນ

[໔໓] ຈົ່ງທຳບຸນໃຫ້ຍິ່ງໄປກວ່ານັ້ນໃຫ້ຫຼາຍດ້ວຍການໃຫ້ທານ
ຈົ່ງຊັກຊວນຜູ້ອື່ນໃຫ້ຕັ້ງໝັ້ນໃນພົມມະຈັນ
ເຊິ່ງເປັນພຣະສັດທຳຢ່າງປະເສີດ

[໔໔] ດ້ວຍຄວາມອະນຸເຄາະນີ້
ໃນການໃດ ເຫຼົ່າເທວະດາຜູ້ຮູ້ແຈ້ງ
ພອຍຍິນດີກັບທ່ານຜູ້ປະເສີດເຊິ່ງກຳລັງຈຸຕິວ່າ
ທ່ານເທວະດາ ຂໍທ່ານຈົ່ງມາເລື້ອຍ ໆ ເດີ້

[໔໕] ໃນການນັ້ນ ເມື່ອໝູ່ເທວະດາມາປະຊຸມກັນ
ຂ້າພະເຈົ້າເກີດຄວາມສະລົດໃຈວ່າ
ເຮົາຈຸຕິຈາກທີ່ນີ້ແລ້ວຈັກໄປເກີດໃນກຳເນີດອັນໃດນໍ

[໔໖] ພຣະສະມະນະຜູ້ອົບຮົມອິນຊີແລ້ວ
ຮູ້ຄວາມສັງເວດຂອງຂ້າພະເຈົ້າ
ທ່ານປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງມາຍັງສຳນັກຂອງຂ້າພະເຈົ້າ

[໔໗] ທ່ານມີນາມວ່າສຸມະນະ ເປັນສາວົກຂອງພຣະພຸດທະເຈົ້າ
ພຣະນາມວ່າປະທຸມຸດຕະຣະ ພ່ຳສອນອັດຖະທຳ
ໃຫ້ຂ້າພະເຈົ້າສະລົດໃຈ ໃນຄັ້ງນັ້ນ

**ພານະວານທີ ໑໘ ຈົບ**

[໔໘] ຂ້າພະເຈົ້າໄດ້ຟັງຄຳຂອງທ່ານແລ້ວ
ກະທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ
ອະພິວາດທ່ານຜູ້ເປັນນັກປາດແລ້ວ
ກໍສິ້ນຊີວິດລົງໃນບ່ອນນັ້ນ

[໔໙] ຂ້າພະເຈົ້ານັ້ນ ອັນກຸສົນມູນຕັກເຕືອນແລ້ວ
ໄດ້ອຸບັດ ໃນບ່ອນນັ້ນເອງ
ຕົນເມື່ອຢູ່ໃນທ້ອງມານດາ
ກໍຢູ່ໃນທ້ອງຂອງມານດາຄົນເດີມ

[໕໐] ຂ້າພະເຈົ້າຈຸຕິຈາກກາຍນັ້ນແລ້ວ
ໄດ້ເກີດໃນສະຫວັນຊັ້ນຕາວະຕິງສາ ໃນລະຫວ່າງນີ້
ຂ້າພະເຈົ້າບໍ່ເຫັນຄວາມໂທມະນັດໃນເວລານັ້ນເລີຍ

[໕໑] ຂ້າພະເຈົ້າຈຸຕິຈາກສະຫວັນຊັ້ນຕາວະຕິງສາແລ້ວ

ລົງສູ່ທ້ອງມານດາ ອອກຈາກທ້ອງມານດາ (ເກີດ) ແລ້ວ
ບໍ່ຮູ້ຈັກທຸກອັນໃດ ໆ ເລີຍ

[໕໘] ຂ້າພະເຈົ້າມີອາຍຸ ໗ ຂວບ ໄດ້ເຂົ້າໄປສູ່ອາຣາມ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມສາກະຍະບຸດ ຜູ້ຄົງທີ່

[໕໙] ໄດ້ເຫັນພິກຂຸທັງຫຼາຍຜູ້ເຮັດຕາມຄຳສອນຂອງພຣະສາດສະດາ
ໃນປາພົດຢ່າງກວ້າງຂວາງ
ໃນສາດສະໜາທີ່ຊົນຈຳນວນຫຼາຍນັບຖື

[໕໔] ນະຄອນຊື່ວ່າສາວັດຖີ ພຣະເຈົ້າໂກສົນຊົງເປັນໃຫຍ່ໃນນະຄອນນັ້ນ
ພຣະອົງສະເດັດໄປສູ່ຕົ້ນໂພທີ່ປະເສີດດ້ວຍລົດເຊິ່ງທຽມດ້ວຍມ້າ

[໕໕] ຂ້າພະເຈົ້າເຫັນພາຫະນະປະເສີດຂອງພຣະເຈົ້າໂກສົນນັ້ນແລ້ວ
ຣະລຶກເຖິງບຸບພະກຳ ຈຶ່ງໄດ້ປະນົມມືໄປສູ່ທີ່ປະຊຸມ

[໕໖] ຂ້າພະເຈົ້າມີອາຍຸ ໗ ຂວບ ກໍໄດ້ບວດເປັນບັນພະຊິດ
ພຣະສາວົກຊື່ອານົນ ເປັນອຸປັດຖາກພຣະພຸດທະເຈົ້າ

[໕໗] ທ່ານມີຄະຕິ ມີທິຕິ ມີສະຕິ ເປັນພະຫູສູດ ມີຄວາມຮຸ່ງເຮືອງຫຼາຍ
ໄດ້ຖວາຍພຣະທຳມະເທດສະໜາເຮັດພຣະຫະໄທຂອງພຣະຣາຊາໃຫ້ຊົງເຫຼື້ອມໃສ

[໕໘] ຂ້າພະເຈົ້າໄດ້ຟັງທຳຂອງທ່ານພຣະອານົນແລ້ວ
ຣະລຶກເຖິງບຸບພະກຳຢືນຢູ່ໃນບ່ອນນັ້ນເອງ ກໍໄດ້ບັນລຸອະຣະຫັນຕະຜົນ

[໕໙] ຂ້າພະເຈົ້າຫົ່ມຈີວອນບ່ຽງບ່າ
ປະຄອງອັນຊະລີໄວ້ເໜືອຫົວ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ ໄດ້ເປ່ງວາຈານີ້

[໖໐] ຂ້າພະເຈົ້າຖືດອກເຄືອເຂົາໄປວາງທີ່ພຣະບັນລັງ
ຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໖໑] ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ເປັນຈອມແຫ່ງເທວະດາ ແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ດ້ວຍຜົນແຫ່ງກຳນັ້ນ

ຂ້າພຣະອົງລະຄວາມຊະນະ ແລະຄວາມພ່າຍແພ້ໄດ້ແລ້ວ
ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໖໔] ໃນກັບທີ ໔໕,໐໐໐ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑໖ ຊາດ
ມີອາຍຸຫຼາຍດົນນານເປັນອັບພຸທະ ແລະນິຣັບພຸທະ

[໖໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນິກຄຸນທິປູບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ນິກຄຸນທິປູບພິຍະເຖຣາປະທານທີ ໗ ຈົບ**

## ໘. ສຸມະນາເວລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸມະນາເວລິຍະເຖຣະ

(ພຣະສຸມະນາເວລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໔] ຊົນທັງປວງມາປະຊຸມກັນທໍາການບູຊາໃຫຍ່ແດ່ ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ເວດສະພູ ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໖໕] ຄັ້ງນັ້ນ ຂ້າພະເຈົ້າໃສ່ກ້ອນປູນຂາວແລ້ວວາງພວງມາໄລດອກມະລິໄວ້
ບູຊາຂ້າງໜ້າພຣະບັນລັງ

[໖໖] ຊົນທັງປວງມາຫຸ້ມເບິ່ງດອກໄມ້ຊັ້ນດີເລີດດ້ວຍຄິດວ່າ
ດອກໄມ້ນີ້ໃຜບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ ຜູ້ຄົງທີ່

[໖໗] ຂ້າພະເຈົ້າໄດ້ເຂົ້າເຖິງສະຫວັນຊັ້ນນິມມານະຣະດີ
ຍ້ອນຈິດທີ່ເຫຼື້ອມໃສນັ້ນ
ໄດ້ສະເຫວີຍຜົນກໍາຂອງຕົນທີ່ເຮັດໄວ້ດີແລ້ວໃນຄັ້ງກ່ອນ

[໖໘] ຂ້າພະເຈົ້າເກີດໃນກໍາເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ

ຍ່ອມເປັນທີ່ຮັກຂອງປວງຊົນ
ນີ້ເປັນຜົນແຫ່ງການບູຊາດ້ວຍດອກໄມ້

[໓໙] ຂ້າພະເຈົ້າບໍ່ຮູ້ເຖິງການດ່າທາງກາຍ ທາງວາຈາ ຫຼື ທາງໃຈ
ທີ່ຂ້າພະເຈົ້າເຮັດແລ້ວແກ່ພິກຂຸທັງຫຼາຍຜູ້ສັງລວມ ຜູ້ມີຕະບະ

[໗໐] ດ້ວຍຄວາມປະພຶດຊອບນັ້ນ
ແລະດ້ວຍການຕັ້ງເຈດຈຳນົງໄວ້
ຂ້າພະເຈົ້າຈຶ່ງເປັນຜູ້ທີ່ປວງຊົນບູຊາ
ນີ້ເປັນຜົນແຫ່ງການບໍ່ດ່າ

[໗໑] ໃນກັບທີ ໑໑ ນັບຈາກກັບນີ້ໄປ
ໄດ້ເປັນກະສັດຜູ້ຈັກກະພັດພຣະນາມວ່າ ສະຫັດສາຣະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໗໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸມະນາເວລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸມະນາເວລິຍະເຖຣາປະທານທີ ໘ ຈົບ**

## ໙. ປຸບຜະສັດຕິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸບຜະສັດຕິຍະເຖຣະ

(ພຣະປຸບຜະສັດຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໓] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່
ຊົງປະກາດສັດຈະ ເຮັດສັດທັງຫຼາຍໃຫ້ສະຫງົບເຢັນຢູ່

[໗໔] ຂ້າພະເຈົ້າໄດ້ນຳດອກບົວ ໑໐໐ ກີບ ທີ່ຮື່ນຣົມໃຈ
ມາເຮັດເປັນເສດຕະດອກໄມ້ຍົກຂຶ້ນບູຊາພຣະພຸດທະເຈົ້າ

[໗໕] ພຣະສາດສະດາພຣະນາມວ່າ ສິດທັດຖະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ປະທັບຢືນຢູ່ໃນທ່າມກາງໝູ່ພິກຂຸ
ໄດ້ຕັດພຣະຄາຖານີ້ ວ່າ

[໗໖] ຜູ້ໃດທຳຈິດໃຫ້ເຫຼື້ອມໃສ ໄດ້ກັ້ງເສດຕະສັດດອກໄມ້ໃຫ້ເຮົາ
ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຜູ້ນັ້ນຈະບໍ່ໄປເກີດໃນທຸກຄະຕິເລີຍ

[໗໗] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ຊົງເປັນຜູ້ນຳສັດໂລກ ເມື່ອຕັດດັ່ງນີ້ແລ້ວ
ຊົງສົ່ງບໍລິສັດໄປແລ້ວສະເດັດເຫາະຂຶ້ນສູ່ທ້ອງຟ້າເວຫາ

[໗໘] ເມື່ອພຣະພຸດທະເຈົ້າຜູ້ເປັນນໍຣະຊົນຜູ້ປະເສີດສະເດັດລຸກຂຶ້ນ
ແມ່ນເສດຕະສັດຂາວກໍລອຍຂຶ້ນນຳ
ເສດຕະສັດທີ່ງາມເລີດລອຍໄປຂ້າງໜ້າຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໗໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍເສດຕະສັດດອກໄມ້

[໘໐] ໃນກັບທີ ໗໔ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໘ ຊາດ ມີພຣະນາມຄືກັນວ່າ ຊະນະສິຂະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໘໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປຸບຜະສັດຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸບຜະສັດຕິຍະເຖຣາປະທານທີ ໙ ຈົບ**

# ໑໐. ສະປະຣິວາຣະສັດຕະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະປະຣິວາຣະສັດຕະທາຍະກະເຖຣະ

(ພຣະສະປະຣິວາຣະສັດຕະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໗໔] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ
ຊົງໂຣຍຝົນຄືທຳໃຫ້ຕົກຢູ່ ເໝືອນນ້ຳຝົນໃນອາກາດ

[໗໓] ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ພຣະອົງນັ້ນຊົງສະແດງອະມະຕະບົດຢູ່
ຈຶ່ງເຮັດຈິດຂອງຕົນໃຫ້ເຫຼື້ອມໃສແລ້ວໄດ້ກັບໄປສູ່ເຮືອນຂອງຕົນ

[໗໔] ຂ້າພະເຈົ້າຖືເສດຕະສັດທີ່ປະດັບແລ້ວ
ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ ຊົງເປັນນໍຣະຊົນຜູ້ສູງສຸດ
ຂ້າພະເຈົ້າມີຈິດຮ່າເຣິງເບີກບານ ໄດ້ໂຍນເສດຕະສັດຂຶ້ນໄປໃນອາກາດ

[໗໕] ສາວົກຜູ້ລ້ຳເລີດ ຝຶກຕົນເໝືອນຍານທີ່ຄວບຄຸມດີແລ້ວ
ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ
ກັ້ງເສດຕະສັດໄວ້ເໜືອຫົວ

[໗໖] ພຣະພຸດທະເຈົ້າຜູ້ອະນຸເຄາະ ປະກອບດ້ວຍພຣະກະລຸນາ
ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໗໗] ຜູ້ໃດຖວາຍເສດຕະສັດທີ່ປະດັບແລ້ວເປັນທີ່ຣື່ນຣົມໃຈນີ້
ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ຜູ້ນັ້ນຈະບໍ່ໄປເກີດໃນທຸກຄະຕິເລີຍ

[໗໘] ຈັກໄດ້ຄອງເທວະສົມບັດໃນໝູ່ເທວະດາຕະຫຼອດ ໗ ຊາດ
ແລະຈັກໄດ້ເປັນພຣະເຈົ້າຈັກກະພັດ ໓໔ ຊາດ

[໗໙] ຕໍ່ຈາກນີ້ໄປອີກ ໑໐໐,໐໐໐ ກັບ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຈັກຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໙໐] ຜູ້ນັ້ນຈັກເປັນທໍາທາຍາດຂອງພຣະສາດສະດາ
ພຣະອົງເປັນໂອຣົດທີ່ທໍາເນຣະມິດ
ຈັກກໍານົດຮູ້ອາສະວະທັງປວງ ເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໙໑] ຂ້າພະເຈົ້າຮູ້ພຣະພຸດທະດໍາຣັດທີ່ຊົງເປ່ງອອກມາ
ເປັນອາສະພິວາຈາແລ້ວກໍມີຈິດເຫຼື້ອມໃສ ມີໃຈຍິນດີ
ຈຶ່ງເກີດຄວາມຣ່າເຣີງຢ່າງຍິ່ງ

[໙໒] ຂ້າພະເຈົ້າລະກໍາເນີດມະນຸດແລ້ວໄດ້ໄປເກີດໃນກໍາເນີດເທວະດາ
ວິມານຂອງຂ້າພະເຈົ້າສວຍງາມ ສູງຕະຫງ່ານ ເປັນທີ່ຣື່ນຣົມໃຈ

[໙໓] ເມື່ອຂ້າພະເຈົ້າອອກຈາກວິມານ
ເທວະດາທັງຫຼາຍຍ່ອມກັ້ງເສດຕະສັດຂາວໃຫ້
ຂ້າພະເຈົ້າກັບໄດ້ຄວາມຊົງຈໍາໃນຄັ້ງນັ້ນ
ນີ້ເປັນຜົນແຫ່ງບຸບພະກໍາ

[໙໔] ຂ້າພະເຈົ້າຈຸຕິຈາກເທວະໂລກແລ້ວ ໄດ້ມາເກີດເປັນມະນຸດ
ໃນກັບທີ ໑໐໗ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ ໓໖ ຊາດ

[໙໕] ຈຸຕິຈາກກາຍນັ້ນແລ້ວໄດ້ໄປສູ່ສະຫວັນຊັ້ນຕາວະຕິງສາ
ທ່ອງທ່ຽວໄປໂດຍລໍາດັບແລ້ວ ໄດ້ມາເກີດເປັນມະນຸດອີກ

[໙໖] ຊົນທັງຫຼາຍໄດ້ກັ້ງເສດຕະສັດຂາວໃຫ້ຂ້າພະເຈົ້າ
ຜູ້ລົງມາປະຕິສົນທິໃນທ້ອງມານດາ
ຂ້າພະເຈົ້າມີອາຍຸ ໗ ຂວບ ກໍໄດ້ອອກບວດເປັນບັນພະຊິດ

[໙໗] ພາມມີນາມວ່າ ສຸນັນທະ ຈົບມົນ
ເຂົາໄດ້ຖືເສດຕະສັດມີສີດັ່ງແກ້ວຜຼຶກມາຖວາຍພຣະອັກຄະຣະສາວົກ

[໙໘] ພຣະສາຣີບຸດຜູ້ມີຄວາມພຽນຫຼາຍ

ຜູ້ມີວາຈາໜ້າບູຊາ ອະນຸໂມທະນາແລ້ວ
ຂ້າພະເຈົ້າຟັງອະນຸໂມທະນາຂອງທ່ານແລ້ວ ຣະລຶກເຖິງບຸບພະກຳໄດ້

[໙໙] ຈຶ່ງປະນົມມື ທຳຈິດຂອງຕົນໃຫ້ເຫຼື້ອມໃສ
ຣະລຶກເຖິງກຳເກົ່າແລ້ວໄດ້ບັນລຸອະຣະຫັນຕະຜົນ

[໑໐໐] ລຸກຈາກອາສະນະນັ້ນແລ້ວປະນົມມືໄວ້ເໜືອຫົວ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ ເປ່ງວາຈານີ້ວ່າ

[໑໐໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າຜູ້ປະເສີດໃນໂລກພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ

[໑໐໒] ຂ້າພະເຈົ້າຖວາຍໄຕຣຈີວອນທີ່ສວຍງາມຕົກແຕ່ງດີແລ້ວແດ່ພຣະອົງ
ພຣະສະຍຳພູພຸດທະເຈົ້າ ຜູ້ເປັນບຸກຄົນຜູ້ເລີດ
ຊົງຮັບດ້ວຍພຣະຫັດທັງ ໒

[໑໐໓] ຊ່າງໜ້າອັດສະຈັນ ພຣະພຸດທະເຈົ້າ
ຊ່າງໜ້າອັດສະຈັນ ພຣະທຳ
ຊ່າງໜ້າອັດສະຈັນ ການທີ່ຂ້າພະເຈົ້າໄດ້ມາພົບພໍ້ກັບພຣະສາດສະດາ
ດ້ວຍຜົນແຫ່ງການຖວາຍເສດຕະສັດອັນໜຶ່ງ
ຂ້າພະເຈົ້າຈຶ່ງບໍ່ເຂົ້າເຖິງທຸກຄະຕິເລີຍ

[໑໐໔] ກິເລດທັງຫຼາຍຂ້າພະເຈົ້າກຳເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກຳຖອນໄດ້ແລ້ວ
ຂ້າພະເຈົ້າກຳນົດຮູ້ອາສະວະທັງປວງໄດ້ແລ້ວ

[໑໐໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກຳໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະປະຣິວາຣະສັດຕະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ
ແນວນີ້

**ສະປະຣິວາຣະສັດຕະທາຍະກະເຖຣາປະທານທີ ໑໐ ຈົບ**

**ອຸມາປຸບຜິຍະວັກທີ ໓໓ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ອຸມາປຸບພິຍະເຖຣາປະທານ
໒. ທາສະຊະນະກະເຖຣາປະທານ
໓. ນິມິດຕະສັນຍະກະເຖຣາປະທານ
໗. ນິກຄຸນທີປູບພິຍະເຖຣາປະທານ
໙. ປຸບຜະສັດຕິຍະເຖຣາປະທານ
໑໐. ສະປະຣິວາຣະສັດຕະທາຍະກະເຖຣາປະທານ
໔. ປູລິນະປູຊະກະເຖຣາປະທານ
໕. ຍັນຍະສາມິກະເຖຣາປະທານ
໖. ອັນນະສັງສາວະກະເຖຣາປະທານ
໘. ສຸມະນາເວລິຍະເຖຣາປະທານ

**ມີຄາຖາ ໑໐໗ ຄາຖາ**

# ໒໕. ຄັນໂທຕະກະວັກ

## ໝວດວ່າດ້ວຍພຣະຄັນໂທຕະກະເປັນຕົ້ນ

## ໑. ຄັນທະທູປິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຄັນທະທູປິຍະເຖຣະ

(ພຣະຄັນທະທູປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ຖວາຍທູບຫອມເຊິ່ງອົບດ້ວຍດອກມະລິ
ສົມຄວນແດ່ ພຣະຜູ້ມີພຣະພາກພຸດທະເຈົ້າພຣະນາມວ່າ ສິດທັດຖະ

[໒] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ ຜູ້ເປັນຄືກັນກັບຄຳທີ່ລ້ຳຄ່າ
ຊຶ່ງເປັນຜູ້ນຳຊັ້ນເລີດຂອງໂລກ ຮຸ່ງເຮືອງດັ່ງດອກອຸບົນຂຽວ
ໂຊດຊ່ວງເໝືອນດວງໄຟໃຫຍ່

[໓] ຜູ້ປະເສີດເໝືອນເສືອໂຄ່ງແລະງົວອຸສະພະ
ເໝືອນພະຍາໄກສອນເຊິ່ງມີຊາດສູງ
ເລີດກວ່າສະມະນະທັງຫຼາຍ
ປະທັບນັ່ງມີໝູ່ພິກຂຸແວດລ້ອມ

[໔] ເມື່ອເຫັນແລ້ວຈຶ່ງກະທຳຈິດໃຫ້ເຫຼື້ອມໃສ
ປະນົມມືຖວາຍອະພິວາດພຣະບາດຂອງພຣະສາດສະດາ
ແລ້ວອວ່າຍໜ້າຫຼີກໄປທາງທິດເໜືອ

[໕]    ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທູບຫອມໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍທູບຫອມ

[໖]    ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄັນທະທູປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄັນທະທູປິຍະເຖຣາປະທານທີ ໑ ຈົບ**

## ໘. ອຸທະກະປູຊະກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະອຸທະກະປູຊະກະເຖຣະ

(ພຣະອຸທະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗]    ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ຮຸ່ງເຮືອງດັ່ງດວງໄຟ ໂຊດຊ່ວງດັ່ງດວງໄຟໃຫຍ່ສະເດັດເຫາະໄປໃນອາກາດ

[໘]    ຂ້າພະເຈົ້າຈຶ່ງໃຊ້ຝ່າມືຕັກນ້ຳແລ້ວຟົດນ້ຳຂຶ້ນໄປເທິງອາກາດ
ພຣະພຸດທະເຈົ້າຜູ້ມີຄວາມພຽນຫຼາຍ
ຊົງປະກອບດ້ວຍພຣະກະລຸນາ ເປັນພຣະລືສີ ຊົງຮັບແລ້ວ

[໙]    ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ
ປະທັບຢືນຢູ່ໃນອາກາດ
ຊົງຮູ້ຄວາມຄິດຂອງຂ້າພຣະອົງ
ຈຶ່ງໄດ້ຕັດພຣະຄາຖານີ້ວ່າ

[໑໐]    ດ້ວຍຜົນແຫ່ງການຖວາຍນ້ຳ
ແລະດ້ວຍຜົນແຫ່ງການເຮັດປີຕິໃຫ້ເກີດຂຶ້ນນີ້
ທ່ານຈະບໍ່ໄປເກີດໃນທຸກຄະຕິເລີຍແມ່ນຕະຫຼອດ ໑໐໐,໐໐໐ ກັບ
[໑໑]    ຂ້າແດ່ ພຣະອົງຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ

ດ້ວຍກຳນັ້ນ ຂ້າພຣະອົງລະຄວາມຊະນະ ແລະຄວາມພ່າຍແພ້ໄດ້ແລ້ວ
ບັນລຸເຖິງຖານະທີ່ບໍ່ຫວັ່ນໄຫວ

[໑໘] ໃນກັບທີ ໑໗໕ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດ ໑ ຊາດ
ມີນາມວ່າ ສະຫັດສະຣາດ
ເປັນໃຫຍ່ໃນໝູ່ຊົນ ມີມະຫາສະມຸດທັງ ໔ ເປັນຂອບເຂດ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸທະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸທະກະປູຊະກະເຖຣາປະທານທີ ໔ ຈົບ**

# ໑. ປຸນນາຄະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸນນາຄະປຸບຜິຍະເຖຣະ

(ພຣະປຸນນາຄະປຸບຜິຍະເຖຣະເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໔] ຂ້າພະເຈົ້າເປັນນາຍພານ ເຂົ້າໄປຢູ່ໃນປ່າໃຫຍ່
ໄດ້ພົບຕົ້ນບຸນນາກມີດອກບານສະພັ່ງ
ຈຶ່ງຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໕] ຂ້າພະເຈົ້າໄດ້ເລືອກເກັບດອກບຸນນາກນັ້ນ
ສະເພາະທີ່ມີກິ່ນຫອມ
ສວຍງາມແລ້ວກໍ່ສະຖູບເທິງເນີນຊາຍ
ຍົກຂຶ້ນບູຊາພຣະພຸດທະເຈົ້າ

[໑໖] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໗] ໃນກັບທີ ໗໑ (ນັບຈາກກັບນີ້ໄປ)
ໄດ້ເປັນພຣະເຈົ້າຈັກກະພັດອົງໜຶ່ງນາມວ່າ ຕະໂມນຸທະ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ

[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປຸນນາຄະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸນນາຄະປຸບພິຍະເຖຣາປະທານທີ ໓ ຈົບ**

## ໔. ເອກະທຸດສະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກະທຸດສະທາຍະກະເຖຣະ

(ພຣະເອກະທຸດສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໑໙] ຂ້າພະເຈົ້າເປັນຄົນກ່ຽວຫຍ້າຂາຍຢູ່ໃນນະຄອນທົ່ງສະວະດີ
ລ້ຽງຊີວິດ ແລະລ້ຽງພັນລະຍາດ້ວຍການກ່ຽວຫຍ້າຂາຍນັ້ນ

[໒໐] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ເປັນຜູ້ນຳສັດໂລກ ສະເດັດອຸບັດຂຶ້ນທຳລາຍຄວາມມືດໃຫ້ພິນາດໄປ

[໒໑] ຄັ້ງນັ້ນ ຂ້າພະເຈົ້ານັ່ງຢູ່ໃນເຮືອນຂອງຕົນຄິດແນວນີ້ວ່າ
ພຣະພຸດທະເຈົ້າສະເດັດອຸບັດຂຶ້ນໃນໂລກແລ້ວ
ແຕ່ໄທຍະທຳຂອງເຮົາບໍ່ມີເລີຍ

[໒໒] ເຮົາມີແຕ່ຜ້າສາດົກຜືນດຽວນີ້ ບໍ່ມີໃຜໃຫ້ (ອັນໃດ) ແກ່ເຮົາ
ການສຳຜັດຖືກຕ້ອງນະຣົກ (ຕົກນະຣົກ) ເປັນທຸກ
ເຮົາຈັກປູກຝັງທັກຂິນາທານໄວ້

[໒໓] ເມື່ອຄິດແນວນີ້ແລ້ວ ຈຶ່ງກະທຳຈິດຂອງຕົນໃຫ້ເຫຼື້ອມໃສ
ໄດ້ຖືຜ້າຜືນໜຶ່ງໄປຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໘໔] ເມື່ອຖວາຍຜ້າຜືນນັ້ນແລ້ວໄດ້ປະກາດກ້ອງຂຶ້ນວ່າ
ຂ້າແຕ່ພຣະມະຫາມຸນີວີຣະເຈົ້າ ຖ້າພຣະອົງເປັນພຣະພຸດທະເຈົ້າ
ຂໍໄດ້ຊົງໂພດຊ່ອຍຂ້າພຣະອົງໃຫ້ຂ້າມ (ວັດຕະສົງສານ) ດ້ວຍເທີ້ນ

[໘໕] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ເມື່ອຈະຊົງສັນເສີນທານຂອງຂ້າພະເຈົ້າ
ໄດ້ຊົງອະນຸໂມທະນາແກ່ຂ້າພະເຈົ້າວ່າ

[໘໖] ດ້ວຍຜົນແຫ່ງການຖວາຍຜ້າຜືນດຽວນີ້
ແລະດ້ວຍການຕັ້ງເຈດຈຳນົງໄວ້
ຜູ້ນີ້ຈະບໍ່ຕົກວິນິບາດນະຣົກເລີຍຕະຫຼອດ ໑໐໐,໐໐໐ ກັບ

[໘໗] ຈັກເກີດເປັນຈອມເທບຄອງເທວະສົມບັດ ໕໖ ຊາດ
ຈັກເປັນພຣະເຈົ້າຈັກກະພັດ ໕໕ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນ ນັບຊາດບໍ່ຖ້ວນ

[໘໘] ທ່ານເມື່ອວຽນວ່າຍຕາຍເກີດຢູ່ໃນເທວະໂລກ ຫຼື ໃນມະນຸດໂລກ
ຈັກເປັນຜູ້ມີຮູບງາມ ສົມບູນດ້ວຍຄຸນສົມບັດ
ມີກາຍໜ້າຕ້ອງການຍິ່ງ ຜ້ານັບບໍ່ໄດ້ ປະມານບໍ່ໄດ້
ຈັກເກີດມີຕາມຄວາມປາຖະໜາ

[໘໙] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເປັນນັກປາດ ເມື່ອຕັດດັ່ງນີ້ແລ້ວ
ສະເດັດເຫາະຂຶ້ນສູ່ອາກາດ ເໝືອນພະຍາຫົງໃນທ້ອງຟ້າ

[໕໐] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກຳເນີດນັ້ນ ໆ ຄວາມຂາດໃນໂພຄະສົມບັດບໍ່ມີແກ່ຂ້າພະເຈົ້າເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າຜືນໜຶ່ງ

[໕໑] ຜ້າຍ່ອມບັງເກີດແກ່ຂ້າພະເຈົ້າທຸກ ໆ ບາດກ້າວຍ່າງ
ເບື້ອງລຸ່ມຂ້າພະເຈົ້າຢືນຢູ່ເທິງຜ້າ
ເບື້ອງເທິງຂ້າພະເຈົ້າມີຜ້າເປັນຫຼັງຄາ

[໓໔] ວັນນີ້ ຖ້າຂ້າພະເຈົ້າປາຖະໜາ ກໍສາມາດໃຊ້ຜ້າປົກຄຸມ
ຈັກກະວານ ພ້ອມທັງປ່າ ພ້ອມທັງພູເຂົາໄດ້

[໓໓] ດ້ວຍຜົນແຫ່ງການຖວາຍຜ້າຜືນດຽວນັ້ນ ໆ ແລ
ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ເປັນຜູ້ມີຜິວພັນດັ່ງຄຳ
ຈະວຽນວ່າຍຕາຍເກີດໃນພົບນ້ອຍພົບໃຫຍ່

[໓໔] ຜົນແຫ່ງການຖວາຍຜ້າຜືນດຽວບໍ່ເຖິງຄວາມສິ້ນໄປໃນບ່ອນໃດ
ຊາດນີ້ເປັນຊາດສຸດທ້າຍຂອງຂ້າພະເຈົ້າ
ຜ້າຍ່ອມໃຫ້ຜົນແກ່ຂ້າພະເຈົ້າແມ່ນໃນຊາດນີ້

[໓໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າຜືນດຽວ

[໓໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງບໍ່ມີອາສະວະ
ເໝືອນຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະທຸດສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະທຸດສະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ຟຸສິຕະກຳມິຍະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະຟຸສິຕະກຳມິຍະເຖຣະ

(ພຣະຟຸສິຕະກຳມິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໘] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ພ້ອມດ້ວຍພຣະຂີນາສົບທັງຫຼາຍ ປະທັບຢູ່ໃນສັງຄາຣາມ

[໓໙] ພຣະພຸດທະເຈົ້າພຣະນາມວ່າ ວິປັດສີນັ້ນ
ຜູ້ຊົງເປັນຜູ້ນໍາສັດໂລກ
ສະເດັດອອກຈາກປະຕູອາຣາມ ໄດ້ປະທັບຢືນ
ພ້ອມດ້ວຍພຣະຂີນາສົບ ໑໐໐,໐໐໐ ອົງ

[໔໐] ຂ້າພະເຈົ້ານຸ່ງໜັງສັດ ແລະ ຫົ່ມຜ້າເປືອກໄມ້
ຖືນໍ້າເຈືອດອກໂກສຸມ ເຂົ້າເຝົ້າພຣະສໍາມາສໍາພຸດທະເຈົ້າ

[໔໑] ກະທໍາຈິດຂອງຕົນໃຫ້ເຫຼື້ອມໃສ ເກີດໂສມະນັດ ປະຄອງອັນຊະລີ
ຖືນໍ້າເຈືອດອກໂກສຸມໄປປະພົມພຣະພຸດທະເຈົ້າ

[໔໒] ດ້ວຍກໍານັ້ນ ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງສັນເສີນກໍາຂອງຂ້າພະເຈົ້າແລ້ວ
ໄດ້ສະເດັດໄປຕາມພຣະປະສົງ

[໔໓] ຂ້າພະເຈົ້າໄດ້ບູຊາພຣະຊິນນະເຈົ້າດ້ວຍນໍ້າເຊິ່ງກໍານົດໄດ້ ໕,໐໐໐ ຍົດ
ໄດ້ຄອງເທວະສົມບັດຍ້ອນນໍ້າ ໘,໕໐໐ ຍົດ

[໔໔] ໄດ້ເປັນພຣະເຈົ້າຈັກກະພັດຍ້ອນນໍ້າ ໘,໕໐໐ ຍົດ
ໄດ້ບັນລຸອະຣະຫັນຕະຜົນດ້ວຍກໍາທີ່ເຫຼືອ

[໔໕] ໃນການທີ່ຂ້າພະເຈົ້າເປັນພຣະເຈົ້າຈັກກະພັດ
ກໍມີນາມວ່າຜຸສິຕະ ໃນການທີ່ຂ້າພະເຈົ້າເປັນທ້າວເທວະຣາດ
ຄໍາວ່າ ຜຸສິຕະນັ້ນແລ ເປັນຊື່ຂອງຂ້າພະເຈົ້າ

[໔໖] ເມື່ອຂ້າພະເຈົ້າເກີດເປັນເທວະດາ ຫຼື ມະນຸດກໍຕາມ
ຍົດນໍ້າຍ່ອມຕົກໂດຍຮ້ອບຂ້າພະເຈົ້າຂ້າງລະໜຶ່ງວາ

[໔໗] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າເປັນຜູ້ສິ້ນອາສະວະທັງປວງແລ້ວ
ນີ້ເປັນຜົນແຫ່ງຍົດນໍ້າ

[໔໘] ກາຍຂອງຂ້າພະເຈົ້າມີກິ່ນຫອມຟຸ້ງໄປເໝືອນກິ່ນຈັນ
ກິ່ນຫອມທີ່ອອກຈາກຮ່າງກາຍຂອງຂ້າພະເຈົ້າ
ຟຸ້ງໄປໄກໄດ້ຮອດ ໘໕໐ ຄັນທະນູ

[໔໙] ຊົນທັງຫຼາຍ ສູບກິ່ນຫອມອົບອວນ
ທີ່ປະກອບດ້ວຍບຸນກຳແລ້ວ
ຍ່ອມຮູ້ໄດ້ທັນທີວ່າ ພຣະເຈົ້າຜຸສິຕະ ສະເດັດມາ ໃນບ່ອນນີ້
[໕໐] ງ່າໄມ້ ໃບໄມ້ ຂອນໄມ້ ແລະແມ່ນຮອດຫຍ້າ
ທຸກຊະນິດ (ດັ່ງຈະ) ຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຍ່ອມສຳເລັດເປັນກິ່ນຫອມທັນທີ
[໕໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ໄມ້ຈັນບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍຍືດນ້ຳ

[໕໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຜຸສິຕະກຳມິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜຸສິຕະກຳມິຍະເຖຣາປະທານທີ ໕ ຈົບ**

## ໖. ປະພັງກະຣະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປະພັງກະຣະເຖຣະ

(ພຣະປະພັງກະຣະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໓] ພຣະເຈດີຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່
ມີຢູ່ໃນປ່າໃຫຍ່ເຊິ່ງເດຍລະດາດດ້ວຍສັດຮ້າຍ

[໕໔] ບໍ່ມີຜູ້ໃດສາມາດເຂົ້າໄປຂາບໄຫວ້ພຣະເຈດີໄດ້
ພຣະເຈດີຖືກຫຍ້າ ຕົ້ນໄມ້ ແລະເຄືອເຂົາປົກຄຸມ ຈຶ່ງຫັກເພລົງ

[໕໕] ຄັ້ງນັ້ນ ຂ້າພະເຈົ້າເປັນຄົນເຮັດວຽກງານໃນປ່າ ພ້ອມບິດາແລະປູ່
ຈຶ່ງໄດ້ເຫັນພຣະສະຖູບຫັກເພ
ຮົກໄປດ້ວຍຫຍ້າແລະເຄືອເຂົາ ໃນປ່າໃຫຍ່

[໕໖]　ເມື່ອໄດ້ເຫັນພຣະສະຖູບຂອງພຣະພຸດທະເຈົ້າແລ້ວ
ຕັ້ງຈິດເຄົາລົບໄວ້ວ່າ
ພຣະສະຖູບນີ້ຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ ທັກເພຢູ່ໃນປ່າ

[໕໗]　ພຣະສະຖູບບໍ່ມີອັນໃດບັງແດດຝົນ
ບໍ່ (ຢູ່ໃນທີ່) ເໝາະສົມແກ່ຄົນທີ່ຮູ້ຄຸນແລະບໍ່ແມ່ນຄຸນ
ເຮົາຍັງບໍ່ໄດ້ເຮັດຄວາມສະອາດພຣະສະຖູບຂອງພຣະພຸດທະເຈົ້າ
ຈະບໍ່ປະກອບບວງກງານແນວອື່ນ

[໕໘]　ຂ້າພະເຈົ້າແຜ້ວຖາງຫຍ້າ ຕົ້ນໄມ້ ແລະເຄືອເຂົາທີ່ພຣະເຈດີສຳເລັດແລ້ວ
ຄຸກເຂົ່າໄຫວ້ຄົບ ໘ ເທື່ອແລ້ວກໍກັບໄປ

[໕໙]　ດ້ວຍກຸສົນກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ແລ້ວນັ້ນ
ແລະດ້ວຍການຕັ້ງເຈດຈຳນົງໄວ້
ຂ້າພະເຈົ້າປະລະຮ່າງກາຍມະນຸດໄປແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
[໖໐]　ວິມານຄຳທີ່ບຸນກຳສ້າງໄວ້ຢ່າງດີໃນພົບຕາວະຕິງສານັ້ນ
ສວຍງາມ ສີເຫຼື້ອມປະພັດສອນ ສູງ ໖໐ ໂຍດ ກວ້າງ ໓໐ ໂຍດ

[໖໑]　ຂ້າພະເຈົ້າໄດ້ຄອງເທວະສົມບັດ ໓໐໐ ຊາດ
ແລະໄດ້ເກີດເປັນພຣະເຈົ້າຈັກກະພັດ ໔໕ ຊາດ

[໖໔]　ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຍ່ອມໄດ້ໂພຄະສົມບັດຫຼາຍ
ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະສົມບັດ
ນີ້ເປັນຜົນແຫ່ງການແຜ້ວຖາງ

[໖໓]　ເມື່ອຂ້າພະເຈົ້ານັ່ງຄານຫາມຫຼືຂີ່ຄໍຊ້າງ
ໄປໃນປ່າໃຫຍ່ ໄປສູ່ທິດໃດ ໆ
ໃນທິດນັ້ນ ໆ ປ່າຍ່ອມສຳເລັດເປັນບ່ອນເພິ່ງໄດ້

[໖໔]　ຂ້າພະເຈົ້າປະກອບດ້ວຍບຸນກຳບໍ່ພົບເຫັນຕໍ ຫຼື ໜາມເລີຍ
ບຸນກຳນຳ (ຕໍຫຼືໜາມ) ອອກໄປເອງ

[໖໕]　ໂຣກຂີ້ທູດ ຝີ ກາກ ໂຣກລົມບ້າໝູ ຄຸດທະລາດ

ທິດເບື້ອຍ ແລະທິດດ້ານ ບໍ່ມີແກ່ຂ້າພະເຈົ້າ
ນີ້ເປັນຜົນແຫ່ງການແຜ້ວຖາງ

[໗໖] ຍ້ອນຂ້າພະເຈົ້າແຜ້ວຖາງພຣະສະຖູບຂອງພຣະພຸດທະເຈົ້າ
ຄວາມອັດສະຈັນຢ່າງອື່ນຍັງມີອີກ
ຂ້າພະເຈົ້າບໍ່ຮູ້ສຶກວ່າຈະມີຕ່ອມຝີ
ຢາດນໍ້າເຫຼືອງ ເກີດທີ່ກາຍຂອງຂ້າພະເຈົ້າເລີຍ
[໗໗] ຍ້ອນຂ້າພະເຈົ້າແຜ້ວຖາງພຣະສະຖູບຂອງພຣະພຸດທະເຈົ້າ
ຄວາມອັດສະຈັນຢ່າງອື່ນຍັງມີອີກ
ຂ້າພະເຈົ້າໄດ້ວຽນວ່າຍຕາຍເກີດຢູ່ໃນ ໔ ພົບ
ຄືໃນພົບເທວະດາຫຼືພົບມະນຸດ
[໗໘] ຍ້ອນຂ້າພະເຈົ້າແຜ້ວຖາງພຣະສະຖູບຂອງພຣະພຸດທະເຈົ້າ
ຄວາມອັດສະຈັນຢ່າງອື່ນຍັງມີອີກ
ຂ້າພະເຈົ້າເປັນຜູ້ມີຜິວພັນດັ່ງຄໍາ
ເປັນຜູ້ມີຣັດສະໝີໃນທີ່ທັງປວງ

[໗໙] ຍ້ອນຂ້າພະເຈົ້າແຜ້ວຖາງພຣະສະຖູບຂອງພຣະພຸດທະເຈົ້າ
ຄວາມອັດສະຈັນຢ່າງອື່ນຍັງມີອີກ
ສິ່ງທີ່ບໍ່ໜ້າພໍໃຈຍ່ອມບໍ່ມີ
ສິ່ງທີ່ໜ້າພໍໃຈຍ່ອມຜຸດຂຶ້ນຖ້າຢູ່

[໘໐] ຍ້ອນຂ້າພະເຈົ້າແຜ້ວຖາງພຣະສະຖູບຂອງພຣະພຸດທະເຈົ້າ
ຄວາມອັດສະຈັນຢ່າງອື່ນຍັງມີອີກ
ຈິດຂອງຂ້າພະເຈົ້າເປັນທໍາມະຊາດບໍລິສຸດ
ມີອາລົມດຽວຕັ້ງໝັ້ນດ້ວຍດີ

[໘໑] ຍ້ອນຂ້າພະເຈົ້າແຜ້ວຖາງພຣະສະຖູບຂອງພຣະພຸດທະເຈົ້າ
ຄວາມອັດສະຈັນຢ່າງອື່ນຍັງມີອີກ
ຂ້າພະເຈົ້ານັ່ງເທິງອາສະນະດຽວກໍໄດ້ບັນລຸອະຣະຫັນຕະຜົນ
[໘໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກໍາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການແຜ້ວຖາງ

[໗໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປະພັງກະຣະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແບບນີ້

**ປະພັງກະຣະເຖຣາປະທານທີ ໖ ຈົບ**

## ໗. ຕິນະກຸຕິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິນະກຸຕິທາຍະກະເຖຣະ

(ພຣະຕິນະກຸຕິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໔] ຂ້າພະເຈົ້າເປັນຄົນຮັບຈ້າງເຮັດວຽກຂອງຜູ້ອື່ນ
ຂວນຂວາຍໃນວຽກງານຂອງຜູ້ອື່ນ
ອາໄສອາຫານຂອງຜູ້ອື່ນລ້ຽງຊີບ ຢູ່ໃນນະຄອນພັນທຸມະດີ

[໗໕] ໃນຄັ້ງນັ້ນ ຂ້າພະເຈົ້ານັ່ງຢູ່ໃນບ່ອນຫຼົບຫຼີກແລ້ວ ຄິດແບບນີ້ວ່າ
ພຣະພຸດທະເຈົ້າສະເດັດອຸບັດຂຶ້ນໃນໂລກແລ້ວ
ແຕ່ການສ້າງບຸນກຸສົນຂອງເຮົາຍັງບໍ່ມີ

[໗໖] ບັດນີ້ ເປັນເວລາສົມຄວນທີ່ເຮົາຈະຊຳຣະຄະຕິ
ເຖິງເວລາຂອງເຮົາແລ້ວ ການສຳຜັດຖືກຕ້ອງນະຮົກເປັນທຸກ
ແກ່ສັດທັງຫຼາຍຜູ້ບໍ່ມີບຸນຢ່າງແນ່ນອນ

[໗໗] ເມື່ອຂ້າພະເຈົ້າຄິດແບບນີ້ແລ້ວ
ຈຶ່ງເຂົ້າໄປຫາເຈົ້າຂອງງານ
ຂໍຢຸດງານ ໑ ວັນແລ້ວເຂົ້າໄປສູ່ປ່າໃຫຍ່

[໗໘] ຄັ້ງນັ້ນ ຂ້າພະເຈົ້າຂົນຫຍ້າ ໄມ້ ແລະເຄືອເຂົາມາແລ້ວ
ຕັ້ງໄມ້ເປັນ ໓ ເສົາ ໄດ້ສ້າງເປັນກຸດຕິຫຍ້າ

[໗໙] ຂ້າພະເຈົ້າໄດ້ມອບຖວາຍກຸດຕິນັ້ນເພື່ອປະໂຫຍດແກ່ສົງ
ແລ້ວກັບມາຫາເຈົ້າຂອງງານໃນວັນນັ້ນ ໆ ເອງ

[໘໐] ດ້ວຍກຸສົນກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ແລ້ວນັ້ນ

ຂ້າພະເຈົ້າຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
ວິມານທີ່ບຸນກຳເນຣະມິດສ້າງໄວ້ຢ່າງດີ
ເພື່ອຂ້າພະເຈົ້າໃນພິບຕາວະຕິງສານັ້ນ

[໗໑] ຜາສາດ ໑໐໐ ຊັ້ນ ສູງ ໑,໐໐໐ ລູກທະນູ
ສະພັ່ງໄປດ້ວຍທຸງ ແພວພາວໄປດ້ວຍແກ້ວມະນີສີຂຽວ
ແລະປ້ອມ ໑໐໐,໐໐໐ ປ້ອມ
ຜາກົດໃນວິມານຂອງຂ້າພະເຈົ້າ

[໗໔] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ໃນກຳເນີດນັ້ນ ໆ ຜາສາດ (ດັ່ງຈະ)
ຮູ້ຄວາມດຳຣິຂອງຂ້າພະເຈົ້າຜຸດຂຶ້ນ

[໗໓] ຄວາມຢ້ານ ຄວາມເກງກົວ ຫຼື ຂົນລຸກຂູຊັນ
ຍ່ອມບໍ່ມີແກ່ຂ້າພະເຈົ້າ
ຂ້າພະເຈົ້າບໍ່ຮູ້ສຶກສະດຸ້ງຫວາດສຽວເລີຍ
ນີ້ເປັນຜົນແຫ່ງການຖວາຍກຸດຕິຫຍ້າ

[໗໔] ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ໝາໃນ
ແລະເສືອດາວ ທັງໝົດ ກໍລະເວັ້ນຂ້າພະເຈົ້າ
ນີ້ເປັນຜົນແຫ່ງການຖວາຍກຸດຕິຫຍ້າ

[໗໕] ສັດເລືອຄານ ຜີ ງູ ກຸມພັນ
ແລະຜີເສືອນ້ຳ ແມ່ນເຫຼົ່ານັ້ນ ກໍລະເວັ້ນຂ້າພະເຈົ້າ
ນີ້ເປັນຜົນແຫ່ງການຖວາຍກຸດຕິຫຍ້າ

[໗໖] ຂ້າພະເຈົ້າຣະລຶກບໍ່ໄດ້ວ່າຈະໄດ້ເຫັນຄວາມຝັນອັນຊົ່ວຊ້າ
ສະຕິຂອງຂ້າພະເຈົ້າຕັ້ງໝັ້ນ
ນີ້ເປັນຜົນແຫ່ງການຖວາຍກຸດຕິຫຍ້າ

[໗໗] ຍ້ອນການຖວາຍກຸດຕິຫຍ້ານັ້ນແລ
ຂ້າພະເຈົ້າຈຶ່ງໄດ້ສະເຫວີຍສົມບັດ
ໄດ້ກະທຳໃຫ້ແຈ້ງເຊິ່ງທຳ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມ

[໗໗]	ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍກຸດຕິຫຍ້າ

[໗໙]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນະກຸຕິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິນະກຸຕິທາຍະກະເຖຣາປະທານທີ ໗ ຈົບ**

## ໘. ອຸດຕະເຣີຍະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸດຕະເຣີຍະທາຍະກະເຖຣະ

(ພຣະອຸດຕະເຣີຍະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໙໐]	ຄັ້ງນັ້ນ ຂ້າພະເຈົ້າເປັນພາມຜູ້ຄົງແກ່ຮຽນ
ຊົງຈຳມົນ ຈົບໄຕຣເພດ ຢູ່ໃນນະຄອນຫົງສະວະດີ

[໙໑]	ເວລານັ້ນ ຂ້າພະເຈົ້າມີພວກສິດຂອງຕົນແວດລ້ອມ
ເປັນຄົນມີຕະກູນ ສຶກສາດີ
ອອກໄປຈາກນະຄອນເພື່ອຕ້ອງການຈະທົດນ້ຳ

[໙໒]	ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ສະເດັດເຂົ້າມາຍັງນະຄອນພ້ອມກັບພຣະຂີນາສົບຫຼາຍພັນອົງ

[໙໓]	ຂ້າພະເຈົ້າເຫັນພຣະອົງມີພຣະຮູບງາມຍິ່ງນັກ
ບໍ່ຫວັ່ນໄຫວເໝືອນຮູບທີ່ເຂົາຫຼໍ່ໄວ້
ມີພຣະອະຣະຫັນທັງຫຼາຍແວດລ້ອມ
ເມື່ອແລ້ວໄດ້ກະທຳຈິດໃຫ້ເຫຼື້ອມໃສ

[໙໔] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ປະນົມມືໄວ້ເໜືອຫົວ
ນະມັດສະການພຣະອົງຜູ້ມີຂໍ້ວັດງາມແລ້ວ ໄດ້ຖວາຍຜ້າຫົ່ມ

[໙໕] ຂ້າພະເຈົ້າປະຄອງຜ້າສາດົກດ້ວຍມືທັງ ໔ ແລ້ວຍົກຂຶ້ນ
ຜ້າສາດົກປົກປິດ (ບັງແດດຝົນ) ຕະຫຼອດທົ່ວພຸດທະບໍລິສັດ

[໙໖] ເມື່ອໝູ່ພິກຂຸເປັນຕົ້ນຈຳນວນຫຼາຍ
ທ່ຽວຈາຣິກໄປບິນທະບາດໃນເວລານັ້ນ
ຜ້າສາດົກໄດ້ກັ້ນເປັນຫຼັງຄາ ຍັງຂ້າພະເຈົ້າໃຫ້ຣ່າເຣິງ

[໙໗] ເມື່ອໝູ່ພິກຂຸເປັນຕົ້ນຈະອອກຈາກເຮືອນ
ພຣະສາດສະດາຜູ້ເປັນພຣະສະຍຳພູ ຊຶ່ງເປັນບຸກຄົນຜູ້ເລີດ
ປະທັບຢືນຢູ່ທີ່ຖະໜົນໄດ້ຊົງອະນຸໂມທະນາວ່າ

[໙໘] ເຮົາຈັກພະຍາກອນຜູ້ທີ່ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍຜ້າສາດົກແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໙໙] ຜູ້ນັ້ນຈັກຣື່ນຣົມໃນເທວະໂລກ ໓໐,໐໐໐ ກັບ
ຈັກເປັນຈອມເທບຄອງເທວະຣາດຊະສົມບັດໃນເທວະໂລກ ໔໐ ຊາດ

[໑໐໐] ເມື່ອເຂົາຜູ້ພຽບພ້ອມດ້ວຍບຸນກຳຢູ່ໃນເທວະໂລກ
ຈັກມີຜ້າເປັນຫຼັງຄາບັງແດດຝົນຕະຫຼອດ ໑໐໐ ໂຍດໂດຍຮ້ອບ

[໑໐໑] ແລະຈັກເກີດເປັນພຣະເຈົ້າຈັກກະພັດ ໓໖ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໐໒] ເມື່ອເຂົາຜູ້ພຽບພ້ອມດ້ວຍບຸນກຳ
ວຽນວ່າຍຕາຍເກີດຢູ່ໃນພົບ
ສິ່ງທີ່ເຂົາປາຖະໜາດ້ວຍໃຈທຸກຢ່າງຈັກບັງເກີດຂຶ້ນທັນທີ

[໑໐໓] ຄົນຜູ້ນີ້ຈັກໄດ້ຜ້າໄໝ ຜ້າຂົນສັດ ຜ້າເປືອກໄມ້
ຜ້າຝ້າຍ ແລະຜ້າທັງຫຼາຍ ເຊິ່ງມີຄ່າຫຼາຍ

[໑໐໔] ຄົນຜູ້ນີ້ຈັກໄດ້ສິ່ງທີ່ຕົນປາຖະໜາດ້ວຍໃຈທຸກຢ່າງ
ຈັກສະເຫວີຍວິບາກແຫ່ງຜ້າຜືນດຽວ ໃນການທຸກເມື່ອ

[໑໐໕] ພາຍຫຼັງເຂົາອັນກຸສົນມູນຕັກເຕືອນແລ້ວຈັກອອກບວດ
ຈັກກະທຳໃຫ້ແຈ້ງເຊິ່ງທຳຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມ

[໑໐໖] ໜ້າພໍໃຈ ຂ້າພະເຈົ້າໄດ້ເຮັດກຳໄວ້ດີແລ້ວ
ແດ່ພຣະສຳມາສຳພຸດທະເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຈຶ່ງໄດ້ບັນລຸອະມະຕະບົດຍ້ອນຖວາຍຜ້າສາດົກຜືນດຽວ

[໑໐໗] ຜ້າເປັນຫຼັງຄາບັງແດດຝົນໃຫ້ແກ່ຂ້າພະເຈົ້າຜູ້ຢູ່ໃນມົນດົບ
ຢູ່ເຫງົ້າໄມ້ ຫຼືໃນເຮືອນວ່າງ ໂດຍຮ້ອບ ຂ້າງລະ ໑ ວາ

[໑໐໘] ຂ້າພະເຈົ້ານຸ່ງຫົ່ມຈີວອນແລະໃຊ້ສອຍປັດໄຈ
ເຊິ່ງບໍ່ໄດ້ເຮັດວິນຍັດ (ບໍ່ໄດ້ອອກປາກຂໍມາ) ໄດ້ເຂົ້າແລະນ້ຳ
ນີ້ເປັນຜົນແຫ່ງການຖວາຍຜ້າຫົ່ມຜືນດຽວ

[໑໐໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າ

[໑໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸດຕະເຣີຍະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸດຕະເຣີຍະທາຍະກະເຖຣາປະທານທີ ໘ ຈົບ**

## ໙. ທຳມັດສະວະນີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທຳມະສະວະນີຍະເຖຣະ

(ພຣະທຳມັດສະວະນີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໑໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຊົງປະກາດສັດຈະ ໔
ຊົງຊ່ອຍຊົນຈຳນວນຫຼາຍໃຫ້ຂ້າມພົ້ນ (ວັດຕະສົງສານ)

[໑໑໔] ສະໄໝນັ້ນ ຂ້າພະເຈົ້າເປັນຊະດີນມີຕະບະແກ່ກ້າ
ສະລັດຜ້າເປືອກໄມ້ ເຫາະໄປໃນທ້ອງຟ້າ ໃນຄັ້ງນັ້ນ

[໑໑໓] ຄັ້ງນັ້ນ ຂ້າພະເຈົ້າບໍ່ອາດຈະໄປໃນເບື້ອງເທິງ
ແຫ່ງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດໄດ້
ເວລານັ້ນ ຂ້າພະເຈົ້າເປັນເໝືອນນົກຊົນໜ້າຜາ (ຫີນ) ບິນໄປບໍ່ໄດ້

[໑໑໔] ຄວາມເປັນໄປທີ່ຜິດແປກເຊັ່ນນີ້ບໍ່ເຄີຍມີແກ່ຂ້າພະເຈົ້າເລີຍ
ຂ້າພະເຈົ້າເຫາະໄປໃນທ້ອງຟ້າ ເໝືອນມີນຕາໄປໃນນໍ້າ

[໑໑໕] (ຄັ້ງນັ້ນຂ້າພະເຈົ້າມີຄວາມຄິດວ່າ) ກໍມະນຸດເຊິ່ງເປັນຜູ້ປະເສີດ
ຈັກມີຢູ່ພາຍໃຕ້ນີ້ແນບໍ່ນໍ
ຖ້າຈັ່ງຊັ້ນເຮົາຈັກຄົ້ນຫາເຂົາ ບາງເທື່ອຈະເພິ່ງໄດ້ປະໂຫຍດດ້ວຍ

[໑໑໖] ເມື່ອຂ້າພະເຈົ້າລົງຈາກອາກາດ
ໄດ້ຟັງພຣະສຸຣະສຽງຂອງພຣະສາດສະດາເຊິ່ງກຳລັງຕັດເລື້ອງອະນິດຈະຕາຢູ່
ຂ້າພະເຈົ້າຈຶ່ງຮຽນເລື້ອງອະນິດຈະຕານັ້ນໃນຂະນະນັ້ນ
[໑໑໗] ເມື່ອຮຽນອະນິດຈະສັນຍາແລ້ວໄດ້ກັບໄປສູ່ອາສົມຂອງຕົນ
ຂ້າພະເຈົ້າຢູ່ຈົນຕະຫຼອດກຳນົດອາຍຸໄຂແລ້ວໄດ້ສິ້ນຊີວິດລົງ ໃນບ່ອນນັ້ນ

[໑໑໘] ເມື່ອພົບສຸດທ້າຍກຳລັງເປັນໄປຢູ່
ຂ້າພະເຈົ້າຣະລຶກເຖິງການຟັງທຳນັ້ນໄດ້
ດ້ວຍກຸສົນກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໑໙] ຂ້າພະເຈົ້າຣື່ນຣົມຢູ່ໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ໄດ້ຄອງເທວະສົມບັດ ໕໑ ຊາດ

[໑໒໐] ໄດ້ເກີດເປັນພຣະເຈົ້າຈັກກະພັດ ໗໑ ຊາດ
ແລະເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໒໑] ພຣະສະມະນະຜູ້ອົບຣົມອິນຊີແລ້ວ ນັ່ງເທິງເຮືອນຂອງບິດາ
ເປ່ງວາຈາເຖິງເລື້ອງບໍ່ທ່ຽງ ສະແດງເປັນຄາຖາ

[໑໒໒] ຂ້າພະເຈົ້າຣະລຶກເຖິງສັນຍານັ້ນໄດ້

ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຍັງບໍ່ໄດ້ຮູ້ແຈ້ງທີ່ສຸດຄືພຣະນິບພານ ເຊິ່ງເປັນທົນທາງບໍ່ຈຸຕິວ່າ

[໑໘໓] ສັງຂານທັງຫຼາຍບໍ່ທ່ຽງນໍ
ມີຄວາມເກີດຂຶ້ນແລະເສື່ອມໄປເປັນທຳມະດາ ເກີດຂຶ້ນແລ້ວຍ່ອມດັບໄປ
ຄວາມສະງົບຣະງັບສັງຂານເຫຼົ່ານັ້ນເປັນເຫດນຳຄວາມສຸກມາໃຫ້

[໑໘໔] ຂ້າພະເຈົ້າຣະລຶກເຖິງບຸບພະກຳໄດ້ ພ້ອມກັບໄດ້ຟັງຄາຖາ
ນັ່ງຢູ່ເທິງອາສະນະດຽວນັ້ນເອງກໍໄດ້ບັນລຸອະຣະຫັນຕະຜົນແລ້ວ

[໑໘໕] ຂ້າພະເຈົ້າມີອາຍຸ ໗ ຂວບ ກໍໄດ້ບັນລຸອະຣະຫັນຕະຜົນ
ພຣະພຸດທະເຈົ້າຜູ້ມີຈັກຂຸ ຊົງຮູ້ຄຸນສົມບັດຂອງຂ້າພະເຈົ້າແລ້ວ
ຈຶ່ງປະທານອຸປະສົມບົດໃຫ້

[໑໘໖] ຂ້າພະເຈົ້າຍັງເປັນເດັກນ້ອຍຢູ່ ທຳກິດທີ່ຄວນທຳສຳເລັດແລ້ວ
ວັນນີ້ ຂ້າພະເຈົ້າຈະເຮັດກິດອັນໃດ
ໃນສາດສະໜາຂອງພຣະສາກະຍະບຸດອີກນໍ

[໑໘໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຟັງທຳ

[໑໘໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະທຳມະສະວະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທຳມັດສະວະນິຍະເຖຣາປະທານທີ ໙ ຈົບ**

## ໑໐. ອຸກຂິດຕະປະທຸມິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸກຂິດຕະປະທຸມິຍະເຖຣະ

(ພຣະອຸກຂິດຕະປະທຸມິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໔໗] ຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງດອກໄມ້ຢູ່ໃນນະຄອນຫົງສະວະດີ
ຂ້າພະເຈົ້າລົງສູ່ສະປະທຸມເລືອກເກັບດອກບົວຢູ່

[໑໕໐] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ພ້ອມດ້ວຍພຣະຂີນາສົບປະມານ ໑໐໐,໐໐໐ ອົງ
ຜູ້ມີຈິດສະງົບ ຜູ້ຄົງທີ່

[໑໕໑] ຜູ້ສິ້ນອາສະວະ ບໍລິສຸດ ໄດ້ອະພິນຍາ ໖ ຜູ້ເຂົ້າຊານ
ພຣະອົງຜູ້ເປັນບຸຣຸດສູງສຸດ ຊົງສະແຫວງຫາຄວາມຈະເລີນ
ແກ່ຂ້າພະເຈົ້າ ສະເດັດມາແລ້ວ

[໑໕໔] ຂ້າພະເຈົ້າໄດ້ເຫັນພຣະສະຍຳພູຜູ້ເປັນເທບຍິ່ງກວ່າເທບ
ຊົງເປັນຜູ້ນຳສັດໂລກ ຈຶ່ງເດັດດອກບົວພ້ອມກ້ານ
ແລ້ວໂຍນຂຶ້ນໄປ (ບູຊາ) ໃນອາກາດໃນການນັ້ນ

[໑໕໕] (ດ້ວຍເປ່ງວາຈາວ່າ) ຂ້າແຕ່ພຣະທີຣະເຈົ້າ
ຖ້າພຣະອົງເປັນພຣະພຸດທະເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ອົງອາດກວ່ານໍຣະຊົນ ຂໍດອກບົວຈົ່ງລອຍໄປເອງ
ກັ້ນຢູ່ເໜືອພຣະສຽນຂອງພຣະອົງເອງເທີ້ນ

[໑໕໔] ພຣະມະຫາວີຣະເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ອົງອາດກວ່ານໍຣະຊົນ ຊົງອະທິຖານແລ້ວ
ດອກບົວເຫຼົ່ານັ້ນໄດ້ລອຍກັ້ນຢູ່
ເໜືອພຣະສຽນດ້ວຍພຸດທານຸພາບ

[໑໕໕] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໕໖] ໃນສະຫວັນຊັ້ນຕາວະຕິງສານັ້ນ
ວິມານຂອງຂ້າພະເຈົ້າທີ່ບຸນກຳສ້າງໄວ້
ຢ່າງສວຍງາມ ຮຽກຊື່ວ່າ ສັດຕະປັດຕະ
ສູງ ໖໐ ໂຍດ ກວ້າງ ໕໐ ໂຍດ

[໑໓໗] ຂ້າພະເຈົ້າໄດ້ເກີດເປັນຈອມເທບຄອງເທວະສົມບັດ ໑,໐໐໐ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດ ໗໕ ຊາດ

[໑໓໘] ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຂ້າພະເຈົ້າສະເຫວີຍກຳຂອງຕົນທີ່ເຮັດໄວ້ດີແລ້ວໃນປາງກ່ອນ

[໑໓໙] ດ້ວຍຜົນແຫ່ງດອກປະທຸມດອກດຽວນັ້ນແລ
ຂ້າພະເຈົ້າໄດ້ສະເຫວີຍສົມບັດແລ້ວ
ໄດ້ເຮັດໃຫ້ແຈ້ງທຳຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມ

[໑໔໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງບໍ່ມີອາສະວະ
ເໝືອນຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງດອກປະທຸມດອກດຽວ

[໑໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸກຂິດຕະປະທຸມີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ອຸກຂິດຕະປະທຸມີຍະເຖຣາປະທານທີ ໑໐ ຈົບ**

**ຄັນໂທຕະກະວັກທີ ໓໔ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຄັນທະທູປິຍະເຖຣາປະທານ
໒. ປຸນນາຄະປຸບພິຍະເຖຣາປະທານ
໓. ຜຸສິຕະກຳມິຍະເຖຣາປະທານ
໔. ຕິນະກຸຕິທາຍະກະເຖຣາປະທານ
໕. ທຳມະສະວະນິຍະເຖຣາປະທານ
໖. ອຸທະກະປູຊະກະເຖຣາປະທານ
໗. ເອກະທຸດສະທາຍະກະເຖຣາປະທານ
໘. ປະພັງກະຣະເຖຣາປະທານ
໙. ອຸດຕະເຣີຍຍະທາຍະກະເຖຣາປະທານ
໑໐. ອຸກຂິດຕະປະທຸມີຍະເຖຣາປະທານ

**ທ່ານຮີບໂຮມຄາຖາທັງໝົດໄດ້ ໑໔໔ ຄາຖາ**

# ๓๕. ເອກະປະທຸມະວັກ

## ໝວດວ່າດ້ວຍພຣະເອກະປະທຸມະເປັນຕົ້ນ

## ໑. ເອກະປະທຸມີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະປະທຸມີຍະເຖຣະ

(ພຣະເອກະປະທຸມີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຊົງເຮັດໃຫ້ແຈ້ງພົບນ້ອຍພົບໃຫຍ່
ຊົງຊ່ອຍປະຊຸມຊົນຈຳນວນຫຼາຍໃຫ້ຂ້າມພົ້ນ (ວັດຕະສົງສານ)

[໒] ຄັ້ງນັ້ນ ຂ້າພະເຈົ້າເປັນພະຍາຫົງ
ປະເສີດກວ່ານົກທັງຫຼາຍ
ບິນເວີ່ນລົງໃນສະນ້ຳແລ້ວຫຼິ້ນນ້ຳຢູ່ຢ່າງສຳຣານໃຈ

[໓] ໃນຂະນະນັ້ນ ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ສະເດັດເຫາະມາເໜືອສະນ້ຳ

[໔] ຂ້າພະເຈົ້າໄດ້ເຫັນພຣະຜູ້ມີພຣະພາກເຈົ້າຜູ້ສະຍຳພູ
ຜູ້ເປັນເທບຍິ່ງກວ່າເທບ ຜູ້ຊົງເປັນຜູ້ນຳສັດໂລກ
ຈຶ່ງຫັກດອກບົວຫຼວງເຊິ່ງເປັນຕາອອນຊອນໃຈທີ່ກ້ານແລ້ວ

[໕] ຂ້າພະເຈົ້າມີໃຈຜ່ອງໃສໃຊ້ຈະງອຍປາກຄາບໂຍນຂຶ້ນໄປໃນທ້ອງຟ້າ
ໄດ້ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໖] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ປະທັບຢືນຢູ່ໃນອາກາດ
ໄດ້ຊົງອະນຸໂມທະນາ ວ່າ

[໗] ດ້ວຍດອກປະທຸມດອກດຽວນີ້
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ທ່ານຈະບໍ່ຕົກວິນິບາດນະຣົກເລີຍຕະຫຼອດ ໑໐໐,໐໐໐ ກັບ

[໗] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ເມື່ອຕັດແນວນີ້ ຊົງສັນເສີນກຳຂອງຂ້າພະເຈົ້າແລ້ວ
ໄດ້ສະເດັດໄປຕາມພະປະສົງ

[໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະປະທຸມີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະປະທຸມີຍະເຖຣາປະທານທີ ໑ ຈົບ**

# ໔. ຕີນຸບປະລະມາລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕີນຸບປະລະມາລິຍະເຖຣະ

(ພຣະຕີນຸບປະລະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑] ຄັ້ງນັ້ນ ຂ້າພະເຈົ້າເປັນວານອນອາໄສຢູ່ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ປະທັບນັ່ງຢູ່ລະຫວ່າງພູເຂົາ

[໑໔] ຊົງເຮັດທິດທັງປວງໃຫ້ສະຫວ່າງສະໄຫວ
ດັ່ງຕົ້ນພະຍາໄມ້ສາລະມີດອກບານສະພັ່ງ
ຊົງປະກອບດ້ວຍພຣະລັກສະນະ ແລະອະນຸພະຍັນຊະນະ
ເມື່ອໄດ້ເຫັນແລ້ວກໍມີຄວາມພໍໃຈ

[໑໓] ຂ້າພະເຈົ້າມີຈິດເບີກບານ ມີໃຈຍິນດີຮ່າເຣີງດ້ວຍປີຕິ
ໄດ້ໃຊ້ດອກອຸບົນ ໓ ດອກຂຶ້ນບູຊາເໜືອຫົວ

[໑໔] ເມື່ອໃຊ້ດອກໄມ້ບູຊາພຣະພຸດທະເຈົ້າພຣະນາມວ່າ ວິປັດສີ

ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ເຄົາລົບນົບນອບແລ້ວອວ່າຍໜ້າຫຼີກໄປທາງທິດເໜືອ

[໑໕] ເມື່ອຂ້າພະເຈົ້າກຳລັງຍ່າງແຍ່ງແຍ້ກັບດ້ວຍໃຈທີ່ຜ່ອງໃສ
ຈຶ່ງພາດຕົກໄປໃນລະຫວ່າງພູເຂົາຫີນ
ເຖິງຄວາມສິ້ນຊີວິດແລ້ວ

[໑໖] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
[໑໗] ຂ້າພະເຈົ້າໄດ້ຄອງເທວະສົມບັດຕະຫຼອດ ໖໐໐ ຊາດ
ແລະໄດ້ເກີດເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ
[໑໘] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນຸບປະລະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ຕິນຸບປະລະມາລິຍະເຖຣາປະທານທີ ໔ ຈົບ**

## ໖. ທະຊະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທະຊະທາຍະກະເຖຣາປະທານ

(ພຣະທະຊະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຂ້າພະເຈົ້າເຫັນຄວາມສິ້ນໄປແຫ່ງອຸປະທິກິເລດທັງ ໖
ຈຶ່ງໃຫ້ຍົກທຸງຂຶ້ນບູຊາພຣະສາດສະດາພຣະນາມວ່າ ຕິດສະ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ

[໔໑]　ດ້ວຍກຸສົນກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ນັ້ນ
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໒]　ຂ້າພະເຈົ້າໄດ້ຄອງເທວະສົມບັດຕະຫຼອດ ໓໐໐ ຊາດ
ແລະ ໄດ້ເກີດເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ

[໔໓]　ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຂ້າພະເຈົ້າໄດ້ສະເຫວີຍກຳຂອງຕົນທີ່ເຮັດໄວ້ດີແລ້ວໃນຄັ້ງກ່ອນ

[໔໔]　ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍທຸງ

[໔໕]　ວັນນີ້ ຖ້າຂ້າພະເຈົ້າປາຖະໜາກໍຈະເພິ່ງໃຊ້ຜ້າໂຂມະ
ປົກປິດແຜ່ນດິນພ້ອມທັງປ່າແລະພູເຂົາໄດ້
ນີ້ເປັນຜົນແຫ່ງກຳທີ່ຂ້າພະເຈົ້າເຮັດໄວ້ໃນຄັ້ງນັ້ນ

[໔໖]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະທະຊະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທະຊະທາຍະກະເຖຣາປະທານທີ ໓ ຈົບ**

## ໔. ຕິນິກິງກະນິປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິນິກິງກະນິປູຊະກະເຖຣະ

(ພຣະຕິນິກິງກະນິປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗]　ໃນບ່ອນບໍ່ໄກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ພູຕະຄະນະ
ຂ້າພະເຈົ້າໄດ້ເຫັນຜ້າບັງສຸກູນແຂວນຢູ່ເທິງປາຍໄມ້ທີ່ພູເຂົານັ້ນ

[໔໗]	ຂະນະນັ້ນ ຂ້າພະເຈົ້າຮ່າເຣີງ ມີຈິດເບີກບານ
ໄດ້ເລືອກເກັບດອກຫອມໄກ່ ໓ ດອກມາບູຊາຜ້າບັງສຸກູນ
[໔໘]	ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍດອກໄມ້ ໓ ດອກ
[໓໐]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນິກິງກະນິປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ຕິນິກິງກະນິປູຊະກະເຖຣາປະທານທີ ໔ ຈົບ**

## ໕. ນະລາຄາຣິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນະລາຄາຣິກະເຖຣະ

(ພຣະນະລາຄາຣິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໑]	ໃນບ່ອນບໍ່ໄກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ ຫາຣິກະ
ພຣະສະຍຳພູປັດເຈກພຸດທະເຈົ້າພຣະນາມວ່າ ນາຣະທະ
ປະທັບຢູ່ທີ່ເຫງົ້າໄມ້ ໃນຄັ້ງນັ້ນ

[໓໒]	ຂ້າພະເຈົ້າໄດ້ສ້າງເຮືອນໄມ້ອໍ້ ມຸງດ້ວຍຫຍ້າ
ແຜ້ວຖາງບ່ອນຈົງກົມແລ້ວ ໄດ້ຖວາຍແດ່ ພຣະສະຍຳພູ

[໓໓]	ໃນກັບທີ ໑໔ ຂ້າພະເຈົ້າຣື່ນຣົມຢູ່ໃນເທວະໂລກ
ໄດ້ຄອງເທວະສົມບັດຕະຫຼອດ ໗໔ ຊາດ

[໓໔]	ໄດ້ເກີດເປັນພຣະເຈົ້າຈັກກະພັດ ໗໗ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນ ນັບຊາດບໍ່ຖ້ວນ

[໓໕]	ວິມານຂອງຂ້າພະເຈົ້າສູງລອຍເດ່ນ ເໝືອນສາຍຮຸ້ງ

ວິມານຂອງຂ້າພະເຈົ້າມີເສົາ ໑,໐໐໐ ຕົ້ນ
ມີສີເຫຼື້ອມປະພັດສອນ (ບໍ່ມີວິມານອື່ນສະເໝີເໝືອນ)

[໓໖] ຂ້າພະເຈົ້າສະເຫວີຍສົມບັດທັງ ໔ ແລ້ວ ອັນກຸສົນມູນຕັກເຕືອນ
ຈຶ່ງອອກບວດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມ
[໓໗] ຂ້າພະເຈົ້າເປັນຜູ້ມີຈິດເດັດດ່ຽວເພື່ອພ່ຳເພັງພຽນ
ສະງົບຣະງັບ ບໍ່ມີອຸປະທິ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງບໍ່ມີອາສະວະ
ເໝືອນຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນະລາຄາຣິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ນະລາຄາຣິກະເຖຣາປະທານທີ ໕ ຈົບ**

## ໖. ຈຳປະກະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຈຳປະກະປຸບຜິຍະເຖຣະ

(ພຣະຈຳປະກະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໙] ໃນບ່ອນບໍ່ໄກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ ສາປະລະ
ພຣະພຸດທະເຈົ້າພຣະນາມວ່າ ສຸທັດສະນະ
ປະທັບຢູ່ລະຫວ່າງພູເຂົາ

[໔໐] ຂ້າພະເຈົ້າຖືດອກຈຳປາເຫາະໄປທາງອາກາດ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຜູ້ຂ້າມໂອຄະກິເລດໄດ້ແລ້ວ ບໍ່ມີອາສະວະ
[໔໑] ຂະນະນັ້ນ ຂ້າພະເຈົ້າໄດ້ຍົກດອກຈຳປາ ໗ ດອກຂຶ້ນໄວ້ເໜືອຫົວ
ບູຊາພຣະພຸດທະເຈົ້າຜູ້ເປັນພຣະສະຍຳພູ
ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

[໔໔] ໃນກັບທີ ໑໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຈຳປະກະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈຳປະກະປຸບຜິຍະເຖຣາປະທານທີ ໖ ຈົບ**

## ໗. ປະທຸມະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະທຸມະປູຊະກະເຖຣະ

(ພຣະປະທຸມະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ໃນບ່ອນບໍ່ໄກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ ໂຣມະສະ
ກໍເວລານັ້ນ ພຣະພຸດທະເຈົ້າພຣະນາມວ່າ ໂສພິຕະ
ປະທັບຢູ່ໃນທີ່ກາງແຈ້ງ

[໔໕] ຂ້າພະເຈົ້າອອກຈາກທີ່ຢູ່ມາກັ້ງດອກບົວຫຼວງ (ບັງແດດ) ຖວາຍ
ເມື່ອກັ້ງຢູ່ຕະຫຼອດໜຶ່ງວັນແລ້ວ
ຈຶ່ງກັບມາຍັງບ່ອນຢູ່ຄືເກົ່າ

[໔໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປະທຸມະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທຸມະປູຊະກະເຖຣາປະທານທີ ໗ ຈົບ**

**ພານະວານທີ ໑໓ ຈົບ**

# ໘. ຕິນະມຸດຖິທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິນະມຸດຖິທາຍະກະເຖຣະ

(ພຣະຕິນະມຸດຖິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ໃນບ່ອນບໍ່ໄກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ ລໍາພະກະ
ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ອຸປະຕິດສະ
ສະເດັດຈົງກົມຢູ່ໃນ ທີ່ກາງແຈ້ງ

[໔໙] ເມື່ອກ່ອນ ຂ້າພະເຈົ້າເປັນນາຍພານເນື້ອຢູ່ໃນປ່າດົງທຶບ
ໄດ້ເຫັນພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ເປັນເທບຍິ່ງກວ່າເທບ
ຊົງເປັນພຣະສະຍໍາພູ ຜູ້ບໍ່ຊົງພ່າຍແພ້

[໕໐] ຄັ້ງນັ້ນ ຂ້າພະເຈົ້າມີຈິດຜ່ອງໃສ
ໄດ້ຖວາຍຫຍ້າກໍາມືໜຶ່ງສໍາລັບປະທັບນັ່ງແດ່ພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະອົງນັ້ນ

[໕໑] ເມື່ອຖວາຍແດ່ ພຣະອົງຜູ້ເປັນເທບຍິ່ງກວ່າເທບແລ້ວ
ກໍກະທໍາຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ຖວາຍອະພິວາດພຣະສໍາມາສໍາພຸດທະເຈົ້າ
ແລ້ວອວ່າຍໜ້າຫຼີກໄປທາງທິດເໜືອ

[໕໒] ພໍຂ້າພະເຈົ້າໄປໄດ້ບໍ່ດົນ
ຣາດຊະສີໄດ້ບຽດບຽນຂ້າພະເຈົ້າ
ຂ້າພະເຈົ້າຖືກຣາດຊະສີເຮັດໃຫ້ລົ້ມລົງໄດ້ສິ້ນຊີວິດລົງໃນບ່ອນນັ້ນ

[໕໓] (ຍ້ອນ) ກໍາທີ່ຂ້າພະເຈົ້າເຮັດແລ້ວໃນສໍານັກຂອງພຣະພຸດທະເຈົ້າ

ຜູ້ປະເສີດທີ່ສຸດຜູ້ບໍ່ມີອາສະວະ
ຂ້າພະເຈົ້າຈຶ່ງໄດ້ໄປເກີດໃນເທວະໂລກ
ເໝືອນຄວາມໄວຂອງລູກສອນທີ່ລຸດແລ່ນໄປດີແລ້ວ

[໕໔] ໃນເທວະໂລກນັ້ນ ມີຜາສາດງົດງາມ
ທີ່ບຸນກຳເນຣະມິດໄວ້ແລ້ວສູງໄດ້ ໑,໐໐໐ ຄັນທະນູ ມີ ໗ ຊັ້ນ
ສະພັ່ງໄປດ້ວຍທຸງ ເດຍລະດາດເຕັມໄປດ້ວຍແກ້ວມະນີສີຂຽວ

[໕໕] ຣັດສະໝີຂອງຜາສາດນັ້ນ ພວຍພຸ່ງເໝືອນດວງອາທິດອຸໄທ
ຜາສາດແອອັດດ້ວຍເຫຼົ່ານາງເທບກັນຍາ
ຂ້າພະເຈົ້າບັນເທີງເຣິງຣົມດ້ວຍວັດຖຸກາມ ແລະກິເລດກາມ

[໕໖] ຂ້າພະເຈົ້າອັນກຸສົນມູນຕັກເຕືອນແລ້ວ
ຈຸຕິຈາກເທວະໂລກມາເກີດເປັນມະນຸດແລ້ວ
ໄດ້ບັນລຸຄວາມສິ້ນອາສະວະ

[໕໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍບ່ອນນັ່ງໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຫຍ້າກຳມືໜຶ່ງ

[໕໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິນະມຸດຖິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ຕິນະມຸດຖິທາຍະກະເຖຣາປະທານທີ ໘ ຈົບ**

## ໙. ຕິນທຸກະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິນທຸກະຜະລະທາຍະກະເຖຣະ

(ພຣະຕິນທຸກະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໙] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ໂຊດຊ່ວງ

ດັ່ງດອກກັນນິກາ ປາສະຈາກທຸລິຄື ກິເລດ
ຂ້າມໂອຄະກິເລດໄດ້ແລ້ວ ບໍ່ມີອາສະວະ
ປະທັບນັ່ງຢູ່ລະຫວ່າງພູເຂົາ

[໗໐] ຂ້າພະເຈົ້າເຫັນຕົ້ນໝາກພັບກຳລັງມີຜົນ
ຈຶ່ງຫັກມາພ້ອມທັງກ້ານ ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍແດ່ ພຣະພຸດທະເຈົ້າພຣະນາມວ່າ ເວດສະພູ

[໗໑] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນທຸກະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແນວນີ້

**ຕິນທຸກະຜະລະທາຍະກະເຖຣາປະທານທີ ໗ ຈົບ**

## ໑໐. ເອກັນຊະລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກັນຊະລິຍະເຖຣະ

(ພຣະເອກັນຊະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໓] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ເຣວະຕະ
ປະທັບຢູ່ໃກ້ຝັ່ງແມ່ນ້ຳ
ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ມີພຣະຣັດສະໝີຮຸ່ງເຮື່ອງເໝືອນດວງຈັນ

[໗໔] ມີພຣະຣັດສະໝີສະຫວ່າງແຈ້ງເໝືອນຖ່ານໄມ້ແຄນ
ທີ່ລຸກຢູ່ປາກເບົ້າໄຟ
ຮຸ່ງເຮືອງເໝືອນດາວປະກາຍພຶກ
ຂ້າພະເຈົ້າໄດ້ປະຄອງອັນຊະລີໄຫວ້ຄັ້ງໜຶ່ງ

[໒໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ປະຄອງອັນຊະລີໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປະຄອງອັນຊະລີ

[໒໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໒ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກັນຊະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກັນຊະລິຍະເຖຣາປະທານທີ ໑໐ ຈົບ**

**ເອກະປະທຸມະວັກທີ ໓໕ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ເອກະປະທຸມິຍະເຖຣາປະທານ
໓. ທະຊະທາຍະກະເຖຣາປະທານ
໕. ນະລາຄາຣິກະເຖຣາປະທານ
໗. ປະທຸມະປູຊະກະເຖຣາປະທານ
໙. ຕິນທຸກະຜະລະທາຍະກະເຖຣາປະທານ
໒. ຕິນຸບປະລະມາລິຍະເຖຣາປະທານ
໔. ຕິນິກົງກະນິປູຊະກະເຖຣາປະທານ
໖. ຈຳປະກະປຸບຜິຍະເຖຣາປະທານ
໘. ຕິນະມຸດຖິທາຍະກະເຖຣາປະທານ
໑໐. ເອກັນຊະລິຍະເຖຣາປະທານ

**ບັນດິດທັງຫຼາຍຄິດໄລ່ຄາຖາໄວ້ ໖໒ ຄາຖາ**

# ໓໖. ສັດທະສັນຍິກະວັກ

## ໝວດວ່າດ້ວຍພຣະສັດທະສັນຍິກະເປັນຕົ້ນ

## ໑. ສັດທະສັນຍິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັດທະສັນຍິກະເຖຣະ

(ພຣະສັດທະສັນຍິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ (ທ່ຽວ) ຢູ່ໃນປ່າດົງທຶບ
ໄດ້ເຫັນພຣະສຳມາສຳພຸດທະເຈົ້າມີໝູ່ເທວະດາແວດລ້ອມໃນປ່ານັ້ນ

[໒] ເຊິ່ງກຳລັງຊົງປະກາດສັດຈະ ໔ ຊ່ວຍເຫຼືອມະຫາຊົນ
ຂ້າພະເຈົ້າໄດ້ຟັງພຣະດຳຣັດ
ທີ່ມ່ວນປຽບດ້ວຍສຽງນົກກາຣະເວກ

[໓] ຂ້າພະເຈົ້າກະທຳຈິດໃຫ້ເຫຼື້ອມໃສໃນພຣະສຸຣະສຽງ
ຂອງມະຫາມຸນີພຣະນາມວ່າ ສິຂີ
ຜູ້ມີພຣະສຸຣະສຽງດັ່ງພົມ ເປັນເຜົ່າພັນຂອງໂລກ
ໄດ້ບັນລຸຄວາມສິ້ນອາສະວະແລ້ວ

[໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງຄວາມເຫຼື້ອມໃສ

[໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັດທະສັນຍິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດທະສັນຍິກະເຖຣາປະທານທີ ໑ ຈົບ**

# ໘. ຍະວະກະລາປິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຍະວະກະລາປິຍະເຖຣະ

(ພຣະຍະວະກະລາປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖] ຄັ້ງນັ້ນ ຂ້າພະເຈົ້າເປັນຄົນເຮັດນາເຂົ້າໜຽວຢູ່ໃນນະຄອນອະຣູນະວະດີ
ໄດ້ເຫັນພຣະສຳມາສຳພຸດທະເຈົ້າທີ່ທົ່ນທາງ
ຈຶ່ງປູຟ່ອນເຂົ້າໜຽວຖວາຍ (ໃຫ້ປະທັບ)

[໗] ພຣະພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ຊົງອະນຸເຄາະ ຊົງມີພຣະກະລຸນາ
ເປັນຜູ້ນຳຊັ້ນເລີດຂອງໂລກ
ຊົງຮູ້ຄວາມຄິດຂອງຂ້າພະເຈົ້າ
ຈຶ່ງປະທັບນັ່ງເທິງເຄື່ອງປູຟ່ອນເຂົ້າໜຽວ

[໘] ຂ້າພະເຈົ້າເຫັນພຣະອົງຜູ້ປາສະຈາກມົນທິນ
ຜູ້ເພ່ງພິນິດຫຼາຍ ຜູ້ນຳວິເສດ ປະທັບນັ່ງແລ້ວ
ຈຶ່ງເກີດຄວາມປາໂມດ ໄດ້ສິ້ນຊີວິດລົງ ໃນບ່ອນນັ້ນ

[໙] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປູຟ່ອນເຂົ້າໜຽວ

[໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຍະວະກະລາປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຍະວະກະລາປິຍະເຖຣາປະທານທີ ໘ ຈົບ**

# ໓. ກິງສຸກະປູຊະກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະກິງສຸກະປູຊະກະເຖຣະ

(ພຣະກິງສຸກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑] ຂ້າພະເຈົ້າໄດ້ເຫັນຕົ້ນທອງກວາວມີດອກບານສະພັ່ງ
ຈຶ່ງປະນົມມື ຣະລຶກເຖິງພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ແລ້ວບູຊາໃນອາກາດ

[໑໒] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກິງສຸກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກິງສຸກະປູຊະກະເຖຣາປະທານທີ ໓ ຈົບ**

# ໔. ສະໂກສະກະໂກຣັນທະທາຍະກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະສະໂກສະກະໂກຣັນທະທາຍະກະເຖຣະ

(ພຣະສະໂກສະກະໂກຣັນທະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດ
ຂອງຕົນ ຈຶ່ງກ່າວວ່າ)

[໑໔] ຂ້າພະເຈົ້າໄດ້ພົບຮອຍພຣະບາດທີ່ພຣະພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ເປັນເຜົ່າພັນຂອງໂລກຊົງຢຽບໄວ້
ຈຶ່ງຫົ່ມຜ້າໜັງສັດບ່ຽງບ່າ
ໄດ້ໄຫວ້ຮອຍພຣະບາດທີ່ປະເສີດແລ້ວ

[໑໕] ເຫັນຕົ້ນຫອນໄກ່ງອກຂຶ້ນຢູ່ເທິງແຜ່ນດິນມີດອກບານສະພັ່ງ
ຈຶ່ງ (ເດັດ) ຖືມາພ້ອມທັງກ້ານ
ໄດ້ບູຊາຮອຍພຣະບາດທີ່ວິຈິດດ້ວຍລາຍກົງຈັກ

[໑໖]　ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໑໗]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະສະໂກສະກະໂກຮັນທະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະໂກສະກະໂກຮັນທະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ທັນທະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະທັນທະທາຍະກະເຖຣະ

(ພຣະທັນທະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໘]　ຄັ້ງນັ້ນ ຂ້າພະເຈົ້າເຂົ້າໄປສູ່ປ່າດົງທຶບ
ຕັດໄມ້ໄຜ່ ເຮັດເປັນໄມ້ຂໍ(ສຳລັບແຂວນສິ່ງຂອງ) ນຳມາຖວາຍແກ່ສົງ
[໑໙]　ຂ້າພະເຈົ້າຂາບໄຫວ້ພິກຂຸທັງຫຼາຍຜູ້ມີຂໍ້ວັດງາມ
ດ້ວຍຈິດທີ່ເຫຼື້ອມໃສນັ້ນ ເມື່ອຖວາຍໄມ້ຂໍແລ້ວ
ຈຶ່ງອວ່າຍໜ້າຫຼີກໄປທາງທິດເໜືອ
[໒໐]　ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໄມ້ຂໍໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໄມ້ຂໍ
[໒໑]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະທັນທະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ທັນທະທາຍະກະເຖຣາປະທານທີ ໕ ຈົບ**

# ໖. ອຳພະຍາຄຸທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຳພະຍາຄຸທາຍະກະເຖຣະ

(ພຣະອຳພະຍາຄຸທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ພຣະສຳພຸດທະເຈົ້າຜູ້ເປັນພຣະສະຍຳພູພຣະນາມວ່າ ສະຕະລັງສີ
ຜູ້ບໍ່ຊົງພ່າຍແພ້ ອອກຈາກສະມາທິແລ້ວ
ສະເດັດເຂົ້າມາຫາຂ້າພະເຈົ້າເພື່ອພິກສາ

[໔໙] ຂ້າພະເຈົ້າເຫັນພຣະປັດເຈກພຸດທະເຈົ້າແລ້ວ ມີໃຈຜ່ອງໃສ
ໄດ້ຖວາຍໝາກມ່ວງແລະເຂົ້າຍາຄູ(ຕົ້ມເຂົ້າ)ແດ່ທ່ານຜູ້ມີໃຈຜ່ອງໃສ ບໍ່ມີທີ່ສຸດ

[໔໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກມ່ວງແລະເຂົ້າຍາຄູ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອຳພະຍາຄຸທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຳພະຍາຄຸທາຍະກະເຖຣາປະທານທີ ໖ ຈົບ**

# ໗. ສຸປຸຕະກະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸປຸຕະກະປູຊະກະເຖຣະ

(ພຣະສຸປຸຕະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ພຣະພຸດທະເຈົ້າພຣະນາມວ່າວິປັດສີ ຜູ້ຊົງເປັນຜູ້ນຳສັດໂລກ
ສະເດັດອອກຈາກບ່ອນພັກກາງເວັນແລ້ວ
ພຣະອົງສະເດັດທ່ຽວພິກຂາຈານມາເຖິງທີ່ພຳນັກຂອງຂ້າພະເຈົ້າ

[໔໗] ລຳດັບນັ້ນ ຂ້າພະເຈົ້າມີປີຕິ ມີໃຈຍິນດີ
ໄດ້ຖວາຍເກືອທໍ່ໜຶ່ງແດ່ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ ຜູ້ຄົງທີ່
ແລ້ວບັນເທີງຢູ່ໃນສະຫວັນຕະຫຼອດກັບໜຶ່ງ

[໔໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທໍ່ເກືອໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເກືອທໍ່ໜຶ່ງ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸປຸຕະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸປຸຕະກະປູຊະກະເຖຣາປະທານທີ ໗ ຈົບ**

## ໘. ມັນຈະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມັນຈະທາຍະກະເຖຣະ

(ພຣະມັນຈະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ຂ້າພະເຈົ້າເຫຼື້ອມໃສ ໄດ້ຖວາຍຕຽງ ໑ ໜ່ວຍດ້ວຍມືຂອງຕົນ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໕໑] ຂ້າພະເຈົ້າໄດ້ຍານພາຫະນະຄືຊ້າງ
ຍານທຽມດ້ວຍມ້າ ແລະຍານທິບບໍລິບູນ
ຍ້ອນຜົນແຫ່ງການຖວາຍຕຽງນັ້ນ
ຂ້າພະເຈົ້າຈຶ່ງໄດ້ບັນລຸຄວາມສິ້ນອາສະວະ
[໕໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຕຽງໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຕຽງ

[໓໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມັນຈະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມັນຈະທາຍະກະເຖຣາປະທານທີ ໘ ຈົບ**

## ໙. ສະຣະນະຄະມະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສະຣະນະຄະມະນິຍະເຖຣະ

(ພຣະສະຣະນະຄະມະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໔] ຄັ້ງນັ້ນ ພິກຂຸແລະຂ້າພະເຈົ້າຜູ້ເປັນອາຊີວະກະລົງເຮືອໄປນໍາກັນ
ເມື່ອເຮືອກໍາລັງຈະອັບປາງ ພິກຂຸໄດ້ໃຫ້ສະຣະນະແກ່ຂ້າພະເຈົ້າ

[໓໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ພິກຂຸໄດ້ໃຫ້ສະຣະນະແກ່ຂ້າພະເຈົ້າໄວ້
ຂ້າພະເຈົ້າຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການເຖິງສະຣະນະ

[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະຣະນະຄະມະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະຣະນະຄະມະນິຍະເຖຣາປະທານທີ ໙ ຈົບ**

## ໑໐. ປິນດະປາຕິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປິນດະປາຕິກະເຖຣະ

(ພຣະປິນດະປາຕິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗]　ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າຕິດສະ
ປະທັບຢູ່ໃນປ່າດົງທຶບ
ຂ້າພະເຈົ້າຈາກສະຫວັນຊັ້ນດຸສິດລົງມາຍັງມະນຸດໂລກນີ້
ໄດ້ຖວາຍບິນທະບາດ

[໓໘]　ຂ້າພະເຈົ້າເມື່ອຖວາຍອະພິວາດພຣະສຳມາສຳພຸດທະເຈົ້າ
ພຣະນາມວ່າຕິດສະ ຜູ້ມີພຣະຍົດຍິ່ງໃຫຍ່
ທຳຈິດຂອງຕົນໃຫ້ເຫຼື້ອມໃສແລ້ວ ໄດ້ກັບໄປສູ່ສະຫວັນຊັ້ນດຸສິດ

[໓໙]　ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບິນທະບາດ

[໔໐]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປິນດະປາຕິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປິນດະປາຕິກະເຖຣາປະທານທີ ໑໐ ຈົບ**

**ສັດທະສັນຍິກະວັກທີ ໓໖ ຈົບບໍລິບູນ**

# ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສັດທະສັນຍິກະເຖຣາປະທານ
໒. ກິງສຸກະປູຊະກະເຖຣາປະທານ
໓. ທັບທະທາຍະກະເຖຣາປະທານ
໔. ສຸປຸຕະກະປູຊະກະເຖຣາປະທານ
໕. ສະຣະນະຄະມະນິຍະເຖຣາປະທານ
໖. ຍະວະກະລາປິຍະເຖຣາປະທານ
໗. ສະໂກສະກະໂກຣັນທະທາຍະກະເຖຣາປະທານ
໘. ອຳພະຍາຄຸທາຍະກະເຖຣາປະທານ
໙. ມັນຈະທາຍະກະເຖຣາປະທານ
໑໐. ປິນດະປາຕິກະເຖຣາປະທານ

**ແລະມີຄາຖາ ໔໐ ຄາຖາ**

# ໓໗. ມັນທາຣະວະປຸບພິຍະວັກ

## ໝວດວ່າດ້ວຍພຣະມັນທາຣະວະປຸບພິຍະເປັນຕົ້ນ

### ໑. ມັນທາຣະວະປຸບພິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມັນທາຣະວະປຸບພິຍະເຖຣະ

(ພຣະມັນທາຣະວະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າ (ແປງຮ່າງ) ເປັນມານົບຊື່ວ່າ ມັງຄະລະ
ຈາກສະຫວັນຊັ້ນຕາວະຕຶງສາລົງມາຍັງມະນຸດໂລກນີ້ ຖືດອກມົນທາຣົບ

[໒] ມາກັ້ງໄວ້ເໜືອພຣະສຽນຂອງພຣະພຸດທະເຈົ້າ
ພຣະນາມວ່າວິປັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ປະທັບນັ່ງຂັດສະມາທິຢູ່
ຂ້າພະເຈົ້າກັ້ງຢູ່ຕະຫຼອດ ໗ ວັນແລ້ວ
ຈຶ່ງກັບມາຍັງເທວະໂລກອີກ

[໓] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມັນທາຣະວະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມັນທາຣະວະປຸບພິຍະເຖຣາປະທານທີ ໑ ຈົບ**

# ໔. ກັກກາຣຸປຸບພີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກັກກາຣຸປຸບພີຍະເຖຣະເປັນຕົ້ນ

(ພຣະກັກກາຣຸປຸບພີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕] ຂ້າພະເຈົ້າຈາກສະຫວັນຊັ້ນຍາມາລົງມາຍັງມະນຸດໂລກນີ້
ໄດ້ຖືດອກຟັກທິບມາບູຊາພຣະພຸດທະເຈົ້າພຣະນາມວ່າ ໂຄດົມ ຜູ້ມີສິຣິ

[໖] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກັກກາຣຸປຸບພີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກັກກາຣຸປຸບພີຍະເຖຣາປະທານທີ ໔ ຈົບ**

# ໖. ພິສະມຸລາລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະ ພິສະມຸລາລະທາຍະກະເຖຣະ

(ພຣະພິສະມຸລາລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໘] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຜຸດສະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຊົງປະສົງວິເວກ ມີພຣະປັນຍາ
ສະເດັດມາທີ່ສຳນັກຂອງຂ້າພະເຈົ້າ

[໙] ຂ້າພະເຈົ້າກະທຳຈິດໃຫ້ເຫຼື້ອມໃສໃນພຣະຊິນນະເຈົ້າ
ຜູ້ປະກອບດ້ວຍພຣະມະຫາກະລຸນາ

ໄດ້ຖືເຫງົ້າບົວ ແລະຮາກບົວມາຖວາຍ
ແດ່ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໐] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເຫງົ້າບົວ ແລະຮາກບົວໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວ ແລະຮາກບົວ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພິສະມຸລາລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພິສະມຸລາລະທາຍະກະເຖຣາປະທານທີ ໓ ຈົບ**

# ໔. ເກສະຣະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເກສະຣະປຸບຜິຍະເຖຣະ

(ພຣະເກສະຣະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໔] ຄັ້ງນັ້ນ ຂ້າພະເຈົ້າເປັນວິທະຍາທອນຢູ່ທີ່ພູເຂົາຫິມະພານ
ໄດ້ເຫັນພຣະພຸດທະເຈົ້າ ຜູ້ປາສະຈາກທຸລິຄືກິເລດ
ມີພຣະຍົດຍິ່ງໃຫຍ່ ກໍາລັງສະເດັດຈົງກົມຢູ່

[໑໓] ຄັ້ງນັ້ນ ຂ້າພະເຈົ້າທູນດອກບຸນນາກ ໓ ດອກໄວ້ເທິງຫົວ
ເຂົ້າເຝົ້າແລ້ວບູຊາພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ເວດສະພູ

[໑໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກໍາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເກສະຣະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເກສະຣະປຸບພິຍະເຖຣາປະທານທີ ໔ ຈົບ**

# ໕. ອັງໂກລະປຸບພິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັງໂກລະປຸບພິຍະເຖຣະ

(ພຣະອັງໂກລະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໖] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າປະທຸມະ
ປະທັບຢູ່ທີ່ພູເຂົາຈິດຕະກູດ
ຂ້າພະເຈົ້າໄດ້ເຫັນພຣະສະຍຳພູພຸດທະເຈົ້າພຣະອົງນັ້ນແລ້ວ ຈຶ່ງເຂົ້າເຝົ້າ

[໑໗] ຂະນະນັ້ນ ຂ້າພະເຈົ້າໄດ້ເຫັນຕົ້ນປູ່ມີດອກບານສະພັ່ງ
ຈຶ່ງເລືອກເກັບແລ້ວນຳເຂົ້າໄປບູຊາ
ພຣະຊິນນະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມະ

[໑໘] ໃນກັບທີ ໖໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັງໂກລະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອັງໂກລະປຸບພິຍະເຖຣາປະທານທີ ໕ ຈົບ**

# ໖. ກະທຳພະປຸບພິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກະທຳພະປຸບພິຍະເຖຣະ

(ພຣະກະທຳພະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໐] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ມີພຣະສະຫວີວັນດັ່ງຄຳ ຜູ້ເຊັ່ນກັບຄຳມີຄ່າ
ມີພຣະລັກສະນະອັນປະເສີດ ໓໒ ປະການ
ກຳລັງສະເດັດໄປລະຫວ່າງຮ້ານຕະຫຼາດ

[໔໑] ຂ້າພະເຈົ້ານັ່ງຢູ່ໃນຜາສາດທີ່ປະເສີດໄດ້ເຫັນພຣະອົງ
ຊົງເປັນຜູ້ນຳສັດໂລກຈຶ່ງປະຄອງດອກກະທຸ່ມບູຊາ

[໔໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກະທຳພະປຸບພີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກະທຳພະປຸບພີຍະເຖຣາປະທານທີ ໖ ຈົບ**

## ໗. ອຸດທາລະກະປຸບພີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸດທາລະກະປຸບພີຍະເຖຣະ

(ພຣະອຸດທາລະກະປຸບພີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸຊາຕະ
ປະທັບຢູ່ໃກ້ຝັ່ງແມ່ນ້ຳຄົງຄາ
ຂ້າພະເຈົ້າໄດ້ຖືດອກຄູນໄປບູຊາພຣະອົງ ຜູ້ບໍ່ຊົງພ່າຍແພ້

[໔໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸດທາລະກະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸດທາລະກະປຸບຜິຍະເຖຣາປະທານທີ ໗ ຈົບ**

## ໘. ເອກະຈໍາປະກະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກະຈໍາປະກະປຸບຜິຍະເຖຣະ

(ພຣະເອກະຈໍາປະກະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໔໗] ພຣະສໍາມາສໍາພຸດທະເຈົ້າຜູ້ສະງົບຣະງັບ ປະທັບຢູ່ລະຫວ່າງພູເຂົາ
ຂ້າພະເຈົ້າຖືດອກຈໍາປາດອກໜຶ່ງ
ເຂົ້າໄປເຝົ້າພຣະອົງຜູ້ຊົງເປັນນໍຣະຊົນຜູ້ສູງສຸດ

[໔໘] ມີຈິດເຫຼື້ອມໃສ ມີໃຈຍິນດີ
ໃຊ້ມືທັງ ໔ ປະຄອງດອກໄມ້ຂຶ້ນບູຊາພຣະປັດເຈກມຸນີ
ຜູ້ສູງສຸດ ຜູ້ບໍ່ຊົງພ່າຍແພ້

[໔໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະຈໍາປະກະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເອກະຈໍາປະກະປຸບຜິຍະເຖຣາປະທານທີ ໘ ຈົບ**

# ໙. ຕິມິຣະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິມິຣະປຸບຜິຍະເຖຣະ

(ພຣະຕິມິຣະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າທ່ຽວໄປຕາມກະແສນ້ຳແຄມຝັ່ງແມ່ນ້ຳຈັນທະພາຄາ
ໄດ້ເຫັນພຣະປັດເຈກພຸດທະເຈົ້າ ຜູ້ປາສະຈາກທຸລິຄີກິເລດ
ເໝືອນຕົ້ນພະຍາໄມ້ສາລະມີດອກບານສະພັ່ງ
[໕໒] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖືດອກບີໝີມາໂຮຍລົງເໜືອພຣະສຽນ
ບູຊາພຣະປັດເຈກມຸນີຜູ້ສູງສຸດ
[໕໓] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິມິຣະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິມິຣະປຸບຜິຍະເຖຣາປະທານທີ ໙ ຈົບ**

# ໑໐. ສະລະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະລະປຸບຜິຍະເຖຣະ

(ພຣະສະລະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໕] ຄັ້ງນັ້ນ ຂ້າພະເຈົ້າເປັນກິນນະຣະອາໄສຢູ່ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ຂະນະນັ້ນ ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ
ຜູ້ເປັນເທບຍິ່ງກວ່າເທບ
ຊົງເປັນຜູ້ອົງອາດກວ່ານໍຣະຊົນ ສະເດັດຈົງກົມຢູ່

[໓໖] ຈຶ່ງໄດ້ເລືອກເກັບດອກຊ້າງນ້າວມາ
ຖວາຍແດ່ ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພຣະມະຫາວີຣະເຈົ້າຊົງສູບດົມກິ່ນດອກຊ້າງນ້າວ
ເຊິ່ງມີກິ່ນຫອມດັ່ງດອກໄມ້ທິບ

[໓໗] ຂະນະທີ່ຂ້າພະເຈົ້າເບິ່ງຢູ່ນັ້ນ
ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ມີຄວາມພຽນຫຼາຍ ຊົງເປັນຜູ້ນຳສັດໂລກ
ຊົງຮັບແລ້ວ ສູບດົມກິ່ນ

[໓໘] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ຖວາຍອະພິວາດພຣະອົງຜູ້ສູງສຸດແຫ່ງເທວະດາແລະມະນຸດ
ປະຄອງອັນຊະລີແລ້ວ ກັບຂຶ້ນໄປສູ່ພູເຂົາຄືເກົ່າ

[໓໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະລະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະລະປຸບຜິຍະເຖຣາປະທານທີ ໑໐ ຈົບ**

**ມັນທາຣະວະປຸບຜິຍະວັກທີ ໓໗ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ມັນທາຣະວະປຸບຜິຍະເຖຣາປະທານ
໒. ພິສະມຸລາລະທາຍະກະເຖຣາປະທານ
໕. ອັງໂກລະປຸບຜິຍະເຖຣາປະທານ
໗. ອຸດທາລະກະປຸບຜິຍະເຖຣາປະທານ
໙. ຕິມິຣະປຸບຜິຍະເຖຣາປະທານ
໘. ກັກກາຣຸປຸບຜິຍະເຖຣາປະທານ
໔. ເກສະຣະປຸບຜິຍະເຖຣາປະທານ
໖. ກະທຳພະປຸບຜິຍະເຖຣາປະທານ
໘. ເອກະຈຳປະກະປຸບຜິຍະເຖຣາປະທານ
໑໐. ສະລະປຸບຜິຍະເຖຣາປະທານ

**ແລະມີຄາຖາ ໔໐ ຄາຖາ**

# ໓໗. ໂພທິວັນທະນະວັກ

## ໝວດວ່າດ້ວຍພຣະໂພທິວັນທະກະເປັນຕົ້ນ

## ໑. ໂພທິວັນທະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂພທິວັນທະກະເຖຣະ

(ພຣະໂພທິວັນທະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ເຫັນຕົ້ນແຄຝອຍ
ເຊິ່ງງອກຂຶ້ນເທິງແຜ່ນດິນງາມຮຸ່ງເຮືອງ
ຈຶ່ງຫົ່ມຜ້າບ່ຽງບ່າແລ້ວປະນົມມືໄຫວ້ຕົ້ນແຄຝອຍ

[໒] ເມື່ອປະຄອງອັນຊະລີແລ້ວ
ຕັ້ງໃຈເຄົາລົບພຣະສຳມາສຳພຸດທະເຈົ້າ
ຜູ້ບໍລິສຸດທັງພາຍໃນທັງພາຍນອກ
ລຸດພົ້ນດີແລ້ວ ບໍ່ມີອາສະວະ

[໓] ຂ້າພະເຈົ້າໄດ້ໄຫວ້ຕົ້ນແຄຝອຍ
ເໝືອນໄຫວ້ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ທີ່ຊາວໂລກບູຊາ ມີພຣະກະລຸນາຍານເໝືອນສາຄອນ ສະເພາະພຣະພັກ

[໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໄຫວ້ຕົ້ນໂພໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໄຫວ້

[໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະໂພທິວັນທະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂພທິວັນທະກະເຖຣາປະທານທີ ໑ ຈົບ**

# ໒. ປາຕະລິປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປາຕະລິປຸບຜິຍະເຖຣະ

(ພຣະປາຕະລິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ຜູ້ເປັນພຣະສະຍໍາພູ ເປັນບຸກຄົນຜູ້ເລີດ
ຊົງຊະນະມານ ຫ້ອມລ້ອມດ້ວຍພຣະສາວົກຂອງພຣະອົງ
ສະເດັດເຂົ້າໄປໃນນະຄອນພັນທຸມະດີ

[໗] ຂ້າພະເຈົ້າຫໍ່ດອກແຄຝອຍ ໓ ດອກໄວ້ໃສ່ຖົງເນີບແອວ
ປະສົງຈະອາບນໍ້າດໍາຫົວ ຈຶ່ງໄດ້ໄປສູ່ຝັ່ງແມ່ນໍ້າ

[໘] ຂ້າພະເຈົ້າອອກຈາກນະຄອນພັນທຸມະດີ
ໄດ້ເຫັນພຣະອົງຜູ້ຊົງເປັນຜູ້ນໍາສັດໂລກ
ຮຸ່ງເຮື່ອງດັ່ງດອກອຸບົນຂຽວ
ໂຊດຊ່ວງເໝືອນດວງໄຟໃຫຍ່

[໙] ອົງອາດເໝືອນພະຍາເສືອໂຄ່ງ
ປະເສີດເໝືອນໄກສອນຣາດຊະສີຜູ້ມີຊາດສູງ
ເລີດກວ່າສະມະນະທັງຫຼາຍ ມີໝູ່ພິກຂຸແວດລ້ອມ
ກໍາລັງສະເດັດດໍາເນີນໄປ
[໑໐] ຂ້າພະເຈົ້າເຫຼື້ອມໃສພຣະສຸຄົດເຈົ້າ
ຜູ້ຊໍາຣະມົນທິນຄືກິເລດພຣະອົງນັ້ນ
ຈຶ່ງໄດ້ຖືດອກແຄຝອຍ ໓ ດອກ
ໄປບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
[໑໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປາຕະລິປຸບພິຍະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປາຕະລິປຸບພິຍະເຖຣາປະທານທີ ໘ ຈົບ**

# ໙. ຕິນຸບປະລະມາລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຕິນຸບປະລະມາລິຍະເຖຣະ

(ພຣະຕິນຸບປະລະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓] ຄັ້ງນັ້ນ ຂ້າພະເຈົ້າເປັນວານອນ
ອາໄສຢູ່ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ໄດ້ເຫັນພຣະພຸດທະເຈົ້າ ຜູ້ປາສະຈາກທຸລີຄືກິເລດ
ປະທັບນັ່ງຢູ່ລະຫວ່າງພູເຂົາ

[໑໔] ຊົງເຮັດທິດທັງປວງໃຫ້ສະຫວ່າງສະໄຫວຢູ່
ດັ່ງຕົ້ນພະຍາໄມ້ສາລະມີດອກບານສະພັ່ງ
ຊົງປະກອບດ້ວຍພຣະລັກສະນະແລະອະນຸພະຍັນຊະນະ
ເມື່ອໄດ້ເຫັນແລ້ວກໍມີຄວາມພໍໃຈ

[໑໕] ຂ້າພະເຈົ້າມີຈິດເບີກບານ ມີໃຈຍິນດີຮ່າເຣີງດ້ວຍປີຕິ
ໄດ້ໃຊ້ດອກອຸບົນ ໓ ດອກບູຊາເໜືອຫົວ

[໑໖] ເມື່ອໃຊ້ດອກໄມ້ບູຊາພຣະພຸດທະເຈົ້າພຣະນາມວ່າ ຜຸດສະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ເຄົາລົບນົບນອບແລ້ວອວ່າຍໜ້າຫຼີກໄປທາງທິດເໜືອ

[໑໗] ເມື່ອຂ້າພະເຈົ້າກຳລັງຍ່າງແຍ່ງແຍ້ກັບໄປ ດ້ວຍໃຈທີ່ຜ່ອງໃສ
ຈຶ່ງພາດຕົກໄປໃນລະຫວ່າງພູເຂົາຫີນ ເຖິງຄວາມສິ້ນຊີວິດແລ້ວ

[໑໘] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າລະຊາດເດີມແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[๗๙]　ຂ້າພະເຈົ້າໄດ້ຄອງເທວະສົມບັດ ๖๐๐ ຊາດ
ແລະໄດ້ເກີດເປັນພຣະເຈົ້າຈັກກະພັດ ๕๐๐ ຊາດ

[๘๐]　ໃນກັບທີ ๗๔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[๘๑]　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ๔ ວິໂມກ ๘
ແລະອະພິນຍາ ๖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນຸບປະລະມາລິຍະເຖຣະ ໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິນຸບປະລະມາລິຍະເຖຣາປະທານທີ ๖ ຈົບ**

## ๔. ປັດຕິປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປັດຕິປຸບຜິຍະເຖຣະ

(ພຣະປັດຕິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๘๔]　ຄັ້ງເມື່ອພຣະສໍາມາສໍາພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະນາມວ່າ ປະທຸມຸດຕະຣະ
ສະເດັດດັບຂັນທະປະຣິນິບພານແລ້ວ
ຊົນທັງຫຼາຍມາປະຊຸມກັນແຫ່ພຣະສະຣີຣະໄປ

[๘๖]　ເມື່ອນໍາພຣະສະຣີຣະໄປ ເມື່ອເຂົາເຈົ້າພາກັນປະໂຄມກອງເພຣີຢູ່
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ໃຊ້ດອກດູ່ບູຊາ

[๘๘]　ໃນກັບທີ ๑๐๐,๐๐๐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະສະຣີຣະ

[໔໕] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໖] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັດຕິປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປັດຕິປຸບພິຍະເຖຣາປະທານທີ ໔ ຈົບ**

## ໕. ສັດຕະປັນນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັດຕະປັນນິຍະເຖຣະ

(ພຣະສັດຕະປັນນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ພຣະສຳມາສຳພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ພຣະນາມວ່າ ສຸມະນະ ສະເດັດອຸບັດຂຶ້ນແລ້ວ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ໃຊ້ຕົ້ນຕິນເປັດບູຊາ

[໔໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ຕົ້ນຕີນເປັດບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍຕົ້ນຕີນເປັດ

[໕໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັດຕະປັນນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັດຕະປັນນິຍະເຖຣາປະທານທີ ໕ ຈົບ**

## ໖. ຄັນທະມຸດຖິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄັນທະມຸດຖິຍະເຖຣະ

(ພຣະຄັນທະມຸດຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໓] ເມື່ອມະຫາຊົນກຳລັງຊ່ອຍກັນທຳຈິຕະການທານຢູ່
ຂົນຂອງຫອມຕ່າງ ໆ ມາກອງລວມກັນແລ້ວ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຊ້ຂອງຫອມກຳມືໜຶ່ງບູຊາ (ຈິຕະກາທານ)

[໕໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາຈິຕະກາທານໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຈິຕະກາທານ

[໕໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໕] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄັນທະມຸດຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄັນທະມຸດຖິຍະເຖຣາປະທານທີ ໖ ຈົບ**

## ໗. ຈິຕະກະປູຊະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຈິຕະກະປູຊະກະເຖຣະ

(ພຣະຈິຕະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໘] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ສະເດັດດັບຂັນທະປະຣິນິບພານແລ້ວ
ເມື່ອມະຫາຊົນຊ່ອຍກັນຍົກ (ພຸດທະສະຣີຣະ) ຂຶ້ນເທິງຈິຕະກາທານແລ້ວ
ຂ້າພະເຈົ້າໄດ້ໃຊ້ດອກສາລະບູຊາ

[໓໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຈິຕະກາທານ

[໔໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຈິຕະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຈິຕະກະປູຊະກະເຖຣາປະທານທີ ໆ ຈົບ**

# ໘. ສຸມະນະຕາລະວັນຕິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸມະນະຕາລະວັນຕິຍະເຖຣະ

(ພຣະສຸມະນະຕາລະວັນຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໔໓] ຂ້າພະເຈົ້າໄດ້ຖວາຍວີໃບຕານເຊິ່ງອົບດ້ວຍດອກມະລິ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ຂ້າພະເຈົ້າຊົງໄວ້ເຊິ່ງຍົດໃຫຍ່

[໔໔] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍວີໃບຕານໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍວີໃບຕານ

[໔໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໕] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໗]  ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸມະນະຕາລະວັນຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸມະນະຕາລະວັນຕິຍະເຖຣາປະທານທີ ໘ ຈົບ**

## ໙. ສຸມະນະທາມິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສຸມະນະທາມິຍະເຖຣະ

(ພຣະສຸມະນະທາມິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໘]  ຂ້າພະເຈົ້າໄດ້ຮ້ອຍພວງມາໄລດອກມະລິແລ້ວ
ຢືນຊິງ (ຖື) ໄວ້ເບື້ອງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ສິດທັດຖະ ຜູ້ບໍລິສຸດ (ຊຳຣະກິເລດ) ມີຕະບະ

[໔໙]  ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ພວງດອກມະລິບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍພວງດອກມະລິ

[໕໐]  ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໑]  ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໒]  ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸມະນະທາມີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສຸມະນະທາມີຍະເຖຣາປະທານທີ ໗ ຈົບ**

## ໑໐. ກາສຸມາຣີຜະລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກາສຸມາຣີຜະລະທາຍະກະເຖຣະ

(ພຣະກາສຸມາຣີຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໕໓] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ ຜູ້ປາສະຈາກທຸລິຕິກິເລດ
ໂຊດຊ່ວງດັ່ງດອກກັນນິກາ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ປະທັບນັ່ງຢູ່ລະຫວ່າງພູເຂົາ

[໕໔] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ຈຶ່ງປະນົມມືໄຫວ້ເໜືອຫົວແລ້ວ
ໄດ້ຖືໝາກກະບົກໄປຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໕໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໕໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໗] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກາສຸມາຣິຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການແບວນີ້

**ກາສຸມາຣິຜະລະທາຍະກະເຖຣາປະທານທີ ໑໐ ຈົບ**

**ໂພທິວັນທະນະວັກທີ ໓໘ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື



**ມີຄາຖາ ໔໕ ຄາຖາ**

# ໓໕. ອຳພະຕະຜະລະວັກ

## ໝວດວ່າດ້ວຍພຣະອຳພະຕະຜະລະເປັນຕົ້ນ

## ໑. ອຳພະຕະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຳພະຕະຜະລະທາຍະກະເຖຣະ

(ພຣະອຳພະຕະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະຜູ້ມີພຣະພາກສຳພຸດທະເຈົ້າ ພຣະນາມວ່າ ສະຕະຣັງສີ
ຜູ້ເປັນພຣະສະຍຳພູ ຜູ້ບໍ່ຊົງພ່າຍແພ້
ຊົງປະສົງວິເວກ ໄດ້ສະເດັດອອກໂຄຈອນບິນທະບາດ

[໔] ຂ້າພະເຈົ້າຖືໝາກໄມ້ຢູ່ ໄດ້ເຫັນພຣະອົງຜູ້ອົງອາດກວ່ານໍຣະຊົນ
ຈຶ່ງເຂົ້າເຝົ້າ ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍໝາກກອກ

[໕] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອຳພະຕະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຳພະຕະຜະລະທາຍະກະເຖຣາປະທານທີ ໑ ຈົບ**

# ໔. ລະພຸຊະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະລະພຸຊະທາຍະກະເຖຣະ

(ພຣະລະພຸຊະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗] ຄັ້ງນັ້ນ ຂ້າພະເຈົ້າເປັນຄົນເຝົ້າສວນອາໄສຢູ່ໃນນະຄອນພັນທຸມະດີ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ກຳລັງສະເດັດເຫາະໄປໃນອາກາດ

[໗] ຂ້າພະເຈົ້າໄດ້ຖືໝາກມີ້ປ່າ
ໄປຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ປະທັບຢືນຢູ່ໃນອາກາດ ຊົງຮັບ (ໝາກມີ້ປ່າ) ແລ້ວ

[໙] ນັ້ນເປັນເຫດໃຫ້ຂ້າພະເຈົ້າເກີດປີຕິ
ນຳຄວາມສຸກມາໃຫ້ໃນປັດຈຸບັນ
ຍ້ອນໄດ້ຖວາຍໝາກໄມ້ແດ່ພຣະພຸດທະເຈົ້າດ້ວຍໃຈທີ່ຜ່ອງໃສ

[໑໐] ຂ້າພະເຈົ້າໄດ້ປີຕິແລະຄວາມສຸກ
ຢ່າງສູງສຸດເຫຼືອລົ້ນໃນຄັ້ງນັ້ນ
ຣັດຕະນະຍ່ອມເກີດຂຶ້ນແກ່ຂ້າພະເຈົ້າຜູ້ບັງເກີດໃນພົບນັ້ນ ໆ

[໑໑] ໃນກັບທີ ໗໑ ນັບຈາກກັບນີ້
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໑໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໓] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະລະພຸຊະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ລະພຸຊະທາຍະກະເຖຣາປະທານທີ ໔ ຈົບ**

## ៣. ອຸທຸມພະຣະຜະລະທາຍະກະເຖຣາປະທານ
## ປະຫວັດໃນອະດີດຊາດຂອງພຣະອຸທຸມພອນຜະລະທາຍະກະເຖຣະ

(ພຣະອຸທຸມພອນຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ພຣະພຸດທະເຈົ້າຜູ້ເປັນບຸຣຸດຜູ້ສູງສຸດ
ປະທັບຢູ່ໃກ້ຝັ່ງແມ່ນ້ຳ ນິນນະຄາ
ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ເປັນເອກອັກຄະຣະບຸກຄົນມີພຣະທະໄທຕັ້ງໝັ້ນດ້ວຍດີ

[໑໖] ຂ້າພະເຈົ້າມີໃຈເຫຼື້ອມໃສໃນພຣະອົງຜູ້ຊຳຣະມົນທິນຄືກິເລດ
ຈຶ່ງໄດ້ຖືໝາກເດື່ອໄປຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
[໑໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້
[໑໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໙] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ៣ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອຸທຸມພອນຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸທຸມພະຣະຜະລະທາຍະກະເຖຣາປະທານທີ ៣ ຈົບ**

# ໔. ປິລັກຂະຜະລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປິລັກຂະຜະລະທາຍະກະເຖຣະ

(ພຣະປິລັກຂະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ມີພຣະຍົດຍິ່ງໃຫຍ່ຢູ່ໃນໃນປ່າ
ຈຶ່ງມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ຖວາຍໝາກດີປີ

[໔໒] ໃນກັບທີ ໑໑໗ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໓] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປິລັກຂະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປິລັກຂະຜະລະທາຍະກະເຖຣາປະທານທີ ໔ ຈົບ**

# ໕. ຜາຣຸສະຜະລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຜາຣຸສະຜະລະທາຍະກະເຖຣະ

(ພຣະຜາຣຸສະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ສົມຄວນຮັບເຄື່ອງບູຊາ ສະເດັດດຳເນີນຢູ່ທີ່ຖະໜົນ
ຈຶ່ງໄດ້ຖວາຍໝາກປາງແດ່ພຣະອົງ

[໔໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຜາຣຸສະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຜາຣຸສະຜະລະທາຍະກະເຖຣາປະທານທີ ໕ ຈົບ**

# ໖. ວັນລິຜະລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະວັນລິຜະລະທາຍະກະເຖຣະ

(ພຣະວັນລິຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໑] ຄັ້ງນັ້ນ ຊົນທັງປວງຊັກຊວນກັນໄປສູ່ປ່າ
ໃນຄັ້ງນັ້ນ ພວກເຂົາສະແຫວງຫາໝາກໄມ້ ໄດ້ໝາກໄມ້ແລ້ວ

[໓໒] ໃນປ່ານັ້ນ ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ເປັນພຣະສະຍຳພູ ຜູ້ບໍ່ຊົງພ່າຍແພ້
ຈຶ່ງມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍໝາກແຕງໂມ

[໓໓] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໓໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໕] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວັນລິຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ແນວນີ້

**ວັນລິຜະລະທາຍະກະເຖຣາປະທານທີ ໖ ຈົບ**

# ໗. ກະທະລິຜະລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະກະທະລິຜະລະທາຍະກະເຖຣະ

(ພຣະກະທະລິຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗] ຂ້າພະເຈົ້າໄດ້ເຫັນພຣະສາດສະດາຜູ້ຊົງເປັນຜູ້ນຳສັດໂລກ
ຊົງຮຸ່ງເຮືອງດັ່ງດອກກັນນິກາ
ໂຊດຊ່ວງເໝືອນດວງຈັນວັນເພັງແລະເໝືອນຕົ້ນພຶກສາປະທີບ

[໓໘] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖືໝາກກ້ວຍໄປຖວາຍແດ່ ພຣະສາດສະດາ
ໄຫວ້ແລ້ວກໍຫຼີກໄປ

[໓໙] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກະທະລິຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ກະທະລິຜະລະທາຍະກະເຖຣາປະທານທີ ໗ ຈົບ**

# ๗. ປະນະສະຜະລະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະນະສະຜະລະທາຍະກະເຖຣະ

(ພຣະປະນະສະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຄັ້ງນັ້ນ ພຣະສຳພຸດທະເຈົ້າພຣະນາມວ່າ ອັດຊຸນະ
ຊົງພຽບພ້ອມດ້ວຍຈະຣະນະ ແລະເປັນພຣະມຸນີ ສະຫຼາດໃນສະມາທິ
ປະທັບຢູ່ທີ່ພູເຂົາຫິມະພານ

[໔໔] ຂ້າພະເຈົ້າຖືໝາກມີ້ສຸກສົດ ໜ່ວຍໃຫຍ່ເທົ່າກັບໝໍ້
ໄດ້ຖວາຍພຣະສາດສະດາວາງໄວ້ທີ່ຕົ້ນຕີນເປັດ

[໔໕] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະປະນະສະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະນະສະຜະລະທາຍະກະເຖຣາປະທານທີ ๗ ຈົບ**

# ໗. ໂສນະໂກຕິວິສະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂສນະໂກຕິວິສະເຖຣະ

(ພຣະໂສນະໂກຕິວິສະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໗] ໃນສາດສະໜາຂອງພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຂ້າພະເຈົ້າໄດ້ສ້າງຖ້ຳໄວ້ແຫ່ງໜຶ່ງ
ຖວາຍແດ່ສົງຜູ້ມາຈາກທິດທັງ ໔ ໃນພັນທຸມາຣາດຊະທານີ

[໕໐] ຂ້າພະເຈົ້າບໍລິຈາກຜ້າຫຼາຍຜືນໄວ້ປູພື້ນໃນຖ້ຳ
ໃນຄັ້ງນັ້ນ ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ທຳຄວາມປາຖະໜາວ່າ

[໕໑] ຂ້າພະເຈົ້າເພິ່ງໃຫ້ພຣະສຳມາສຳພຸດທະເຈົ້າຊົງໂພດປານ
ເພິ່ງໄດ້ບັນພະຊາແລະເພິ່ງສຳຜັດພຣະນິບພານ
ເຊິ່ງເປັນທຳສູງສຸດ ສະງົບຢ່າງປະເສີດ

[໕໒] ດ້ວຍກຸສົນມູນນັ້ນ ໆ ແລ
ຂ້າພະເຈົ້າຣະລຶກຊາດໄດ້ເຖິງ ໗໐ ກັບ
ຂ້າພະເຈົ້າເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໄດ້ສ້າງບຸນໄວ້ຮຸ່ງເຮືອງຫຼາຍ

[໕໓] ດ້ວຍຜົນກຳທີ່ເຫຼືອຈາກນັ້ນ ໃນພົບສຸດທ້າຍນີ້
ຂ້າພະເຈົ້າເກີດເປັນບຸດຄົນດຽວຂອງອັກຄະຣະເສດຖີໃນນະຄອນຈຳປາ

[໕໔] ພໍຟັງຂ່າວຂ້າພະເຈົ້າວ່າເກີດແລ້ວ
ບິດາກໍມີຄວາມພໍໃຈດັ່ງນີ້ວ່າ
ເຮົາຈະໃຫ້ຊັບ ໒໐ ໂກດແກ່ກຸມານບໍ່ໃຫ້ລຸດຢ່ອນເລີຍ

[໕໕] ຂົນຍາວປະມານ ໔ ນິ້ວ ເສັ້ນລະອຽດ
ມີສຳຜັດອ່ອນນຸ້ມສະເໝີເໝືອນປຸຍນຸ່ນງົດງາມ
ເກີດທີ່ຝ່າຕີນທັງ ໒ ຂອງຂ້າພະເຈົ້າ

[໕໖] ຂໍ້ນີ້ເປັນອາການພິເສດປະການໜຶ່ງຕະຫຼອດ ໗໐ ກັບທີ່ລ່ວງມາ

ຂ້າພະເຈົ້າບໍ່ຮູ້ສຶກໃນເມື່ອວາງຕີນລົງ
ເທິງພື້ນທີ່ບໍ່ມີເຄື່ອງປູເລີຍ

[໕໗] ຂ້າພະເຈົ້າໃຫ້ພຣະພຸດທະເຈົ້າໂຜດປານແລ້ວບວດເປັນບັນພະຊິດ
ໄດ້ບັນລຸອະຣະຫັນຕະຜົນ ແລະເປັນຜູ້ເຢັນດັບແລ້ວ

[໕໘] ພຣະສາດສະດາຜູ້ຊົງເຫັນເຫດທັງປວງ
ຊົງສະແດງວ່າຂ້າພະເຈົ້າເປັນຜູ້ເລີດກວ່າ
ບັນດາພິກຂຸຜູ້ຜາຣົບຄວາມພຽນ
ເປັນພຣະອະຣະຫັນຕະຂີນາສົບ ໄດ້ອະພິນຍາ ໖ ມີລິດຫຼາຍ

[໕໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຖ້ຳ

[໖໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

[໖໓] ພຣະໂສນະໂກຕິວິສະເຖຣະ ເປັນຫົວໜ້າຂອງພິກຂຸສົງ
ຖືກຖາມບັນຫາແລ້ວໄດ້ພະຍາກອນທີ່ໃກ້ສະໃຫຍ່ຊື່ອະໂນດາດ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂສນະໂກຕິວິສະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂສນະໂກຕິວິສະເຖຣາປະທານທີ ໙ ຈົບ**

# ໑໐. ພຸດທາປະທານຊື່ປຸບພະກຳມະປິໂລຕິ

## ປະຫວັດໃນອະດີດຊາດຂອງພຣະພຸດທະເຈົ້າວ່າດ້ວຍບຸບພະກຳເກົ່າ

(ພຣະອານົນເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງພຣະພຸດທະເຈົ້າວ່າດ້ວຍບຸບພະກຳເກົ່າ ຈຶ່ງກ່າວວ່າ)

[໖໔] ໃນພື້ນສິລາທີ່ໜ້າຮື່ນຣົມ ໃກ້ສະອະໂນດາດ
ໂຊດຊ່ວງດ້ວຍຣັດຕະນະຕ່າງ ໆ
ໃນບໍລິເວນປ່າມີດອກໄມ້ມີກິ່ນຫອມນານາຊະນິດ

[໖໕] ພຣະພຸດທະເຈົ້າຊົງເປັນຜູ້ນຳສັດໂລກ
ມີໝູ່ພິກຂຸໝູ່ໃຫຍ່ຫ້ອມລ້ອມ
ປະທັບນັ່ງທີ່ສີລາອາດນັ້ນ
ຊົງພະຍາກອນບຸບພະກຳຂອງພຣະອົງວ່າ

[໖໖] ພິກຂຸທັງຫຼາຍ ພວກທ່ານຈົ່ງຟັງກຳຂອງເຮົາ
ເຮົາເຫັນພິກຂຸ ຜູ້ຢູ່ປ່າເປັນວັດ
ຈຶ່ງໄດ້ຖວາຍຜ້າເກົ່າຜືນໜຶ່ງ

[ກ] ໃນການນັ້ນ ເຮົາປາຖະໜາການຕັດສະຣູ້
ເພື່ອຄວາມເປັນພຣະພຸດທະເຈົ້າເປັນເທື່ອທຳອິດ
ຜົນຂອງການຖວາຍຜ້າເກົ່າໃຫ້ຜົນໃນຄວາມເປັນພຣະພຸດທະເຈົ້າ
[ຂ] ໃນຊາດປາງກ່ອນ ເຮົາເກີດເປັນນາຍໂຄບານ ຕ້ອນງົວໄປລ້ຽງ
ເຫັນແມ່ງົວກຳລັງດື່ມນ້ຳຂຸ່ນ ຈຶ່ງຫ້າມມັນໄວ້
[ຄ] ດ້ວຍຜົນກຳນັ້ນ ໃນພົບສຸດທ້າຍນີ້ ເຮົາກະຫາຍນ້ຳ
ກໍບໍ່ໄດ້ດື່ມນ້ຳຕາມຄວາມປາຖະໜາ

[໖໗] ໃນຊາດອື່ນ ໆ ໃນປາງກ່ອນ
ເຮົາເກີດເປັນນັກເລງຊື່ວ່າ ປຸນາລິ
ໄດ້ກ່າວຕູ່ພຣະປັດເຈກພຸດທະເຈົ້າມີນາມວ່າ ສຸຣະພີ ຜູ້ບໍ່ປະທຸດສະຮ້າຍໃຜ

[໖໘] ດ້ວຍຜົນກຳນັ້ນ ເຮົາຈຶ່ງໄດ້ວຽນວ່າຍຕາຍເກີດ
ຢູ່ໃນນະຮົກເປັນເວລາດົນນານ ສະເຫວີຍທຸກຂະເວທະນາຫຼາຍພັນປີ

[໖໙] ດ້ວຍຜົນກຳທີ່ເຫຼືອຢູ່ນັ້ນ
ໃນພົບສຸດທ້າຍນີ້ ເຮົາໄດ້ຮັບການກ່າວຕູ່
ຍ້ອນນາງສຸນທະຣີເປັນເຫດ

[໗໐] ຍ້ອນການກ່າວຕູ່ພຣະເຖຣະນາມວ່າ ນັນທະ
ຜູ້ເປັນສາວົກຂອງພຣະພຸດທະເຈົ້າ ຜູ້ຄອບງຳອັນຕະລາຍທັງປວງ
ເຮົາຈຶ່ງວຽນວ່າຍຕາຍເກີດຢູ່ໃນນະຮົກເປັນເວລາດົນນານ

[໗໑] ເຮົາວຽນວ່າຍຕາຍເກີດຢູ່ໃນນະຮົກເປັນເວລາດົນນານເຖິງ ໑໐໐,໐໐໐ ປີ
ເມື່ອໄດ້ເກີດເປັນມະນຸດ ກໍໄດ້ຮັບການກ່າວຕູ່ຫຼາຍ

[໗໒] ດ້ວຍຜົນກຳທີ່ເຫຼືອຢູ່ນັ້ນ
ນາງຈິນຈະມານະວິກາ ຈຶ່ງມາກ່າວຕູ່ເຮົາດ້ວຍຄຳບໍ່ຈິງທ່າມກາງໝູ່ຊົນ

[໗໓] ເຮົາເກີດເປັນພາມ
ຜູ້ມີສຸຕະເຊິ່ງປະຊາຊົນສັກກາຣະບູຊາ
ໄດ້ສອນມົນໃຫ້ມານົບປະມານ ໕໐໐ ຄົນ ໃນປ່າໃຫຍ່

[໗໔] ເຮົາໄດ້ເຫັນລືສີຜູ້ໜ້າເກງກົວ ຜູ້ໄດ້ອະພິນຍາ ໕
ມີລິດຫຼາຍ ມາຍັງສຳນັກຂອງເຮົາ
ເຮົາຈຶ່ງກ່າວຕູ່ລືສີຜູ້ບໍ່ປະທຸດສະຮ້າຍໃຜ

[໗໕] ຄັ້ງນັ້ນ ເຮົາໄດ້ບອກພວກສິດວ່າ
ລືສີຕົນນີ້ມັກບໍລິໂພກກາມມະຄຸນ
ພຽງເຮົາບອກເທົ່ານັ້ນ ພວກມານົບກໍເຊື່ອຕາມນັ້ນ

[໗໖] ຕັ້ງແຕ່ນັ້ນມາ ພວກມານົບທັງໝົດ
ໄປທ່ຽວຫາອາຫານໃນຕະກູນທັງຫຼາຍ
ພາກັນບອກປະຊາຊົນວ່າ ລືສີຕົນນີ້ມັກບໍລິໂພກກາມມະຄຸນ

[໗໗] ດ້ວຍຜົນກຳນັ້ນ ພິກຂຸ ໕໐໐ ອົງເຫຼົ່ານີ້
ໄດ້ຮັບການກ່າວຕູ່ ຍ້ອນນາງສຸນທະຣີເປັນເຫດ

[໗໘] ໃນຊາດກ່ອນ ເຮົາໄດ້ຂ້ານ້ອງຊາຍຕ່າງມານດາ
ຍ້ອນເຫດແຫ່ງຊັບ
ຈັບໂຍນລົງຈາກພູເຂົາສູງ ແລ້ວໂຍນຫີນເຕັງໄວ້

[໗໙] ດ້ວຍຜົນກຳນັ້ນ ພຣະເທວະທັດຈຶ່ງຍູ້ກ້ອນຫີນກິ້ງລົງມາ
ສະເກັດຫີນກະທົບນິ້ວຫົວໂປ້ຕີນຂອງເຮົາ (ຈົນຫໍ້ເລືອດ)

[໘໐] ໃນຊາດກ່ອນ ເຮົາຍັງເປັນເດັກນ້ອຍຫຼິ້ນຢູ່ຕາມທາງໃຫຍ່
ໄດ້ເຫັນພຣະປັດເຈກພຸດທະເຈົ້າກຳລັງຍ່າງມາ
ໄດ້ໂຮຍກ້ອນຫີນກ້ອນນ້ອຍ ໆ ໄວ້ຕາມຫົນທາງ

[໘໑] ດ້ວຍຜົນກຳນັ້ນ ໃນພົບສຸດທ້າຍນີ້
ພຣະເທວະທັດຈຶ່ງຊັກຊວນນັກແມ່ນທະນູ
ຜູ້ເປັນນັກຂ້າ ໃຫ້ມາຂ້າເຮົາ

[໘໒] ໃນຊາດກ່ອນ ເຮົາເປັນນາຍຄວານຊ້າງ
ໄດ້ໃຊ້ໃຫ້ຊ້າງແລ່ນໄລ່ພຣະປັດເຈກພຸດທະເຈົ້າຜູ້ເປັນພຣະມຸນີສູງສຸດ
ເຊິ່ງກຳລັງທ່ຽວບິນທະບາດຢູ່

[໘໓] ດ້ວຍຜົນກຳນັ້ນ ຊ້າງນາລາຄີຣີເຊືອກດຸຮ້າຍ
ຈຶ່ງແລ່ນໄລ່ເຮົາໃນນະຄອນຣາດຊະຄືອັນປະເສີດ

[໘໔] ໃນຊາດກ່ອນ ເຮົາເປັນທະຫານຣາບ
ໄດ້ໃຊ້ຫອກຂ້າຄົນຈຳນວນຫຼາຍ
ດ້ວຍຜົນກຳນັ້ນ
ເຮົາຈຶ່ງຖືກໄຟເຜົາໄໝ້ຢ່າງຮ້ອນແຮງໃນນະຣົກ

[໘໕] ດ້ວຍຜົນກຳທີ່ເຫຼືອຢູ່
ໃນບັດນີ້ ໄຟນັ້ນຍັງນຳມາ
ໄໝ້ຜິວໜັງຕີນຂອງເຮົາຍ້ອນກຳຍັງບໍ່ໝົດສິ້ນໄປ

[໘໖] ໃນຊາດກ່ອນ ເຮົາເປັນເດັກນ້ອຍລູກຂອງຊາວປະມົງ
ອາໄສຢູ່ໃນເກວັດຕະຄາມ
ເຫັນຊາວປະມົງຂ້າປາແລ້ວເກີດຄວາມໂສມະນັດດີໃຈ
[໘໗] ດ້ວຍຜົນກຳນັ້ນ ເຮົາຈຶ່ງປວດຫົວ
ໃນເວລາທີ່ເຫັນເຈົ້າສາກະຍະທັງຫຼາຍຖືກ
ພຣະເຈົ້າວິທູທະພະຂ້າ

[໗໘] ເຮົາໄດ້ດ່າບໍລິພາດເຫຼົ່າສາວົກໃນສາດສະໜາ
ຂອງພຣະພຸດທະເຈົ້າພຣະນາມວ່າ ຜຸດສະດ້ວຍຄຳວ່າ
ທ່ານທັງຫຼາຍຈົ່ງຂົບ ຄ້ຽວ ຫຍ້າ ສັນ
ແຕ່ເຂົ້າໜຽວ ຢ່າໄດ້ສັນເຂົ້າສາລີເລີຍ

[໗໙] ດ້ວຍຜົນກຳນັ້ນ ເຮົາຮັບນິມົນພານ
ຢູ່ຈຳພັນສາໃນເມືອງເວຣັນຊາ
ໄດ້ສັນແຕ່ເຂົ້າໜຽວ ຕະຫຼອດ ໓ ເດືອນ

[໘໐] ໃນຊາດກ່ອນ ເມື່ອນັກມວຍກຳລັງຊົກຕີກັນ
ເຮົາໄດ້ກັນບຸດຊາຍນັກມວຍປ້ຳໄວ້
ດ້ວຍຜົນກຳນັ້ນ
ເຮົາຈຶ່ງໄດ້ຮັບຄວາມທຸກຢູ່ສັນຫຼັງ (ປວດຫຼັງ)

[໘໑] ໃນຊາດກ່ອນ ເຮົາເປັນໝໍຮັກສາໂຣກ
ໄດ້ຖ່າຍຢາໃຫ້ລູກຊາຍເສດຖີ (ເຖິງແກ່ຄວາມຕາຍ)
ດ້ວຍຜົນກຳນັ້ນ
ເຮົາຈຶ່ງປ່ວຍເປັນໂຣກປັກຂັນທິກາພາດ (ຖ່າຍເປັນເລືອ)

[໘໒] ໃນຊາດນັ້ນ ເຮົາຊື່ວ່າ ໂຊຕະປາລະ
ໄດ້ກ່າວກັບພຣະສຸຄົດເຈົ້າພຣະນາມວ່າ ກັດສະປະ
ວ່າການຕັດສະຮູ້ຢູ່ເຫງົ້າຕົ້ນໂພຈັກມີມາໄດ້ແຕ່ໃສ
ການຕັດສະຮູ້ຫາໄດ້ແສນຍາກ

[໘໓] ດ້ວຍຜົນກຳນັ້ນ
ເຮົາຈຶ່ງໄດ້ພ່ຳເພັງທຸກກະຣະກິຣິຍາດົນນານເຖິງ ໖ ປີ
ຕໍ່ຈາກນັ້ນ ຈຶ່ງໄດ້ບັນລຸພຣະໂພທິຍານທີ່ເຂດອຸຣຸເວລາ

[໘໔] ແຕ່ວ່າ ເຮົາກໍບໍ່ໄດ້ບັນລຸພຣະໂພທິຍານທີ່ສູງສຸດດ້ວຍທາງນີ້
ເຮົາຖືກກຳໃນປາງກ່ອນຕັກເຕືອນແລ້ວ
ຈຶ່ງສະແຫວງຫາ (ໂພທິຍານ) ຜິດທາງ

[໘໕] ຈົນວ່າ ເຮົາສິ້ນບາບສິ້ນບຸນແລ້ວ
ປາສະຈາກຄວາມຮ້ອນຮົນທຸກຢ່າງ

ບໍ່ມີຄວາມເສົ້າໂສກ ບໍ່ມີຄວາມຄັບແຄ້ນ
ບໍ່ມີອາສະວະ ຈັກປະຣິນິບພານ

[໘໖] ພຣະພຸດທະຊິນນະເຈົ້າໄດ້ຊົງບັນລຸກຳລັງແຫ່ງອະພິນຍາທັງປວງແລ້ວ
ຊົງພະຍາກອນໂດຍມຸ້ງຫວັງປະໂຫຍດສຳລັບໝູ່ພິກຂຸ
ຢູ່ໃກ້ສະໃຫຍ່ຊື່ອະໂນດາດ ດ້ວຍປະການແນວນີ້ແລ

ໄດ້ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພາສິດທຳບັນລະຍາຍພຸດທາປະທານ ຊື່ ປຸບພະກຳມະປິໂລຕິ ເຊິ່ງເປັນບຸບຈະຣິດຂອງພຣະອົງ ດ້ວຍປະການແນວນີ້ແລ

**ພຸດທາປະທານຊື່ປຸບພະກຳມະປິໂລຕິທີ ໑໐ ຈົບ**

**ອຳພະຕະຜະລະວັກທີ ໔໙ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ອຳພະຕະຜະລະທາຍະກະເຖຣາປະທານ
໒. ອຸທຸມພະຣະຜະລະທາຍະກະເຖຣາປະທານ
໓. ຜາຣຸສະຜະລະທາຍະກະເຖຣາປະທານ
໔. ກະທະລິຜະລະທາຍະກະເຖຣາປະທານ
໕. ໂສນະໂກຕິວິສະເຖຣາປະທານ
໖. ລະພຸຊະທາຍະກະເຖຣາປະທານ
໗. ປິລັກຂະຜະລະທາຍະກະເຖຣາປະທານ
໘. ວັນລິຜະລະທາຍະກະເຖຣາປະທານ
໙. ປະນະສະຜະລະທາຍະກະເຖຣາປະທານ
໑໐. ພຸດທາປະທານຊື່ວ່າປຸບພະກຳມະປິໂລຕິ

**ບັນດິດທັງຫຼາຍນັບໄດ້ ໗໑ ຄາຖາ**

**ພານະວານທີ ໑໔ ຈົບ**

# ໔໐. ປິລິນທະວັດສະວັກ

## ໝວດວ່າດ້ວຍພຣະປິລິນທະວັດສະເປັນຕົ້ນ

## ໑. ປິລິນທະວັດສະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປິລິນທະວັດສະເຖຣະ

(ພຣະປິລິນທະວັດສະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າເປັນຄົນເຝົ້າປະຕູຢູ່ທີ່ນະຄອນຫົງສະວະດີ
ໄດ້ຮິບໂຮມໂພຄະສົມບັດເກັບໄວ້ໃນເຮືອນຫຼາຍນັບບໍ່ຖ້ວນ

[໒] ຄັ້ງນັ້ນ ຂ້າພະເຈົ້ານັ່ງຢູ່ໃນສະຖານທີ່ສະຫງັດ
ເຮັດໃຈໃຫ້ຮ່າເຣີງ ນັ່ງຢູ່ໃນຜາສາດທີ່ປະເສີດ
ໄດ້ຄິດແນວນີ້ວ່າ

[໓] ໂພຄະສົມບັດຂອງເຮົາມີຫຼາຍ
ພາຍໃນບຸຣີຂອງເຮົາກໍມັ່ງຄັ່ງ
ແມ່ນພຣະຣາຊາຜູ້ເປັນໃຫຍ່ໃນແຜ່ນດິນ
ພຣະນາມວ່າອານົນ ກໍຊົງເຊື້ອເຊີນເຮົາ

[໔] ພຣະພຸດທະເຈົ້າພຣະອົງນີ້ ເປັນພຣະມຸນີ
ສະເດັດອຸບັດຂຶ້ນແລ້ວໃນໂລກນີ້
ແລະໂພຄະສົມບັດຂອງເຮົາກໍມີຢູ່
ເຮົາຈັກຖວາຍທານແດ່ ພຣະສາດສະດາ

[໕] ພຣະໂອຣົດຂອງພຣະຣາຊາພຣະນາມວ່າ ປະທຸມະ
ຊົງຖວາຍທານຢ່າງປະເສີດ
ຄືຊ້າງເຊືອກປະເສີດ ບັນລັງແລະພະນັກພິງ
ປະມານບໍ່ໜ້ອຍ ໃນພຣະຊິນນະເຈົ້າ

[໖] ແມ່ນເຮົາກໍຈັກຖວາຍທານ
ໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດ

ທານຢ່າງປະເສີດທີ່ຍັງບໍ່ເຄີຍມີໃຜຖວາຍ
ເຮົາຈັກເປັນ (ຜູ້ຖວາຍ) ຄົນທຳອິດ

[໗] ຂ້າພະເຈົ້າຄິດເຖິງທານຫຼາຍຢ່າງ
ທີ່ມີຜົນເປັນສຸກຍ້ອນການບູຊາ
ກໍໄດ້ເຫັນການຖວາຍບໍຣິຂານ
ເປັນເຫດເຮັດຄວາມຄິດຂອງຂ້າພະເຈົ້າໃຫ້ເຕັມໄດ້

[໘] ຂ້າພະເຈົ້າຈັກຖວາຍບໍຣິຂານ
ໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດ
ການຖວາຍບໍຣິຂານທີ່ຄົນເຫຼົ່າອື່ນຍັງບໍ່ເຄີຍຖວາຍ
ຂ້າພະເຈົ້າຈັກເປັນຄົນທຳອິດ

**(ການເຖິງພ້ອມແຫ່ງທານວັດຖຸ)**

[໙] ຂະນະນັ້ນ ຂ້າພະເຈົ້າເຂົ້າໄປຫາຊ່າງຈັກສານ ຈ້າງໃຫ້ເຮັດຄັນຮົ່ມ
ຮິບໂຮມຄັນຮົ່ມໄດ້ ໑໐໐,໐໐໐ ຄັນ

[໑໐] ຮິບໂຮມຜ້າໄດ້ ໑໐໐,໐໐໐ ຜືນ
ຮິບໂຮມບາດໄດ້ ໑໐໐,໐໐໐ ໜ່ວຍ

[໑໑] ຈ້າງຊ່າງໃຫ້ເຮັດມີດແຖ ມີດນ້ອຍ ເຂັມ ແລະມີດຕັດເລັບ
ທີ່ສົມຄວນ (ແກ່ສະມະນະບໍລິໂພກ) ແລ້ວໃຫ້ວາງໄວ້ພາຍໃຕ້ຮົ່ມ

[໑໒] ຈ້າງຊ່າງໃຫ້ເຮັດວີໃບຕານ ວີຂົນປີກນົກຍູງ ແສ້ຈາມະຣີ
ຜ້າກອງນ້ຳ ພາຊະນະນ້ຳມັນ ໃຫ້ສົມຄວນ (ແກ່ສະມະນະບໍລິໂພກ)

[໑໓] ຈ້າງຊ່າງໃຫ້ເຮັດກ່ອງເຂັມ ຜ້າອັງສະ
ປະຄົດແອວ ແລະຕີນບາດ ເຊິ່ງເຮັດຢ່າງສວຍງາມ
ໃຫ້ສົມຄວນ (ແກ່ສະມະນະບໍລິໂພກ)

[໑໔] ໃຫ້ບັນຈຸເພສັດຈົນເຕັມພາຊະນະສຳລັບໃສ່ຂອງບໍລິໂພກ
ແລະບັນຈຸຂັນສຳຣິດໃຫ້ວາງໄວ້ພາຍໃຕ້ຮົ່ມ

[໑໕] ໃຫ້ບັນຈຸວ່ານນ້ຳ ຫຍ້າຄາ ຊະເອມ ດີປີ ພິກ ໝາກສົ້ມ ມໍ
ແລະຂີງສົດ ຈົນເຕັມພາຊະນະທຸກຢ່າງ

[໑໖] ຈ້າງຊ່າງໃຫ້ເຮັດເກີບ ຊຽງຕີນ
ຜ້າສໍາລັບເຊັດນໍ້າ ແລະໄມ້ກ້ານເທົ້າຄືນແກ່
ຢ່າງສວຍງາມ ໃຫ້ສົມຄວນ (ແກ່ສະມະນະບໍລິໂພກ)

[໑໗] ຈ້າງຊ່າງໃຫ້ເຮັດຢາຮັກສາໄຂ້ ຢາຢອດຕາ
ໄມ້ທາຢາຕາ ກະບອກກາອງນໍ້າ
ລູກກຸນແຈ ແລະກ່ອງລູກກຸນແຈ ເຊິ່ງຫຍິບດ້ວຍດ້າຍ ໕ ສີ

[໑໘] ສາຍໂຍກ ກະບອກເປົ່າຄວັນໄຟ ຕະກຽງຕັ້ງ
ຄືນໂທນໍ້າ ແລະຜະອົບ ໃຫ້ສົມຄວນ (ແກ່ສະມະນະບໍລິໂພກ)

[໑໙] ຈ້າງຊ່າງໃຫ້ເຮັດແໜບ ມີດຕັດ
ວັດຖຸຂັດຂີ້ມ້ຽງແລະຖົງສໍາລັບໃສ່ເພສັດ
ໃຫ້ສົມຄວນ (ແກ່ສະມະນະບໍລິໂພກ)

[໔໐] ຈ້າງຊ່າງໃຫ້ເຮັດຕັ່ງນອນ ຕັ່ງແລະບັນລັງ ໔ ຕີນ
ໃຫ້ສົມຄວນ (ແກ່ສະມະນະບໍລິໂພກ) ແລ້ວໃຫ້ຕັ້ງໄວ້ພາຍໃຕ້ຮົ່ມ

[໔໑] ຈ້າງຊ່າງໃຫ້ເຮັດຟູກຍັດດ້ວຍຂົນສັດ ຟູກຍັດດ້ວຍນຸ່ນ
ຟູກຕັ່ງແລະໝອນເຮັດຢ່າງດີ
ໃຫ້ສົມຄວນ (ແກ່ສະມະນະບໍລິໂພກ)

[໔໔] ຈ້າງຊ່າງໃຫ້ເຮັດຈຸນສໍາລັບອາບ
ຂີ້ເຜີ້ງ ນໍ້າມັນທີ່ທຸງດ້ວຍມື
ແລະຕຽງທີ່ປູດ້ວຍແຜ່ນແປ້ນນ້ອຍ ໆ
ອັນສະອາດພ້ອມດ້ວຍເຄື່ອງປູ

[໔໓] ເສນາສະນະ ຜ້າເຊັດຕີນ ບ່ອນນອນ
ບ່ອນນັ່ງ ໄມ້ກ້ານເທົ້າ ໄມ້ຖູແຂ້ວ
ກະເບື້ອງ ຂອງຫອມສໍາລັບລູບທາຫົວ

[໔໔] ໄມ້ສີໄຟ ຕັ່ງແຜ່ນແປ້ນ ຝາບາດ ຖົງບາດ
ກະບວຍຕັກນໍ້າ ເຄື່ອງອົບ (ສີຜົງຍ້ອມຜ້າ) ຮາງຍ້ອມຜ້າ

[໔໕] ໄມ້ປັດ ຜ້າອາບນໍ້າ ຜ້າອາບນໍ້າຝົນ
ຜ້ານິສີທະນະ ຜ້າອັດຝີ ຜ້າອັນຕະຣະວາສົກ (ຜ້ານຸ່ງ)

[໔໖] ຜ້າອຸດຕະຣາສົງ (ຜ້າຫົ່ມ) ຜ້າສັງຄາຕິ (ຜ້າປ່ຽງບ່າ)
ຢາບັດ ນ້ຳບ້ວນປາກ ນ້ຳສົ້ມ
ນ້ຳປາ ນ້ຳເຜິ້ງ ນົມສົ້ມ ນ້ຳປານະ

[໔໗] ຂີ້ເຜິ້ງ ຜ້າເກົ່າ ຜ້າເຊັດປາກ ດ້າຍ
ສິ່ງໃດຊື່ວ່າເປັນຂອງຄວນໃຫ້ທານມີຢູ່
ແລະສົມຄວນແກ່ພຣະສາດສະດາ

[໔໘] ຂ້າພະເຈົ້າຮິບໂຮມສິ່ງນັ້ນທັງໝົດໄດ້ແລ້ວ
ຈຶ່ງເຂົ້າເຝົ້າພຣະເຈົ້າອານົນ
ເມື່ອເຂົ້າເຝົ້າພຣະຣາຊາຜູ້ນຳໝູ່ຊົນ ຜູ້ມີພຣະຍົດຍິ່ງໃຫຍ່
ຖວາຍບັງຄົມດ້ວຍຂະໜ່ອມແລ້ວໄດ້ຂາບທູນຄຳນີ້ວ່າ

**(ການຂໍໂອກາດຖວາຍທານ)**

[໔໙] ເຮົາທັງ ໔ ຈະເລີນເຕີບໂຕມານຳກັນ ມີຍົດນຳກັນ
ຮ່ວມສຸກ ຮ່ວມທຸກ ແລະປະພຶດໄປຕາມກັນ

[໕໐] ຂໍເດຊະພຣະອົງຜູ້ຜາບປາມຂ້າເສິກ
ທຸກໃຈທີ່ກ່ຽວເນື່ອງກັບພຣະອົງຍັງມີຢູ່
ຂໍເດຊະພຣະອົງຜູ້ຂັດຕິຍະຣາດ ຖ້າພຣະອົງສາມາດ
ກໍຂໍໄດ້ຊົງພຣະກະລຸນາບັນເທົາທຸກນັ້ນດ້ວຍເທີ້ນ

[໕໑] ພຣະຣາຊາຕັດວ່າ
ທຸກຂອງທ່ານກໍເປັນທຸກຂອງຂ້າພະເຈົ້າດ້ວຍ
ເຮົາທັງ ໔ ມີໃຈກົງກັນ
ທ່ານຍ່ອມຮູ້ວ່າສຳເລັດ ຖ້າທ່ານຈະເພິ່ງປົດທຸກນັ້ນ

[໕໔] ຂໍເດຊະພຣະມະຫາຣາດ
ຂໍຈົ່ງຊົງຮູ້ທຸກຂອງຂ້າພຣະອົງ ເຊິ່ງບັນເທົາໄດ້ຍາກ
ພຣະອົງບັນລືໃຫຍ່ໂພດ
ຊັບນີ້ ພຣະອົງຍັງສະລະໄດ້ຍາກ

[໕໕] ຄືສິ່ງທີ່ມີຢູ່ໃນແວ່ນແຄວັນປະມານເທົ່າໃດ
ຊີວິດຂອງຂ້າພຣະອົງປະມານເທົ່າໃດ

ຖ້າພຣະອົງຕ້ອງການສິ່ງເຫຼົ່ານີ້
ຂ້າພຣະອົງກໍຈັກໃຫ້ຢ່າງບໍ່ຫວັ່ນໄຫວ

[໓໔] ຂໍເດຊະ ພຣະອົງຊົງບັນລືແລ້ວ
ການບັນລືໃຫຍ່ໂພດນັ້ນເປັນໂທດ
ຂ້າພຣະອົງຈັກຮູ້ພຣະອົງ
ວັນນີ້ ວ່າຊົງດຳຣົງຢູ່ໃນທຳທັງປວງ

[໓໕] ທ່ານບີບຄັ້ນຂ້າພະເຈົ້າຫຼາຍໂພດ
ເມື່ອຂ້າພະເຈົ້າຈະໃຫ້
ທ່ານຈະໄດ້ປະໂຫຍດອັນໃດຈາກການທີ່ຂ້າພະເຈົ້າຖືກບີບຄັ້ນ
ທ່ານປາຖະໜາສິ່ງໃດຈົ່ງບອກແກ່ຂ້າພະເຈົ້າ

[໓໖] ຂໍເດຊະພຣະມະຫາຣາດ
ຂ້າພຣະອົງປາຖະໜາພຣະພຸດທະເຈົ້າຜູ້ປະເສີດຍິ່ງ
ຂ້າພຣະອົງຈັກນິມົນພຣະສຳມາສຳພຸດທະເຈົ້າໃຫ້ສະເຫວີຍ
ຊີວິດຂອງຂ້າພຣະອົງຢ່າເປັນໂທດເລີຍ

[໓໗] ຂ້າພະເຈົ້າຈະໃຫ້ພອນແນວອື່ນແກ່ທ່ານ
ທ່ານຢ່າຂໍພຣະຕະຖາຄົດເຈົ້າເລີຍ
ພຣະພຸດທະເຈົ້າບໍ່ມີໃຜຈະໃຫ້ແກ່ຜູ້ໃດ ໄດ້
ປຽບເໝືອນແກ້ວມະນີໂຊຕິຣົດ

[໓໘] ຂໍເດຊະ ພຣະອົງຊົງບັນລືແລ້ວບໍ່ແມ່ນບໍ ແມ່ນວ່າຊີວິດທີ່ມີຢູ່ນີ້
ພຣະອົງກໍສາມາດປະທານໃຫ້ໄດ້
ກໍຄວນພຣະຣາດຊະທານພຣະຕະຖາຄົດເຈົ້າໄດ້

[໓໙] ພຣະພຸດທະຊິນມະຫາວີຣະເຈົ້າຄວນງົດໄວ້
ບໍ່ເພິ່ງໃຫ້ແກ່ຜູ້ໃດ ໄດ້
ເຮົາຮັບປາກໃຫ້ບໍ່ໄດ້
ທ່ານຈົ່ງເລືອກເອົາຊັບຈົນນັບບໍ່ຖ້ວນເທີ້ນ

[໔໐] ຂ້າພຣະອົງຈະຕ້ອງເຖິງການພິຈາລະນາ
ພວກເຮົາຈັກຖາມຜູ້ພິຈາລະນາ

ຜູ້ພິຈາລະນາຈັກຕັດສິນຢ່າງລະອຽດແນວໃດແລ້ວ
ພວກເຮົາຈັກສອບຖາມຂໍ້ນັ້ນສັນນັ້ນ

[໔໑] ຂ້າພະເຈົ້າຈັບພຣະຫັດພຣະຣາຊາ
ພາກັນໄປສູ່ສະຖານທີ່ພິຈາລະນາ
ໄດ້ກ່າວຄຳນີ້ຕໍ່ໜ້າຜູ້ພິພາກສາທັງຫຼາຍວ່າ

[໔໒] ຂໍຜູ້ພິພາກສາຈົ່ງຟັງຂ້າພະເຈົ້າ
ພຣະຣາຊາໄດ້ພຣະຣາດຊະທານພອນແກ່ຂ້າພະເຈົ້າ
ພຣະອົງບໍ່ຍົກເວັ້ນອັນໃດ ໆ ຍອມໃຫ້ໄດ້ແມ່ນວ່າຊີວິດ

[໔໓] ເມື່ອພຣະອົງພຣະຣາດຊະທານພອນແກ່ຂ້າພະເຈົ້າແລ້ວ
ຂ້າພະເຈົ້າຈຶ່ງຂໍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພຣະພຸດທະເຈົ້າເປັນອັນພຣະຣາຊາພຣະຣາດຊະທານ
ແກ່ຂ້າພະເຈົ້າດີແລ້ວບໍ່ແມ່ນບໍ
ທ່ານທັງຫຼາຍຈົ່ງຕັດຄວາມສົງໄສຂອງຂ້າພະເຈົ້າດ້ວຍເທີ້ນ

[໔໔] (ຜູ້ພິພາກສາທັງຫຼາຍກ່າວວ່າ)
ຂ້າພຣະອົງທັງຫຼາຍ
ຈະຟັງຄຳຂອງທ່ານແລະພຣະດຳຣັດຂອງພຣະຣາຊາ
ຜູ້ປົກຄອງແຜ່ນດິນ
ຂ້າພຣະອົງທັງຫຼາຍຟັງຄຳຂອງທັງ ໒ ຝ່າຍແລ້ວ
ຈັກຕັດຄວາມສົງໄສໃນຂໍ້ນີ້ໄດ້

[໔໕] ຂໍເດຊະ ພຣະອົງພຣະຣາດຊະທານທຸກສິ່ງ
ທ່ານຜູ້ນີ້ຖືເອົາທຸກສິ່ງແລ້ວບໍ ຂ້ານ້ອຍ
ພຣະອົງບໍ່ຍົກເວັ້ນອັນໃດ ໆ ຍອມໃຫ້ໄດ້ແມ່ນວ່າຊີວິດບໍ

[໔໖] (ພຣະຣາຊາຕັດວ່າ)
ເຮົາໄດ້ຮັບຄວາມລຳບາກ
ແສນສາຫັດຫຼາຍຈົນຮອດຊີວິດ
ຮູ້ວ່າຜູ້ນີ້ໄດ້ຮັບຄວາມທຸກຢ່າງໜັກ
ຈຶ່ງໄດ້ໃຫ້ສິ່ງຂອງທີ່ຄວນຖືເອົາໄວ້ໄດ້ທຸກຢ່າງ

[໔໗] ຂໍເດຊະ ພຣະອົງຊົງເປັນຜູ້ພ່າຍແພ້
ຄວນຈະພຣະຣາດຊະທານພຣະຕະຖາຄົດເຈົ້າໃຫ້ເຂົາໄປ
ຂ້າພຣະອົງທັງຫຼາຍຕັດຄວາມສົງໄສຂອງທັງ ໘ ຝ່າຍໄດ້ແລ້ວ
ຂໍທ່ານທັງ ໘ ຈົ່ງຕັ້ງຢູ່ໃນຄຳໝັ້ນສັນຍາເທີ້ນ

[໔໘] ພຣະຣາຊາປະທັບຢູ່ໃນບ່ອນນັ້ນແລ
ໄດ້ຕັດກັບຜູ້ພິພາກສາດັ່ງນີ້ວ່າ
ທ່ານທັງຫຼາຍເພິ່ງໃຫ້ແກ່ເຮົາໂດຍຊອບທຳດ້ວຍ
ເຮົາຈະໄດ້ພຣະພຸດທະເຈົ້າອີກ

[໔໙] (ຜູ້ພິພາກສາໄດ້ກ່າວກັບຂ້າພະເຈົ້າວ່າ)
ທ່ານທຳຄວາມດຳຣິຂອງທ່ານໃຫ້ບໍລິບູນ
ນິມົນພຣະຕະຖາຄົດເຈົ້າໃຫ້ສະເຫວີຍແລ້ວ
ເພິ່ງຖວາຍຄືນພຣະສຳມາສຳພຸດທະເຈົ້າ
ໃຫ້ແກ່ພຣະເຈົ້າອານົນຜູ້ຊົງຍົດອີກ

**(ກະຖາວ່າດ້ວຍການທູນນິມົນ)**

[໕໐] ຂ້າພະເຈົ້າໄຫວ້ຜູ້ພິພາກສາແລະຖວາຍບັງຄົມ
ພຣະເຈົ້າອານົນຈອມກະສັດແລ້ວ
ມີຄວາມຍິນດີປາໂມດ
ໄດ້ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ

[໕໑] ເມື່ອເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ
ຜູ້ຂ້າມໂອຄະກິເລດໄດ້ແລ້ວ ບໍ່ມີອາສະວະ
ຖວາຍອະພິວາດດ້ວຍຂະໜ່ອມແລ້ວ
ໄດ້ຂາບທູນດັ່ງນີ້ວ່າ

[໕໒] ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ຂໍພຣະອົງພ້ອມດ້ວຍພຣະອະຣະຫັນ ໑໐໐,໐໐໐ ອົງ ໂຜດຮັບນິມົນ
ພຣະອົງເມື່ອຈະທຳຈິດຂອງຂ້າພຣະອົງໃຫ້ຮ່າເຣີງ
ຂໍຈົ່ງສະເດັດເຂົ້າໄປສູ່ນິເວດຂອງຂ້າພຣະອົງດ້ວຍເທີ້ນ

[໕໓] ພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ

ຜູ້ມີພຣະຈັກຂຸ ຊົງຮູ້ຄວາມດໍາຣິຂອງຂ້າພະເຈົ້າ
ຈຶ່ງຊົງຮັບນິມົນ (ດ້ວຍດຸດສະນີພາບ)

[໕໔] ຂ້າພະເຈົ້າຮູ້ວ່າພຣະອົງຊົງຮັບນິມົນແລ້ວ
ຈຶ່ງຖວາຍອະພິວາດພຣະສາດສະດາ
ມີຈິດຮ່າເຣີງເບີກບານ
ເຂົ້າໄປສູ່ນິເວດຂອງຕົນ

**(ການກະກຽມທານ)**

[໕໕] ຂ້າພະເຈົ້າປະຊຸມມິດແລະອໍາມາດແລ້ວ
ໄດ້ກ່າວຄໍານີ້ວ່າ ເຮົາໄດ້ສິ່ງທີ່ໄດ້ແສນຍາກແລ້ວ
ປຽບເໝືອນໄດ້ແກ້ວມະນີ

[໕໖] ເຮົາຈັກບູຊາພຣະອົງດ້ວຍອັນໃດ
ພຣະຊິນນະເຈົ້າມີຄຸນຫາປະມານບໍ່ໄດ້
ຫາໃຜປຽບບໍ່ໄດ້ ບໍ່ມີໃຜທຽບເທົ່າ
ບໍ່ມີໃຜສະເໝີ ເປັນນັກປາດ
ບໍ່ມີບຸກຄົນປຽບໄດ້

[໕໗] ຫາຜູ້ສະເໝີເໝືອນຄືບໍ່ໄດ້
ບໍ່ເປັນທີ່ ໘ (ຮອງໃຜ) ຊົງອົງອາດກວ່ານໍຣະຊົນ
ອະທິການທີ່ສົມຄວນແກ່ພຣະພຸດທະເຈົ້າ ເຮົາເຮັດໄດ້ໂດຍຍາກ

[໕໘] ຂໍພວກເຮົາຈົ່ງຊ່ອຍກັນຮິບໂຮມດອກໄມ້ຕ່າງ ໆ
ມາເຮັດມົນດົບດອກໄມ້ເທີ້ນ
ນີ້ຍ່ອມສົມຄວນແກ່ພຣະພຸດທະເຈົ້າ
ຖືເປັນການບູຊາດ້ວຍສິ່ງທັງປວງ

[໕໙] ຂ້າພະເຈົ້າໃຊ້ດອກບົວຂາວ ດອກບົວຫຼວງ ດອກມະລິ
ດອກລໍາດວນ ດອກຈໍາປາ ດອກກາກະທິງ ເຮັດໃຫ້ເປັນມົນດົບ

[໖໐] ປູອາສະນະ ໑໐໐,໐໐໐ ໄວ້ໃຕ້ເງົາຮົ່ມ
ອາສະນະຂອງຂ້າພະເຈົ້າຢູ່ສຸດທ້າຍ ມີຄ່າເກີນຮ້ອຍ

[໖໑] ປູອາສະນະ ໑໐໐,໐໐໐ ໄວ້ໃຕ້ເງົາຮົ່ມ
ຈັດແຈງເຂົ້າແລະນ້ຳສຳເລັດແລ້ວໃຫ້ຄົນໄປຂາບທູນພັດຕະການ

**(ເວລາອັນສົມຄວນເພື່ອສັນພັດຕາຫານ)**

[໖໔] ເມື່ອຄົນໄປຂາບທູນພັດຕະການແລ້ວ
ພຣະມະຫາມຸນີພຣະນາມວ່າ ປະທຸມຸດຕະຣະ
ພ້ອມດ້ວຍພຣະອະຣະຫັນ ໑໐໐,໐໐໐ ອົງ
ໄດ້ສະເດັດເຂົ້າມາຍັງນິເວດຂອງຂ້າພະເຈົ້າ

[໖໓] ຮົ່ມກັ້ນຢູ່ເບື້ອງເທິງ ໃນມົນດົບດອກໄມ້ທີ່ບານສະພັ່ງ
ພຣະພຸດທະເຈົ້າຜູ້ເປັນບຸຣຸດຜູ້ສູງສຸດ
ປະທັບນັ່ງພ້ອມດ້ວຍພຣະອະຣະຫັນ ໑໐໐,໐໐໐ ອົງ

[໖໔] (ຂ້າພະເຈົ້າຂາບທູນວ່າ) ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ຂໍພຣະອົງໂຜດຊົງຮັບຮົ່ມ ໑໐໐,໐໐໐ ຄັນ
ແລະອາສະນະ ໑໐໐,໐໐໐ ບ່ອນ
ອັນສົມຄວນແລະບໍ່ມີໂທດເທີ້ນ

[໖໕] ພຣະມະຫາມຸນີຊົງພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ພຣະອົງປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ໃຫ້ຂ້າມພົ້ນ (ວັດຕະສົງສານ) ຈຶ່ງຊົງຮັບໄວ້

**(ທານະກະຖາ)**

[໖໖] ຂ້າພະເຈົ້າໄດ້ຖວາຍບາດແກ່ພິກຂຸອົງລະໜຶ່ງໜ່ວຍ
ພິກຂຸທັງຫຼາຍສະລະບາດທີ່ຕົນໃຊ້ສອຍແລ້ວ ໃຊ້ບາດເຫຼັກ
[໖໗] ພຣະພຸດທະເຈົ້າປະທັບນັ່ງຢູ່
ໃນມົນດົບດອກໄມ້ຕະຫຼອດ ໗ ວັນ ໗ ຄືນ
ເມື່ອຈະຊົງໃຫ້ສັດຈຳນວນຫຼາຍຕັດສະຣູ້
ຈຶ່ງຊົງປະກາດພຣະທຳມະຈັກ

[໖໘] ເມື່ອຊົງປະກາດພຣະທຳມະຈັກພາຍໃຕ້ມົນດົບດອກໄມ້
ເທວະດາແລະມະນຸດ ໘໔,໐໐໐ ໄດ້ບັນລຸທຳ

[໓໙] ເມື່ອເຖິງວັນທີ ໗ ພຣະມະຫາມຸນີພຣະນາມວ່າ ປະທຸມຸດຕະຣະ
ປະທັບນັ່ງຢູ່ພາຍໃນໃຕ້ເງົາຮົ່ມ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

**(ພະຍາກອນ)**

[໗໐] ເຮົາຈັກພະຍາກອນມານົບຜູ້ທີ່ໄດ້ຖວາຍທານຢ່າງປະເສີດ
ບໍ່ບົກຜ່ອງແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໗໑] ກອງທັບ ໔ ເຫຼົ່າ ຄື ພົນຊ້າງ ພົນມ້າ ພົນລົດ
ແລະພົນຍ່າງຈັກຫ້ອມລ້ອມມານົບນັ້ນເປັນນິດ
ນີ້ເປັນຜົນແຫ່ງທານທັງປວງ

[໗໘] ຍານພາຫະນະຄືຊ້າງ
ຍານພາຫະນະຄືມ້າ ຄານຫາມ ແລະວໍ
ຈັກບຳຣຸງເຂົາເປັນນິດ
ນີ້ເປັນຜົນແຫ່ງທານທັງປວງ

[໗໓] ລົດ ໖໐,໐໐໐ ຄັນປະດັບດ້ວຍເຄື່ອງອະລັງການທັງປວງ
ຈັກແວດລ້ອມເຂົາເປັນນິດ
ນີ້ເປັນຜົນແຫ່ງທານທັງປວງ

[໗໔] ເຄື່ອງດົນຕີ ໖໐,໐໐໐ ຢ່າງ
ກອງທີ່ປະດັບຕົກແຕ່ງຢ່າງສວຍງາມ
ຈັກຂັບກ່ອມເຂົາເປັນນິດ
ນີ້ເປັນຜົນແຫ່ງທານທັງປວງ

[໗໕] ສາວໄວລຸ້ນ ໘໖,໐໐໐ ນາງ
ຜູ້ປະດັບຕົກແຕ່ງຢ່າງສວຍງາມ
ສວມໃສ່ຜ້າອາພອນຢ່າງງົດງາມ ຫ້ອຍຕຸ້ມຫູແກ້ວມະນີ

[໗໖] ມີຕາມົນໃຫຍ່ ມີປົກກະຕິຮ່າເຣີງ ຮູບງາມ ແອວນ້ອຍ ແອວບາງ
ຈັກຫ້ອມລ້ອມເຂົາເປັນນິດ
ນີ້ເປັນຜົນແຫ່ງທານທັງປວງ

[໗໗] ເຂົາຈັກຮື່ນຣົມໃນເທວະໂລກ ໓໐,໐໐໐ ກັບ
ຈັກເປັນຈອມເທບຄອງເທວະສົມບັດ ໑,໐໐໐ ຊາດ

[໗໘] ແລະຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໗໙] ເມື່ອເຂົາຢູ່ໃນເທວະໂລກ
ພຽບພ້ອມດ້ວຍບຸນກຳ
ເທວະດາຈັກກັ້ງເສດຕະສັດແກ້ວໄວ້ທີ່ຂອບເທວະໂລກ

[໘໐] ເຂົາຈັກປາຖະໜາເມື່ອໃດ
ຫຼັງຄາຜ້າແລະດອກໄມ້ (ດັ່ງຈະ) ຮູ້ຄວາມຄິດຂອງເຂົາ
ຈັກກັ້ງຢູ່ເບື້ອງບົດເມື່ອນັ້ນ

[໘໑] ເຂົາຖືກກຸສົນມູນຕັກເຕືອນຈຸຕິຈາກເທວະໂລກ
ແລ້ວປະກອບດ້ວຍບຸນກຳ
ຈັກເປັນບຸດຂອງພາມ

[໘໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໘໓] ພຣະຜູ້ມີພຣະພາກເຈົ້າຜູ້ໂຄດົມສາກະຍະຜູ້ປະເສີດ
ຊົງຮູ້ຄວາມນັ້ນທັງໝົດແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸ
ຈັກຊົງຕັ້ງໄວ້ໃນເອຕະທັກຄະ

[໘໔] ເຂົາຈັກໄດ້ເປັນສາວົກມີນາມວ່າປີລິນທະວັດສະ ຂອງພຣະສາດສະດາ
ຈັກເປັນຜູ້ທີ່ເທວະດາ ອະສູນ ແລະຄົນທັນ ສັກກາຣະ

[໘໕] ເຂົາຈັກເປັນທີ່ຮັກຂອງພິກຂຸ ພິກຂຸນີ
ແລະຄະລິຫັດທັງປວງ ຢູ່ຢ່າງຜູ້ບໍ່ມີອາສະວະ

**(ວ່າດ້ວຍອານິສົງຂອງທານ)**

[໘໖] ກຳທີ່ຂ້າພະເຈົ້າເຮັດໄວ້ແລ້ວໃນ ໑໐໐,໐໐໐ ກັບ
ໄດ້ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບສຸດທ້າຍນີ້

ຂ້າພະເຈົ້າລຸດພົ້ນດີແລ້ວ
ເໝືອນຄວາມໄວຂອງລູກສອນທີ່ລຸດພົ້ນໄປຈາກຄັນທະນູ
ເຜົາກິເລດທັງຫຼາຍໄດ້ແລ້ວ

[໗໗] ກຳທີ່ໜ້າພໍໃຈ ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວ
ໃນເນື້ອນາບຸນອັນປະເສີດ
ເຊິ່ງເປັນຖານະທີ່ຂ້າພະເຈົ້າເຮັດສັກກາຣະໄວ້ແລ້ວ
ໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໗໘] ກໍມານົບໃດໄດ້ໃຫ້ທານຢ່າງປະເສີດບໍ່ບົກຜ່ອງ
ມານົບນັ້ນໄດ້ເປັນຫົວໜ້າຄົນທຳອິດ
ນີ້ເປັນຜົນແຫ່ງທານນັ້ນ

**(໑. ອານິສົງຂອງການຖວາຍຄັນຮົ່ມ)**

[໗໙] ຂ້າພະເຈົ້າໄດ້ຖວາຍຄັນຮົ່ມໃນພຣະສຸຄົດເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໘ ປະການ

[໙໐] ຄືຂ້າພະເຈົ້າບໍ່ຮູ້ສຶກໜາວ ໑ ບໍ່ຮູ້ສຶກຮ້ອນ ໑
ລະອອງແລະທຸລີບໍ່ແປດເປື້ອນ ໑ ເປັນຜູ້ບໍ່ມີອັນຕະລາຍ ໑
ບໍ່ມີສະໜຽດຈັງໄຮ ໑ ຊົນທັງຫຼາຍຢຳເກງທຸກເມື່ອ ໑

[໙໑] ເປັນຜູ້ມີຜິວພັນລະອຽດ ໑ ເປັນຜູ້ມີໃຈໃສສະອາດ ໑
ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບ
ເສດຕະສັດ ໑໐໐,໐໐໐ ຄັນ

[໙໒] ເຊິ່ງປະກອບດ້ວຍເຄື່ອງປະດັບທຸກຢ່າງ
ກັ້ງຢູ່ເໜືອຫົວຂອງຂ້າພະເຈົ້າ ຍົກເວັ້ນຊາດນີ້
ຍ້ອນອານຸພາບແຫ່ງກຳນັ້ນ

[໙໓] ຍ້ອນແນວນັ້ນ ໃນຊາດນີ້
ການກັ້ງເສດຕະສັດຈຶ່ງບໍ່ມີແກ່ຂ້າພະເຈົ້າ
ຂ້າພະເຈົ້າກະທຳກຳທຸກຢ່າງ
ກໍເພື່ອບັນລຸທຳຄືວິມຸດຕິ

## (໔. ອານິສົງຂອງການຖວາຍຜ້າ)

[໙໔] ຂ້າພະເຈົ້າໄດ້ຖວາຍຜ້າໃນພຣະສຸຄົດເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໗ ປະການ

[໙໕] ຄືຂ້າພະເຈົ້າເປັນຜູ້ມີຜິວພັນດັ່ງຄຳ ໑
ປາສະຈາກທຸລີ (ປາສະຈາກໄຝຝ້າ) ໑
ມີຣັດສະໝີຜ່ອງໃສ ໑ ມີຕະບະ ໑ ມີຮ່າງກາຍມີຜິວກ້ຽງເກົາ ໑
ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບ

[໙໖] ກໍມີຜ້າສີຂາວ ໑໐໐,໐໐໐ ຜືນ
ມີຜ້າສີເຫຼືອງ ໑໐໐,໐໐໐ ຜືນ
ມີຜ້າສີແດງ ໑໐໐,໐໐໐ ຜືນ
ກັ້ງຢູ່ເໜືອຫົວຂອງຂ້າພະເຈົ້າ
ນີ້ເປັນຜົນແຫ່ງການຖວາຍຜ້າ

[໙໗] ຂ້າພະເຈົ້າໄດ້ຜ້າໄໝ ຜ້າກຳພົນ ຜ້າປ່ານ
ແລະຜ້າຝ້າຍໃນທີ່ທຸກແຫ່ງ ຍ້ອນຜົນກຳເຫຼົ່ານັ້ນ

## (໕. ອານິສົງຂອງການຖວາຍບາດ)

[໙໘] ຂ້າພະເຈົ້າໄດ້ຖວາຍບາດໃນພຣະສຸຄົດເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໑໐ ປະການ

[໙໙] ຄືຂ້າພະເຈົ້າບໍລິໂພກໂພຊະນາຫານໃນພາຊະນະຄຳ
ພາຊະນະແກ້ວມະນີ ພາຊະນະເງິນ
ແລະພາຊະນະທີ່ເຮັດດ້ວຍທັບທິມ ທຸກຄັ້ງ ໑
[໑໐໐] ຂ້າພະເຈົ້າເປັນຜູ້ບໍ່ມີອັນຕະລາຍ ໑ ບໍ່ມີສະຫນຽດຈັງໄຣ ໑
ຊົນທັງຫຼາຍຢຳເກງທຸກເມື່ອ ໑
ເປັນຜູ້ໄດ້ເຂົ້າ ນ້ຳ ຜ້າ ແລະບ່ອນນອນ ເປັນປົກກະຕິ ໑

[໑໐໑] ໂພຄະສົມບັດຂອງຂ້າພະເຈົ້າບໍ່ພິນາດ ໑
ຂ້າພະເຈົ້າເປັນຜູ້ມີຈິດໝັ້ນຄົງ ໑

ເປັນຜູ້ຕ້ອງການທຳທຸກເມື່ອ ໑
ເປັນຜູ້ມີກິເລດໜ້ອຍ ໑ ບໍ່ມີອາສະວະ ໑

[໑໐໔] ຄຸນເຫຼົ່ານີ້ ຕິດຕາມຂ້າພະເຈົ້າໄປທັງໃນເທວະໂລກແລະມະນຸດໂລກ
ບໍ່ລະຂ້າພະເຈົ້າໃນທີ່ທຸກແຫ່ງ
ປຽບເໝືອນເງົາຕົ້ນໄມ້

**(໔. ອານິສົງຂອງການຖວາຍມີດ)**

[໑໐໖] ຂ້າພະເຈົ້າໄດ້ຖວາຍມີດນ້ອຍທີ່ເຮັດຢ່າງສວຍງາມ
ເນື່ອງດ້ວຍເຄື່ອງຜູກຢ່າງວິຈິດຈຳນວນຫຼາຍ
ແກ່ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດແລະແກ່ສົງແລ້ວ

[໑໐໔] ໄດ້ຮັບອານິສົງເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໗ ປະການ
ຄືຂ້າພະເຈົ້າເປັນຜູ້ກ້າ ໑
ເປັນຜູ້ບໍ່ມີຄວາມເດືອດຮ້ອນ ໑
ເຖິງຄວາມສຳເລັດໃນເວສາຣັດຊະທຳ ໑

[໑໐໕] ເປັນຜູ້ມີປັນຍາເຄື່ອງຊົງຈຳ ໑ ມີຄວາມພຽນ ໑
ປະຄອງໃຈໄວ້ໄດ້ທຸກເມື່ອ ໑
ໄດ້ຍານອັນສຸຂຸມເປັນເຄື່ອງຕັດກິເລດ ໑
ໄດ້ຄວາມບໍລິສຸດບໍ່ມີອັນໃດທຽມເທົ່າໃນທີ່ທັງປວງ ໑
ຍ້ອນຜົນກຳຂອງຂ້າພະເຈົ້ານັ້ນ

**(໕. ອານິສົງຂອງການຖວາຍມີດນ້ອຍ)**

[໑໐໖] ຂ້າພະເຈົ້າມີຈິດເຫຼື້ອມໃສໄດ້ຖວາຍມີດນ້ອຍອັນກ້ຽງມົນ ບໍ່ຫຍາບ
ຂັດຖູດີແລ້ວ ຈຳນວນຫຼາຍໃນພຣະພຸດທະເຈົ້າແລະໃນພຣະສົງແລ້ວ

[໑໐໗] ໄດ້ຮັບອານິສົງເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ
ຄືຂ້າພະເຈົ້າຍ່ອມໄດ້ກັນລະຍານະມິດ ໑ ຄວາມພຽນ ໑
ຂັນຕິ ໑ ອາວຸດຄືໄມຕີ ໑

[໑໐໗] ຍ້ອນຕັດລູກສອນຄືຕັນຫາ
ຈຶ່ງໄດ້ອາວຸດຄືປັນຍາອັນປະເສີດ

ແລະຍານທີ່ສະເໜີດ້ວຍເພັດ ໑
ຍ້ອນຜົນແຫ່ງກຳເຫຼົ່ານັ້ນ

**(ຝ. ອານິສົງຂອງການຖວາຍເຂັມ)**

[໑໐໙] ຂ້າພະເຈົ້າໄດ້ຖວາຍເຂັມໃນພຣະສຸຄົດເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໑໐] ຄືເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ເປັນຜູ້ທີ່ມະຫາຊົນນອບນ້ອມ ໑
ຕັດຄວາມສົງໄສໄດ້ ໑
ມີຮູບຮ່າງງົດງາມ ໑ ມີໂພຄະສົມບັດ ໑
ມີປັນຍາສະຫຼາດຫຼັກແຫຼມ ໑ ທຸກເມື່ອ

[໑໑໑] ຂ້າພະເຈົ້າພິຈາລະນາເຫັນອັດຖະ
ເຊິ່ງເປັນຖານະລະອຽດເລິກເຊິ່ງດ້ວຍຍານ
ຍານຂອງຂ້າພະເຈົ້າສະເໜີດ້ວຍຍອດເພັດ
ເປັນເຄື່ອງກຳຈັດຄວາມມືດ

**(ກ. ອານິສົງຂອງການຖວາຍມີດຕັດເລັບ)**

[໑໑໒] ຂ້າພະເຈົ້າໄດ້ຖວາຍມີດຕັດເລັບໃນພຣະສຸຄົດເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໑໓] ຄືຂ້າພະເຈົ້າຍ່ອມໄດ້ທາດຊາຍ ຍິງ ໑ ງົວແລະມ້າ ໑
ລູກຈ້າງທີ່ເປັນນາງຟ້ອນຮຳ ໑ ຊ່າງຕັດຜົມ ໑
ພໍ່ຄົວຜູ້ເຮັດອາຫານຈຳນວນຫຼາຍໃນທີ່ທັງປວງ ໑

**(ຕ. ອານິສົງຂອງການຖວາຍວີໃບຕານ)**

[໑໑໔] ຂ້າພະເຈົ້າໄດ້ຖວາຍວີໃບຕານສວຍງາມໃນພຣະສຸຄົດເຈົ້າແລ້ວ
ໄດ້ຮັບອານິສົງ ໗ ປະການ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ

[๑๑๕] ຄືຂ້າພະເຈົ້າບໍ່ຮູ້ສຶກໜາວຮ້ອນ ໑
ບໍ່ມີຄວາມຮ້ອນຮົນ ໑
ບໍ່ຮູ້ສຶກກະວົນກະວາຍ ທີ່ເຮັດຈິດຂອງຂ້າພະເຈົ້າໃຫ້ຮ້ອນຮົນ ໑

[๑๑๖] ໄຟທັງໝົດ ຄື ໄຟຄືຣາຄະ ໑ ໄຟຄືໂທສະ ໑
ໄຟຄືໂມຫະ ໑ ໄຟຄືມານະ ໑
ໄຟຄືທິດຖິ ໑ ຂ້າພະເຈົ້າດັບໄດ້ແລ້ວ
ຍ້ອນຜົນກຳຂອງຂ້າພະເຈົ້ານັ້ນ

**(๙. ອານິສົງຂອງການຖວາຍວິຂົນປີກນົກຍູງແລະແສ້ຈາມະຣີ)**

[๑๑๗] ຂ້າພະເຈົ້າໄດ້ຖວາຍວິຂົນປີກນົກຍູງແລະແສ້ຈາມະຣີໃນໝູ່ສົງ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດ
ເປັນຜູ້ມີກິເລດສະງົບຣະງັບແລ້ວຢູ່ຢ່າງຜູ້ບໍ່ມີກິເລດພຽງດັ່ງເນີນ

**(๑๐. ອານິສົງຂອງການຖວາຍຜ້າກອງນ້ຳຄືທຳມະກົກ)**

[๑๑๘] ຂ້າພະເຈົ້າໄດ້ຖວາຍຜ້າກອງນ້ຳຄືທຳມະກົກໃນພຣະສຸຄົດເຈົ້າແລ້ວ
ໄດ້ຮັບອານິສົງເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ๕ ປະການ

[๑๑๙] ຄືຂ້າພະເຈົ້າລ່ວງພົ້ນອັນຕະລາຍທັງປວງໄດ້ ໑ ໄດ້ອາຍຸທົບ ໑
ໂຈນຫຼືຂ້າເສິກຂົ່ມບໍ່ໄດ້ທຸກເມື່ອ ໑

[๑๒๐] ອາວຸດຫຼືຢາພິດບໍ່ບຽດບຽນຂ້າພະເຈົ້າ ໑
ບໍ່ມີຄວາມຕາຍໃນລະຫວ່າງ (ບໍ່ຕາຍກ່ອນອາຍຸໄຂ) ໑
ຍ້ອນຜົນແຫ່ງກຳເຫຼົ່ານັ້ນຂອງຂ້າພະເຈົ້າ

**(๑๑. ອານິສົງຂອງການຖວາຍພາຊະນະນ້ຳມັນ)**

[๑๒๑] ຂ້າພະເຈົ້າໄດ້ຖວາຍພາຊະນະນ້ຳມັນໃນພຣະສຸຄົດເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ๕ ປະການ

[๑๒๒] ຄືຂ້າພະເຈົ້າເປັນຜູ້ມີຮູບຮ່າງງົດງາມ ໑ ມີຄວາມຈະເລີນດີ ໑
ມີໃຈເບີກບານດີ ໑ ມີໃຈບໍ່ຟຸ້ງຊ່ານ ໑
ໄດ້ຮັບການຄຸ້ມຄອງໂດຍການອາຮັກຂາທັງປວງ ໑

## (໑໘. ອານິສົງຂອງການຖວາຍກ່ອງເຂັມ)

[໑໘໓] ຂ້າພະເຈົ້າໄດ້ຖວາຍກ່ອງເຂັມໃນພຣະສຸຄົດເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂ້າພະເຈົ້າ ໓ ປະການ

[໑໘໔] ຄືຂ້າພະເຈົ້າຍ່ອມໄດ້ຄຸນເຫຼົ່ານີ້ ຄື ຄວາມສຸກໃຈ ໑
ຄວາມສຸກກາຍ ໑ ຄວາມສຸກເກີດແຕ່ອິລິຍາບົດ ໑
ຍ້ອນຜົນແຫ່ງກຳນັ້ນ

## (໑໙. ອານິສົງຂອງການຖວາຍຜ້າອັງສະ)

[໑໘໕] ຂ້າພະເຈົ້າໄດ້ຖວາຍຜ້າອັງສະໃນພຣະຊິນນະເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໓ ປະການ

[໑໘໖] ຄືຂ້າພະເຈົ້າຍ່ອມໄດ້ຄວາມໝັ້ນຄົງໃນພຣະສັດທຳ ໑
ຣະລຶກຊາດໄດ້ ໑ ເປັນຜູ້ມີຜິວພັນງົດງາມໃນທີ່ທຸກແຫ່ງ ໑
ຍ້ອນຜົນແຫ່ງກຳນັ້ນ

## (໑໔. ອານິສົງຂອງການຖວາຍປະຄົດແອວ)

[໑໘໗] ຂ້າພະເຈົ້າໄດ້ຖວາຍປະຄົດແອວໃນພຣະຊິນນະເຈົ້າ
ແລະພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໖ ປະການ

[໑໘໘] ຄືຂ້າພະເຈົ້າຍ່ອມບໍ່ຫວັ່ນໃນສະມາທິ (ມີສະມາທິແນ່ວແນ່) ໑
ເປັນຜູ້ຊຳນານໃນສະມາທິ ໑
ມີບໍລິວານບໍ່ແຕກແຍກກັນ ໑
ມີຄຳເວົ້າທີ່ເຊື່ອຖືໄດ້ທຸກເມື່ອ ໑

[໑໘໙] ມີສະຕິຕັ້ງໝັ້ນ ໑ ບໍ່ມີຄວາມສະດຸ້ງຢ້ານ ໑
ຄຸນເຫຼົ່ານີ້ຕິດຕາມຂ້າພະເຈົ້າໄປທັງໃນເທວະໂລກແລະມະນຸດໂລກ

## (໑໕. ອານິສົງຂອງການຖວາຍຕີນບາດ)

[໑໓໐] ຂ້າພະເຈົ້າໄດ້ຖວາຍຕີນບາດໃນພຣະຊິນນະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດ
ເປັນຜູ້ບໍ່ມີໄພຍ້ອນວັນນະ ໕
ແລະບໍ່ຫວັ່ນໄຫວດ້ວຍອັນໃດ ໆ

[໑໓໑] ທຳເຫຼົ່າໃດເຫຼົ່າໜຶ່ງມີສະຕິ
ແລະຍານເປັນເຄື່ອງຕັດສະຣູ້ ຂ້າພະເຈົ້າຟັງແລ້ວ
ທຳທີ່ຂ້າພະເຈົ້າຊົງຈຳໄວ້ຍ່ອມບໍ່ຄາດເຄື່ອນ
ເປັນອັນພິຈາລະນາດີແລ້ວ

## (໑໖. ອານິສົງຂອງການຖວາຍພາຊະນະ)

[໑໓໒] ຂ້າພະເຈົ້າໄດ້ຖວາຍພາຊະນະສຳລັບໃສ່ຂອງບໍລິໂພກໃນພຣະພຸດທະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ສູງສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໓ ປະການ

[໑໓໓] ຄືຂ້າພະເຈົ້າຍ່ອມໄດ້ພາຊະນະຄຳ ພາຊະນະແກ້ວມະນີ
ພາຊະນະແກ້ວຜຼຶກ ແລະພາຊະນະແກ້ວທັບທິມ ໑

[໑໓໔] ໄດ້ພັນຣະຍາ ໄດ້ທາດຊາຍ ຍິງ ພົນຊ້າງ
ພົນມ້າ ພົນລົດ ພົນຍ່າງ
ແລະຍິງສາວຜູ້ເຄົາລົບນາຍ ໑
ໄດ້ເຄື່ອງບໍລິໂພກທຸກເວລາ ໑

[໑໓໕] ວິຊາໃນບົດມົນໃນອາຄົມຕ່າງ ໆ
ຈຳນວນຫຼາຍແລະສິລະປະທັງປວງ
ຂ້າພະເຈົ້າຍ່ອມພິຈາຣະນາໃຫ້ເປັນທີ່ໃຊ້ສອຍໄດ້ທຸກເວລາ

## (໑໗. ອານິສົງຂອງການຖວາຍຂັນ)

[໑໓໖] ຂ້າພະເຈົ້າໄດ້ຖວາຍຂັນໃນພຣະສຸຄົດເຈົ້າ
ແລະໃນໝູ່ສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໓ ປະການ

[໑໗໗] ຄືຂ້າພະເຈົ້າຍ່ອມໄດ້ຂັນຄຳ ຂັນແກ້ວມະນີ
ຂັນແກ້ວຜລຶກ ແລະຂັນແກ້ວທັບທິມ ໑

[໑໗໘] ຂ້າພະເຈົ້າໄດ້ຂັນຮູບຕົ້ນໂພ ຮູບໝາກໄມ້
ຮູບໃບບົວ ແລະຫອຍສັງສຳລັບດື່ມນ້ຳເຜີ້ງ ໑

[໑໗໙] ຂ້າພະເຈົ້າຍ່ອມໄດ້ຂໍ້ປະຕິບັດໃນຂໍ້ວັດອັນງາມ
ໃນອາຈາຣະແລະກິຣິຍາ ໑
ຂ້າພະເຈົ້າໄດ້ຄຸນເຫຼົ່ານີ້
ຍ້ອນຜົນແຫ່ງກຳນັ້ນ

**(໑໘. ອານິສົງຂອງການຖວາຍເພສັດ)**

[໑໘໐] ຂ້າພະເຈົ້າໄດ້ຖວາຍເພສັດໃນພຣະສຸຄົດເຈົ້າ
ແລະໃນໝູ່ສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໑໐ ປະການ

[໑໘໑] ຄືຂ້າພະເຈົ້າເປັນຜູ້ມີອາຍຸຍືນ ໑ ມີກຳລັງ ໑
ເປັນນັກປາດ ໑ ມີວັນນະ ໑
ມີຍົດ ໑ ມີສຸກ ໑ ບໍ່ມີອັນຕະລາຍ ໑
ບໍ່ມີສະໜຽດຈັງໄຮ ໑ ຊົນທັງຫຼາຍຢຳເກງທຸກເມື່ອ ໑
ບໍ່ມີຄວາມພັດພາກຈາກສິ່ງເປັນທີ່ຮັກ ໑
ຍ້ອນຜົນແຫ່ງກຳຂອງຂ້າພະເຈົ້ານັ້ນ

**(໑໙. ອານິສົງຂອງການຖວາຍເກີບ)**

[໑໘໒] ຂ້າພະເຈົ້າໄດ້ຖວາຍເກີບໃນພຣະຊິນນະເຈົ້າ
ແລະໃນໝູ່ສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໘໓] ຄືຍານ ຄືຊ້າງ ຍານຄືມ້າ
ວໍ ແລະຄານຫາມ ໑
ລົດ ໖໐,໐໐໐ ຄັນແວດລ້ອມຂ້າພະເຈົ້າທຸກເມື່ອ ໑

[໑໘໔] ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບ ເກີບແກ້ວມະນີ

ເກີບທອງແດງ ເກີບຄຳ
ເກີບເງິນ ຜຸດຂື້ນຮອງຮັບທຸກກ້າວຍ່າງ ໑

[໑໔໕] ບຸນກຳທັງຫຼາຍຍ່ອມຊ່ອຍຊຳຣະອາຈາຣະຄຸນໃຫ້ສະອາດແນ່ນອນ
ຂ້າພະເຈົ້າໄດ້ຄຸນເຫຼົ່ານີ້ຍ້ອນຜົນແຫ່ງກຳນັ້ນ

## (໔໐. ອານິສົງຂອງການຖວາຍຊຽງຕີນ)

[໑໔໖] ຂ້າພະເຈົ້າໄດ້ຖວາຍຊຽງຕີນໃນພຣະສຸຄົດເຈົ້າ
ແລະໃນໝູ່ສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ສວມຊຽງຕີນ
ເຊິ່ງສຳເລັດດ້ວຍລິດແລ້ວຢູ່ໄດ້ຕາມປາຖະໜາ

## (໔໑. ອານິສົງຂອງການຖວາຍຜ້າເຊັດນ້ຳ)

[໑໔໗] ຂ້າພະເຈົ້າໄດ້ຖວາຍຜ້າເຊັດນ້ຳໃນພຣະສຸຄົດເຈົ້າ
ແລະໃນໝູ່ສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໔໘] ຄືຂ້າພະເຈົ້າເປັນຜູ້ມີຜິວພັນເໝືອນຄຳປາສະຈາກທຸລີ ໑
ມີຮັດສະໝີຜ່ອງໃສ ໑ ມີຕະບະ ໑ ຮ່າງກາຍມີຜິວກ້ຽງເກົາ ໑
ຝຸ່ນລະອອງບໍ່ຕິດຮ່າງກາຍຂ້າພະເຈົ້າ ໑
ຂ້າພະເຈົ້າໄດ້ຄຸນເຫຼົ່ານີ້ຍ້ອນຜົນແຫ່ງກຳນັ້ນ

## (໔໒. ອານິສົງຂອງການຖວາຍໄມ້ກ້ານເທົ້າ)

[໑໔໙] ຂ້າພະເຈົ້າໄດ້ຖວາຍໄມ້ກ້ານເທົ້າໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໕໐] ຄືຂ້າພະເຈົ້າມີບຸດຫຼາຍ ໑ ບໍ່ມີຄວາມສະດຸ້ງຢ້ານ ໑
ໄດ້ຮັບການຄຸ້ມຄອງໂດຍການອາຮັກຂາທັງປວງ
ຜູ້ໃດ ຂົ່ມບໍ່ໄດ້ທຸກເມື່ອ ໑
ບໍ່ຮູ້ຈັກຄວາມພັ້ງພາດ ໑ ມີໃຈບໍ່ຟຸ້ງຊ່ານ ໑ກ

## (๘๓. ອານິສົງຂອງການຖວາຍຢາຮັກສາໄຂ້ແລະຢາຢອດຕາ)

[๑๕๑] ຂ້າພະເຈົ້າໄດ້ຖວາຍຢາຮັກສາໄຂ້ແລະຢາຢອດຕາ (ໃນພຣະສຸຄົດເຈົ້າ)
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ๗ ປະການ

[๑๕๒] ຄື ຂ້າພະເຈົ້າເປັນຜູ້ມີໃບຕາໃຫຍ່ ๑
ມີໃບຕາສີຂາວ ๑ ມີໃບຕາສີເຫຼືອງ ๑
ມີໃບຕາສີແດງ ๑ ມີໃບຕາແຈ່ມໃສບໍ່ມົວ ๑
ປາສະຈາກໂຣກຕາໂດຍປະການທັງປວງ ๑

[๑๕๓] ມີຕາທິບ ๑ ມີດວງຕາຄືປັນຍາຢ່າງສູງສຸດ ๑
ຂ້າພະເຈົ້າໄດ້ຄຸນເຫຼົ່ານີ້ຍ້ອນຜົນແຫ່ງກຳນັ້ນ

## (๘๔. ອານິສົງຂອງການຖວາຍລູກກຸນແຈ)

[๑๕๔] ຂ້າພະເຈົ້າໄດ້ຖວາຍລູກກຸນແຈໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວ
ໄດ້ລູກກຸນແຈຄືຍານສຳລັບເປີດປະຕູແຫ່ງທຳ

## (๘๕. ອານິສົງຂອງການຖວາຍແມ່ກຸນແຈ)

[๑๕๕] ຂ້າພະເຈົ້າໄດ້ຖວາຍແມ່ກຸນແຈ (ໃນພຣະສຸຄົດເຈົ້າ)
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ๘ ປະການ
ຄືເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບ
ເປັນຄົນມີຄວາມໂກດໜ້ອຍ ๑ ບໍ່ມີຄວາມຄັບແຄ້ນໃຈ ๑

## (๘๖. ອານິສົງຂອງການຖວາຍສາຍໂຍກ)

[๑๕๖] ຂ້າພະເຈົ້າໄດ້ຖວາຍສາຍໂຍກໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ๕ ປະການ

[๑๕๗] ຄືຂ້າພະເຈົ້າຍ່ອມບໍ່ຫວັ່ນໄຫວໃນສະມາທິ ๑
ເປັນຜູ້ຊຳນານໃນສະມາທິ ๑

ມີບໍລິວານບໍ່ແຕກແຍກກັນ ໑
ມີຄຳເວົ້າທີ່ເຊື່ອຖືໄດ້ທຸກເມື່ອ ໑
ໂພຄະສົມບັດຍ່ອມເກີດເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບ ໑

**(໔ກ. ອານິສົງຂອງການຖວາຍກະບອກເປົ່າຄວັນໄຟ)**

[໑໕໗] ຂ້າພະເຈົ້າໄດ້ຖວາຍກະບອກເປົ່າຄວັນໄຟໃນພຣະຊິນນະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໓ ປະການ

[໑໕໘] ຄືຂ້າພະເຈົ້າມີສະຕິຕັ້ງໝັ້ນ ໑
ເສັ້ນເອັນຕິດຈອດກັນດີ ໑
ໄດ້ບ່ອນນອນທິບ ໑ ຍ້ອນຜົນແຫ່ງກຳນັ້ນ

**(໔໗. ອານິສົງຂອງການຖວາຍຕະກຽງ)**

[໑໖໐] ຂ້າພະເຈົ້າໄດ້ຖວາຍຕະກຽງໃນພຣະຊິນນະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໓ ປະການ

[໑໖໑] ຄືຂ້າພະເຈົ້າເປັນຜູ້ມີຕະກູນ ໑ ມີອະໄວຍະວະສົມບູນ ໑
ມີປັນຍາທີ່ພຣະພຸດທະເຈົ້າສັນເສີນ ໑
ຂ້າພະເຈົ້າໄດ້ຄຸນເຫຼົ່ານີ້ຍ້ອນຜົນແຫ່ງກຳຂອງຂ້າພະເຈົ້ານັ້ນ

**(໔໘. ອານິສົງຂອງການຖວາຍຄົນໂທນ້ຳແລະຜະອົບ)**

[໑໖໔] ຂ້າພະເຈົ້າໄດ້ຖວາຍຄົນໂທນ້ຳແລະຜະອົບໃນພຣະພຸດທະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໑໐ ປະການ

[໑໖໓] ຄືດັ່ງນັ້ນ ຂ້າພະເຈົ້າເປັນຜູ້ໄດ້ຮັບການຄຸ້ມຄອງ ໑
ພຽບພ້ອມດ້ວຍຄວາມສຸກ ໑
ມີຍົດຍິ່ງໃຫຍ່ ໑ ມີການດຳເນີນຊີວິດທີ່ດີ ໑
ມີຮ່າງກາຍທີ່ໄດ້ສັດສ່ວນ ໑
ເປັນສຸຂຸມາລະຊາດ ໑ ປາສະຈາກສະໝຽດຈັງໄຮທັງປວງ ໑

[໑໗໔] ໄດ້ຄຸນອັນໄພບູນ ໑
ໄດ້ຮັບການຍົກຍ້ອງນັບຖືຢ່າງໝັ້ນຄົງ
ປາສະຈາກຄວາມຫວາດສຽວ ໑
[໑໗໕] ໄດ້ຄົນໂທນ້ຳແລະຜະອົບ ໔ ສີ ແລະຊ້າງແກ້ວ ມ້າແກ້ວ ໑
ຄຸນຂອງຂ້າພະເຈົ້າເຫຼົ່ານັ້ນບໍ່ພິນາດ
ນີ້ເປັນຜົນໃນການຖວາຍຄົນໂທນ້ຳແລະຜະອົບ

**(໓໐. ອານິສົງຂອງການຖວາຍວັດຖຸຂັດຂີ້ມ້ຽງ)**

[໑໗໖] ຂ້າພະເຈົ້າໄດ້ຖວາຍແປງມືໃນພຣະພຸດທະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ
[໑໗໗] ຄືຂ້າພະເຈົ້າເປັນຜູ້ເຖິງພ້ອມດ້ວຍລັກສະນະທັງປວງ ໑
ມີອາຍຸຍືນ ໑ ມີປັນຍາ ໑ ມີຈິດຕັ້ງໝັ້ນ ໑
ມີຮ່າງກາຍພົ້ນຈາກຄວາມຍາກລຳບາກ
ທຸກຢ່າງໃນການທຸກເມື່ອ ໑

**(໓໑. ອານິສົງຂອງການຖວາຍມີດຕັດ)**

[໑໗໘] ຂ້າພະເຈົ້າໄດ້ຖວາຍມີດຕັດທີ່ມີຄົມບາງເຊິ່ງຝົນໄວ້ດີໃນພຣະສົງ
ແລ້ວໄດ້ຍານເປັນເຄື່ອງຕັດກິເລດ
ເຊິ່ງບໍລິສຸດບໍ່ມີອັນໃດປຽບປານ

**(໓໒. ອານິສົງຂອງການຖວາຍແໜບ)**

[໑໗໙] ຂ້າພະເຈົ້າໄດ້ຖວາຍແໜບໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດ
ຍ່ອມໄດ້ຍານເປັນເຄື່ອງຖອນກິເລດ
ເຊິ່ງບໍລິສຸດບໍ່ມີອັນໃດທຽບເທົ່າ

**(໓໓. ອານິສົງຂອງການຖວາຍຢານັດ)**

[໑໘໐] ຂ້າພະເຈົ້າໄດ້ຖວາຍຢານັດໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໘ ປະການ

[໑໗໑] ຄືຂ້າພະເຈົ້າມີສັດທາ ໑ ມີສີນ ໑ ມີຫິຣິ ໑
ມີໂອດຕັບປະ ໑ ມີສຸຕະ ໑
ມີຈາຄະ ໑ ມີຂັນຕິ ໑ ມີປັນຍາ ໑

**(໓໔. ອານິສົງຂອງການຖວາຍຕັ່ງ)**

[໑໗໒] ຂ້າພະເຈົ້າໄດ້ຖວາຍຕັ່ງໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໗໓] ຄືຂ້າພະເຈົ້າຍ່ອມເກີດໃນຕະກູນສູງ ເປັນຜູ້ມີໂພຄະສົມບັດຫຼາຍ ໑
ຊົນທັງປວງຢຳເກງຂ້າພະເຈົ້າ ໑
ຊື່ສຽງຂອງຂ້າພະເຈົ້າຟຸ້ງຂະຈອນໄປ ໑

[໑໗໔] ບັນລັງສີ່ຫຼ່ຽມຈະຕຸລັດ ຍ່ອມຫ້ອມລ້ອມຂ້າພະເຈົ້າເປັນນິດ
ຕະຫຼອດ ໑໐໐,໐໐໐ ກັບ ໑ ຍິນດີໃນການຈຳແນກທານ ໑

**(໓໕. ອານິສົງຂອງການຖວາຍຟູກ)**

[໑໗໕] ຂ້າພະເຈົ້າໄດ້ຖວາຍຟູກໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໖ ປະການ

[໑໗໖] ຄືຂ້າພະເຈົ້າມີຮ່າງກາຍສົມສ່ວນທີ່ບຸນກຳກໍ່ໃຫ້
ເປັນຜູ້ອ່ອນໂຍນ ມີຮູບງາມ ໜ້າເບິ່ງ ໑
ຂ້າພະເຈົ້າຍ່ອມໄດ້ຍານອັນປະເສີດ ໑
ນີ້ເປັນຜົນແຫ່ງການຖວາຍຟູກ

[໑໗໗] ຂ້າພະເຈົ້າຍ່ອມໄດ້ຟູກທີ່ຍັດດ້ວຍນຸ່ນ
ອັນວິຈິດດ້ວຍຮູບສັດຕ່າງ ໆ ມີຮູບຣາດຊະສີ
ແລະເສືອໂຄ່ງເປັນຕົ້ນ ດ້ວຍຜ້າໄໝ
ແກມດິ້ນທີ່ປັກເພັດພອຍ ໑
ຜ້າປ່ານຢ່າງດີ ແລະຜ້າກຳພົນຕ່າງ ໆ ຈຳນວນຫຼາຍ ໑

[໑໗໘] ໄດ້ຜ້າປາວານທີ່ມີຂົນອ່ອນນຸ້ມ

ຜ້າເຮັດດ້ວຍຂົນສັດອ່ອນນຸ້ມໃນທີ່ຕ່າງ ໆ ໑
ນີ້ເປັນຜົນແຫ່ງການຖວາຍຟູກ

[໑໗໙] ເມື່ອໃດຂ້າພະເຈົ້າຣະລຶກເຖິງຕົນ
ເມື່ອໃດຂ້າພະເຈົ້າເປັນຜູ້ຮູ້ດ່ຽງສາ
ເມື່ອນັ້ນຂ້າພະເຈົ້າເປັນຜູ້ບໍ່ເປົ່າວ່າງ ມີຊານເປັນຕຽງນອນ ໑
ນີ້ເປັນຜົນແຫ່ງການຖວາຍຟູກ

**(໓໖. ອານິສົງຂອງການຖວາຍໝອນ)**

[໑໘໐] ຂ້າພະເຈົ້າໄດ້ຖວາຍໝອນໃນພຣະຊິນນະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໖ ປະການ

[໑໘໑] ຄືຂ້າພະເຈົ້າໃຊ້ໝອນທີ່ຍັດດ້ວຍຂົນສັດ
ໝອນທີ່ຍັດດ້ວຍເກສອນບົວຫຼວງ
ແລະໝອນທີ່ຍັດດ້ວຍຈຸນຈັນແດງ
ໝຸນຫົວຂອງຂ້າພະເຈົ້າທຸກເມື່ອ ໑

[໑໘໒] ຂ້າພະເຈົ້າເຮັດຍານໃຫ້ເກີດໃນອັດຖັງຄິກະມັກຢ່າງປະເສີດ
ແລະໃນສາມັນຍະຜົນ ໔ ເຫຼົ່ານັ້ນ ຢູ່ຕະຫຼອດການເປັນນິດ ໑

[໑໘໓] ຂ້າພະເຈົ້າເຮັດຍານໃຫ້ເກີດໃນທານ
ທະມະ ສັນຍະມະ ອັບປະມັນຍາ
ແລະຮູບຊານເຫຼົ່ານັ້ນ ຢູ່ຕະຫຼອດການທັງປວງ ໑

[໑໘໔] ຂ້າພະເຈົ້າເຮັດຍານໃຫ້ເກີດໃນຂໍ້ວັດ ຄຸນການປະຕິບັດ
ອາຈາຣະແລະກິຣິຍາ ຢູ່ຕະຫຼອດການທັງປວງ ໑

[໑໘໕] ຂ້າພະເຈົ້າເຮັດຍານໃຫ້ເກີດໃນການຈົງກົມ
ໃນຄວາມພຽນທີ່ເປັນປະທານ
ແລະໃນໂພທິປັກຂິຍະທຳເຫຼົ່ານັ້ນ ຢູ່ຕາມປາຖະໜາ ໑

[໑໘໖] ຂ້າພະເຈົ້າເຮັດຍານໃຫ້ເກີດໃນສີນ ສະມາທິ ປັນຍາ ວິມຸດຕິ
ແລະໃນວິມຸດຕິຍານທັດສະນະເຫຼົ່ານັ້ນແລ້ວ ຢູ່ເປັນສຸກ ໑

**(໓໗. ອານິສົງຂອງການຖວາຍຕັ່ງແຜ່ນແປ້ນ)**

[໑໗໗]  ຂ້າພະເຈົ້າໄດ້ຖວາຍຕັ່ງແຜ່ນແປ້ນໃນພຣະຊິນນະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໔ ປະການ

[໑໗໘]  ຄືຂ້າພະເຈົ້າໄດ້ບັນລັງຢ່າງປະເສີດ
ເຮັດດ້ວຍຄຳ ເຮັດດ້ວຍແກ້ວມະນີ ໑
ແລະເຮັດດ້ວຍງາຊ້າງຈຳນວນຫຼາຍ ໑
ນີ້ເປັນຜົນແຫ່ງການຖວາຍຕັ່ງແຜ່ນແປ້ນ

**(໓໘. ອານິສົງຂອງການຖວາຍຕັ່ງວາງຕີນ)**

[໑໗໙]  ຂ້າພະເຈົ້າໄດ້ຖວາຍຕັ່ງວາງຕີນໃນພຣະຊິນນະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໔ ປະການ
ຄືຂ້າພະເຈົ້າຍ່ອມໄດ້ຍານພາຫະນະຈຳນວນຫຼາຍ ໑
ນີ້ເປັນຜົນແຫ່ງການຖວາຍຕັ່ງວາງຕີນ

[໑໘໐]  ທາດຍິງຊາຍ ພັນລະຍາ ແລະຄົນຜູ້ອາໄສເຫຼົ່າອື່ນ
ບຳຣຸງປົນນິບັດຂ້າພະເຈົ້າໂດຍຊອບ ໑
ນີ້ເປັນຜົນແຫ່ງການຖວາຍຕັ່ງວາງຕີນ

**(໓໙. ອານິສົງຂອງການຖວາຍນ້ຳມັນທາຕີນ)**

[໑໘໑]  ຂ້າພະເຈົ້າໄດ້ຖວາຍນ້ຳມັນທາຕີນ (ໃນພຣະຊິນນະເຈົ້າ)
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໘໔]  ຄືຂ້າພະເຈົ້າບໍ່ມີຄວາມເຈັບໄຂ້ ໑ ມີຣູບງາມ ໑
ມີເສັ້ນປະສາດຮັບຣົດໄດ້ໄວ ໑ ໄດ້ເຂົ້າແລະນ້ຳ ໑
ມີອາຍຸຍືນເປັນຄຳຣົບ ໕

**(໔໐. ອານິສົງຂອງການຖວາຍເນີຍໃສແລະນ້ຳມັນ)**

[໑໘໓]  ຂ້າພະເຈົ້າໄດ້ຖວາຍເນີຍໃສແລະນ້ຳມັນ (ໃນພຣະຊິນນະເຈົ້າ)

ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໘໔] ຄືຂ້າພະເຈົ້າເປັນຄົນມີກຳລັງແຂງແຮງ ໑
ມີຮ່າງກາຍສົມບູນ ໑
ເປັນຄົນຮ່າເຣີງທຸກເມື່ອ ໑ ມີບຸດໄດ້ທຸກເມື່ອ ໑
ແລະເປັນຄົນບໍ່ເຈັບໄຂ້ທຸກເມື່ອ ໑
ນີ້ເປັນຜົນແຫ່ງການຖວາຍເນີຍໃສແລະນໍ້າມັນ

## (໔໑. ອານິສົງຂອງການຖວາຍນໍ້າບ້ວນປາກ)

[໑໘໕] ຂ້າພະເຈົ້າໄດ້ຖວາຍນໍ້າບ້ວນປາກ (ໃນພຣະຊິນນະເຈົ້າ)
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໕ ປະການ

[໑໘໖] ຄືຂ້າພະເຈົ້າເປັນຜູ້ມີລຳຄໍບໍລິສຸດ ໑ ມີສຽງມ່ວນ ໑
ປາສະຈາກໂຣກໄອ ໑ ປາສະຈາກໂຣກຫືດ ໑
ກິ່ນດອກອຸບົນຟຸ້ງອອກຈາກປາກຂອງຂ້າພະເຈົ້າທຸກເມື່ອ ໑

## (໔໒. ອານິສົງຂອງການຖວາຍນົມສົ້ມ)

[໑໘໗] ຂ້າພະເຈົ້າໄດ້ຖວາຍນົມສົ້ມຢ່າງດີໃນພຣະພຸດທະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດ
ໄດ້ບໍລິໂພກອະມະຕະພັດຄືກາຍະຄະຕາສະຕິອັນປະເສີດ

## (໔໓. ອານິສົງຂອງການຖວາຍນໍ້າເຜີ້ງ)

[໑໘໘] ຂ້າພະເຈົ້າໄດ້ຖວາຍນໍ້າເຜີ້ງທີ່ມີສີກິ່ນແລະຣົດໃນພຣະຊິນນະເຈົ້າ
ແລະໃນໝູ່ສົງຜູ້ປະເສີດສຸດແລ້ວ
ໄດ້ວິມຸດຕິຣົດທີ່ບໍ່ມີຣົດອື່ນປຽບປານໄດ້ ບໍ່ເປັນຢ່າງອື່ນ

## (໔໔. ອານິສົງຂອງການຖວາຍຣົດ)

[໑໘໙] ຂ້າພະເຈົ້າໄດ້ຖວາຍຣົດຕາມເປັນຈິງໃນພຣະພຸດທະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບຜົນ ໔ ປະການ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ

## (໘໕. ອານິສົງຂອງການຖວາຍເຂົ້າແລະນ້ຳ)

[໔໐໐] ຂ້າພະເຈົ້າໄດ້ຖວາຍເຂົ້າແລະນ້ຳໃນພຣະພຸດທະເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໑໐ ປະການ

[໔໐໑] ຄືຂ້າພະເຈົ້າເປັນຜູ້ມີອາຍຸຍືນ ໑ ມີກຳລັງ ໑
ເປັນນັກປາດ ໑ ມີວັນນະສວຍງາມ ໑
ມີຍົດ ໑ ມີສຸກ ໑ ເປັນຜູ້ໄດ້ເຂົ້າ ໑ ເປັນຜູ້ໄດ້ນ້ຳ ໑
ເປັນຄົນກ້າ ໑ ເປັນຜູ້ມີປັນຍາ ໑
ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບ ໄດ້ຄຸນເຫຼົ່ານີ້

## (໘໙. ອານິສົງຂອງການຖວາຍທູບ)

[໔໐໔] ຂ້າພະເຈົ້າໄດ້ຖວາຍທູບໃນພຣະສຸຄົດເຈົ້າ
ແລະໃນພຣະສົງເຊິ່ງເປັນໝູ່ຄະນະທີ່ປະເສີດສຸດແລ້ວໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໑໐ ປະການ

[໔໐໓] ຄືເປັນຜູ້ມີກິ່ນໂຕຫອມຟຸ້ງ ໑ ມີຍົດ ໑
ມີປັນຍາໄວ ໑ ມີຊື່ສຽງ ໑
ມີປັນຍາແຫຼມຄົມ ໑ ມີປັນຍາກວ້າງຂວາງ ໑
ມີປັນຍາຮ່າເຣີງ ໑ ມີປັນຍາເລິກເຊິ່ງ ໑

[໔໐໘] ມີປັນຍາໄພບູນ ໑ ມີປັນຍາແລ່ນໄດ້ໄວ ໑
ຍ້ອນຜົນແຫ່ງການຖວາຍທູບນັ້ນ
ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ໄດ້ບັນລຸນິບພານເຊິ່ງເປັນສັນຕິສຸກ ໃນການບັດນີ້

## (ອານິສົງທົ່ວ ໆ ໄປ)

[໔໐໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐໖] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໐໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປີລິນທະວັດສະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປີລິນທະວັດສະເຖຣາປະທານທີ ໑ ຈົບ**

## ໒. ເສລະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເສລະເຖຣະ

(ພຣະເສລະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐໘] ຂ້າພະເຈົ້າເປັນເຈົ້າຂອງຖະໜົນຢູ່ໃນນະຄອນຫົງສະວະດີ
ຮຽກປະຊຸມບັນດາຍາດຕິພີ່ນ້ອງຂອງຕົນແລ້ວ ໄດ້ກ່າວດັ່ງນີ້ວ່າ

[໔໐໙] ພຣະພຸດທະເຈົ້າສະເດັດອຸບັດຂຶ້ນແລ້ວໃນໂລກ
ເປັນນາບຸນອັນປະເສີດ
ພຣະອົງເປັນຜູ້ສົມຄວນຮັບເຄື່ອງບູຊາຂອງຊາວໂລກທັງປວງ

[໔໑໐] ກະສັດກໍດີ ຊາວນິຄົມກໍດີ ພາມມະນະມະຫາສານກໍດີ
ລ້ວນມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍ

[໔໑໑] ພົນຊ້າງ ພົນມ້າ ພົນລົດ ແລະພົນຍ່າງ
ລ້ວນມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍ

[໔໑໒] ນາຍທະຫານຣະດັບສູງກໍດີ ຣາດຊະບຸດກໍດີ ພໍ່ຄ້າກໍດີ
ພາມກໍດີ ລ້ວນມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍ

[໔໑໓] ຄົນເຮັດເຂົ້າໜົມກໍດີ ພໍ່ຄົວກໍດີ
ຄົນຈັດແຈງເຄື່ອງອາບນໍ້າກໍດີ ຊ່າງດອກໄມ້ກໍດີ
ລ້ວນມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍ

[໔໑໔] ຊ່າງຍ້ອມກໍດີ ຊ່າງຫູກກໍດີ ຊ່າງຫຍິບຜ້າກໍດີ ຊ່າງຕັດຜົມຍິງສາວກໍດີ
ລ້ວນມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍ

[໔໑໕] ຊ່າງສອນກໍດີ ຊ່າງກຶງກໍດີ ຊ່າງໜັງກໍດີ ຊ່າງຖາກກໍດີ
ລ້ວນມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍ

[໔໑໖] ຊ່າງເຫຼັກກໍດີ ຊ່າງຄຳກໍດີ ຊ່າງດີບຸກກໍດີ ຊ່າງທອງແດງກໍດີ
ລ້ວນມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍ

[໔໑໗] ລູກຈ້າງກໍດີ ຄົນເຊີນທຸງກໍດີ
ທາດກໍດີ ກຳມະກອນກໍດີ ຈຳນວນຫຼາຍ
ໄດ້ພາກັນປະພຶດທຳຈຳນວນຫຼາຍຕາມກຳລັງຂອງຕົນ ໆ

[໔໑໘] ຄົນຕັກນໍ້າຂາຍກໍດີ ຄົນຫາຟືນຂາຍກໍດີ
ຊາວນາກໍດີ ຄົນຂົນຫຍ້າກໍດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍຕາມກຳລັງຂອງຕົນ ໆ

[໔໑໙] ຄົນຂາຍດອກໄມ້ກໍດີ ຄົນຂາຍພວງມາໄລກໍດີ
ຄົນຂາຍໃບໄມ້ກໍດີ ຄົນຂາຍໝາກໄມ້ກໍດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍຕາມກຳລັງຂອງຕົນ ໆ

[໔໒໐] ຍິງສາວແພດສະຫຍາກໍດີ ນາງກຸມພະທາສີກໍດີ
ຄົນຂາຍເຂົ້າໜົມກໍດີ ຄົນຂາຍປາກໍດີ
ໄດ້ພາກັນປະພຶດທຳຈຳນວນຫຼາຍຕາມກຳລັງຂອງຕົນ ໆ

[໔໒໑] ພວກເຮົາທັງໝົດນີ້ມາປະຊຸມ
ລວມເປັນພວກດຽວກັນແລ້ວ
ຈັກທຳບຸນກຸສົນໃນພຣະພຸດທະເຈົ້າຜູ້ເປັນນາບຸນອັນປະເສີດ

[໘໘໘] ຍາດຕິພີ່ນ້ອງເຫຼົ່ານັ້ນຟັງຄຳຂອງຂ້າພະເຈົ້າແລ້ວ
ລວມກັນເປັນຄະນະໃນຂະນະນັ້ນກ່າວວ່າ
ພວກເຮົາຄວນໃຫ້ສ້າງໂຮງສັນທີ່ສ້າງຢ່າງສວຍງາມຖວາຍແດ່ພິກຂຸສົງ

[໘໘໓] ຂ້າພະເຈົ້າຈຶ່ງໃຫ້ສ້າງໂຮງສັນນັ້ນສຳເລັດແລ້ວ
ເປັນຜູ້ເບີກບານ ມີໃຈຍິນດີ
ມີຍາດຕິພີ່ນ້ອງທັງໝົດນັ້ນຫ້ອມລ້ອມ
ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ

[໘໘໔] ເມື່ອເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ຊົງອົງອາດກວ່ານໍຣະຊົນ
ຂາບພຣະຍຸຄົນບາດຂອງພຣະສາດສະດາແລ້ວໄດ້ຂາບທູນຄຳນີ້ວ່າ

[໘໘໕] ຂ້າແຕ່ພຣະມຸນີວີຣະເຈົ້າ ບຸຣຸດປະມານ ໓໐໐ ຄົນນີ້
ລວມກັນເປັນຄະນະ
ຂໍມອບຖວາຍໂຮງສັນທີ່ສ້າງຢ່າງສວຍງາມແດ່ພຣະອົງ

[໘໘໖] ຂໍພຣະອົງຜູ້ມີພຣະຈັກຂຸ
ເປັນປະທານໝູ່ພິກຂຸ ໂຜດຊົງຮັບເທີ້ນ
ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະຄາຖາເຫຼົ່ານີ້
ຕໍ່ໜ້າບຸຣຸດ ໓໐໐ ຄົນວ່າ

[໘໘໗] ບຸຣຸດທັງ ໓໐໐ ຄົນແລະຜູ້ເປັນຫົວໜ້າ
ປະພຶດຕາມເປັນໜຶ່ງດຽວກັນ
ທ່ານທັງປວງພາກັນເຮັດແລ້ວ ຈັກໄດ້ສະເຫວີຍສົມບັດ

[໘໘໘] ເມື່ອເຖິງພົບສຸດທ້າຍ ທ່ານທັງຫຼາຍຈັກເຫັນນິບພານ
ເຊິ່ງມີພາວະເຢັນປະເສີດ ບໍ່ແກ່ ບໍ່ຕາຍ ເປັນແດນກະເສມ

[໘໘໙] ພຣະສັບພັນຍູພຸດທະເຈົ້າຜູ້ປະເສີດກວ່າສະມະນະ
ຊົງພະຍາກອນແນວນີ້ແລ້ວ
ຂ້າພະເຈົ້າໄດ້ຟັງພຣະພຸດທະດຳຣັດແລ້ວ ໄດ້ສະເຫວີຍໂສມະນັດ

[໘໓໐] ຂ້າພະເຈົ້າຮື່ນຣົມຢູ່ໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ເປັນໃຫຍ່ໃນໝູ່ເທວະດາ ຄອງເທວະສົມບັດຕະຫຼອດ ໕໐໐ ຊາດ

[໔໓໑] ໄດ້ເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດ ອັນໄພບູນນັບຊາດບໍ່ຖ້ວນ

[໔໓໔] ໃນຣັດສົມບັດໃນມະນຸດໂລກນີ້
ມີພວກຍາດຕິພີ່ນ້ອງເປັນບໍລິວານ
ໃນພົບສຸດທ້າຍທີ່ມາເຖິງນີ້ ມີພາມຊື່ວາ ເສດຖະ

[໔໓໓] ຂ້າພະເຈົ້າເປັນບຸດຂອງພາມນັ້ນ
ສະສົມສົມບັດໄວ້ ໗໐ ໂກດ
ຂ້າພະເຈົ້າມີນາມວ່າ ເສລະ ເຖິງຄວາມສຳເລັດໃນອົງ ໖

[໔໓໔] ມີພວກສິດຂອງຕົນແວດລ້ອມ
ຍ່າງທ່ຽວພັກຜ່ອນອິລິຍາບົດ ດາບົດຊື່ ເກນິຍະ
ຜູ້ພຽບພ້ອມດ້ວຍຊະດາແລະບໍຣິຂານ ຈັດແຈງເຄື່ອງບູຊາ

[໔໓໕] ຂ້າພະເຈົ້າໄດ້ເຫັນທ່ານແລ້ວໄດ້ກ່າວຄຳນີ້ວ່າ
ທ່ານຈັກເຮັດອາວາຫະມຸງຄຸນແລະວິວາຫະມຸງຄຸນ
ຫຼືວ່າທ່ານເຊື້ອເຊີນພຣະຣາຊາ

[໔໓໖] ດາບົດຊື່ເກນິຍະຕອບວ່າ
ຂ້າພະເຈົ້າຕ້ອງການຈະໃຊ້ເຄື່ອງບູຊາ
ບູຊາພາມທີ່ສົມມຸດກັນວ່າປະເສີດ
ຂ້າພະເຈົ້າບໍ່ໄດ້ເຊື້ອເຊີນພຣະຣາຊາ ບໍ່ມີການບວງສວງ

[໔໓໗] ອາວາຫະມຸງຄຸນແລະວິວາຫະມຸງຄຸນຂອງຂ້າພະເຈົ້າກໍບໍ່ມີ
ພຣະພຸດທະເຈົ້າຜູ້ໃຫ້ເກີດຄວາມຍິນດີແກ່ສາກະຍະທັງຫຼາຍ
ປະເສີດທີ່ສຸດໃນໂລກພ້ອມທັງເທວະໂລກ

[໔໓໘] ຊົງເຮັດປະໂຫຍດເກື້ອກູນແກ່ໂລກທັງປວງ
ນຳສຸກມາໃຫ້ແກ່ສັບພະສັດ
ວັນນີ້ ຂ້າພະເຈົ້າທູນນິມົນພຣະອົງ
ຈຶ່ງຈັດແຈງເຄື່ອງບູຊານີ້ເພື່ອພຣະອົງ

[໔໓໙] ພຣະພຸດທະເຈົ້າມີພຣະຣັດສະໝີເໝືອນສີໝາກາພັບ
ມີພຣະຄຸນຫາປະມານບໍ່ໄດ້

ບໍ່ມີຜູ້ປຽບປານ ບໍ່ມີໃຜເໝືອນດ້ວຍພຣະຮູບ
ຂ້າພະເຈົ້າທູນນິມົນເພື່ອສະເຫວີຍໃນມື້ອື່ນນີ້

[໘໔໐] ພຣະອົງມີຣັດສະໝີສະຫວ່າງແຈ້ງເໝືອນຖ່ານໄຟໄມ້ແຄນ
ກະທົບປາກເບົ້າຄຳ ປຽບດ້ວຍສາຍຟ້າ
ຊົງເປັນຜູ້ມີຄວາມພຽນຫຼາຍ ເປັນບ່ອນເພິ່ງ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໑] ພຣະພຸດທະເຈົ້າພຣະອົງນັ້ນ ຜູ້ເປັນເໝືອນໄຟເທິງຈອມພູເຂົາ
ເໝືອນດວງຈັນໃນວັນເພັງ ແລະເໝືອນສີແທ່ງແປວໄຟໄມ້ອໍ້
ຂ້າພະເຈົ້າທູນນິມົນແລ້ວ

[໘໔໒] ພຣະພຸດທະເຈົ້າພຣະອົງນັ້ນ ຜູ້ບໍ່ຊົງເກງກົວ
ຊົງລ່ວງພົ້ນໄພແລ້ວ ຊົງເຮັດພົບໃຫ້ສິ້ນໄປ
ເປັນພຣະມຸນີເໝືອນຣາດຊະສີ ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໓] ພຣະພຸດທະເຈົ້າພຣະອົງນັ້ນ ຊົງສະຫຼາດໃນພຸດທະທຳ
ບໍ່ມີໃຜອື່ນຂົ່ມໄດ້ ເໝືອນພະຍາຊ້າງເຊືອກປະເສີດ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໔] ພຣະພຸດທະເຈົ້າພຣະອົງນັ້ນ ຊົງສະຫຼາດໃນຝັ່ງຄືພຣະສັດທຳ
ເປັນພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ບໍ່ມີໃຜເໝືອນ ເໝືອນງົວອຸສະພະຣາດ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໕] ພຣະພຸດທະເຈົ້າພຣະອົງນັ້ນ ມີພຣະຄຸນທີ່ພັນລະນາບໍ່ສິ້ນສຸດ
ມີພຣະຍົດນັບບໍ່ໄດ້ ມີພຣະລັກສະນະທັງໝົດງົດງາມ
ເໝືອນທ້າວສັກກະເທວະຣາດ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໖] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີຄວາມຊຳນານ
ເປັນຜູ້ນຳໝູ່ ມີຄວາມພຽນ ມີເດດ
ຫາຜູ້ກະທົບກະທັ່ງໄດ້ຍາກ ເໝືອນພຣະພົມ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໗] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະທຳລ້ຳເລີດ
ໜ້າບູຊາ ເປັນພຣະທົດສະພົນ
ຊົງເຖິງຄວາມສຳເລັດພະລະທຳເໜືອພະລະທຳ (ຂອງຄົນທົ່ວໄປ)
ປຽບດ້ວຍແຜ່ນດິນ ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໘] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີສິນແລະປັນຍາແຜ່ກະຈາຍ
ຊົງຣະບືໄປດ້ວຍການຮູ້ແຈ້ງທຳ ປຽບດ້ວຍທ້ອງທະເລ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໔໙] ພຣະພຸດທະເຈົ້າພຣະອົງນັ້ນ
ຫາຜູ້ກະທົບກະທັ່ງໄດ້ຍາກ
ຜູ້ໃດ ບໍ່ອາດຈະຂົ່ມໄດ້ ບໍ່ຊົງຫວັ່ນໄຫວ
ຊົງເລີດກວ່າພົມ ປຽບດັ່ງພູເຂົາເນຣຸຣາດ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໘໕໐] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະຍານບໍ່ມີທີ່ສິ້ນສຸດ
ບໍ່ມີໃຜສະເໝີເໝືອນ ບໍ່ມີໃຜທຽມເທົ່າ
ຊົງບັນລຸເຖິງຄວາມເປັນຍອດ ປຽບດັ່ງທ້ອງຟ້າ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

**ພານະວານທີ ໑໕ ຈົບ**

[໘໕໑] ພຣະພຸດທະເຈົ້າພຣະອົງນັ້ນ
ຊົງເປັນບ່ອນເພິ່ງຂອງບັນດາຜູ້ຢ້ານໄພ

ເປັນບ່ອນຕ້ານທານຂອງບັນດາຜູ້ເຖິງສະຣະນະ ເປັນທີ່ເບົາໃຈ
ຊຶ່ງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໔] ພຣະພຸດທະເຈົ້າພຣະອົງນັ້ນ
ຊຶ່ງເປັນບ່ອນອາໄສແຫ່ງທ່ານຜູ້ມີຄວາມຮູ້
ເປັນເນື້ອນາບຸນຂອງຜູ້ສະແຫວງຫາຄວາມສຸກ ເປັນບໍ່ເກີດແຫ່ງຣັດຕະນະ
ຊຶ່ງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໓] ພຣະພຸດທະເຈົ້າພຣະອົງນັ້ນ ຊຶ່ງເປັນຜູ້ປອບໂຍນໃຫ້ເບົາໃຈ
ເປັນຜູ້ເຮັດໃຫ້ເປັນເທບ ເປັນຜູ້ປະທານສາມັນຍະຜົນ ປຽບດັ່ງເມກ
ຊຶ່ງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໔] ພຣະພຸດທະເຈົ້າພຣະອົງນັ້ນ ທີ່ເຂົາຍົກຍ້ອງໃນໂລກ ຊຶ່ງແກ່ກ້າ
ເປັນຜູ້ບັນເທົາຄວາມມືດທັງປວງ ປຽບດັ່ງດວງອາທິດ
ຊຶ່ງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໕] ພຣະພຸດທະເຈົ້າພຣະອົງນັ້ນ ຊຶ່ງສະແດງສະພາວະໃນອາລົມ
ແລະຄວາມລຸດພົ້ນ ເປັນພຣະມຸນີ ປຽບດັ່ງດວງຈັນ
ຊຶ່ງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໖] ພຣະພຸດທະເຈົ້າພຣະອົງນັ້ນຕັດສະຣູ້ແລ້ວ
ອັນບັນດິດຍົກຍ້ອງໃນໂລກ
ຊຶ່ງປະດັບດ້ວຍພຣະລັກສະນະທັງຫຼາຍ
ໃຜ ໆ ປະມານບໍ່ໄດ້
ຊຶ່ງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໗] ພຣະພຸດທະເຈົ້າຜູ້ຊຶ່ງມີພຣະຍານຫາປະມານບໍ່ໄດ້
ຊຶ່ງມີສິນທີ່ບໍ່ມີອັນໃດປຽບໄດ້

ຊົງມີວິມຸດຕິທີ່ບໍ່ມີອັນໃດເໝືອນ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໙] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີປັນຍາ
ເຄື່ອງຊົງຈຳທີ່ບໍ່ມີອັນໃດເໝືອນ
ຊົງມີພະລັງເຊິ່ງເປັນອະຈິນໄຕ (ບໍ່ຄວນຄິດ)
ຊົງມີຄວາມບາກບັ່ນຢ່າງປະເສີດ
ຂ້າພະເຈົ້າທູນນິມົນແລ້ວ

[໔໕໙] ພຣະພຸດທະເຈົ້າພຣະອົງນັ້ນ ຊົງຖອນພິດ
ຄືຣາຄະ ໂທສະ ໂມຫະໄດ້ໝົດແລ້ວ ຊົງປຽບດັ່ງຢາ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໖໐] ພຣະພຸດທະເຈົ້າພຣະອົງນັ້ນ
ຊົງບັນເທົາພະຍາທິຄືກິເລດແລະຄວາມທຸກຫຼາຍ
ເໝືອນດັ່ງໂອສົດ ປຽບດັ່ງໝໍ
ຊົງເປັນຜູ້ມີຄວາມພຽນຫຼາຍ
ຂ້າພະເຈົ້າທູນນິມົນແລ້ວ

[໔໖໑] ເກນິຍະພາມປະກາດວ່າພຸດໂທ
ສຽງປະກາດນັ້ນ ຂ້າພະເຈົ້າບໍ່ເຄີຍໄດ້ຟັງມາກ່ອນ
ຍ້ອນໄດ້ຟັງສຽງປະກາດວ່າພຸດໂທ
ຂ້າພະເຈົ້າກໍເກີດປີຕິຊາບຊ່ານ

[໔໖໔] ຂ້າພະເຈົ້າບໍ່ໄດ້ມີປີຕິຢູ່ສະເພາະພາຍໃນ
ແຕ່ແຜ່ຊ່ານອອກມາພາຍນອກ
ຂ້າພະເຈົ້າມີໃຈອິ່ມເອີບ ໄດ້ກ່າວຄຳນີ້ວ່າ

[໔໖໓] ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊົງເປັນຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ສະເດັດປະທັບຢູ່ໃນທີ່ໃດນໍ
ຂ້າພະເຈົ້າຈັກໄປນອບນ້ອມພຣະອົງ
ຜູ້ຊົງປະທານສາມັນຍະຜົນ ໃນບ່ອນນັ້ນ

[໔໖໔] ຂໍທ່ານຜູ້ເກີດໂສມະນັດເຊິ່ງປະນົມມືຢູ່
ໂຜດຍົກມືຂ້າງຂວາຂຶ້ນຊີ້ບອກພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນພຣະທຳຣາຊາ
ຜູ້ຊົງບັນເທົາລູກສອນຄືຄວາມເສົ້າໂສກໃຫ້ຂ້າພະເຈົ້າດ້ວຍເທີ້ນ

[໔໖໕] (ເກນິຍະພາມ ກ່າວວ່າ)
ທ່ານຄົງເຫັນປ່າໃຫຍ່ຂຽວ
ເໝືອນດັ່ງກ້ອນມະຫາເມກຕັ້ງຂຶ້ນ
ປຽບດ້ວຍດອກອັນຊັນ ເຊິ່ງຜາກົດເໝືອນທ້ອງທະເລ

[໔໖໖] ພຣະພຸດທະເຈົ້າ ຜູ້ຊົງຝຶກຝົນຄົນທີ່ຍັງບໍ່ໄດ້ຮັບການຝຶກຝົນ
ຊົງເປັນມຸນີ ຊົງແນະນຳເວໄນຍະສັດໃຫ້ຕັດສະຮູ້ໂພທິປັກຂິຍະທຳ
ພຣະອົງຊົງປະທັບຢູ່ທີ່ປ່ານັ້ນ

[໔໖໗] ຂ້າພະເຈົ້າຫ່ວງຄົ້ນຫາພຣະຊິນນະເຈົ້າ
ປຽບເໝືອນຄົນກະຫາຍນ້ຳສະແຫວງຫານ້ຳດື່ມ
ປຽບເໝືອນຄົນຫິວເຂົ້າສະແຫວງຫາເຂົ້າກິນ
ປຽບເໝືອນແມ່ງົວຮັກລູກງົວຫ່ວງຄົ້ນຫາລູກງົວ

[໔໖໘] ຂ້າພະເຈົ້າຮູ້ຈັກອາຈາຣະແລະອຸປະຈາຣະ
ສັງລວມຣະວັງເໝາະສົມແກ່ເຫດ
ໃຫ້ບັນດາສິດຂອງຕົນເຊິ່ງຈະໄປສູ່ສຳນັກພຣະຊິນນະເຈົ້າ ສຶກສາ ວ່າ

[໔໖໙] ພຣະຜູ້ມີພຣະພາກເຈົ້າທັງຫຼາຍ ຫາຜູ້ສູ້ໄດ້ຍາກ
ສະເດັດທ່ຽວໄປພຽງພຣະອົງດຽວ ເໝືອນດັ່ງຣາດຊະສີ
ມານົບທັງຫຼາຍ ພວກທ່ານຄວນເຂົ້າແຖວກັນມາ

[໔໗໐] ພຣະພຸດທະເຈົ້າທັງຫຼາຍຫາຜູ້ສູ້ໄດ້ຍາກ
ເໝືອນອະສໍຣະພິດມີພິດແຮງກ້າ
ເໝືອນພະຍາເນື້ອໄກສອນຣາດຊະສີ
ເໝືອນຊ້າງກຸນຊອນຕົກມັນທີ່ໄດ້ຮັບການຝຶກແລ້ວ

[໔໗໑] ມານົບທັງຫຼາຍ ພວກທ່ານຈົ່ງຢ່າໄອ ຢ່າຈາມ
ຍ່າງເຂົ້າແຖວພາກັນເຂົ້າໄປສູ່ສຳນັກຂອງພຣະພຸດທະເຈົ້າເທີ້ນ

[໒໗໒] ພຣະພຸດທະເຈົ້າທັງຫຼາຍ ຊົງເປັນຜູ້ໜັກໃນການຢູ່ໃນບ່ອນຫຼີບຫຼີກ
ມັກສະຖານທີ່ບໍ່ມີສຽງ
ຫາຜູ້ກະທົບໄດ້ຍາກ ຍາກທີ່ຈະເຂົ້າເຝົ້າ
ຊົງເປັນຄູຜູ້ສອນໃນມະນຸດໂລກພ້ອມທັງເທວະໂລກ

[໒໗໓] ຂ້າພະເຈົ້າທູນຖາມບັນຫາຂໍ້ໃດ ຫຼື ໄດ້ປາໄສໂຕ້ຕອບຢູ່
ໃນຂະນະນັ້ນ ຂໍໃຫ້ທ່ານທັງຫຼາຍຈົ່ງງຽບສຽງນິ່ງເສີຍຢູ່

[໒໗໔] ພຣະອົງຊົງສະແດງພຣະສັດທຳໃດ
ເຊິ່ງເປັນທຳປອດໂປ່ງ ເພື່ອບັນລຸນິບພານ
ຂໍທ່ານທັງຫຼາຍ ຈົ່ງພິຈາລະນາເນື້ອຄວາມແຫ່ງພຣະສັດທຳນັ້ນ
ຍ້ອນການຟັງພຣະສັດທຳເປັນເຫດນຳສຸກມາໃຫ້

[໒໗໕] ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າແລ້ວ
ໄດ້ສົນທະນາປາໄສກັບພຣະມຸນີ
ໃຫ້ການສົນທະນານັ້ນຜ່ານໄປແລ້ວຈຶ່ງກວດເບິ່ງພຣະລັກສະນະ

[໒໗໖] ຂ້າພະເຈົ້າສົງໄສພຣະລັກສະນະ ໒ ປະການ
ໄດ້ເຫັນພຽງພຣະລັກສະນະ ໓໐ ປະການ
ພຣະມຸນີຈຶ່ງໄດ້ຊົງສະແດງພຣະຄຸຍຫະຖານ
ເຊິ່ງເຊື່ອງຢູ່ໃນຝັກໃຫ້ຜາກົດດ້ວຍລິດ

[໒໗໗] ອັນໜຶ່ງ ພຣະຊິນນະເຈົ້າໄດ້ຊົງແລບພຣະຊິວຫາ
ສອດເຂົ້າໃນຊ່ອງພຣະກັນແລະເຂົ້າໃນຊ່ອງພຣະນາສິກ
ແລ້ວປົກປິດໄປເຖິງສຸດພຣະນະລາດທັງໝົດ

[໒໗໘] ຂ້າພະເຈົ້າໄດ້ເຫັນພຣະລັກສະນະຂອງພຣະອົງ
ຄົບຖ້ວນບໍລິບູນພ້ອມທັງພຣະອະນຸພະຍັນຊະນະ
ຈຶ່ງແນ່ໃຈໄດ້ວ່າເປັນພຣະພຸດທະເຈົ້າແລ້ວ
ໄດ້ບວດພ້ອມກັບບັນດາສິດ

[໒໗໙] ຂ້າພະເຈົ້າພ້ອມດ້ວຍບັນດາສິດ ໓໐໐ ຄົນ
ໄດ້ບວດເປັນບັນພະຊິດ ຍັງບໍ່ທັນເຖິງເຄິ່ງເດືອນ
ພວກເຮົາທັງໝົດກໍໄດ້ບັນລຸນິບພານ

[໔໙໐] ສິດທັງຫຼາຍຮ່ວມກັນເຮັດກຳໃນນາບຸນທີ່ປະເສີດ
ທ່ອງທ່ຽວໄປຮ່ວມກັນ ຄາຍກິເລດໄດ້ຮ່ວມກັນ

[໔໙໑] ຂ້າພະເຈົ້າໄດ້ຖວາຍໄມ້ກອນທັງຫຼາຍ
ຈຶ່ງໄດ້ຢູ່ໃນທຳເປັນຈຳນວນຫຼາຍ
ດ້ວຍກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າຍ່ອມໄດ້ເຫດ ໙ ປະການ

[໔໙໒] ຄືຂ້າພະເຈົ້າເປັນຜູ້ທີ່ເຂົາບູຊາໃນທິດທັງຫຼາຍ ໑
ມີໂພຄະສົມບັດນັບບໍ່ຖ້ວນ ໑
ເປັນບ່ອນເພິ່ງຂອງຄົນທັງປວງ ໑ ບໍ່ມີຄວາມສະດຸ້ງຢ້ານ ໑

[໔໙໓] ຂ້າພະເຈົ້າບໍ່ມີຄວາມເຈັບໄຂ້ ໑ ຮັກສາອາຍຸໄດ້ຍືນຍາວ
ມີຜິວພັນລະອຽດອ່ອນ ໑ ຢູ່ໃນບ່ອນຢູ່ທີ່ປາຖະໜາໄດ້ ໑

[໔໙໔] ຍ້ອນໄດ້ຖວາຍໄມ້ກອນ ໙ ອັນ
ຂ້າພະເຈົ້າຈຶ່ງໄດ້ຢູ່ໃນທຳເປັນຈຳນວນຫຼາຍ
ຄວາມເປັນພຣະອະຣະຫັນເຖິງພ້ອມດ້ວຍປະຕິສຳພິທາ
ເປັນຂໍ້ທີ ໙ ອີກຂໍ້ໜຶ່ງຂອງຂ້າພະເຈົ້າ

[໔໙໕] ຂ້າແຕ່ພຣະມະຫາມຸນີ
ຂ້າພຣະອົງມີທຳເຄື່ອງຢູ່ທັງປວງຢູ່ຈົບໝົດແລ້ວ
ທຳກິດສຳເລັດແລ້ວ ບໍ່ມີອາສະວະ ມີຊື່ວ່າອັດຖະໂຄປາຣະສີ
ເປັນບຸດຂອງພຣະອົງ

[໔໙໖] ຍ້ອນໄດ້ຖວາຍເສົາ ໕ ຕົ້ນ
ຂ້າພະເຈົ້າຈຶ່ງໄດ້ຢູ່ໃນທຳເປັນຈຳນວນຫຼາຍ
ດ້ວຍກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າຈຶ່ງໄດ້ເຫດ ໕ ປະການ

[໔໙໗] ຄືຂ້າພະເຈົ້າເປັນຜູ້ມີເມດຕາບໍ່ຫວັ່ນໄຫວ ໑
ມີໂພຄະສົມບັດບໍ່ຮູ້ຈັກຂາດ ໑
ມີຄຳເວົ້າທີ່ຄວນເຊື່ອຖືໄດ້ ໂດຍທີ່ຂ້າພະເຈົ້າບໍ່ເວົ້າກຳຈັດ ໑

[໔໙໙] ຂ້າພະເຈົ້າມີຈິດບໍ່ຟຸ້ງຊ່ານ ໑
ບໍ່ເປັນສັງນໜາມຕໍ່ຜູ້ໃດ ໑

ດ້ວຍກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າຈຶ່ງເປັນຜູ້ປາສະຈາກມົນທິນໃນສາດສະໜາ

[໔໗໙] ຂ້າແຕ່ພຣະມຸນີຜູ້ມີຄວາມພຽນຫຼາຍ
ພິກຂຸສາວົກຂອງພຣະອົງມີຄວາມເຄົາລົບ
ມີຄວາມຢຳເກງ ໄດ້ເຮັດກິດສຳເລັດແລ້ວ
ບໍ່ມີອາສະວະ ຂໍຂາບໄຫວ້ພຣະອົງ

[໔໘໐] ຂ້າພະເຈົ້າໄດ້ເຮັດບັນລັງທີ່ເຮັດຢ່າງສວຍງາມແລ້ວຈັດຕັ້ງໄວ້ໃນສາລາ
ດ້ວຍກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າຈຶ່ງໄດ້ເຫດ ໔ ປະການ

[໔໘໑] ຄືເກີດໃນຕະກູນສູງ ໑ ມີໂພຄະຫຼາຍ ໑
ມີສົມບັດທຸກຢ່າງ ໑ ບໍ່ມີຄວາມຂີ້ຖີ່ ໑

[໔໘໔] ເມື່ອຂ້າພະເຈົ້າປາຖະໜາຈະໄປ ບັນລັງກໍຕັ້ງຂຶ້ນ
ຂ້າພະເຈົ້າຍ່ອມໄປພ້ອມກັບບັນລັງອັນປະເສີດ
ຕາມທີ່ຂ້າພະເຈົ້າປາຖະໜາ ໑
[໔໘໓] ຍ້ອນການຖວາຍບັນລັງນັ້ນ
ຂ້າພະເຈົ້າກຳຈັດຄວາມມືດທັງໝົດໄດ້ແລ້ວ
ຂ້າແຕ່ພຣະມະຫາມຸນີ
ພຣະເຖຣະຜູ້ບັນລຸອະພິນຍາແລະພະລະທຳທັງປວງ
ຂໍຂາບໄຫວ້ພຣະອົງ
[໔໘໔] ຂ້າພະເຈົ້າເຮັດກິດທັງປວງທັງທີ່ເປັນກິດ
ຂອງຜູ້ອື່ນແລະກິດຂອງຕົນສຳເລັດແລ້ວ
ດ້ວຍກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າຈຶ່ງໄດ້ເຂົ້າໄປສູ່ບຸຣີທີ່ບໍ່ມີໄພ
[໔໘໕] ຂ້າພະເຈົ້າໄດ້ຖວາຍເຄື່ອງບໍລິໂພກໃນສາລາທີ່ສ້າງສຳເລັດແລ້ວ
ດ້ວຍກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ຂ້າພະເຈົ້າຈຶ່ງໄດ້ບັນລຸຄວາມເປັນຜູ້ປະເສີດ

[໔໘໖] ຜູ້ຝຶກເຫຼົ່າໃດເຫຼົ່າໜຶ່ງໃນໂລກ
ຜູ້ຝຶກເຫຼົ່ານັ້ນຍ່ອມຝຶກຊ້າງແລະມ້າ
ພວກເຂົາໃຫ້ເຮັດເຫດຕ່າງ ໆ ແລ້ວຝຶກຢ່າງໜັກ

[໔໙໗] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ພຣະອົງບໍ່ຊົງຝຶກເຫຼົ່າຊາຍຍິງຈັ່ງຊັ້ນ
ພຣະອົງຊົງຝຶກໃນວິທີຝຶກຢ່າງສູງສຸດ
ໂດຍບໍ່ຕ້ອງໃຊ້ອາດຍາບໍ່ຕ້ອງໃຊ້ອາວຸດ

[໔໙໘] ພຣະມຸນີຊົງສະຫຼາດໃນເທດສະໜາ ຊົງສັນເສີນຄຸນແຫ່ງທານ
ແລະຕັດບັນຫາຂໍ້ດຽວ
ກໍໃຫ້ເວໄນຍະສັດ ໕໐໐ ຕັດສະຮູ້ໄດ້

[໔໙໙] ຂ້າພຣະອົງທັງຫຼາຍ ອັນພຣະອົງຜູ້ເປັນສາຣະຖີຝຶກແລ້ວ
ຈຶ່ງພົ້ນວິເສດດ້ວຍດີ ບໍ່ມີອາສະວະ
ບັນລຸອະພິນຍາແລະພະລະທຳທັງປວງ
ດັບແລ້ວໃນທຳເປັນບ່ອນສິ້ນອຸປະທິ

[໕໐໐] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ໄພທັງປວງລ່ວງພົ້ນໄປແລ້ວ
ນີ້ເປັນຜົນແຫ່ງການຖວາຍສາລາ

[໕໐໑] ກິເລດທັງຫຼາຍຂ້າພະເຈົ້າເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໐໔] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເສລະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເສລະເຖຣາປະທານທີ ໔ ຈົບ**

# ໖. ສັບພະກິດຕິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັບພະກິດຕິກະເຖຣະ

(ພຣະສັບພະກິດຕິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໐໔] ພຣະສຳມາສຳພຸດທະເຈົ້າ ຊົງຮຸ່ງເຮື່ອງເໝືອນດອກກັນນິກາ
ຊົງໂຊດຊ່ວງເໝືອນຕົ້ນພຶກສາປະທີບ
ຊົງຮຸ່ງເຮືອງເໝືອນດາວປະກາຍພຶກ
ເໝືອນສາຍຟ້າໃນທ້ອງຟ້າ

[໖໐໕] ບໍ່ເກາງກົວ ບໍ່ສະດຸ້ງຢ້ານ
ເໝືອນພະຍາເນື້ອ ຊົງປະກາດແສງສະຫວ່າງຄືຍານ
ຊົງຍ່ຳຍີໝູ່ເດຍຣະຖີ

[໖໐໖] ຊົງຊ່ອຍໂລກນີ້ ຕັດຄວາມສົງໄສທັງປວງໄດ້ບໍ່ເກາງກົວ
ເໝືອນພະຍາຣາດຊະສີ ຊົງເປັນຜູ້ນຳສັດໂລກ
ຂ້າພະເຈົ້າໄດ້ເຫັນແລ້ວ

[໖໐໗] ຂ້າພະເຈົ້າຊົງຊະດາແລະໜັງສັດ
ເປັນໃຫຍ່ ຊື່ຕົງ ມີຄວາມພຽນ
ຖືເອົາຜ້າເປືອກປໍໄປປູແທບພຣະບາດ

[໖໐໘] ຂ້າພະເຈົ້ານຳກະລຳພັກມາຊະໂລມທາພຣະຕະຖາຄົດ
ເມື່ອຊະໂລມທາພຣະສຳມາສຳພຸດທະເຈົ້າແລ້ວ
ໄດ້ຊົມເຊີຍພຣະອົງຜູ້ຊົງເປັນຜູ້ນຳສັດໂລກວ່າ

[໖໐໙] ຂ້າແຕ່ພຣະມະຫາມຸນີ ພຣະອົງຊົງຂ້າມໂອຄະກິເລດໄດ້ແລ້ວ
ຊົງຊ່ວຍເຫຼືອສັດໂລກນີ້ ຊົງໂຊດຊ່ວງ
ດ້ວຍແສງສະຫວ່າງແຫ່ງພຣະຍານ
ພຣະຍານ (ຂອງພຣະອົງ) ປະເສີດສຸດ

[໖໑໐] ພຣະອົງຊົງປະກາດທຳມະຈັກ ຍ່ຳຍີເດຍຣະຖີອື່ນ
ເປັນຜູ້ອົງອາດ ຊະນະສົງຄາມແລ້ວ
ເຮັດແຜ່ນດິນໃຫ້ຫວັ່ນໄຫວ

[៦១១] ທິດຖີທັງປວງຍ່ອມແຕກທຳລາຍໄປຍ້ອນພຣະຍານຂອງພຣະອົງ
ເໝືອນຄື້ນໃນມະຫາສະມຸດຍ່ອມແຕກກະຈາຍໄປຍ້ອນແຄມຝັ່ງ

[៦១៤] ແຫຕານ້ອຍ ທີ່ເຂົາຫວ່ານລົງໄປໃນສະແລ້ວ
ສັດທັງຫຼາຍທີ່ຢູ່ພາຍໃນແຫ
ຍ່ອມຖືກບີບຄັ້ນໃນຂະນະນັ້ນສັນໃດ

[៦១៦] ຂ້າແຕ່ພຣະອົງຜູ້ນິຣະທຸກ
ພວກເດຍຣະຖີໃນໂລກເປັນຜູ້ຫຼົງງົມງວາຍ
ບໍ່ອີງອາໄສສັດຈະ ຍ່ອມເປັນໄປພາຍໃນພຣະຍານ
ອັນປະເສີດຂອງພຣະອົງສັນນັ້ນ

[៦១៨] ພຣະອົງເທົ່ານັ້ນເປັນບ່ອນເພິ່ງຂອງຜູ້ທີ່ຖືກພັດພາໄປໃນຫ້ວງນ້ຳ
ເປັນບ່ອນເພິ່ງຂອງຜູ້ບໍ່ມີຍາດພີ່ນ້ອງ ເປັນສະຣະນະຂອງຜູ້ທີ່ມີໄພ
ເປັນຈຸດມຸ້ງໝາຍຂອງຜູ້ຕ້ອງການຄວາມລຸດພົ້ນ

[៦១៥] ສະເດັດທ່ຽວໄປຜູ້ດຽວ ບໍ່ມີໃຜເໝືອນ
ຊົງປະກອບດ້ວຍພຣະເມດຕາກະລຸນາ
ຊົງມີປັນຍາປະກອບດ້ວຍຈາຄະ
ຊຳນານ ຄົງທີ່ ເປັນບ່ອນຢູ່ແຫ່ງຄຸນ

[៦១៧] ເປັນນັກປາດ ປາສະຈາກຄວາມຫຼົງ
ບໍ່ຊົງຫວັ່ນໄຫວ ບໍ່ມີຄວາມສົງໄສ
ເປັນຜູ້ພໍພຣະທະໄທ ຊົງຄາຍໂທສະແລ້ວ
ບໍ່ມີມົນທິນ ຊົງສັງລວມ ມີຄວາມບໍລິສຸດ
[៦១៧] ລ່ວງທຳເຄື່ອງຂ້ອງ ປາສະຈາກຄວາມເມົາ
ໄດ້ວິດຊາ ៣ ເຖິງບ່ອນສຸດພົບ ຊົງລ່ວງເຂດແດນ
ເປັນຜູ້ໜັກໃນທຳ ເຖິງຈຸດມຸ້ງໝາຍແລ້ວ
ຊົງຫວ່ານປະໂຫຍດເກື້ອກູນ

[៦១៩] ຊົງຊ່ອຍສັດໃຫ້ຂ້າມພົ້ນປຽບເໝືອນເຮືອ (ພາຄົນຂ້າມຟາກ)
ຊົງມີຂຸມຊັບ ຊົງກະທຳຄວາມເບົາໃຈ
ບໍ່ຊົງເກງກົວເໝືອນຣາດຊະສີ
ຊົງຝຶກແລ້ວເໝືອນພະຍາຄົດຊະສານທີ່ຝຶກແລ້ວ

[໓໑໗] ຄັ້ງນັ້ນ ເມື່ອຂ້າພະເຈົ້າສັນເສີນພຣະມະຫາມຸນີ
ພຣະນາມວ່າປະທຸມຸດຕະຣະ ດ້ວຍຄາຖາ ໑໐ ຄາຖາ
ຂາບພຣະບາດຂອງພຣະສາດສະດາແລ້ວໄດ້ຢືນນິ່ງຢູ່

[໓໘໐] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບຢືນຢູ່ໃນທ່າມກາງໝູ່ພິກຂຸ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໓໘໑] ເຮົາຈັກພະຍາກອນຜູ້ທີ່ສັນເສີນສີນ
ປັນຍາ ແລະທຳຂອງເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໓໘໘] ຜູ້ນັ້ນຈັກຮື່ນຣົມຢູ່ໃນເທວະໂລກຕະຫຼອດ ໙໐,໐໐໐ ກັບ
ຈັກຄອງອິດສະຣິຍະຍົດປົກຄອງເທວະດາເຫຼົ່າອື່ນ

[໓໘໓] ພາຍຫຼັງເຂົາບວດແລ້ວ ຖືກກຸສົນມູນຕັກເຕືອນ
ຈັກບວດໃນສາດສະໜາ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໓໘໔] ເມື່ອບວດແລ້ວ ເວັ້ນບາບກຳທາງກາຍ
ກຳນົດຮູ້ອາສະວະທັງປວງ ຈັກເປັນຜູ້ບໍ່ມີອາສະວະ ແລ້ວນິບພານ

[໓໘໕] ເມກຄຳຣົນຮ້ອງດັງກະຫື່ມ ເຮັດແຜ່ນດິນນີ້ໃຫ້ຊຸ່ມຊື່ນສັນໃດ
ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ພຣະອົງຊົງໃຫ້ຂ້າພຣະອົງຊຸ່ມຊື່ນດ້ວຍທຳສັນນັ້ນ

[໓໘໖] ເມື່ອຂ້າພະເຈົ້າເຊີຍຊົມສີນ ປັນຍາ ແລະທຳ
ແລະພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳສັດໂລກແລ້ວ
ໄດ້ບັນລຸນິບພານເຊິ່ງເປັນທຳສະງົບຢ່າງຍິ່ງ ເປັນບົດບໍ່ຈຸຕິ

[໓໘໗] ໂອນໍ ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸພຣະອົງນັ້ນ
ເພິ່ງດຳຣົງຢູ່ດົນນານແດ່
ຂ້າພະເຈົ້າກໍເພິ່ງຮູ້ແຈ້ງທຳທີ່ຍັງບໍ່ຮູ້ແຈ້ງ ເພິ່ງເຫັນອະມະຕະບົດ

[໓໘໙] ຊາດນີ້ເປັນຊາດສຸດທ້າຍຂອງຂ້າພະເຈົ້າ
ພົບທັງປວງຂ້າພະເຈົ້າຖອນໄດ້ແລ້ວ
ຂ້າພະເຈົ້າກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໓๘໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນເສີນພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນ

[໓໓໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໓໓໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໓๘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ๘ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັບພະກິດຕິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັບພະກິດຕິກະເຖຣາປະທານທີ ໓ ຈົບ**

## ๘. ມະທຸທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະມະທຸທາຍະກະເຖຣະ

(ພຣະມະທຸທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໓໓] ຂ້າພະເຈົ້າໄດ້ສ້າງອາສົມຢ່າງສວຍງາມໄວ້ໃກ້ຝັ່ງແມ່ນ້ຳສິນທຸ
ສອນຕຳລາປະຫວັດສາດພ້ອມທັງຕຳລາທາຍລັກສະນະ
ແກ່ພວກສິດທີ່ອາສົມນັ້ນ

[໓໓๘] ສິດເຫຼົ່ານັ້ນຜູ້ທີ່ຂ້າພະເຈົ້າແນະນຳແລ້ວເປັນຜູ້ຕ້ອງການທຳ
ຕ້ອງການຟັງຄຳສັ່ງສອນດີ
ເຖິງຄວາມສຳເລັດໃນອົງ ໖ ປະການ ຢູ່ໃກ້ຝັ່ງແມ່ນ້ຳສິນທຸ

[໓໓໕] ເປັນຜູ້ສະຫຼາດໃນເຫດທີ່ມາແຫ່ງອຸບປາທະ (ຄວາມເກີດ)
ແລະໃນລັກສະນະທັງຫຼາຍ
ສະແຫວງຫາປະໂຫຍດສູງສຸດຢູ່ໃນປ່າໃຫຍ່ໃນຄັ້ງນັ້ນ

[໓໓໖] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ສະເດັດອຸບັດຂຶ້ນໃນໂລກ
ພຣະອົງຊົງເປັນຜູ້ນຳໂດຍວິເສດ
ເມື່ອຈະຊົງອະນຸເຄາະພວກຂ້າພະເຈົ້າ ຈຶ່ງສະເດັດເຂົ້າມາ

[໓໓໗] ຂ້າພະເຈົ້າໄດ້ເຫັນພຣະມະຫາວີຣະເຈົ້າພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກ ສະເດັດເຂົ້າມາ
ຈຶ່ງໄດ້ປູຫຍ້າຖວາຍແດ່ ພຣະອົງຜູ້ຈະເລີນທີ່ສຸດໃນໂລກ

[໓໓໘] ຂ້າພະເຈົ້າຖືນ້ຳເຜີ້ງຈາກປ່າໃຫຍ່ມາຖວາຍ
ແດ່ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພຣະສຳມາສຳພຸດທະເຈົ້າສະເຫວີຍແລ້ວໄດ້ຕັດພຣະດຳຣັດນີ້ວ່າ

[໓໓໙] ເຮົາຈັກພະຍາກອນຜູ້ທີ່ມີຄວາມເຫຼື້ອມໃສ
ເຊິ່ງໄດ້ຖວາຍນ້ຳເຜີ້ງແກ່ເຮົາດ້ວຍມືທັງ ໒ ຂອງຕົນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໓໔໐] ດ້ວຍການຖວາຍນ້ຳເຜີ້ງແລະດ້ວຍການປູຫຍ້າຖວາຍນີ້
ຜູ້ນັ້ນຈັກຣື່ນຣົມຢູ່ໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ

[໓໔໑] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໓໔໒] ຜູ້ນັ້ນຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງ ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໓໔໓] ເມື່ອຂ້າພະເຈົ້າຈາກເທວະໂລກມາໃນມະນຸດໂລກນີ້
ປະຕິສົນທິໃນທ້ອງມານດາ
ຝົນນ້ຳເຜີ້ງໄດ້ຕົກປົກປິດແຜ່ນດິນດ້ວຍນ້ຳເຜີ້ງ

[໓໔໔] ແມ່ນໃນຂະນະເມື່ອຂ້າພະເຈົ້າອອກຈາກຫ້ອງຢ່າງປອດໄພນັ້ນ
ຝົນນ້ຳເຜີ້ງກໍຕົກເພື່ອຂ້າພະເຈົ້າຕະຫຼອດການເປັນນິດ

[໓໔໕] ເມື່ອຂ້າພະເຈົ້າອອກຈາກເຮືອນບວດເປັນບັນພະຊິດແລ້ວ
ຍ່ອມໄດ້ເຂົ້າແລະນ້ຳ
ນີ້ເປັນຜົນແຫ່ງການຖວາຍນ້ຳເຜີ້ງ

[໓໔໖] ຂ້າພະເຈົ້າເກີດໃນໝູ່ເທວະດາແລະມະນຸດ
ເປັນຜູ້ບໍລິບູນດ້ວຍສິ່ງທີ່ເພິ່ງປາຖະໜາທັງປວງ
ໄດ້ບັນລຸຄວາມສິ້ນອາສະວະ
ຍ້ອນການຖວາຍນ້ຳເຜີ້ງນັ້ນແລ

[໓໔໗] ເມື່ອຝົນຕົກແລ້ວ ຫຍ້າງອກຍາວ ໔ ນີ້ວ
ເມື່ອຕົ້ນໄມ້ໃນທີ່ເພາະປູກມີດອກບານສະພັ່ງ
ຂ້າພະເຈົ້າເປັນຜູ້ບໍ່ມີອາສະວະຢູ່ເປັນສຸກເນືອງນິດ
ທີ່ເຮືອນວ່າງ ທີ່ມົນດົບແລະເຫງົ້າຕົ້ນໄມ້

[໓໔໘] ພົບທີ່ຂ້າພະເຈົ້າກ້າວລ່ວງມີໃນທ່າມກາງ
ໃນວັນນີ້ອາສະວະທັງຫຼາຍຂອງຂ້າພະເຈົ້າສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໓໔໙] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍນ້ຳເຜີ້ງ

[໓໕໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໓໕໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມະທຸທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ມະທຸທາຍະກະເຖຣາປະທານທີ ໔ ຈົບ**

# ໕. ປະທຸມະກູຕາຄາຣິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປະທຸມະກູຕາຄາຣິກເຖຣະ

(ພຣະປະທຸມະກູຕາຄາຣິກເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ ກ່າວວ່າ)

[໙໕໓] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າປິຍະທັດສີ
ຜູ້ເປັນພຣະສະຍໍາພູ ຊຶ່ງເປັນຜູ້ນໍາສັດໂລກ
ຕັດສະຮູ້ແລ້ວດ້ວຍພຣະອົງເອງ
ຊົງປະສົງວິເວກ ສະຫຼາດໃນສະມາທິ ເປັນມຸນີ

[໙໕໔] ພຣະມະຫາມຸນີພຣະນາມວ່າ ປິຍະທັດສີ ຜູ້ເປັນບຸຣຸດຜູ້ສູງສຸດ
ສະເດັດເຂົ້າໄປສູ່ເຂດປ່າ
ຊົງປູຜ້າບັງສຸກູນແລ້ວປະທັບນັ່ງຢູ່

[໙໕໕] ເມື່ອກ່ອນ ຂ້າພະເຈົ້າເປັນພານເນື້ອຢູ່ໃນປ່າດົງທຶບ
ທ່ຽວສະແຫວງຫາເນື້ອຟານຢູ່ໃນຄັ້ງນັ້ນ

[໙໕໖] ໃນບ່ອນນັ້ນ ຂ້າພະເຈົ້າໄດ້ເຫັນພຣະສໍາມາສໍາພຸດທະເຈົ້າ
ຜູ້ຂ້າມໂອຄະກິເລດໄດ້ແລ້ວ
ບໍ່ມີອາສະວະເດ່ນຢູ່ເໝືອນຕົ້ນພະຍາໄມ້ສາລະມີດອກບານສະພັ່ງ
ແລະເໝືອນດວງອາທິດອຸໄທ

[໙໕໗] ເມື່ອເຫັນພຣະພຸດທະເຈົ້າພຣະນາມວ່າ ປິຍະທັດສີ
ຜູ້ເປັນເທບຍິ່ງກວ່າເທບ ມີພຣະຍົດຍິ່ງໃຫຍ່ແລ້ວ
ຈຶ່ງລົງໄປສູ່ສະທີ່ເກີດເອງ ນໍາດອກປະທຸມມາໃນຂະນະນັ້ນ

[᧕᧕᧗] ເມື່ອນຳດອກປະທຸມຮ້ອຍກີບເຊິ່ງເປັນທີ່ໜ້າອອນຊອນໃຈມາແລ້ວ
ຈຶ່ງສ້າງເຮືອນຍອດ (ຜາສາດ) ແລ້ວມຸງດ້ວຍດອກປະທຸມ

[᧕᧕᧘] ພຣະພຸດທະຊິນນະເຈົ້າພຣະນາມວ່າ ປິຍະທັດສີ ຜູ້ມະຫາມຸນີ
ຜູ້ຊົງອະນຸເຄາະ ປະກອບດ້ວຍພຣະກະລຸນາ
ປະທັບຢູ່ໃນເຮືອນຍອດຕະຫຼອດ ៧ ວັນ ៧ ຄືນ

[᧕᧖᧐] ຂ້າພະເຈົ້ານຳດອກປະທຸມທີ່ເກົ່າ ໆ ຖິ້ມແລ້ວ
ມຸງດ້ວຍດອກປະທຸມໃໝ່
ໄດ້ຢືນປະຄອງອັນຊະລີ ໃນຂະນະນັ້ນ

[᧕᧖᧑] ພຣະມະຫາມຸນີພຣະນາມວ່າ ປິຍະທັດສີ ຊົງເປັນຜູ້ນຳສັດໂລກ
ສະເດັດອອກຈາກສະມາທິແລ້ວປະທັບນັ່ງຫຼຽວເບິ່ງທິດຢູ່

[᧕᧖᧒] ຄັ້ງນັ້ນ ພຣະເຖຣະຜູ້ອຸປັດຖາກນາມວ່າ ສຸທັດສະນະ ມີລິດຫຼາຍ
ຮູ້ພຣະດຳຣິຂອງພຣະພຸດທະເຈົ້າພຣະນາມວ່າ ປິຍະທັດສີ ຜູ້ສາດສະດາ

[᧕᧖᧓] ມີພິກຂຸ ᧘᧐,᧐᧐᧐ ອົງແວດລ້ອມແລ້ວ
ເຂົ້າເຝົ້າພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ເຊິ່ງປະທັບນັ່ງເປັນສຸກຢູ່ໃນປ່າ

[᧕᧖᧔] ແລະຄັ້ງນັ້ນ ເທວະດາທີ່ສິງສະຖິດຢູ່ໃນເຂດປ່າ
ຮູ້ພຣະພຸດທະດຳຣິແລ້ວ ພາກັນມາປະຊຸມທັງໝົດ

[᧕᧖᧕] ເມື່ອພວກຍັກ ກຸມພັນ ພ້ອມທັງຜີເສື້ອນ້ຳມາພ້ອມກັນ
ແລະເມື່ອພິກຂຸສົງມາເຖິງພ້ອມແລ້ວ
ພຣະຊິນນະເຈົ້າໄດ້ຕັດພຣະຄາຖາວ່າ

[᧕᧖᧖] ເຮົາຈັກພະຍາກອນຜູ້ທີ່ບູຊາເຮົາຕະຫຼອດ ៧ ວັນ
ແລະໄດ້ສ້າງອາວາດຖວາຍເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[᧕᧖᧗] ເຮົາຈັກພະຍາກອນສິ່ງທີ່ເຫັນໄດ້ຍາກຫຼາຍ ລະອຽດຫຼາຍ
ເລິກເຊິ່ງໃຫ້ຜາກົດຊັດແຈ້ງດ້ວຍຍານ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໓໗໙] ຜູ້ນັ້ນຈັກໄດ້ຄອງເທວະສົມບັດຕະຫຼອດ ໑໔ ກັບ
ເຮືອນຍອດຂອງຜູ້ນັ້ນໃຫຍ່ ມຸງດ້ວຍດອກປະທຸມ

[໓໗໘] ເທວະດາທັງຫຼາຍຊົງໄວ້ໃນອາກາດ
ນີ້ເປັນຜົນແຫ່ງບຸບພະກຳ
ເຂົາຈັກວຽນວ່າຍຕາຍເກີດສັບສົນໃນ ໑໑໔ ກັບ

[໓໘໐] ໃນກັບທີ ໑໑໔ ນັ້ນ
ວິມານດອກໄມ້ຈັກຊົງຢູ່ໃນອາກາດ
ນ້ຳບໍ່ຕິດຢູ່ເທິງໃບບົວສັນໃດ

[໓໘໑] ກິເລດທັງຫຼາຍກໍບໍ່ຕິດຢູ່ໃນຍານຂອງຜູ້ນີ້ສັນນັ້ນ
ຜູ້ນີ້ຈັກປົດເປື້ອງນິວອນ ໕ ອອກຈາກໃຈໄດ້

[໓໘໒] ໃຫ້ຄວາມຄິດເກີດໃນເນກຂຳມະແລ້ວ
ຈັກອອກຈາກເຮືອນບວດ
ໃນຄັ້ງນັ້ນ ວິມານດອກໄມ້ທີ່ຍັງຊົງຢູ່ກໍຈັກອອກໄປດ້ວຍ

[໓໘໓] ເມື່ອຜູ້ນັ້ນມີປັນຍາຮັກສາຕົນ ມີສະຕິ ຢູ່ທີ່ເຫງົ້າຕົ້ນໄມ້
ວິມານດອກໄມ້ຈັກຊົງຢູ່ເໜືອຫົວຂອງຜູ້ນັ້ນທີ່ເຫງົ້າຕົ້ນໄມ້ນັ້ນ

[໓໘໔] ຜູ້ນັ້ນຖວາຍຈີວອນ ບິນທະບາດ ຄິລານະປັດໄຈ
ບ່ອນນອນ ແລະບ່ອນນັ່ງແກ່ພິກຂຸສົງແລ້ວ
ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໓໘໕] ເມື່ອເຮືອນຍອດລອຍໄປ ຂ້າພະເຈົ້າອອກບວດແລ້ວ
ກໍາຊົງເຮືອນຍອດໄວ້ຈຳເພາະຂ້າພະເຈົ້າແມ່ນຢູ່ທີ່ເຫງົ້າຕົ້ນໄມ້ກໍຕາມ

[໓໘໖] ຂ້າພະເຈົ້າບໍ່ມີຄວາມຕັ້ງໃຈ (ສະແຫວງຫາ) ຈີວອນແລະບິນທະບາດ
ຂ້າພະເຈົ້າປະກອບດ້ວຍບຸນກຳ
ຈຶ່ງໄດ້ຈີວອນ ແລະບິນທະບາບທີ່ສຳເລັດແລ້ວ

[໓໘໗] ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ຜ່ານພົ້ນຂ້າພະເຈົ້າໄປລ້າ ໆ ຕັ້ງຫຼາຍພຣະອົງ
ຕະຫຼອດໂກດກັບຫຼວງຫຼາຍ ໂດຍນັບປະມານບໍ່ໄດ້

[໓໗໘] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະພຸດທະເຈົ້າພຣະນາມວ່າ ປິຍະທັດສີ
ຜູ້ຊົງເປັນຜູ້ນໍາໂດຍວິເສດ ຈຶ່ງມາເກີດໃນກໍາເນີດນີ້

[໓໗໙] ຂ້າພະເຈົ້າໄດ້ເຫັນພຣະສໍາມາສໍາພຸດທະເຈົ້າພຣະອົງນັ້ນ
ພຣະນາມວ່າ ອະໂນມະ ຜູ້ມີພຣະຈັກຂຸ
ເມື່ອເຂົ້າເຝົ້າພຣະອົງແລ້ວ ກໍໄດ້ບວດເປັນບັນພະຊິດ

[໓໘໐] ພຣະພຸດທະຊິນນະເຈົ້າຜູ້ຊົງເຮັດບ່ອນສຸດທຸກໄດ້
ຊົງສະແດງພຣະສັດທໍາ
ຂ້າພະເຈົ້າໄດ້ຟັງທໍາຂອງພຣະອົງແລ້ວ
ໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໓໘໑] ຂ້າພະເຈົ້າໃຫ້ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ໂຄດົມສາກະຍະ
ຜູ້ປະເສີດຊົງພໍພຣະທະໄທ
ກໍານົດຮູ້ອາສະວະທັງປວງແລ້ວ ຈຶ່ງຢູ່ຢ່າງຜູ້ບໍ່ມີອາສະວະ

[໓໘໒] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໘໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໓໘໔] ການທີ່ຂ້າພະເຈົ້າໄດ້ມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໓໘໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປະທຸມະກູຕາຄາຣິກເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປະທຸມະກູຕາຄາຣິກະເຖຣາປະທານທີ ໕ ຈົບ**

# ໖. ພັກກຸລະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພັກກຸລະເຖຣະ

(ພຣະພັກກຸລະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗໖] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ໂສພິຕະ
ພວກສິດຂອງຂ້າພະເຈົ້າ
ຊ່ອຍກັນສ້າງອາສົມຢ່າງສວຍງາມໃຫ້ຂ້າພະເຈົ້າ

[໓໗໗] ທີ່ໃກ້ອາສົມນັ້ນ ມີມົນດົບຈຳນວນຫຼາຍ
ຕົ້ນຍາງມີດອກບານສະພັ່ງ
ຕົ້ນໝາກຂວິດ ຕົ້ນຈຳປາ ຕົ້ນກາກະທິງ ຕົ້ນເກດ ມີຈຳນວນຫຼາຍ

[໓໗໘] ມີຕົ້ນຄັນທີສໍ ຕົ້ນໝາກກະທັນ ແລະຕົ້ນໝາກຂາມປ້ອມ
ຕົ້ນໝາກຜາງ ນ້ຳເຕົ້າ ແລະບົວຂາວ
ມີດອກບານສະພັ່ງຈຳນວນຫຼາຍ

[໓໗໙] ມີຕົ້ນຮັກຂາວ ຕົ້ນໝາກຕູມ ຕົ້ນກ້ວຍ ແລະຕົ້ນໝາກນາວ
ຕົ້ນໝາກຕ້ອງ ຕົ້ນຮົກຟ້າຂາວ ແລະຕົ້ນປະຍົງ ມີຢູ່ຫຼາຍ

[໓໘໐] ມີຕົ້ນຄຳ ຕົ້ນຊ້າງນ້າວ ຕົ້ນກະທຸ່ມ ຕົ້ນໄຮ ແລະຕົ້ນໝາກຂວິດ
ອາສົມຂອງຂ້າພະເຈົ້າເປັນເຊັ່ນນີ້
ຂ້າພະເຈົ້າພ້ອມດ້ວຍສິດຢູ່ທີ່ອາສົມນັ້ນ

[໓໘໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອະໂນມະທັດສີ ຜູ້ເປັນພຣະສະຍຳພູ
ຊົງເປັນຜູ້ນຳສັດໂລກ ຊົງສະແຫວງຫາບ່ອນຫຼີບຫຼີກ
ສະເດັດເຂົ້າມາໃກ້ອາສົມຂອງຂ້າພະເຈົ້າ

[໓໘໒] ເມື່ອພຣະມະຫາວີຣະເຈົ້າພຣະນາມວ່າ ອະໂນມະທັດສີ
ຜູ້ມີພຣະຍົດຍິ່ງໃຫຍ່ສະເດັດເຂົ້າມາໃກ້ແລ້ວ

ໂຣກລົມກໍເກີດຂຶ້ນແກ່ພຣະອົງ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກໂດຍທັນທີ

[໓໙໓] ຂ້າພະເຈົ້າທ່ຽວໄປໃນປ່າ ໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຊົງເປັນຜູ້ນຳສັດໂລກ ມີພຣະຈັກຂຸ
ມີພຣະຍົດຍິ່ງໃຫຍ່ ຈຶ່ງໄດ້ເຂົ້າເຝົ້າ

[໓໙໔] ເມື່ອໄດ້ເຫັນພຣະອິລິຍາບົດກໍເຂົ້າໃຈໄດ້ໃນທັນທີວ່າ
ພຣະພຸດທະເຈົ້າຊົງພຣະປະຊວນຢ່າງແນ່ນອນ

[໓໙໕] ຂ້າພະເຈົ້າຈຶ່ງຟ້າວກັບມາຍັງອາສົມ
ໃນສຳນັກຂອງສິດທັງຫຼາຍຂອງຂ້າພະເຈົ້າ
ຂະນະນັ້ນ ຂ້າພະເຈົ້າເປີກສາກັບສິດວ່າ ເຮົາຕ້ອງການປຸງຢາ

[໓໙໖] ສິດທັງໝົດຜູ້ມີຄວາມເຄົາລົບ
ເຊື່ອຟັງຂ້າພະເຈົ້າແລ້ວຮ່ວມປະຊຸມກັນ
ຍ້ອນເຄົາລົບຂ້າພະເຈົ້າຜູ້ເປັນຄູ

[໓໙໗] ຂ້າພະເຈົ້າຟ້າວຂຶ້ນພູໄປເກັບຢາທຸກສິ່ງມາປຸງ
ໄດ້ປຸງໃຫ້ເປັນຢາສຳລັບດື່ມຖວາຍພຣະພຸດທະເຈົ້າຜູ້ປະເສີດ

[໓໙໘] ເມື່ອພຣະມະຫາວີຣະເຈົ້າຜູ້ສັບພັນຍູ
ຜູ້ຊົງເປັນຜູ້ນຳສັດໂລກສະເຫວີຍແລ້ວ
ໂຣກລົມຂອງພຣະສຸຄົດເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ກໍສະງົບລົງທັນທີ

[໓໙໙] ພຣະພຸດທະເຈົ້າພຣະນາມວ່າ ອະໂນມະທັດສີ ຜູ້ມີພຣະຍົດຍິ່ງໃຫຍ່
ຊົງເຫັນຂ້າພະເຈົ້າມີຄວາມກະວົນກະວາຍສະງົບແລ້ວ
ປະທັບນັ່ງເທິງອາສະນະຂອງພຣະອົງ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໔໐໐] ເຮົາຈັກພະຍາກອນຜູ້ທີ່ໄດ້ຖວາຍຢາ
ແກ່ເຮົາ ແລະຣະງັບອາພາດຂອງເຮົາໄດ້
ທ່ານທັງຫຼາຍ ຈົ່ງຟັງເຮົາກ່າວເທີ້ນ

[໔໐໑] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໑໐໐,໐໐໐ ກັບ
ຈັກບັນເທີງໃນເທວະໂລກນັ້ນ ເຊິ່ງມີດົນຕີປະໂຄມຢູ່ທຸກເມື່ອ

[໔໐໒] ອັນກຸສົນມູນຕັກເຕືອນມາ (ເກີດ) ຍັງມະນຸດໂລກແລ້ວ
ຈັກໄດ້ເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໔໐໓] ໃນກັບທີ ໕໕ (ນັບຈາກກັບນີ້ໄປ)
ຈັກໄດ້ເປັນກະສັດພຣະນາມວ່າ ອະໂນມິ
ຊົງມີໄຊຊະນະມີມະຫາສະມຸດທັງ ໔ ເປັນຂອບເຂດ
ເປັນໃຫຍ່ໃນຊົມພູທະວີບ

[໔໐໔] ຈັກເປັນພຣະເຈົ້າຈັກກະພັດ
ສົມບູນດ້ວຍຣັດຕະນະ ໗ ປະການ ມີພະລານຸພາບຫຼາຍ
ລືກະຈາຍໄປຈົນເຖິງພົບຕາວະຕິງສາ ຄອງຄວາມເປັນໃຫຍ່

[໔໐໕] ເຂົາ (ເກີດ) ເປັນເທວະດາ ຫຼື ມະນຸດກໍຕາມ
ຈັກເປັນຜູ້ມີອາພາດໜ້ອຍ ຈັກເວັ້ນຄວາມຮ້ອນຮົນແລ້ວ
ຜ່ານພົ້ນຄວາມເຈັບໄຂ້ໄດ້ໃນໂລກ

[໔໐໖] ໃນກັບທີນັບບໍ່ໄດ້ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໐໗] ເຂົາຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງ ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ
[໔໐໘] ເຜົາກິເລດທັງຫຼາຍແລ້ວ ຂ້າມພົ້ນກະແສຕັນຫາໄດ້
ຈັກມີນາມວ່າ ພັກກູລະເປັນສາວົກຂອງພຣະສາດສະດາ
[໔໐໙] ພຣະໂຄດົມສາກະຍະຜູ້ປະເສີດ
ຊົງຮູ້ຄວາມນີ້ທັງໝົດແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸ
ຈັກຊົງຕັ້ງເຂົາໄວ້ໃນເອຕະທັກຄະ

[໔໑໐] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອະໂນມະທັດສີ
ຜູ້ເປັນພຣະສະຍຳພູ ຊົງເປັນຜູ້ນຳສັດໂລກ
ຊົງກວດເບິ່ງອາສົມຂອງຂ້າພະເຈົ້າວ່າເປັນສະຖານທີ່ວິເວກ
ຈຶ່ງສະເດັດເຂົ້າໄປ

[໔໑໑] ຂ້າພະເຈົ້າມີຄວາມເຫຼື້ອມໃສ ໃຫ້ພຣະມະຫາວີຣະເຈົ້າ
ຜູ້ສັບພັນຍູຊົງເປັນຜູ້ນຳສັດໂລກ
ສະເດັດມາເຖິງ ອີ່ມເອີບດ້ວຍໂອສົດທຸກຢ່າງດ້ວຍມືຂອງຕົນ

[໔໑໒] ຂ້າພະເຈົ້ານັ້ນໄດ້ເຮັດກຳໄວ້ດີແລ້ວ
ຍ້ອນຄວາມເຖິງພ້ອມດ້ວຍພືດໃນເຂດທີ່ດີ
ຂ້າພະເຈົ້າຈຶ່ງບໍ່ອາດຈະໃຫ້ກຳ
ທີ່ຂ້າພະເຈົ້າເຮັດແລ້ວສິ້ນໄປໄດ້ເລີຍໃນການນັ້ນ

[໔໑໓] ການທີ່ຂ້າພະເຈົ້າໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ຊົງເປັນຜູ້ນຳນັ້ນ
ເປັນລາບທີ່ຂ້າພະເຈົ້າໄດ້ດີແລ້ວ
ດ້ວຍກຳທີ່ເຫຼືອຢູ່ນັ້ນ
ຂ້າພະເຈົ້າຈຶ່ງໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໔໑໔] ພຣະໂຄດົມສາກະຍະຜູ້ປະເສີດຊົງຮູ້ຄວາມນັ້ນທັງໝົດແລ້ວ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງເອຕະທັກຄະ

[໔໑໕] ໃນກັບທີນັບບໍ່ໄດ້ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຢາ

[໔໑໖] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າມີອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ
[໔໑໗] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະພັກກຸລະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ພັກກຸລະເຖຣາປະທານທີ ໖ ຈົບ**

## ໗. ຄິຣິມານັນທະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຄິຣິມານັນທະເຖຣະ

(ພຣະຄິຣິມານັນທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑໗] ພະຣິຍາຂອງຂ້າພະເຈົ້າເຖິງແກ່ກຳແລ້ວ
ບຸດຂອງຂ້າພະເຈົ້າກໍຕົກໄປຢູ່ປ່າຊ້າແລ້ວ (ຕາຍ)
ບິດາມານດາແລະອ້າຍຂອງຂ້າພະເຈົ້າກໍຖືກເຜົາເທິງກອງຟອນດຽວກັນ

[໔໘໐] ຍ້ອນຄວາມເສົ້າໂສກນັ້ນ
ຂ້າພະເຈົ້າຈຶ່ງເປັນຜູ້ຮ້ອນຮົນ ຈ່ອຍເຫຼືອງ
ຈິດຂອງຂ້າພະເຈົ້າຟຸ້ງຊ່ານ
ຄັບແຄ້ນໃຈດ້ວຍຄວາມເສົ້າໂສກນັ້ນ

[໔໘໑] ຂ້າພະເຈົ້າຫຼາຍໄປດ້ວຍລູກສອນຄືຄວາມເສົ້າໂສກຈຶ່ງເຂົ້າໄປສູ່ປ່າ
ບໍລິໂພກໝາກໄມ້ທີ່ຫຼົ່ນເອງ ອາໄສຢູ່ທີ່ເຫງົ້າຕົ້ນໄມ້

[໔໘໒] ພຣະຊິນນະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ ຜູ້ທຳບ່ອນສຸດທຸກ
ພຣະອົງປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງສະເດັດມາໃກ້ຂ້າພະເຈົ້າ

[໔໘໓] ຂ້າພະເຈົ້າໄດ້ຍິນສຽງພຣະບາດຂອງພຣະພຸດທະເຈົ້າ
ພຣະນາມວ່າ ສຸເມທະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຈຶ່ງແຫງນ (ໜ້າ) ແນມເບິ່ງພຣະມະຫາມຸນີ

[໔໘໔] ພຣະມະຫາວີຣະເຈົ້າສະເດັດເຂົ້າມາ ປິຕິເກີດຂຶ້ນແກ່ຂ້າພະເຈົ້າ
ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ມີໃຈເບີກບານ
ຍ້ອນເຫັນພຣະອົງຜູ້ຊົງເປັນຜູ້ນຳສັດໂລກ

[໔໘໕] ຂ້າພະເຈົ້າຈຶ່ງໄດ້ສະຕິ ແລ້ວໄດ້ຖວາຍໃບໄມ້ກຳມືໜຶ່ງ

ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ
ປະທັບນັ່ງເທິງໃບໄມ້ນັ້ນ ດ້ວຍຄວາມອະນຸເຄາະ

[໔໘໖] ພຣະຜູ້ມີພຣະພາກພຸດທະເຈົ້າພຣະນາມວ່າ ສຸເມທະ
ຊຶ່ງເປັນຜູ້ນຳສັດໂລກ ເມື່ອປະທັບນັ່ງເທິງໃບໄມ້ນັ້ນແລ້ວ
ຊຶ່ງສະແດງທຳເຄື່ອງບັນເທົາລູກສອນ
ຄືຄວາມເສົ້າໂສກແກ່ຂ້າພະເຈົ້າວ່າ

[໔໘໗] ຊົນເຫຼົ່ານັ້ນ ບໍ່ມີໃຜເຊີນກໍພາກັນມາຈາກປະຣະໂລກນັ້ນເອງ
ບໍ່ມີໃຜອະນຸຍາດກໍພາກັນໄປຈາກມະນຸດໂລກນີ້ແລ້ວ
ເຂົາກໍພາກັນໄປຕາມທີ່ເຂົາຈະໄປ
ຈະຄ່ຳຄວນໄປເຮັດຫຍັງໃນການຕາຍຂອງພວກເຂົານັ້ນ

[໔໘໘] ເມື່ອຝົນຕົກລົງມາຄົນເດີນທາງທີ່ມີສິ່ງຂອງ
ກໍຫຼີບຝົນຈົນກວ່າຝົນຈະຫາຍ

[໔໘໙] ເມື່ອຝົນຫາຍແລ້ວ ພວກເຂົາກໍໄປຕາມປາຖະໜາສັນໃດ
ມານດາບິດາຂອງທ່ານກໍສັນນັ້ນ
ຈະຄ່ຳຄວນໄປເຮັດຫຍັງໃນການຕາຍຂອງເຂົານັ້ນ

[໔໙໐] ແຂກຜູ້ຈອນມາຜູ້ເຮັດເຈົ້າຂອງບ້ານໃຫ້ຫວັ່ນໄຫວສັ່ນສະທ້ານສັນໃດ
ມານດາແລະບິດາຂອງທ່ານກໍສັນນັ້ນ
ຈະຄ່ຳຄວນໄປເຮັດຫຍັງໃນການຕາຍຂອງເຂົານັ້ນ

[໔໙໑] ງູລອກຄາບເກົ່າໄປສັນໃດ
ມານດາແລະບິດາຂອງທ່ານກໍສັນນັ້ນ
ຍ່ອມລະກາຍຂອງຕົນໃນໂລກນີ້ໄປ

[໔໙໒] ຂ້າພະເຈົ້າໄດ້ຮູ້ພຣະພຸດທະດຳຣັດແລ້ວ
ຈຶ່ງລະລູກສອນຄືຄວາມເສົ້າໂສກໄດ້
ເກີດຄວາມປາໂມດແລ້ວ ໄດ້ຂາບໄຫວ້
ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໙໓] ເມື່ອແລ້ວ ໃຊ້ຊໍ່ດອກກ້ວຍໄມ້ທີ່ມີກິ່ນຫອມທິບ
ບູຊາພຣະພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ເປັນພຣະມະຫານາຄະ ຜູ້ຊຶ່ງເປັນຜູ້ນຳສັດໂລກ

[໔໓໔] ເມື່ອບູຊາພຣະສຳມາສຳພຸດທະເຈົ້າແລ້ວ
ປະນົມມືຂຶ້ນເໜືອຫົວຣະລຶກເຖິງຄຸນອັນເລີດແລ້ວ
ໄດ້ສັນເສີນພຣະອົງຜູ້ຊົງເປັນຜູ້ນຳສັດໂລກວ່າ

[໔໓໕] ຂ້າແຕ່ພຣະມະຫາມຸນີຜູ້ມີຄວາມພຽນຫຼາຍ
ພຣະອົງຊົງເປັນສັບພັນຍູ ເປັນຜູ້ນຳສັດໂລກ
ຊົງຂ້າມພົ້ນແລ້ວ ຍັງຊົງຊ່ວຍເຫຼືອສັບພະສັດ ດ້ວຍພຣະຍານອີກ

[໔໓໖] ຂ້າແຕ່ພຣະມະຫາມຸນີຜູ້ມີພຣະຈັກຂຸ
ພຣະອົງຕັດຄວາມເຄືອບແຄງສົງໄສຂອງຂ້າພຣະອົງ
ແລະໃຫ້ຂ້າພຣະອົງບັນລຸມັກດ້ວຍພຣະຍານຂອງພຣະອົງ

[໔໓໗] ພຣະອະຣະຫັນຜູ້ເຖິງຄວາມສຳເລັດ
ໄດ້ອະພິນຍາ ໖ ມີລິດຫຼາຍ
ທ່ຽວໄປໃນອາກາດໄດ້
ເປັນນັກປາດ ແວດລ້ອມຢູ່ໃນຂະນະນັ້ນ

[໔໓໘] ພຣະເສຂະຜູ້ກຳລັງປະຕິບັດ ແລະຜູ້ຕັ້ງຢູ່ໃນຜົນ
ເປັນສາວົກຂອງພຣະອົງ
ສາວົກທັງຫຼາຍຂອງພຣະອົງຍ່ອມເບ່ງບານ
ເໝືອນດອກປະທຸມແຍ້ມບານເມື່ອດວງອາທິດອຸໄທ

[໔໓໙] ມະຫາສະມຸດປະມານບໍ່ໄດ້ ບໍ່ມີອັນໃດທຽມເທົ່າ
ຍາກທີ່ຈະຂ້າມໄດ້ ສັນໃດ
ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ພຣະອົງກໍຊົງສົມບູນດ້ວຍພຣະຍານນັບປະມານບໍ່ໄດ້ ສັນນັ້ນ

[໔໔໐] ຂ້າພະເຈົ້າໄດ້ຄຸກເຂົ່ານ້ອມໄຫວ້ພຣະສຳມາສຳພຸດທະເຈົ້າຜູ້ຊົງຊະນະໂລກ
ຜູ້ມີພຣະຈັກຂຸ ມີພຣະຍົດຍິ່ງໃຫຍ່ທຸກທິດແລ້ວຫຼີກໄປ

[໔໔໑] ຂ້າພະເຈົ້າຈຸຕິຈາກເທວະໂລກແລ້ວ
ມີສະຕິສຳປະຊັນຍະຢູ່ສະເພາະໜ້າ
ພະເນຈອນຢູ່ໃນພົບນ້ອຍພົບໃຫຍ່
ລົງມາປະຕິສົນທິໃນທ້ອງມານດາ

[໔໔໔] ອອກຈາກເຮືອນບວດເປັນບັນພະຊິດ ເປັນຜູ້ມີຄວາມພຽນ
ມີປັນຍາຮັກສາຕົນ
ມີປົກກະຕິເຂົ້າຊານ ມີການຫຼັບຫຼີກເປັນອາລົມ

[໔໔໑] ຕັ້ງຄວາມພຽນ ໃຫ້ພຣະມະຫາມຸນີຊົງພໍພຣະທະໄທ
ພົ້ນຈາກກິເລດ ດັ່ງດວງຈັນພົ້ນແລ້ວຈາກກົບເມກ ຢູ່ທຸກເມື່ອ

[໔໔໔] ຂ້າພະເຈົ້າເປັນຜູ້ຂວນຂວາຍໃນວິເວກ ສະງົບຣະງັບ ບໍ່ມີອຸປະທິ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໔໔໕] ໃນກັບທີ ໑໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໔໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໔໗] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໑ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄິຣິມານັນທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຄິຣິມານັນທະເຖຣາປະທານທີ ໗ ຈົບ**

# ໗. ສະລະລະມັນທະປິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສະລະລະມັນທະປິຍະເຖຣະ

(ພຣະສະລະລະມັນທະປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໔໙] ເມື່ອພຣະພຸດທະເຈົ້າພຣະນາມວ່າ ກະກຸສັນທະ
ຊົງຢູ່ຈົບພົມມະຈັນ ປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ເກັບດອກຊ້າງນ້າວມາເຮັດເປັນມົນດົບ

[໔໕໐] ຂ້າພະເຈົ້າໄປເກີດໃນສະຫວັນຊັ້ນຕາວະຕິງສາ ໄດ້ວິມານຊັ້ນສູງສຸດ
ຮຸ່ງເຮືອງເໜືອເທວະດາເຫຼົ່າອື່ນ
ນີ້ເປັນຜົນແຫ່ງບຸນກຳ

[໔໕໑] ຂ້າພະເຈົ້າຍ່າງແລະຢືນຢູ່ໃນເວລາກາງເວັນຫຼືກາງຄືນກໍຕາມ
ຍ່ອມມີດອກຊ້າງນ້າວບັງໄວ້
ນີ້ເປັນຜົນແຫ່ງບຸນກຳ

[໔໕໒] ໃນກັບນີ້ເອງ ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໕໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໕໔] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໕໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະລະລະມັນທະປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສະລະລະມັນທະປິຍະເຖຣາປະທານທີ ໗ ຈົບ**

## ໙. ສັບພະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສັບພະທາຍະກະເຖຣະ

(ພຣະສັບພະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໕໖] ບ່ອນຢູ່ຂອງຂ້າພະເຈົ້າເຊິ່ງບຸນກຳເນຣະມິດໄວ້ດີແລ້ວຈົດເຖິງມະຫາສະມຸດ
ສະໂບກຂະຣະນີເຊິ່ງບຸນກຳເນຣະມິດໄວ້ດີແລ້ວ
ມີນົກຈັກກະພາກສົ່ງສຽງຮ້ອງຢູ່

[໔໕໗] ເດຍລະດາດດ້ວຍບົວຫຼວງແລະບົວຂາວ
ໃນສະນັ້ນມີນ້ຳໄຫຼ ມີທ່ານ້ຳຮາບພຽງ ເປັນທີ່ໜ້າອອນຊອນໃຈ

[໔໕໘] ມີປາແລະເຕົ່າຊຸກຊຸມ ເຕົ້າໂຮມດ້ວຍເນື້ອຕ່າງໆ
ມີນົກຍູງ ນົກກະຣຽນ ແລະນົກກາເວົາເປັນຕົ້ນ
ສົ່ງສຽງຮ້ອງຢ່າງໜ້າອອນຊອນ

[໔໕໙] ນົກເຂົາ ນົກເປັດນ້ຳ ນົກຈັກກະພາກ ນົກການ້ຳ ນົກຕ້ອຍຕີວິດ
ນົກສາລິກາ ນົກຕັກຫອຍ ນົກໂພຣະດົກ

[໔໖໐] ຫົງ ນົກກະຣຽນ ນົກແສກ ນົກຂີ້ມິ້ນ
ເປັນຕາເພີດເພີນຫຼາຍ
ສະໂບກຂະຣະນີສົມບູນດ້ວຍແກ້ວ ໗ ປະການ
ມີຊາຍແກ້ວມະນີ ແລະແກ້ວມຸກດາ

[໔໖໑] ຕົ້ນໄມ້ທັງຫຼາຍເປັນສີຄຳທັງໝົດ
ມີກິ່ນຫອມຕ່າງ ໆ ຟຸ້ງຂະຈອນໄປ
ສ່ອງບ່ອນຢູ່ຂອງຂ້າພະເຈົ້າໃຫ້ສະຫວ່າງສະໄຫວຕະຫຼອດການທັງປວງ
ທັງກາງເວັນກາງຄືນ

[໔໖໔] ເຄື່ອງດົນຕີ ໖໐,໐໐໐ ຢ່າງ

ເສບຢູ່ທັງເວລາແລງແລະເວລາເຊົ້າ
ສະຕີສາວລ້ວນ ໖໐,໐໐໐ ນາງ ແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ

[໔໖໓] ຂ້າພະເຈົ້າອອກຈາກບ່ອນຢູ່ແລ້ວ
ໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກ ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໄຫວ້ພຣະອົງ ຜູ້ມີພຣະຍົດຍິ່ງໃຫຍ່

[໔໖໔] ຖວາຍອະພິວາດແລ້ວໄດ້ທູນນິມົນພຣະອົງພ້ອມທັງພຣະສາວົກ
ພຣະພຸດທະເຈົ້າຜູ້ເປັນນັກປາດພຣະນາມວ່າສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກ ຊົງຮັບນິມົນແລ້ວ

[໔໖໕] ພຣະມະຫາມຸນີຕັດທຳກະຖາແກ່ຂ້າພະເຈົ້າແລ້ວຊົງສົ່ງຂ້າພະເຈົ້າໄປ
ຂ້າພະເຈົ້າຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ
ກັບເຂົ້າໄປສູ່ບ່ອນຢູ່ຂອງຕົນ

[໔໖໖] ຂ້າພະເຈົ້າຮຽກບໍລິວານຊົນມາບອກວ່າ ທ່ານທັງໝົດຈົ່ງປະຊຸມກັນ
ເວລາເຊົ້າພຣະພຸດທະເຈົ້າຈະສະເດັດມາຍັງບ່ອນຢູ່ຂອງເຮົາ

[໔໖໗] ການທີ່ພວກເຮົາຈະໄດ້ຢູ່ໃນສຳນັກຂອງພຣະອົງ
ເປັນລາບທີ່ພວກເຮົາໄດ້ດີແລ້ວນໍ
ແມ່ນພວກເຮົາຈັກທຳການບູຊາພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດຜູ້ເປັນສາດສະດາ

[໔໖໘] ຂ້າພະເຈົ້າກະກຽມເຂົ້າແລະນ້ຳສຳເລັດແລ້ວ ຈຶ່ງຂາບທູນພັດຕະການ
ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ສະເດັດເຂົ້າມາພ້ອມດ້ວຍພຣະອະຣະຫັນ ໘໐໐,໐໐໐ ອົງ

[໔໖໙] ຂ້າພະເຈົ້າໄດ້ຮັບສະເດັດດ້ວຍດົນຕີເຄື່ອງຫ້າ
ພຣະພຸດທະເຈົ້າຜູ້ເປັນບຸຣຸດຜູ້ສູງສຸດ
ປະທັບນັ່ງເທິງຕັ່ງຄຳລ້ວນ

[໔໗໐] ໃນຄັ້ງນັ້ນ ຫຼັງຄາເບື້ອງເທິງກຳມຸງດ້ວຍຄຳລ້ວນ
ຄົນທັງຫຼາຍໂບກພັດຖວາຍໃນລະຫວ່າງພິກຂຸສົງ

[໕ກ໑] ຂ້າພະເຈົ້າໄດ້ຖວາຍເຂົ້ານ້ຳຢ່າງພຽງພໍ
ໃຫ້ພິກຂຸສົງສັນຈົນອີ່ມໜຳແລ້ວ
ໄດ້ຖວາຍຜ້າແກ່ພິກຂຸສົງອົງລະ ໑ ຄູ່

[໕ກ໔] ພຣະພຸດທະເຈົ້າທີ່ຜູ້ຄົນຮຽກພຣະນາມວ່າ ສຸເມທະ
ຜູ້ສົມຄວນຮັບເຄື່ອງບູຊາຂອງໂລກ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໕ກ໖] ເຮົາຈັກພະຍາກອນຜູ້ທີ່ຖວາຍເຂົ້ານ້ຳ
ໃຫ້ພິກຂຸທັງໝົດນີ້ສັນຈົນອີ່ມໜຳ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໕ກ໔] ຜູ້ນີ້ຈັກຮື່ນຣົມໃນເທວະໂລກຕະຫຼອດ ໑໑໗ ກັບ
ຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໕ກ໕] ເຂົາເກີດໃນກຳເນີດໃດ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ໃນກຳເນີດນັ້ນ ໆ ຫຼັງຄາຄຳລ້ອນຈັກກາງກັ້ນໃຫ້ຕະຫຼອດເວລາ

[໕ກ໖] ໃນກັບທີ ໖໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ
[໕ກກ] ຜູ້ນັ້ນຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງ ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ
[໕ກ໗] ຜູ້ນັ້ນຈັກນັ່ງໃນທ່າມກາງໝູ່ພິກຂຸແລ້ວບັນລືສີຫະນາດ
ເຂົາສິ້ນຊີວິດແລ້ວຖືກເຜົາພາຍໃຕ້ເສດຕະສັດ
ທີ່ຊົນທັງຫຼາຍກັ້ງໄວ້ທີ່ກອງຟອນ

[໕ກ໙] ສາມັນຜົນຂ້າພະເຈົ້າບັນລຸແລ້ວຕາມລຳດັບ
ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ຢູ່ມົນດົບຫຼືຢູ່ເຫງົ້າຕົ້ນໄມ້
ຄວາມຮ້ອນຮົນບໍ່ມີແກ່ຂ້າພະເຈົ້າ

[໔໗໐] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໃຫ້ທຸກສິ່ງ

[໔໗໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗໒] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັບພະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ສັບພະທາຍະກະເຖຣາປະທານທີ ໙ ຈົບ**

## ໑໐. ອະຊິຕະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະຊິຕະເຖຣະ

(ພຣະອະຊິຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗໔] ພຣະຜູ້ມີພຣະພາກຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳສັດໂລກ
ສະເດັດມາຍັງພູເຂົາຫິມະພານ ແລ້ວປະທັບນັ່ງຢູ່

[໔໗໕] ຂ້າພະເຈົ້າບໍ່ເຄີຍໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ແມ່ນພຣະສຸຣະສຽງຂ້າພະເຈົ້າກໍບໍ່ເຄີຍໄດ້ຟັງ
ຂ້າພະເຈົ້າທ່ຽວໄປໃນປ່າສະແຫວງຫາອາຫານເພື່ອຕົນເອງ

[໔໗໖] ໄດ້ເຫັນພຣະສໍາມາສໍາພຸດທະເຈົ້າ
ຜູ້ມີພຣະລັກສະນະອັນປະເສີດ ໓໒ ປະການ
ໃນປ່ານັ້ນ ເມື່ອເຫັນແລ້ວຈຶ່ງພໍໃຈດ້ວຍຄິດວ່າ ນີ້ເປັນໃຜນໍ

[໔໗໗] ຂ້າພະເຈົ້າພິຈາລະນາເບິ່ງລັກສະນະແລ້ວ
ຣະລຶກເຖິງຄວາມຮູ້ຂອງຕົນເອງໄດ້
ຂ້າພະເຈົ້າຟັງຄໍາສຸພາສິດຂອງບັນດິດຜູ້ຈະເລີນ

[໔໗໘] ຕາມຄໍາຂອງບັນດິດເຫຼົ່ານັ້ນ
ທ່ານຜູ້ນີ້ຄົງເປັນພຣະພຸດທະເຈົ້າ
ທາງທີ່ດີເຮົາຄວນສັກກາຣະພຣະອົງ
ພຣະອົງຈະຊ່ອຍຊໍາຣະຄະຕິຂອງເຮົາໄດ້

[໔໗໙] ຂ້າພະເຈົ້າຈຶ່ງຟ້າວກັບໄປສູ່ອາສົມ
ຈັບເອົານ້ຳເຜິ້ງແລະນ້ຳມັນ
ຖືໝໍ້ເຂົ້າເຝົ້າພຣະພຸດທະເຈົ້າຜູ້ຊົງເປັນຜູ້ນໍາໂດຍວິເສດ

[໔໘໐] ໄດ້ນໍາໄມ້ ໓ ທ່ອນໄປວາງໄວ້ໃນທີ່ກາງແຈ້ງ
ແລ້ວໄຕ້ປະທີບໃຫ້ລຸກສະຫວ່າງແຈ້ງສໍາເລັດແລ້ວຂາບລົງ ໗ ເທື່ອ

[໔໘໑] ພຣະພຸດທະເຈົ້າຜູ້ເປັນບຸຣຸດຜູ້ສູງສຸດ
ປະທັບນັ່ງຢູ່ຕະຫຼອດ ໗ ວັນ ໗ ຄືນ
ພຣະພຸດທະອົງຜູ້ຊົງເປັນຜູ້ນໍາສັດໂລກໄດ້ສະເດັດລຸກຂຶ້ນໃນເວລາຮຸ່ງແຈ້ງ

[໔໘໒] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໄຕ້ປະທີບຖວາຍພຣະພຸດທະເຈົ້າ
ດ້ວຍມືຂອງຕົນ ຕະຫຼອດ ໗ ວັນ ໗ ຄືນ

[໔໘໓] ກິ່ນຫອມທຸກຢ່າງທີ່ເກີດໃນປ່າ ໃນພູເຂົາຄັນທະມາດ
ພັດມາໃນສໍານັກຂອງພຣະພຸດທະເຈົ້າ ດ້ວຍພຸດທານຸພາບ

[໔໘໔] ເວລານັ້ນ ຕົ້ນໄມ້ທີ່ມີດອກມີກິ່ນຫອມທຸກຊະນິດ ບານສະພັ່ງ
ລຸດຫຼົ່ນລົງມາລວມກັນໃນການນັ້ນດ້ວຍພຸດທານຸພາບ

[໔໘໕] ນາກແລະຄຸດທັງ ໒ ພວກເທົ່າທີ່ມີຢູ່ທີ່ພູເຂົາຫິມະພານ
ຕ້ອງການຈະຟັງທໍາຈຶ່ງພາກັນມາຍັງສໍານັກຂອງພຣະພຸດທະເຈົ້າ

[໔໙໖] ພຣະສະມະນະນາມວ່າເທວະລະ ເປັນອັກຄະຣະສາວົກຂອງພຣະພຸດທະເຈົ້າ
ພ້ອມດ້ວຍພຣະອະຣະຫັນ ໔໐໐,໐໐໐ ອົງ
ເຂົ້າມາຍັງສຳນັກຂອງພຣະພຸດທະເຈົ້າ

[໔໙໗] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ ວ່າ

[໔໙໘] ເຮົາຈັກພະຍາກອນຜູ້ທີ່ມີຄວາມເຫຼື້ອມໃສ
ໄດ້ໄຕ້ປະທີບຖວາຍເຮົາດ້ວຍມືຂອງຕົນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໔໙໙] ເຂົາຈັກຮື່ນຣົມໃນເທວະໂລກຕະຫຼອດ ໖໐,໐໐໐ ກັບ
ແລະຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

**ພານະວານທີ ໑໖ ຈົບ**

[໕໐໐] ເຂົາຈັກໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໓໖ ຊາດ
ຈັກໄດ້ຄອງຣັດຊະສົມບັດອັນໄພບູນໃນແຜ່ນດິນ ໗໐໐ ຊາດ

[໕໐໑] ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ດ້ວຍຜົນແຫ່ງການໄຕ້ປະທີບຖວາຍນີ້ ຈັກເປັນຜູ້ມີທິບພະຍະຈັກຂຸ

[໕໐໒] ຜູ້ນີ້ຈັກເບິ່ງເຫັນໄດ້ໄກ ໔໕໐ ຊົ່ວທະນູ ໂດຍຮ້ອບທຸກເມື່ອ
ເມື່ອເຂົາຈຸຕິຈາກເທວະໂລກມາບັງເກີດເປັນມະນຸດ

[໕໐໓] ປະທີບຈັກຊົງຢູ່ຕະຫຼອດທັງກາງເວັນ ແລະກາງຄືນເພື່ອຜູ້ນີ້
ເຊິ່ງເກີດມາພຽບພ້ອມດ້ວຍບຸນກຳ

[໕໐໔] ເຂົາເກີດໃນກຳເນີດໃດ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກຳເນີດນັ້ນຈັກໂຊດຊ່ວງຕະຫຼອດທົ່ວນະຄອນ

[໕໐໕] ຍ້ອນຜົນແຫ່ງການໄຕ້ປະທີບຖວາຍ ໗ ດວງນັ້ນ
ຊົນທັງຫຼາຍຈັກບຳຣຸງຜູ້ນີ້
ນີ້ເປັນຜົນແຫ່ງການໄຕ້ປະທີບຖວາຍ

[໕໐໖] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໕໐໗] ຜູ້ນີ້ຈັກເປັນທໍາທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທໍາເນຣະມິດ
ກໍານົດຮູ້ອາສະວະທັງປວງ ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໕໐໘] ຂ້າພະເຈົ້າໃຫ້ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ໂຄດົມສາກະຍະ
ຜູ້ປະເສີດຊົງພໍພຣະທະໄທແລ້ວ
ຈັກມີນາມວ່າອະຊິຕະ ເປັນສາວົກຂອງພຣະສາດສະດາ

[໕໐໙] ຂ້າພະເຈົ້າຮື່ນຣົມຢູ່ໃນເທວະໂລກຕະຫຼອດ ໖໐,໐໐໐ ກັບ
ແມ່ນໃນເທວະໂລກນັ້ນ ປະທີບ ໑໐໐ ດວງ
ກໍສ່ອງສະຫວ່າງເພື່ອຂ້າພະເຈົ້າຕະຫຼອດການເປັນນິດ

[໕໑໐] ຣັດສະໝີຂອງຂ້າພະເຈົ້າພວຍພຸ່ງ (ສະຫວ່າງແຈ້ງ)
ໄປໃນເທວະໂລກແລະມະນຸດໂລກ
ຂ້າພະເຈົ້າຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດແລ້ວ
ຈຶ່ງເກີດຄວາມຣ່າເຣີງຢ່າງຍິ່ງ

[໕໑໑] ຂ້າພະເຈົ້າຈຸຕິຈາກສະຫວັນຊັ້ນດຸສິດແລ້ວ
ລົງມາປະຕິສົນທິໃນທ້ອງມານດາ
ເມື່ອຂ້າພະເຈົ້າເກີດກໍໄດ້ມີແສງສະຫວ່າງເຈີດຈ້າ

[໕໑໒] ຂ້າພະເຈົ້າອອກຈາກເຮືອນ ບວດເປັນບັນພະຊິດແລ້ວ
ໄດ້ເຂົ້າໄປຫາພາມພາວະຣີ ຍອມຕົນເຂົ້າເປັນສິດ

[໕໑໓] ເມື່ອຂ້າພະເຈົ້າຢູ່ທີ່ພູເຂົາຫິມະພານ
ໄດ້ຮູ້ຂ່າວພຣະພຸດທະເຈົ້າຜູ້ຊົງເປັນຜູ້ນໍາສັດໂລກ
ຂ້າພະເຈົ້າສະແຫວງຫາປະໂຫຍດຢ່າງສູງສຸດ
ຈຶ່ງເຂົ້າເຝົ້າພຣະອົງຜູ້ເປັນຜູ້ນໍາໂດຍວິເສດ

[໕໑໔] ພຣະພຸດທະເຈົ້າຜູ້ຝຶກພຣະອົງແລ້ວ ຊົງຝຶກຜູ້ອື່ນດ້ວຍ
ຊົງຂ້າມໂອຄະກິເລດໄດ້ແລ້ວ ບໍ່ມີອຸປະທິ
ຕັດບອກນິບພານເປັນເຫດພົ້ນຈາກທຸກທັງປວງ

[໕໑໕] ການມາຂອງຂ້າພະເຈົ້ານັ້ນໃຫ້ສຳເລັດປະໂຫຍດ
ຂ້າພະເຈົ້າໃຫ້ພຣະມະຫາມຸນີຊົງພໍພຣະທະໄທ
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໑໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍປະທີບໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍປະທີບ

[໕໑໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໑໘] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະຊິຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອະຊິຕະເຖຣາປະທານທີ ໑໐ ຈົບ**

**ປີລິນທະວັດສະວັກທີ ໔໐ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ປີລິນທະວັດສະເຖຣາປະທານ
໒. ສັບພະກິດຕິກະເຖຣາປະທານ
໓. ປະທຸມະກູຕາຄາຣິກະເຖຣາປະທານ
໔. ຄິຣິມານັນທະເຖຣາປະທານ
໕. ສັບພະທາຍະກະເຖຣາປະທານ
໖. ເສລະເຖຣາປະທານ
໗. ມະທຸທາຍະກະເຖຣາປະທານ
໘. ພັກກຸລະເຖຣາປະທານ
໙. ສະລະລະມັນທະປິຍະເຖຣາປະທານ
໑໐. ອະຊິຕະເຖຣາປະທານ

**ທ່ານນັບຄາຖາໄດ້ ໕໘໐ ຄາຖາ**

## ແລະລວມວັກໄດ້ ໑໐ ວັກ ຄື

໑. ປະທຸມະເກສະຣິຍະວັກ
໒. ອຸມາປຸບຜິຍະວັກ
໓. ເອກະປະທຸມະວັກ
໔. ມັນທາຣະວະປຸບຜິຍະວັກ
໕. ອຳພະຕະຜະລະວັກ
໖. ອາຣັກຂະທາຍະກະວັກ
໗. ຄັນໂທຕະກະວັກ
໘. ສັດທະສັນຍິກະວັກ
໙. ໂພທິວັນທະນະວັກ
໑໐. ປີລິນທະວັດສະວັກ

ແລະທ່ານຄິດໄລ່ຄາຖາໄດ້ ໑,໑໗໔ ຄາຖາ
ໝວດ ໑໐ ແຫ່ງວັກມີປະທຸມະເກສະຣິຍະວັກເປັນຕົ້ນ ຈົບ
໑໐໐ ເລື້ອງ ໝວດທີ ໔ ຈົບບໍລິບູນ

# ໔໑. ເມດເຕີຍຍະວັກ

## ໝວດວ່າດ້ວຍພຣະເມດເຕີຍຍະເປັນຕົ້ນ

## ໑. ຕິດສະເມດເຕີຍຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິດສະເມດເຕີຍຍະເຖຣະ

(ພຣະຕິດສະເມດເຕີຍຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] (ຂ້າພະເຈົ້າເປັນ) ດາບົດຊື່ ໂສພິຕະ
ບໍລິໂພກແຕ່ໝາກໄມ້ທີ່ຫຼົ່ນເອງ
ອາໄສເງິບສູງຢູ່ໃນລະຫວ່າງພູເຂົາ

[໔] ຄັ້ງນັ້ນ ຂ້າພະເຈົ້າສະແຫວງຫາປະໂຫຍດຢ່າງສູງສຸດ
ເພື່ອເກີດໃນພົມມະໂລກ
ຈຶ່ງນໍາຟືນສໍາລັບດັງໄຟມາດັງໄຟໃຫ້ລຸກສະຫວ່າງແຈ້ງ

[໓] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ພຣະອົງປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງສະເດັດມາໃນສໍານັກຂອງຂ້າພະເຈົ້າ

[໔] ຕັດຖາມວ່າ ເຮັດຫຍັງຢູ່ນໍ ທ່ານຜູ້ມີບຸນຫຼາຍ
ຂໍທ່ານຈົ່ງໃຫ້ຟືນສໍາລັບດັງໄຟແກ່ເຮົານໍາ
ເຮົາຈະປົນນິບັດໄຟ
ຍ້ອນການປົນນິບັດໄຟນັ້ນ
ຄວາມບໍລິສຸດຈັກມີແກ່ເຮົາ

[໕] ຂ້າພະເຈົ້າທູນວ່າ ຂ້າແຕ່ທ່ານຜູ້ເປັນມະນຸດ
ທ່ານເປັນຜູ້ຈະເລີນດີ ທ່ານເຂົ້າໃຈເທວະດາດີ
ເຊີນທ່ານປົນນິບັດໄຟ
ເຊີນທ່ານນໍາຟືນສໍາລັບດັງໄຟໄປເທີ້ນ

[໖] ລໍາດັບນັ້ນ ພຣະຊິນນະເຈົ້າຊົງຖືຟືນຈາກບ່ອນນັ້ນໄປດັງໄຟ
ແຕ່ບໍ່ເຮັດຟືນໃຫ້ໄໝ້ໃນກອງໄຟນັ້ນ
ຍ້ອນພຣະອົງຜູ້ສະແຫວງຫາຄຸນ
ອັນຍິ່ງໃຫຍ່ຊົງເຮັດປາຕິຫານ

[໗] ພຣະຊິນນະເຈົ້າຕັດວ່າ ໄຟຂອງທ່ານບໍ່ລຸກສະຫວ່າງແຈ້ງ
ເຄື່ອງບູຊາຂອງທ່ານບໍ່ມີການບໍາລຸງ
ໄຟຂອງທ່ານໄຮ້ປະໂຫຍດ
ເຊີນທ່ານມາປົນນິບັດໄຟຂອງເຮົາດີກວ່າ
[໘] ຂ້າພະເຈົ້າທູນຖາມວ່າ ຂ້າແຕ່ທ່ານຜູ້ມີຄວາມພຽນຫຼາຍ
ໄຟຂອງທ່ານເປັນເຊັ່ນໃດ
ຂໍຈົ່ງບອກໄຟຂອງທ່ານ
ເມື່ອບອກແກ່ຂ້າພະເຈົ້າແລ້ວ
ເຮົາທັງ ໔ ຈະບູຊາ (ຮ່ວມກັນ)

[໙] ພຣະຊິນນະເຈົ້າຕັດວ່າ ການບູຊາຂອງເຮົາມີໄວ້
(ເພື່ອປະໂຫຍດ) ໓ ປະການນີ້
ຄືເພື່ອດັບທຳທີ່ເປັນເຫດ ໑ ເພື່ອເຜົາກິເລດ ໑
ເພື່ອລະຄວາມຣິດສະຫຍາແລະຄວາມຂີ້ຖີ່ ໑

[໑໐] ຂ້າພະເຈົ້າທູນຖາມວ່າ ຂ້າແຕ່ທ່ານຜູ້ມີຄວາມພຽນຫຼາຍ
ຜູ້ມີຣະທຸກ ພຣະອົງເປັນຄົນເຊັ່ນໃດ ມີຕະກູນແນວໃດ
ຂ້າພະເຈົ້າພໍໃຈອາຈາຣະ ແລະຂໍ້ວັດປະຕິບັດຂອງພຣະອົງຫຼາຍ

[໑໑] ພຣະຊິນນະເຈົ້າຕັດຕອບວ່າ
ເຮົາເກີດໃນຕະກູນກະສັດ
ເຖິງຄວາມສຳເລັດແຫ່ງອະພິນຍາ
ສິ້ນອາສະວະທັງປວງແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໒] ຂ້າພະເຈົ້າທູນວ່າ ຂ້າແຕ່ພຣະອົງຜູ້ສ່ອງແສງສະຫວ່າງ
ຊົງບັນເທົາຄວາມມືດ
ຖ້າພຣະອົງເປັນພຣະສັບພັນຍູພຸດທະເຈົ້າ
ຂ້າພຣະອົງຈັກຂໍນອບນ້ອມພຣະອົງ
ພຣະອົງເປັນຜູ້ກະທຳບ່ອນສຸດທຸກ

[໑໓] ຂ້າພະເຈົ້າຈຶ່ງປູໜັງສັດຖວາຍໃຫ້ເປັນບ່ອນປະທັບນັ່ງ
ພຣະສັບພັນຍູປະທັບນັ່ງເທິງໜັງສັດນັ້ນ
ຂ້າພະເຈົ້າອຸປັດຖາກພຣະອົງ

[໑໔] ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງໜັງສັດທີ່ຂ້າພະເຈົ້າປູຖວາຍນັ້ນ
ຂ້າພະເຈົ້ານິມົນພຣະສຳມາສຳພຸດທະເຈົ້າແລ້ວໄດ້ໄປສູ່ພູເຂົາ

[໑໕] ເກັບໝາກພັບໃສ່ຫາບຈົນເຕັມ
ນຳໝາກມາຄັ້ນໃສ່ນ້ຳເຜິ້ງແລ້ວ
ໄດ້ຖວາຍແດ່ ພຣະພຸດທະເຈົ້າ

[໑໖] ເມື່ອຂ້າພະເຈົ້າແນມເບິ່ງຢູ່ ພຣະຊິນນະເຈົ້າຊົງສະເຫວີຍໃນຂະນະນັ້ນ
ຂ້າພະເຈົ້າແນມເບິ່ງພຣະອົງຜູ້ຊົງເປັນຜູ້ນຳສັດໂລກ
ທຳຈິດໃຫ້ເຫຼື້ອມໃສໃນພຣະອົງ

[໑໗]　ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບນັ່ງຢູ່ໃນອາສົມຂອງຂ້າພະເຈົ້າ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໘]　ເຮົາຈັກພະຍາກອນຜູ້ທີ່ເຫຼື້ອມໃສໄດ້ຖວາຍໝາກໄມ້
ໃຫ້ເຮົາສັນຈົນອີ່ມໜຳ ດ້ວຍມືຂອງຕົນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໙]　ຜູ້ນັ້ນຈັກຄອງເທວະສົມບັດ ໔໕ ຊາດ
ແລະຈັກເກີດເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໔໐]　ເຂົ້າ ນ້ຳ ຜ້າ ແລະບ່ອນນອນ ເຊິ່ງສົມຄວນແກ່ຄ່າຫຼາຍ
ດັ່ງຈະຮູ້ຄວາມດຳຣິຂອງເຂົາ ຜູ້ປະກອບດ້ວຍບຸນກຳ

[໔໑]　ປັດໄຈທັງຫຼາຍ ປະກອບດ້ວຍບຸນກຳຈັກບັງເກີດຂຶ້ນທັນທີ
ຜູ້ນີ້ຈັກບັນເທີງ ແລະບໍ່ມີໂຣກຕະຫຼອດເວລາ

[໔໔]　ເຂົາເກີດໃນກຳເນີດໃດ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກຳເນີດນັ້ນ ເຂົາຈັກໄດ້ເປັນມະນຸດ ມີສຸກໃນທີ່ທຸກແຫ່ງ

[໔໓]　ເຂົາເປັນຜູ້ຄົງແກ່ຮຽນ ຊົງມົນ ຈົບໄຕຣເພດ
ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າແລ້ວຈັກເປັນພຣະອະຣະຫັນ

[໔໔]　ຕັ້ງແຕ່ຂ້າພະເຈົ້າຈຳຄວາມໄດ້ ຮູ້ດຽງສາ
ຄວາມຂາດໃນໂພຄະສົມບັດບໍ່ມີແກ່ຂ້າພະເຈົ້າເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໕]　ຂ້າພະເຈົ້າບັນລຸເຖິງທຳຢ່າງປະເສີດແລ້ວ
ຖອນຣາຄະແລະໂທສະຂຶ້ນໄດ້ແລ້ວ
ສິ້ນອາສະວະທັງປວງແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໖]　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິດສະເມດເຕີຍຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຕິດສະເມດເຕີຍຍະເຖຣາປະທານທີ ໑ ຈົບ**

# ໔. ປຸນນະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸນນະກະເຖຣະ

(ພຣະປຸນນະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໙] ພຣະສະຍຳພູພຸດທະເຈົ້າ ຜູ້ບໍ່ຊິງພ່າຍແພ້
ຊົງພຣະປະຊວນ
ຊົງອາໄສເງີບສູງປະທັບຢູ່ລະຫວ່າງພູເຂົາ
[໕໐] ໃນຂະນະນັ້ນ ໄດ້ມີສຽງບັນລືລັ່ນຮອບອ້ອມ ອາສົມຂອງຂ້າພະເຈົ້າ
ເມື່ອພຣະພຸດທະເຈົ້າສະເດັດດັບຂັນທະປະຣິນິບພານ
ໄດ້ມີແສງສະຫວ່າງໃນຂະນະນັ້ນ
[໕໑] ໝີ ໝາໃນ ເສືອດາວ ເນື້ອຮ້າຍ ແລະພະຍາຣາດຊະສີ
ເທົ່າທີ່ມີຢູ່ໃນເຂດປ່າ
ທັງໝົດໄດ້ພາກັນສົ່ງສຽງຮ້ອງຂຶ້ນໃນຂະນະນັ້ນ

[໕໒] ຂ້າພະເຈົ້າເຫັນຄວາມອັດສະຈັນນັ້ນແລ້ວ ໄດ້ໄປສູ່ເງີບຜາ
ໃນບ່ອນນັ້ນ ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ບໍ່ຊິງພ່າຍແພ້ ສະເດັດດັບຂັນທະປະຣິນິບພານແລ້ວ

[໓໓] ເໝືອນຕົ້ນພະຍາໄມ້ສາລະມີດອກບານສະພັ່ງ
ເໝືອນດວງອາທິດອຸໄທ
ເໝືອນຖ່ານເພີງປາສະຈາກແປວໄຟ
ພຣະອົງຜູ້ບໍ່ຊົງພ່າຍແພ້ສະເດັດດັບຂັນທະປະຣິນິບພານແລ້ວ

[໓໔] ຂ້າພະເຈົ້ານຳຫຍ້າແລະໄມ້ມາລວມກັນແລ້ວ
ກໍ່ເປັນກອງຟອນຂຶ້ນໃນບ່ອນນັ້ນ
ເມື່ອເຮັດກອງຟອນດີແລ້ວ
ໄດ້ຖວາຍພຣະເພີງພຣະພຸດທະສະຣີຣະ

[໓໕] ເມື່ອຖວາຍພຣະເພີງພຣະພຸດທະສະຣີຣະແລ້ວໄດ້ໃຊ້ນ້ຳຫອມປະພົມ
ໃນຂະນະນັ້ນ ເທວະດາຢືນຢູ່ໃນອາກາດໄດ້ຣະບຸຊື່ວ່າ

[໓໖] ຟັງກ່ອນ ທ່ານຜູ້ເປັນມຸນີ ໃນຄັ້ງໜຶ່ງທີ່ທ່ານມີນາມວ່າ ປຸນນະກະ
ທ່ານກໍໄດ້ພ່ຳເພັງກິດນັ້ນແກ່ພຣະສະຍຳພູພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ

[໓໗] ຂ້າພະເຈົ້າເຄື່ອນຈາກກາຍນັ້ນແລ້ວ ໄດ້ໄປເກີດໃນເທວະໂລກ
ໃນເທວະໂລກນັ້ນ ກິ່ນທິບຍ່ອມຕົກລົງຈາກອາກາດ

[໓໘] ແມ່ນໃນພົບໃດ ໆ ຂ້າພະເຈົ້າກໍມີຊື່ວ່າ ປຸນນະກະ
ໃນຄັ້ງນັ້ນ ຂ້າພະເຈົ້າຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ກໍໃຫ້ຄວາມດຳຣິບໍລິບູນໄດ້

[໓໙] ນີ້ເປັນຊາດສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ແມ່ນໃນພົບນີ້ຊື່ຂອງຂ້າພະເຈົ້າກໍຍັງຜາກົດວ່າປຸນນະກະຄືກັນ

[໔໐] ຂ້າພະເຈົ້າໃຫ້ພຣະສຳມາສຳພຸດທະເຈົ້າພຣະນາມວ່າໂຄດົມສາກະຍະ
ຜູ້ປະເສີດ ຊົງພໍພຣະທະໄທແລ້ວ
ກຳນົດຮູ້ອາສະວະທັງປວງແລ້ວຈຶ່ງຢູ່ຢ່າງຜູ້ບໍ່ມີອາສະວະ

[໔໑] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພຣະເພີງພຣະພຸດທະສະຣີຣະ

[໔໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໓] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ
[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປຸນນະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ປຸນນະກະເຖຣາປະທານທີ ໔ ຈົບ**

## ໓. ເມດຕະຄູເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເມດຕະຄູເຖຣະ

(ພຣະເມດຕະຄູເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕] ໃນບ່ອນບໍ່ໄກພູເຂົາຫິມະພານມີພູໜ່ວຍໜຶ່ງຊື່ ອະໂສກ
ວິດສຸກຳເທບພະບຸດເນຣະມິດອາສົມ
ໃຫ້ແກ່ຂ້າພະເຈົ້າທີ່ພູເຂົາອະໂສກນັ້ນ
[໔໖] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ ຜູ້ເລີດ
ຊົງປະກອບດ້ວຍພຣະກະລຸນາ ເປັນພຣະມຸນີ
ເວລາເຊົ້າຊົງຄອງຜ້າແລ້ວ
ສະເດັດເຂົ້າມາບິນທະບາດໃນສຳນັກຂ້າພະເຈົ້າ
[໔໗] ຂ້າພະເຈົ້າໄດ້ເຫັນພຣະມະຫາວິຣະເຈົ້າພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກສະເດັດເຂົ້າມາ
ຈຶ່ງຮັບບາດຂອງພຣະສຸຄົດເຈົ້າແລ້ວ
ບັນຈຸເນີຍໃສແລະນ້ຳມັນຈົນເຕັມ

[໔໗] ຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນໍາສັດໂລກ ປະຄອງອັນຊະລີ
ເກີດຄວາມຮ່າເຣີງຢ່າງຍິ່ງ

[໔໙] ດ້ວຍຜົນແຫ່ງການຖວາຍເນີຍໃສ (ແລະນໍ້າມັນ) ນີ້
ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ຍ່ອມໄດ້ສຸກຢ່າງເຫຼືອລົ້ນ

[໕໐] ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່
ໃນພົບນ້ອຍພົບໃຫຍ່ ເວັ້ນວິນິບາດນະຣົກ
ຕັ້ງຈິດໝັ້ນໄວ້ໃນພຣະພຸດທະເຈົ້ານັ້ນ
ຍ່ອມໄດ້ບົດທີ່ບໍ່ຫວັ່ນໄຫວ

[໕໑] (ພຣະພຸດທະເຈົ້າຕັດວ່າ)
ພາມ ການທີ່ທ່ານໄດ້ເຫັນເຮົານັ້ນ
ເປັນລາບທີ່ທ່ານໄດ້ດີແລ້ວ
ດ້ວຍວ່າ ບຸກຄົນອາໄສການເຫັນເຮົາແລ້ວຈັກໄດ້ບັນລຸອະຣະຫັນ

[໕໒] ທ່ານບັນລຸຍົດໃຫຍ່ແລ້ວເປັນຜູ້ເບົາໃຈ ບໍ່ຕ້ອງຢ້ານ
ຖວາຍເນີຍໃສແກ່ເຮົາແລ້ວຈັກພົ້ນຈາກຊາດທຸກໄດ້

[໕໓] ດ້ວຍການຖວາຍເນີຍໃສນີ້ ແລະດ້ວຍການຕັ້ງເຈຕະນາໄວ້ໝັ້ນ
ຂ້າພະເຈົ້າຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ຍ່ອມໄດ້ສຸກຢ່າງເຫຼືອລົ້ນ

[໕໔] ດ້ວຍອະທິການນີ້ ແລະດ້ວຍຄວາມເປັນຜູ້ມີຈິດເມດຕາ
ຜູ້ນັ້ນຈັກຮື່ນຣົມຢູ່ໃນເທວະໂລກຕະຫຼອດ ໑໑໗ ກັບ

[໕໕] ຈັກໄດ້ເປັນທ້າວເທວະຣາດ ໓ ຊາດ ຕະຫຼອດ ໑໗ ກັບ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໕໖] ຈັກເກີດເປັນພຣະເຈົ້າຈັກກະພັດ ໕໑ ຊາດ
ຊົງເປັນໃຫຍ່ ມີໄຊຊະນະ ມີມະຫາສະມຸດທັງ ໔ ເປັນຂອບເຂດ
ເປັນໃຫຍ່ໃນຊົມພູທະວີບ

[໔໗] ມະຫາສະມຸດຜູ້ໃດ ເຮັດໃຫ້ສັ່ນໄຫວບໍ່ໄດ້
ແຜ່ນດິນຜູ້ໃດ ຍົກຂຶ້ນໄດ້ຍາກສັນໃດ
ໂພຄະສົມບັດຂອງຂ້າພະເຈົ້າກໍນັບປະມານບໍ່ໄດ້ສັນນັ້ນ

[໔໘] ຂ້າພະເຈົ້າບໍລິຈາກເງິນ ໒໐ ໂກດແລ້ວອອກບວດ
ສະແຫວງຫາກຸສົນບາງຢ່າງຢູ່ ຈຶ່ງເຂົ້າໄປຫາພາມພາວະຣີ

[໔໙] ຂ້າພະເຈົ້າຮ່ຳຮຽນລັກສະນະມົຮົງ ໒ ໃນມົນນັ້ນຢູ່
ຂ້າແຕ່ພຣະມະຫາມຸນີ
ພຣະອົງສະເດັດອຸບັດຂຶ້ນກຳຈັດຄວາມມືດນັ້ນແລ້ວ

[໒໐] ຂ້າແຕ່ພຣະມະຫາມຸນີ
ຂ້າພຣະອົງປະສົງຈະເຂົ້າເຝົ້າພຣະອົງຈຶ່ງມາ
ໄດ້ຟັງທຳຂອງພຣະອົງແລ້ວ
ໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໒໑] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍເນີຍໃສແດ່ ພຣະພຸດທະເຈົ້າ
ໃນລະຫວ່າງນີ້ ຈຶ່ງບໍ່ຮູ້ຈັກວ່າ
ຂ້າພະເຈົ້າຈະຕ້ອງຂໍເນີຍໃສເລີຍ

[໒໒] ເນີຍໃສນັ້ນຄືຈະຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຈຶ່ງເກີດຂຶ້ນຕາມຄວາມປາຖະໜາ
ຮູ້ຄວາມດຳຣິແລ້ວຈຶ່ງບັງເກີດ
ຂ້າພະເຈົ້າລ້ຽງດູພິກຂຸທັງປວງໃຫ້ອີ່ມໜຳ

[໒໓] ຊ່າງໜ້າອັດສະຈັນແທ້ ພຣະພຸດທະເຈົ້າ
ຊ່າງໜ້າອັດສະຈັນແທ້ ພຣະທຳ
ຊ່າງໜ້າອັດສະຈັນແທ້ ການທີ່ຂ້າພະເຈົ້າໄດ້ມາພົບພໍ້ກັບພຣະສາດສະດາ
ຂ້າພະເຈົ້າຖວາຍເນີຍໃສໜ້ອຍໜຶ່ງແຕ່ໄດ້ເນີຍໃສປະມານບໍ່ໄດ້

[໒໔] ນ້ຳໃນມະຫາສະມຸດມີປະມານຕັ້ງແຕ່ຕີນພູສິເນຣຸ
ເມື່ອທຽບກັບເນີຍໃສຂອງຂ້າພະເຈົ້າບໍ່ຮອດເສດສ້ຽວເລີຍ

[໒໕] ໂອກາດແຫ່ງຈັກກະວານທີ່ເຂົາເຮັດໃຫ້ເປັນກອງປະມານເທົ່າໃດ
ໂອກາດປະມານນັ້ນບໍ່ສົມກັບກອງຜ້າທີ່ບັງເກີດແກ່ຂ້າພະເຈົ້າ

[໖໖]　ພູເຂົາຫິມະພານມີຫີນລ້ວນແມ່ນຈະສູງຕິດຟ້າ
ກໍຍັງບໍ່ເທົ່າຂອງຫອມທີ່ຂ້າພະເຈົ້າລູບທາ

[໖໗]　ຜ້າຂອງຫອມ ເນີຍໃສ ແລະສິ່ງຂອງອື່ນ ທີ່ເກີດໃນປັດຈຸບັນ
ແລະນິບພານທີ່ປັດໄຈບໍ່ປຸງແຕ່ງ
ນີ້ເປັນຜົນແຫ່ງການຖວາຍເນີຍໃສ

[໖໘]　ຂ້າພະເຈົ້າມີສະຕິປັດຖານເປັນບ່ອນນອນ
ມີສະມາທິແລະຊານເປັນອາລົມ
ວັນນີ້ ຂ້າພະເຈົ້າເປັນຜູ້ເຮັດໃຫ້ໂພດຊົງເກີດ
ນີ້ເປັນຜົນແຫ່ງການຖວາຍເນີຍໃສ

[໖໙]　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໐]　ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໑]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເມດຕະຄູເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເມດຕະຄູເຖຣາປະທານທີ ໓ ຈົບ**

## ໔. ໂທຕະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂທຕະກະເຖຣະ

(ພຣະໂທຕະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໔] ຄັ້ງນັ້ນ ແມ່ນ້ຳພາຄີຣະຖີ ເກີດຈາກພູເຂົາຫິມະພານ
ໄຫຼຜ່ານໄປທາງປະຕູນະຄອນຫົງສະວະດີ

[໗໖] ອາຣາມຊື່ໂສພິຕະ ມະຫາຊົນສ້າງໄວ້ຢ່າງສວຍງາມໃກ້ຝັ່ງແມ່ນ້ຳ
ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເປັນຜູ້ນຳສັດໂລກ ປະທັບຢູ່ໃນອາຣາມນັ້ນ

[໗໔] ພຣະຜູ້ມີພຣະພາກເຈົ້າມີໝູ່ມະນຸດຫ້ອມລ້ອມ
ດັ່ງພຣະອິນຈາກສະຫວັນຊັ້ນຕາວະຕິງສາ
ປະທັບນັ່ງໃນອາຣາມນັ້ນ ບໍ່ເກງກົວເໝືອນຣາດຊະສີ

[໗໕] ຂ້າພະເຈົ້າເປັນພາມມີນາມວ່າ ສະລັງຄະ
ຢູ່ໃນນະຄອນຫົງສະວະດີ ພຣະມະຫາມຸນີກໍມີນາມແນວນັ້ນ

[໗໖] ຄັ້ງນັ້ນ ສິດ ໑໑໘ ຄົນ ແວດລ້ອມຂ້າພະເຈົ້າ
ຂ້າພະເຈົ້າພ້ອມດ້ວຍສິດເຫຼົ່ານັ້ນໄປສູ່ຝັ່ງແມ່ນ້ຳ

[໗໗] ໃນບ່ອນນັ້ນ ຂ້າພະເຈົ້າໄດ້ເຫັນສະມະນະຫຼາຍອົງ
ຜູ້ບໍ່ຄິດໂກງ ຜູ້ຊຳຣະບາບແລ້ວ
ໃນຄັ້ງນັ້ນ ຂ້າພະເຈົ້າກຳລັງຂ້າມແມ່ນ້ຳພາຄີຣະຖີຄິດແນວນີ້ວ່າ

[໗໘] ບຸດຂອງພຣະພຸດທະເຈົ້າຜູ້ມີຍົດຫຼາຍເຫຼົ່ານີ້
ຂ້າມແມ່ນ້ຳທັງໃນເວລາແລງແລະໃນເວລາເຊົ້າ
ຍ່ອມເຮັດຕົນໃຫ້ລຳບາກ ເຮັດຕົນໃຫ້ເດືອດຮ້ອນ

[໗໙] ບັນດິດຍ່ອມກ່າວສັນເສີນພຣະພຸດທະເຈົ້າວ່າ
ເປັນຜູ້ເລີດໃນໂລກພ້ອມທັງເທວະໂລກ
ເຄື່ອງສັກກາຣະສຳລັບຊຳຣະທາງ ຄື ຄະຕິໃນທັກຂິນາຂອງເຮົາກໍບໍ່ມີ

[໘໐] ທາງທີ່ດີ ເຮົາເພິ່ງໃຫ້ສ້າງຂົວຂ້າມແມ່ນ້ຳ
ຖວາຍແດ່ ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດເທີ້ນ
ເມື່ອໃຫ້ສ້າງຂົວນີ້ແລ້ວ ຈະຂ້າມພົບນີ້ໄປໄດ້

[໘໑] ຂ້າພະເຈົ້າເຊື່ອວ່າກຸສົນທີ່ຂ້າພະເຈົ້າເຮັດແລ້ວນີ້ ຈັກໄພບູນ
ຈຶ່ງໄດ້ໃຫ້ຊັບ ໑໐໐ ແດ່ ໑,໐໐໐ ແດ່
ແລ້ວໃຫ້ສ້າງຂົວ

[໗໔] ຂ້າພະເຈົ້າໃຫ້ສ້າງຂົວນັ້ນສຳເລັດແລ້ວ
ໄດ້ເຂົ້າເຝົ້າພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ປະນົມມືເໜືອຫົວແລ້ວໄດ້ຂາບທູນຄຳນີ້ວ່າ

[໗໓] ຂ້າພະເຈົ້າໄດ້ຈ່າຍຊັບ ໑໐໐ ແດ່ ໑,໐໐໐ ແດ່
ແລ້ວໃຫ້ສ້າງຂົວໃຫຍ່ ເພື່ອປະໂຫຍດແກ່ພຣະອົງ
ຂ້າແຕ່ພຣະມະຫາມຸນີ ຂໍໄດ້ໂຜດຊົງຮັບເທີ້ນ

[໗໔] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໗໕] ເຮົາຈັກພະຍາກອນຜູ້ທີ່ເຫຼື້ອມໃສ ເຊິ່ງໄດ້ໃຫ້ສ້າງຂົວ
ຖວາຍເຮົາດ້ວຍມືຂອງຕົນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໗໖] ຜູ້ນີ້ແມ່ນຕົກຈາກຮ່ອມພູກໍດີ ຈາກພູເຂົາກໍດີ ຈາກຕົ້ນໄມ້ກໍດີ
ແມ່ນຈຸຕິແລ້ວກໍຈັກໄດ້ບ່ອນຕັ້ງໝັ້ນ (ຄືບ່ອນເພິ່ງ)
ນີ້ເປັນຜົນແຫ່ງການຖວາຍຂົວ
[໗໗] ສັດຕູທັງຫຼາຍຂົ່ມບໍ່ໄດ້ ປຽບເໝືອນລົມຂົ່ມຕົ້ນໄຮ
ທີ່ມີຮາກແລະຍອຍງອກງາມບໍ່ໄດ້ສັ່ນນັ້ນ
ນີ້ເປັນຜົນແຫ່ງການຖວາຍຂົວ

[໗໘] ພວກໂຈນຂົ່ມເຫງບໍ່ໄດ້ ກະສັດທັງຫຼາຍບໍ່ດູໝິ່ນ
ຜູ້ນີ້ຈັກຜ່ານສັດຕູທັງປວງໄປໄດ້
ນີ້ເປັນຜົນແຫ່ງການຖວາຍຂົວ
[໗໙] ຜູ້ນີ້ປະກອບດ້ວຍບຸນກຳ
ເຖິງຈະຢູ່ໃນໂອກາດກາງແຈ້ງຖືກແດດກ້າແຜດເຜົາ
ກໍຈັກບໍ່ມີເວທະນາ

[໘໐] ໃນເທວະໂລກກໍດີ ໃນມະນຸດໂລກກໍດີ ຍານພາຫະນະຄືຊ້າງ
ທີ່ບຸນກຳເນຣະມິດດີແລ້ວ
ດັ່ງຈະຮູ້ຄວາມດຳຣິຂອງຜູ້ນັ້ນ ຈັກບັງເກີດໃນທັນທີ

[໙໑] ມ້າສິນທົບ ໑,໐໐໐ ໂຕ ເຊິ່ງເປັນພາຫະນະແລ່ນໄວປານກຳລັງລົມ
ຈັກຄອຍຖ້າຮັບໃຊ້ທັງເວລາເຊົ້າ ແລະເວລາຄ່ຳ
ນີ້ເປັນຜົນແຫ່ງການຖວາຍຂົວ

[໙໔] ຜູ້ນີ້ມາເກີດເປັນມະນຸດ ຈັກເປັນຜູ້ມີຄວາມສຸກ
ແມ່ນໃນການເກີດເປັນມະນຸດນີ້ ກໍຈັກມີຍານພາຫະນະຄືຊ້າງ

[໙໓] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໙໔] ຜູ້ນີ້ຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງ ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໙໕] ຊ່າງໜ້າພໍໃຈ ຂ້າພະເຈົ້າໄດ້ເຮັດກຳໄວ້ດີແລ້ວ
ໃນພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຂ້າພະເຈົ້າກະທຳສັກກາຣະໄວ້ໃນພຣະພຸດທະເຈົ້າພຣະອົງນັ້ນ
ຈຶ່ງບັນລຸຄວາມສິ້ນອາສະວະ

[໙໖] ຂ້າພະເຈົ້າເປັນຜູ້ມີຈິດເດັດດ່ຽວ ເພື່ອພ່ຳເພັງພຽນ
ເປັນຜູ້ສະງົບຣະງັບ ບໍ່ມີອຸປະທິ
ຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙໘] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ
ໄດ້ຮູ້ວ່າ ທ່ານພຣະໂທຕະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂທຕະກະເຖຣາປະທານທີ ໔ ຈົບ**

## ໕. ອຸປະສີວະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸປະສີວະເຖຣະ

(ພຣະອຸປະສີວະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໐] ໃນບ່ອນບໍ່ໄກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ອະໂນມະ
ເຂົາໄດ້ສ້າງອາສົມ ແລະສ້າງປັນນະສາລາໄວ້ຢ່າງດີເພື່ອຂ້າພະເຈົ້າ

[໑໐໑] ໃນບ່ອນບໍ່ໄກອາສົມຂອງຂ້າພະເຈົ້ານັ້ນ
ມີແມ່ນ້ຳສາຍໜຶ່ງໄຫຼຢູ່
ມີທ່ານ້ຳຮາບພຽງ ໜ້າອອນຊອນໃຈ
ມີກໍປະທຸມແລະກໍອຸບົນຈຳນວນຫຼາຍ
ເກີດຢູ່ທີ່ທ່ານ້ຳເຊິ່ງເຕັມປ່ຽມດ້ວຍນ້ຳ

[໑໐໒] ໃນແມ່ນ້ຳນັ້ນ ຝູງປາສະຫຼາດ ຝູງປາກະບອກ
ຝູງປາສະຫວາຍ ຝູງປາເຄົ້າ ຝູງປາຕະພຽນ
ແມ່ນ້ຳມີປາແລະເຕົ່າຊຸກຊຸມໄຫຼຢູ່ສະເໝີ

[໑໐໓] ມີຕົ້ນບີໝີ ຕົ້ນອະໂສກ ຕົ້ນເຂັມ
ຕົ້ນບຸນນາກ ຕົ້ນບຸນນາກເຂົາ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນໄປທົ່ວອາສົມຂອງຂ້າພະເຈົ້າ

[໑໐໔] ມີຕົ້ນອັນຊັນຊຽວ ຕົ້ນມະລິຊ້ອນ
ຕົ້ນສາລະ ຕົ້ນຊ້າງນ້າວ ຕົ້ນຈຳປາ
ຂຶ້ນຢູ່ເປັນໝູ່ ໆ ມີຫຼາຍ ມີດອກບານສະພັ່ງ

[໑໐໕] ຕົ້ນຮັກຟ້າຂາວ ຕົ້ນລຳດວນ ຕົ້ນໝາກຕ້ອງ

ຕົ້ນດູ່ ແລະຕົ້ນໝາກຊາງຫອມ
ມີດອກບານສະພັ່ງມີຢູ່ໃນທີ່ໃກ້ອາສົມຂອງຂ້າພະເຈົ້າ

[໑໐໖] ຕົ້ນຣາຊະພຶກ ຕົ້ນຫອນໄກ່
ຕົ້ນຄັດເຄົ້າ ຕົ້ນປະຍົງ ຕົ້ນໝາກກ່ຳຫຼວງ
ມີຢູ່ດາດດື່ນໂດຍຮ້ອບຕະຫຼອດເຄິ່ງໂຍດ

[໑໐໗] ຕົ້ນໂພ ຕົ້ນຊະບາຊ້ອນ ຕົ້ນແຄຝອຍ ຕົ້ນຍ່ານຊາຍ
ຕົ້ນປູ່ ຕົ້ນງິ້ວ ມີດອກບານສະພັ່ງ ມີຢູ່ຫຼາຍ
ໃກ້ແມ່ນ້ຳນັ້ນ ຕົ້ນກຳຍານ ມີດອກບານສະພັ່ງ
ມີຢູ່ຫຼາຍໃກ້ອາສົມຂອງຂ້າພະເຈົ້າໃກ້ຝັ່ງແມ່ນ້ຳນັ້ນ

[໑໐໘] ເມື່ອຕົ້ນໄມ້ເຫຼົ່ານີ້ມີດອກ ຕົ້ນໄມ້ຈຳນວນຫຼາຍກໍງາມ
ອາສົມຂອງຂ້າພະເຈົ້າໂດຍຮ້ອບ
ຫອມຟຸ້ງໄປດ້ວຍກິ່ນດອກໄມ້ນັ້ນ

[໑໐໙] ມີຕົ້ນສົ້ມມໍ ຕົ້ນໝາກຂາມປ້ອມ ຕົ້ນໝາກມ່ວງ
ຕົ້ນຫວ້າ ຕົ້ນສົ້ມມໍພິເພກ ຕົ້ນໝາກກະເບົາ ຕົ້ນຮົກຟ້າ
ຕົ້ນໝາກຕູມ ແລະຕົ້ນໝາກຜາງ ມີໝາກຫຼາຍ ໃນບ່ອນນັ້ນ

[໑໑໐] ຕົ້ນໝາກພັບ ຕົ້ນໝາກຫາດ ຕົ້ນໝາກຊາງ
ຕົ້ນໝາກເມົ່າ ຕົ້ນໝາກມີ້ປ່າ ຕົ້ນໝາກມີ້
ຕົ້ນກ້ວຍ ຕົ້ນຈັນ ມີໝາກຫຼາຍ ໃນບ່ອນນັ້ນ

[໑໑໑] ຕົ້ນໝາກກອກ ແລະຕົ້ນເຄືອເຖົາ ມີໝາກຫຼາຍໃນບ່ອນນັ້ນ
ແລະອອກໝາກມີຣົດຫວານທຸກລະດູການ
ຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໑໑໒] ຖົ່ວດຳ ຖົ່ວເຫຼືອງ ມີໝາກດົກຫຼາຍ
ຕົ້ນໄຣຍ້ອຍ ແລະຕົ້ນໄມ້ລຽບ
ຕົ້ນໝາກເດື່ອ ມີໝາກສຸກງອມເຕັມຕົ້ນ

[໑໑໓] ດີປີ ໝາກເຜັດ ຕົ້ນໄຮ ຕົ້ນໝາກຂວິດ ຕົ້ນໝາກເດື່ອ
ມີໝາກສຸກງອມຫຼາຍເຕັມຕົ້ນໃກ້ອາສົມຂອງຂ້າພະເຈົ້ານັ້ນ

[໑໑໔] ຕົ້ນໄມ້ເຫຼົ່ານີ້ແລະຊະນິດອື່ນອີກຫຼາຍ

ກໍາລັງເປັນໜ່ວຍໃກ້ອາສົມຂອງຂ້າພະເຈົ້າ
ແມ່ນໄມ້ດອກກໍມີຫຼາຍ
ມີດອກບານສະພັ່ງໃກ້ອາສົມຂອງຂ້າພະເຈົ້າ

[໑໑໕] ມັນເທດ ມັນອ້ອນ ມັນມືເສືອ
ຫອມ ກະທຽມ ແລະຄົນທາ
ອາລະກາ ຕົ້ນຕານ ມີຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໑໑໖] ໃນບ່ອນບໍ່ໄກອາສົມຂອງຂ້າພະເຈົ້າ
ມີສະໃຫຍ່ທໍາມະຊາດສະໜຶ່ງ
ມີນໍ້າເຢັນສະນິດ ມີທ່ານໍ້າຮາບພຽງເປັນຕາອອນຊອນໃຈ

[໑໑໗] ໃນສະນັ້ນ ມີບົວຫຼວງ ບົວຂາບ ສະພັ່ງດ້ວຍບົວຂາວ
ເດຍລະດາດດ້ວຍບົວເຜື່ອນ
ລົມພັດພາກິ່ນຫອມຕ່າງ ໆ ໂຊຍມາ

[໑໑໘] ປະທຸມບາງກໍ ມີດອກຈູມ ບາງກໍມີດອກບານ
ບາງກໍມີເກສອນຮ່ວງຫຼົ່ນ ຄົງມີແຕ່ຝັກບົວຈໍານວນຫຼາຍ

[໑໑໙] ນໍ້າຫວານໄຫຼອອກຈາກກ້ານບົວ
ນົມສົດແລະເນີຍໃສໄຫຼອອກຈາກເຫງົ້າບົວ
ອົບອວນໄປດ້ວຍກິ່ນຫອມຕ່າງ ໆ ດ້ວຍກິ່ນຫອມນັ້ນໂດຍຮອບ

[໑໒໐] ຕົ້ນໂກມຸດ ຕົ້ນຈິງກົນນີ ແລະຕົ້ນຕາເສືອ
ຜາກົດມີຫຼາຍທີ່ໃກ້ຂອບສະທໍາມະຊາດ
ຕົ້ນກາຣະເກດຈໍານວນຫຼາຍກໍມີດອກບານສະພັ່ງ

[໑໒໑] ຕົ້ນຊະບາມີດອກບານສະພັ່ງ ສາຫຣ່າຍມີກິ່ນຫອມ
ແຂ້ ຕະໂຂງ ນາກ ເກີດຢູ່ໃນສະນັ້ນ

[໑໒໒] ໃນສະນັ້ນມີງູຫຼາມ ງູເຫຼືອມ ປາສະຫຼາດ ປາກະບອກ
ປາສະຫວາຍ ປາເຄົ້າ ປາຕະພຽນ ຈໍານວນຫຼາຍ

[໑໒໓] ມີປາ ເຕົ່າ ແລະປາຝາ ນົກກາງແກ ນົກເປັດນໍ້າ
ນົກກາວັກ ນົກການໍ້າ ຊຸກຊຸມ

[໑໘໔] ນົກຕ້ອຍຕີວິດ ນົກຈັກກະພາກ ນົກຕັກຫອຍ ນົກໂພຣະດົກ
ກະແຕ ນົກເຂົາ ແຫຼວ ແລະນາກ ມີຢູ່ຫຼາຍ

[໑໘໕] ໝາຈິ້ງຈອກ ລູກນົກແຂກເຕົ້າ ໄກ່ປ່າ ຈາມະຣີ ມີຢູ່ຫຼາຍ
ກາ ແຫຼວ ແລະເສືອດາວ ກໍອາໄສສະນັ້ນລ້ຽງຊີວິດ

[໑໘໖] ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ໝາໃນ ເສືອດາວ
ລີງ ກິນນະຣະ ຜາກົດຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໑໘໗] ຂ້າພະເຈົ້າສູບກິ່ນຫອມເຫຼົ່ານັ້ນ ບໍລິໂພກໝາກໄມ້
ແລະດື່ມນ້ຳຫອມ ຢູ່ໃນອາສົມຂອງຂ້າພະເຈົ້າ

[໑໘໘] ຝູງໂຕຊາຍ ຝູງໝູ ຝູງຟານ
ນົກເຂົາຊະວາ ນົກເຂົາໄຟ ແລະນົກກົດ
ຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໑໘໙] ຫົງ ນົກກະຣຽນ ນົກຍູງ ນົກສາລິກາ ນົກກາເວົາ
ນົກເຄົ້າແມວ ນົກແສກ ນົກຫົວຂວານ ມີຢູ່ຫຼາຍໃນທີ່ນັ້ນ

[໑໙໐] ພວກຜີສາດທານົບ (ອະສູນ) ກຸມພັນ ຜີເສືອນ້ຳ
ຄຸດ ງູມີຫຼາຍ ຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໑໙໑] ລືສີທັງຫຼາຍ ມີອານຸພາບຫຼາຍ ມີຈິດສະງົບ ມີໃຈໝັ້ນຄົງ
ທັງໝົດລ້ວນຖືຄົນໂທນ້ຳ ນຸ່ງຫົ່ມໜັງສັດ
ພຽບພ້ອມດ້ວຍຊະດາ ແລະບໍຣິຂານ
ຢູ່ໃນອາສົມຂອງຂ້າພະເຈົ້າ

[໑໙໒] ລືສີເຫຼົ່ານັ້ນ ທອດຕາເບິ່ງປະມານຊົ່ວແອກ
ມີປັນຍາຮັກສາຕົນ ມີຄວາມປະພຶດສະງົບ
ສັນໂດດຕາມມີຕາມໄດ້ ຢູ່ໃນອາສົມຂອງຂ້າພະເຈົ້າ

[໑໙໓] ລືສີເຫຼົ່ານັ້ນ ສະລັດຜ້າຄາກອງ
ເຄາະໜັງສັດອາໄສພະລັງຂອງຕົນ
ເຫາະໄປໄດ້ໃນອາກາດ ໃນຄັ້ງນັ້ນ

[໑໙໔] ລືສີເຫຼົ່ານັ້ນ ບໍ່ຕ້ອງນຳນ້ຳ ຫຼື ຟືນສຳລັບດັງໄຟມາ

ສິ່ງເຫຼົ່ານັ້ນສົມບູນຂຶ້ນເອງ
ນີ້ເປັນຜົນແຫ່ງປາຕິຫານ

[໑໓໕] ລືສີເຫຼົ່ານັ້ນ ນຳຣາງເຫຼັກມາ ຢູ່ທ່າມກາງປ່າ
ປຽບເໝືອນຊ້າງກຸນຊອນມະຫານາກ
(ແລະ) ພະຍາຣາດຊະສີຜູ້ບໍ່ເກງກົວສັນນັ້ນ

[໑໓໖] ລືສີເຫຼົ່ານັ້ນ ຮູ້ກຳລັງຂອງຕົນແລ້ວ
ພວກໜຶ່ງໄປອະປະຣະໂຄຍານທະວີບ
ພວກໜຶ່ງໄປປຸບພະວິເທຫະທະວີບ
ພວກໜຶ່ງໄປອຸດຕະຣະກຸຣຸທະວີບ

[໑໓໗] ລືສີເຫຼົ່ານັ້ນ ຕ່າງນຳອາຫານ
ຈາກທະວີບນັ້ນ ໆ ມາບໍລິໂພກຮ່ວມກັນ
ເມື່ອລືສີເຫຼົ່ານັ້ນຜູ້ມີເດດແຜ່ໄປ
ຜູ້ຄົງທີ່ ທັງໝົດຫຼີກໄປຢູ່

[໑໓໘] ຍ້ອນສຽງໜັງສັດຂອງພວກລືສີ
ປ່າຍ່ອມມີສຽງດັ່ງສະນັ່ນໃນຄັ້ງນັ້ນ
ຂ້າແຕ່ພຣະມະຫາວີຣະ ພວກສິດຂອງຂ້າພະເຈົ້າເຫຼົ່ານັ້ນ
ມີຕະບະແກ່ກ້າເຊັ່ນນີ້

[໑໓໙] ຂ້າພະເຈົ້າມີລືສີເຫຼົ່ານັ້ນແວດລ້ອມ
ຢູ່ໃນອາສົມຂອງຕົນ
ລືສີເຫຼົ່ານັ້ນ ແມ່ນຖືກແນະນຳແລ້ວ
ກໍຍິນດີດ້ວຍກຳຂອງຕົນ ມາປະຊຸມພ້ອມກັນແລ້ວ

[໑໔໐] ລືສີເຫຼົ່ານັ້ນ ເພີດເພີນໃນກຳຂອງຕົນ
ເປັນຜູ້ມີສີນ ມີປັນຍາຮັກສາຕົນ
ແລະສະຫຼາດໃນອັບປະມັນຍາ ໃຫ້ຂ້າພະເຈົ້າຍິນດີ

[໑໔໑] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ຜູ້ຊົງເປັນຜູ້ນຳໂດຍວິເສດ
ຊົງຮູ້ເຖິງການປະຊຸມແລ້ວສະເດັດເຂົ້າມາໃກ້

[໑໔໘] ເມື່ອແລ້ວພຣະສຳມາສຳພຸດທະເຈົ້າ
ຜູ້ຊົງຕັດສະຮູ້ເອງ ຜູ້ມີຄວາມພຽນ
ມີປັນຍາຮັກສາຕົນ ເປັນພຣະມຸນີ ຈຶ່ງປະຄອງບາດ
ແລ້ວສະເດັດເຂົ້າມາເພື່ອພິກສາ

[໑໔໙] ຂ້າພະເຈົ້າໄດ້ເຫັນພຣະມະຫາວີຣະເຈົ້າ
ພຣະນາມວ່າປະທຸມຸດຕະຣະ ສະເດັດເຂົ້າມາ
ຈຶ່ງປູເຄື່ອງປູຫຍ້າແລ້ວໂຮຍດ້ວຍດອກສາລະ

[໑໕໔] ທູນນິມົນພຣະສຳມາສຳພຸດທະເຈົ້າປະທັບນັ່ງແລ້ວ
ທັງດີໃຈແລະສະລົດໃຈ ໄດ້ຟ້າວຂຶ້ນໄປເທິງພູເຂົາ
ແລ້ວນຳເກດສະໜາມາ

[໑໕໕] ໄດ້ເກັບໝາກນີ້ທີ່ມີກິ່ນຫອມຄ້າຍກິ່ນທິບ
ໝາກໃຫຍ່ປະມານເທົ່າໝໍ້ ຍົກຂຶ້ນບ່າແບກມາ
ເຂົ້າເຝົ້າພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳໂດຍວິເສດ

[໑໕໖] ໄດ້ຖວາຍໝາກນີ້ແດ່ພຣະພຸດທະເຈົ້າແລ້ວ ໃຊ້ເກດສະໜາລູບທາ
ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຂາບໄຫວ້ພຣະພຸດທະເຈົ້າຜູ້ປະເສີດສຸດ

[໑໕໗] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ
ຜູ້ສົມຄວນຮັບເຄື່ອງບູຊາ ປະທັບນັ່ງໃນທ່າມກາງໝູ່ລືສີ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໕໘] ເຮົາຈັກພະຍາກອນຜູ້ທີ່ໄດ້ຖວາຍໝາກນີ້
ເກດສະໜາ ແລະອາສະນະແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໕໙] ໃນບ້ານກໍຕາມ ໃນປ່າກໍຕາມ
ທີ່ເງິບຜາກໍຕາມ ໃນຖ້ຳກໍຕາມ
ໂພຊະນາຫານດັ່ງຈະຮູ້ຈິດຂອງຜູ້ນີ້ ຈັກບັງເກີດຂຶ້ນ

[໑໖໐] ຄົນຜູ້ນີ້ບັງເກີດໃນເທວະໂລກ ຫຼື ໃນມະນຸດໂລກກໍຕາມ
ຈັກໃຫ້ບໍລິສັດອີ່ມເອີບດ້ວຍໂພຊະນາຫານແລະຜ້າ

[໑໕໑]　ຜູ້ນີ້ເກີດໃນກຳເນີດໃດ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກຳເນີດນັ້ນ ຈັກມີໂພຄະນັບບໍ່ຖ້ວນວຽນວ່າຍຕາຍເກີດໄປ

[໑໕໒]　ຈັກຮື່ນຣົມໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໑໕໓]　ຈັກຄອງເທວະສົມບັດ ໆໆ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນ ນັບຊາດບໍ່ຖ້ວນ

[໑໕໔]　ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໕໕]　ຜູ້ນີ້ຈັກມີນາມວ່າ ອຸປະສີວະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໑໕໖]　ການທີ່ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳ
ເປັນລາບທີ່ຂ້າພະເຈົ້າໄດ້ດີແລ້ວ
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໕໗]　ໃນບ້ານກໍຕາມ ໃນປ່າກໍຕາມ
ທີ່ເງິບຜາກໍຕາມ ໃນຖ້ຳກໍຕາມ
ໂພຊະນາຫານດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຍ່ອມມີແກ່ຂ້າພະເຈົ້າທຸກເມື່ອ

[໑໕໘]　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໕໙]　ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໑໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໒ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸປະສີວະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸປະສີວະເຖຣາປະທານທີ ໕ ຈົບ**

## ໒. ນັນທະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນັນທະກະເຖຣະ

(ພຣະນັນທະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໒໑] ເມື່ອກ່ອນ ຂ້າພະເຈົ້າເປັນພານເນື້ອ
ຢູ່ໃນປ່າດົງທຶບທ່ຽວສະແຫວງຫາເນື້ອຟານຢູ່ ໄດ້ພົບພຣະສະຍໍາພູ

[໑໒໔] ຄັ້ງນັ້ນ ພຣະສະຍໍາພູປັດເຈກພຸດທະເຈົ້າພຣະນາມວ່າ ອະນຸຣຸດທະນັ້ນ
ຜູ້ບໍ່ຊົງພ່າຍແພ້ ເປັນນັກປາດ
ຊົງປະສົງວິເວກຈຶ່ງສະເດັດເຂົ້າປ່າ

[໑໒໓] ຂ້າພະເຈົ້າຖືທ່ອນໄມ້ ໔ ທ່ອນ ມາປັກລົງເປັນ ໔ ເສົ້າ
ເຮັດເປັນມົນດົບຮຽບຮ້ອຍແລ້ວ ມຸງດ້ວຍດອກປະທຸມ

[໑໒໔] ເມື່ອມຸງມົນດົບແລ້ວ ໄດ້ຖວາຍອະພິວາດພຣະສະຍໍາພູ
ຖິ້ມທະນູໄວ້ ໃນບ່ອນນັ້ນເອງ ແລ້ວບວດເປັນບັນພະຊິດ

[໑໒໕] ເມື່ອຂ້າພະເຈົ້າບວດແລ້ວບໍ່ດົນ ກໍເກີດເຈັບໄຂ້ຂຶ້ນ
ຂ້າພະເຈົ້າຣະລຶກເຖິງບຸບພະກໍາແລ້ວ ກໍໄດ້ຕາຍໄປໃນບ່ອນນັ້ນ

[໑໒໒] ຂ້າພະເຈົ້າປະກອບດ້ວຍບຸບພະກໍາ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດຸສິດ
ໃນສະຫວັນຊັ້ນດຸສິດນັ້ນ
ວິມານຄໍາບັງເກີດແກ່ຂ້າພະເຈົ້າຕາມປາຖະໜາ

[໑໖໗] ຂ້າພະເຈົ້າອະທິຖານຍານພາຫະນະທິບຫຽມດ້ວຍມ້າພັນໂຕ
ຂີ້ນຍານພາຫະນະນັ້ນແລ້ວ ໄປໄດ້ຕາມປາຖະໜາ

[໑໖໘] ເມື່ອຂ້າພະເຈົ້າອັນບຸນກຳນຳ
ຈາກມະນຸດໂລກນັ້ນໄປເກີດເປັນເທວະດາ
ມົນດົບຍ່ອມກາງກັ້ງໄວ້ແກ່ຂ້າພະເຈົ້າຕະຫຼອດ ໑໐໐ ໂຍດໂດຍຮ້ອບ

[໑໖໙] ຂ້າພະເຈົ້ານັ້ນນອນຢູ່ເທິງບ່ອນນອນທີ່ບໍ່ມີເຄື່ອງມຸງ
ປູດ້ວຍດອກໄມ້
ດອກປະທຸມທັງຫຼາຍຍ່ອມຕົກລົງມາ
ຈາກອາກາດຕະຫຼອດການເປັນນິດ

[໑໗໐] ເມື່ອພະຍັບແດດເຕັ້ນໄຫວຢູ່ ເມື່ອແດດແຜດເຜົາຢູ່
ແດດຍ່ອມບໍ່ແຜດເຜົາຂ້າພະເຈົ້າ
ນີ້ເປັນຜົນແຫ່ງການເຮັດມົນດົບຖວາຍ

[໑໗໑] ຂ້າພະເຈົ້າລ່ວງພົ້ນທຸກຄະຕິແລ້ວ
ອະບາຍທັງຫຼາຍປິດແລ້ວສຳລັບຂ້າພະເຈົ້າ
(ເມື່ອຂ້າພະເຈົ້າຢູ່) ທີ່ມົນດົບຫຼືທີ່ເຫງົ້າຕົ້ນໄມ້
ຄວາມຮ້ອນຍ່ອມບໍ່ມີແກ່ຂ້າພະເຈົ້າ

[໑໗໒] ຂ້າພະເຈົ້າອະທິຖານສັນຍາວ່າເປັນແຜ່ນດິນແລ້ວ
ຂ້າມທະເລໄປກໍໄດ້ ກຳຂ້າພະເຈົ້າເຮັດໄວ້ດີແລ້ວ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໑໗໓] ຂ້າພະເຈົ້າເຮັດທາງໃນອາກາດແລ້ວເຫາະໄປໃນອາກາດກໍໄດ້
ໜ້າພໍໃຈແທ້ ກຳຂ້າພະເຈົ້າເຮັດໄວ້ດີແລ້ວ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໑໗໔] ຂ້າພະເຈົ້າຣະລຶກຊາດກ່ອນ ໆ ໄດ້
ທິບພະຈັກຂຸຂ້າພະເຈົ້າຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງຫຼາຍຂອງຂ້າພະເຈົ້າສິ້ນແລ້ວ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໗໕] ຊາດກ່ອນຂ້າພະເຈົ້າລະໄດ້ແລ້ວ
ຂ້າພະເຈົ້າເປັນໂອຣົດຂອງພຣະພຸດທະເຈົ້າ

ແລະເປັນທາຍາດໃນພຣະສັດທຳ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໗໖] ຂ້າພະເຈົ້າໃຫ້ພຣະສຸຄົດເຈົ້າພຣະນາມວ່າ ໂຄດົມສາກະຍະ
ຜູ້ປະເສີດ ຊົງພໍພຣະຫະໄທແລ້ວ
ເປັນທຸງໄຊແຫ່ງທຳ ແລະເປັນທຳທາຍາດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ
[໑໗໗] ຂ້າພະເຈົ້າໄດ້ບຳຣຸງພຣະສຳພຸດທະເຈົ້າຜູ້ໂຄດົມສາກະຍະຜູ້ປະເສີດ
ເປັນຜູ້ນຳສັດໂລກແລ້ວ
ໄດ້ທູນຖາມເຖິງທາງທີ່ຈະໄປນິບພານ
[໑໗໘] ພຣະພຸດທະເຈົ້າອັນຂ້າພະເຈົ້າທູນແລ້ວ
ໄດ້ຕັດບອກບົດທີ່ເລິກເຊິ່ງລະອຽດ
ຂ້າພະເຈົ້າຟັງທຳຂອງພຣະອົງແລ້ວ
ໄດ້ບັນລຸຄວາມສິ້ນອາສະວະ
[໑໗໙] ໜ້າພໍໃຈຫຼາຍກຳຂ້າພະເຈົ້າເຮັດໄວ້ດີແລ້ວ
ຂ້າພະເຈົ້າລຸດພົ້ນຈາກຊາດແລ້ວ ສິ້ນອາສະວະທັງປວງແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໘໐] ກິເລດທັງຫຼາຍຂ້າພະເຈົ້າກຳເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກຳຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກຳໄດ້ກະທຳສຳເລັດແລ້ວ

[໑໘໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກຳໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະບັນທະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ບັນທະກະເຖຣາປະທານທີ ໖ ຈົບ**

# ໗. ເຂມະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເຂມະກະເຖຣະ

(ພຣະເຂມະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗໓] ຄັ້ງນັ້ນ ຂ້າພະເຈົ້າເປັນດາບົດຊື່ ອະໂນມະ
ອາໄສເງີບຜາສູງສ້າງອາສົມໄວ້ຢ່າງດີ
ຢູ່ໃນປັນນະສາລາ

[໑໗໔] ການພ່ຳເພັງຕະບະຂອງຂ້າພະເຈົ້ານັ້ນສຳເລັດແລ້ວ
ຂ້າພະເຈົ້າເຖິງຄວາມສຳເລັດໃນພະລັງຂອງຕົນ
ກ້າຫານໃນສາມັນຍະຄຸນຂອງຕົນ ມີຄວາມພຽນ
ມີປັນຍາຮັກສາຕົນ ເປັນມຸນີ

[໑໗໕] ແກ່ກ້າໃນລັດທິສະໄໝຂອງຕົນ
ສະຫຼາດໃນການໂຕ້ຕອບ
ໄປໄດ້ທັງເທິງພື້ນດິນ ແລະໃນອາກາດ
ສະຫຼາດໃນລາງຮ້າຍລາງດີ

[໑໗໖] ປາສະຈາກຄວາມເສົ້າໂສກ ບໍ່ແຂ່ງດີ
ມີອາຫານໜ້ອຍ (ສັນອາຫານໜ້ອຍ)
ບໍ່ໂລບຈັດ ສັນໂດດຕາມມີຕາມໄດ້
ມີປົກກະຕິເຂົ້າຊານ ຍິນດີໃນຊານ ເປັນມຸນີ

[໑໗໗] ຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປິຍະທັດສີ
ຜູ້ເລີດ ປະກອບດ້ວຍພຣະກະລຸນາ ເປັນມຸນີ
ພຣະອົງຊົງປະສົງຈະຊ່ອຍສັດໃຫ້ຂ້າມພົ້ນ (ຈາກວັດຕະສົງສານ)
ຈຶ່ງຊົງແຜ່ພຣະກະລຸນາໄປ

[໑໗໘] ພຣະມະຫາມຸນີຊົງພຣະນາມວ່າ ປິຍະທັດສີ
ຊົງພິຈາລະນາເຫັນຄົນຜູ້ຄວນຕັດສະຣູ້ແລ້ວ
ກໍສະເດັດໄປປະທານໂອວາດໃນທີ່ ໑,໐໐໐ ຈັກກະວານ

[໑໗໙] ພຣະອົງຊົງປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງສະເດັດເຂົ້າມາຍັງອາສົມຂອງຂ້າພະເຈົ້າ
ຂ້າພະເຈົ້າບໍ່ເຄີຍເຫັນພຣະຊິນນະເຈົ້າມາກ່ອນ
ແລະບໍ່ເຄີຍໄດ້ຟັງມາຈາກຜູ້ໃດ

[໑໙໐] ລາງດີລາງຮ້າຍ ຄວາມຝັນ
ແລະລັກສະນະດີຮ້າຍ ຂ້າພະເຈົ້າຮູ້ດີແລ້ວ
ຂ້າພະເຈົ້າໄປໄດ້ທັງເທິງພື້ນດິນ ແລະໃນອາກາດ
ສະຫຼາດໃນບົດນັກຂະສັດ

[໑໙໑] ຂ້າພະເຈົ້ານັ້ນໄດ້ຟັງຂ່າວພຣະພຸດທະເຈົ້າແລ້ວ
ທຳຈິດໃຫ້ເຫຼື້ອມໃສໃນພຣະພຸດທະອົງ
ຈະຢືນຫຼືນັ່ງຢູ່ກໍຕາມ
ຍ່ອມຣະລຶກເຖິງຕະຫຼອດການເປັນນິດ
[໑໙໒] ເມື່ອຂ້າພະເຈົ້າຣະລຶກເຖິງຢູ່ແນວນີ້
ແມ່ນພຣະຜູ້ມີພຣະພາກເຈົ້າກໍຊົງຣະລຶກເຖິງ
ເມື່ອຂ້າພະເຈົ້າຣະລຶກເຖິງພຣະພຸດທະເຈົ້າ ປີຕິກໍເກີດຂຶ້ນທັນທີ
[໑໙໓] ພຣະມະຫາມຸນີຊົງຖ້າເວລາອີກຈັກໜ້ອຍແລ້ວ
ຈຶ່ງສະເດັດມາຫາຂ້າພະເຈົ້າ
ແມ່ນເມື່ອພຣະອົງສະເດັດມາເຖິງ
ຂ້າພະເຈົ້າກໍບໍ່ຮູ້ຈັກວ່າຜູ້ນີ້ຄືພຣະພຸດທະມະຫາມຸນີ

[໑໙໔] ພຣະມະຫາມຸນີພຣະນາມວ່າ ປິຍະທັດສີ ຜູ້ອະນຸເຄາະ
ປະກອບດ້ວຍພຣະກະລຸນາຊົງໃຫ້ຮູ້ຈັກພຣະອົງວ່າ
ເຮົາເປັນພຣະພຸດທະເຈົ້າໃນມະນຸດໂລກພ້ອມທັງເທວະໂລກ
[໑໙໕] ເມື່ອຂ້າພະເຈົ້າຮູ້ຈັກຊັດແຈ້ງວ່າ
ພຣະອົງເປັນພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປິຍະທັດສີ
ຜູ້ເປັນມະຫາມຸນີແລ້ວ
ຈຶ່ງກະທຳຈິດຂອງຕົນໃຫ້ເຫຼື້ອມໃສ ໄດ້ຂາບທູນຄຳນີ້ວ່າ
[໑໙໖] ນິມົນພິກຂຸທັງປວງນັ່ງເທິງຕັ່ງ
ເທິງບັນລັງ ແລະເທິງພະນັກພິງ
ສ່ວນພຣະອົງຜູ້ມີປົກກະຕິເຫັນເຫດທັງໝົດ
ຂໍເຊີນປະທັບເທິງອາສະນະທີ່ຮຸ່ງເຮືອງ

[໑໘໗] ໃນຂະນະນັ້ນ ຂ້າພະເຈົ້າເນຣະມິດຕັ່ງເຊິ່ງສຳເລັດດ້ວຍແກ້ວລ້ວນ ໆ ແລ້ວ
ຖວາຍອາສະນະທີ່ເນຣະມິດດ້ວຍລິດແດ່ພຣະມຸນີພຣະນາມວ່າ ປີຍະທັດສີ

[໑໘໘] ເມື່ອພຣະພຸດທະເຈົ້າປະທັບນັ່ງ
ເທິງຕັ່ງແກ້ວທີ່ຂ້າພະເຈົ້າເນຣະມິດດ້ວຍລິດແລ້ວ
ຂ້າພະເຈົ້າໄດ້ຖວາຍໝາກຫວ້າໃຫຍ່ປະມານເທົ່າໝໍ້ທັນທີ

[໑໘໙] ພຣະມະຫາມຸນີຊົງໃຫ້ຄວາມຣ່າເຣິງເກີດແກ່ຂ້າພະເຈົ້າແລ້ວ
ຊົງສະເຫວີຍແລ້ວ
ໃນຄັ້ງນັ້ນ ຂ້າພະເຈົ້າກະທຳຈິດໃຫ້ເຫຼື້ອມໃສແລ້ວ
ຖວາຍອະພິວາດພຣະສາດສະດາ

[໘໐໐] ສ່ວນພຣະຜູ້ມີພຣະພາກເຈົ້າພຣະນາມວ່າປີຍະທັດສີ ຜູ້ຈະເລີນທີ່ສຸດໃນໂລກ
ຊົງອົງອາດກວ່ານໍຣະຊົນ ປະທັບນັ່ງຢູ່ເທິງອາສະນະແກ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໘໐໑] ເຮົາຈັກພະຍາກອນຜູ້ທີ່ໄດ້ຖວາຍຕັ່ງແກ້ວ ແລະຜົນເຊິ່ງເປັນອຳມະຕະແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໘໐໒] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໗໗ ກັບ
ຈັກເປັນພຣະເຈົ້າຈັກກະພັດ ໗໕ ຊາດ

[໘໐໓] ຈັກເປັນຈອມເທບຄອງເທວະສົມບັດ ໓໒ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໘໐໔] ຈັກໄດ້ບັນລັງຄຳ ບັນລັງເງິນ ບັນລັງແກ້ວທັບທິມ
ແລະບັນລັງແກ້ວລ້ວນ ຈຳນວນຫຼາຍ ທີ່ເຮັດຢ່າງສວຍງາມ

[໘໐໕] ບັນລັງຫຼາຍລົ້ນ ຈັກແວດລ້ອມຜູ້ນີ້ເຊິ່ງເກີດເປັນມະນຸດ
ພຽບພ້ອມດ້ວຍບຸນກຳ ແມ່ນຢ່າງຢູ່ ທຸກເມື່ອ

[໘໐໖] ຜາສາດທີ່ເປັນເຮືອນຍອດ ແລະບ່ອນນອນອັນຄວນຄ່າຫຼາຍ
ດັ່ງຈະຮູ້ຈິດຂອງຜູ້ນີ້ ບັງເກີດຂຶ້ນໃນຂະນະນັ້ນ ໆ ເອງ

[໘໐໗] ຊ້າງພາຍຊາດມາຕັງຄະ ໖໐,໐໐໐ ເຊືອກ
ປະດັບດ້ວຍເຄື່ອງອະລັງການທັງປວງ

ມີສາຍປະໂຄນພານໜ້າແລະພານຫຼັງເຮັດດ້ວຍຄຳ
ປະກອບດ້ວຍເຄື່ອງປະດັບຫົວແລະຕາໜ່າງລ້ອນເປັນຄຳ

[໔໐໘] ມີຄວານຊ້າງຜູ້ຖືຫອກຊັດແລະຂໍຂຶ້ນຂີ່ປະຈຳ
ພົນຊ້າງເຫຼົ່ານັ້ນຈັກບຳລຸງຜູ້ນີ້
ນີ້ເປັນຜົນແຫ່ງການຖວາຍຕັ່ງແກ້ວ

[໔໐໙] ມ້າສິນທົບຊາດອາຊາໄນ ໖໐,໐໐໐ ໂຕ
ເປັນພາຫະນະແລ່ນໄວ ປະດັບດ້ວຍເຄື່ອງອະລັງການທັງປວງ

[໔໑໐] ມີທະຫານມ້າຖືທະນູສວມເກາະໜັງຂຶ້ນຂີ່ປະຈຳ
ພົນມ້າເຫຼົ່ານັ້ນຈັກບຳລຸງຜູ້ນີ້
ນີ້ເປັນຜົນແຫ່ງການຖວາຍຕັ່ງແກ້ວ

[໔໑໑] ລົດ ໖໐,໐໐໐ ຄັນ ປະດັບດ້ວຍເຄື່ອງອະລັງການທັງປວງ
ຫຸ້ມດ້ວຍໜັງເສືອເຫຼືອງດ້ວຍ
ຫຸ້ມດ້ວຍໜັງເສືອໂຄ່ງດ້ວຍ ປັກທຸງໜ້າລົດ

[໔໑໒] ມີນາຍສາຣະຖີຖືກົດແລະທະນູຂຶ້ນປະຈຳ
ຈັກແວດລ້ອມຜູ້ນີ້ຢູ່ເປັນນິດ
ນີ້ເປັນຜົນແຫ່ງການຖວາຍຕັ່ງແກ້ວ

[໔໑໓] ແມ່ງົວນົມ ໖໐,໐໐໐ ໂຕ ຈັກຕົກລູກງົວຜູ້ໂຕປະເສີດ
ນີ້ເປັນຜົນແຫ່ງການຖວາຍຕັ່ງແກ້ວ

[໔໑໔] ສະຕີ ໖໐,໐໐໐ ນາງ ປະດັບດ້ວຍເຄື່ອງອະລັງການທັງປວງ
ສວມໃສ່ຜ້າອາພອນຢ່າງງົດງາມ ຫ້ອຍຕຸ້ມຫູແກ້ວມະນີ

[໔໑໕] ມີຕາມົນໃຫຍ່ ມີປົກກະຕິຮ່າເຮີງ ຮູບຮ່າງງາມ ແອວນ້ອຍແອວບາງ
ຈັກແວດລ້ອມຜູ້ນີ້ເປັນນິດ
ນີ້ເປັນຜົນແຫ່ງການຖວາຍຕັ່ງແກ້ວ

[໔໑໖] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ພຣະພຸດທະເຈົ້າພຣະນາມວ່າໂຄດົມ ຜູ້ມີພຣະຈັກຂຸ
ຊົງກຳຈັດຄວາມມືດມົນອົນທະການ ຈັກອຸບັດຂຶ້ນໃນໂລກ

[໘໑໗] ຜູ້ນີ້ອາໄສການໄດ້ເຫັນພຣະພຸດທະເຈົ້າພຣະອົງນັ້ນ
ຈັກຕັດຄວາມກັງວົນອອກບວດ
ຈັກໃຫ້ພຣະສາດສະດາຊົງພໍພຣະທະໄທແລ້ວ ຍິນດີຍິ່ງຢູ່ໃນສາດສະໜາ

[໘໑໘] ໄດ້ຟັງທຳຂອງພຣະສາດສະດາພຣະອົງນັ້ນແລ້ວ
ຈັກເຜົາກິເລດທັງຫຼາຍ
ກຳນົດຮູ້ອາສະວະທັງປວງຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໘໑໙] ຂ້າພະເຈົ້າມີຄວາມພຽນສຳລັບນຳພາທຸຣະໄປ
ເປັນຄວາມພຽນນຳມາເຊິ່ງທຳເປັນແດນກະເສມຈາກໂຍຄະ
ຂ້າພະເຈົ້າປາຖະໜາປະໂຫຍດສູງສຸດ ຢູ່ໃນສາດສະໜາ

[໘໘໐] ນີ້ເປັນຊາດສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ອາສະວະທັງປວງຂອງຂ້າພະເຈົ້າສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໘໘໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໘໘] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘໘໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເຫມະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ເຫມະກະເຖຣາປະທານທີ ໗ ຈົບ**

# ໗. ໂຕເທີຍຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂຕເທີຍຍະເຖຣະ

(ພຣະໂຕເທີຍຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔໔] ຄັ້ງນັ້ນ (ຂ້າພະເຈົ້າເກີດເປັນ) ພຣະຣາຊາພຣະນາມວ່າ ວິຊິຕະໄຊ
ໃນນະຄອນເກຕຸມະດີ ເປັນເມືອງຊັ້ນເລີດ ເປັນຜູ້ແກ່ກ້າ
ເຕັມປ່ຽມດ້ວຍຄວາມກ້າຫານ
ປະທັບຢູ່ທ່າມກາງນະຄອນ

[໔໔໕] ເມື່ອພຣະຣາຊາພຣະອົງນັ້ນ ຊົງຜະໝາດ
ຂ້າເສິກແຫ່ງແວ່ນແຄວັ້ນກໍກໍາເຣີບຂຶ້ນ
ຝ່າຍກົງກັນຂ້າມ ແລະພວກຍຸຍົງກໍທໍາລາຍແວ່ນແຄວັ້ນ

[໔໔໖] ເມື່ອປັດຈັນຕະຊົນນະບົດ (ຊົນນະບົດປາຍແດນ) ກໍາເຣີບ
ພຣະຣາຊາຈຶ່ງຮັບສັ່ງໃຫ້ພົນຮົບ ແລະທະຫານສື່ສານມາປະຊຸມກັນ
ຮັບສັ່ງໃຫ້ຜາບຂ້າເສິກ ໃນຄັ້ງນັ້ນ

[໔໔໗] ພົນຊ້າງ ພົນມ້າ ທະຫານສວມເກາະກ້າຫານ
ທະຫານແມ່ນທະນູ ແລະພົນລົດ ມາປະຊຸມກັນທັງໝົດ

[໔໔໘] ພວກພໍ່ຄົວ ພະນັກງານເຄື່ອງຕົ້ນ ພະນັກງານອາບນໍ້າ
ຊ່າງເຮັດດອກໄມ້ ເປັນຜູ້ກ້າຫານ
ເຄີຍຊະນະໃນສົງຄາມ ມາປະຊຸມກັນທັງໝົດ

[໔໔໙] ພວກຊາຍໜຸ່ມຖືດາບ ຖືທະນູ ສວມເກາະໜັງ
ເປັນຄົນແຂງແຮງ ເຄີຍຊະນະໃນສົງຄາມ
ມາປະຊຸມກັນທັງໝົດ

[໔໕໐] ຊ້າງມາຕັງຄະຕົກມັນ ໓ ແຫ່ງ
ເສື່ອມກໍາລັງເມື່ອອາຍຸ ໖໐ ປີ ມີສາຍປະໂຄນ
ພານໜ້າພານຫຼັງ ແລະເຄື່ອງປະດັບຄໍາ
ມາປະຊຸມກັນທັງໝົດ

[໔໓໑] ນັກຮົບອາຊີບ ອົດທົນຕໍ່ຄວາມໜາວຄວາມຮ້ອນ
ອົດທົນຕໍ່ອຸດຈາຣະປັດສາວະ ກຽມການສຳເລັດແລ້ວ
ມາປະຊຸມກັນທັງໝົດ

[໔໓໔] ພວກທະຫານເຫຼົ່ານັ້ນຮ່າເຮີງດ້ວຍສຽງສັງ ສຽງກອງ
ແລະສຽງແຕກຕື່ນມາປະຊຸມກັນທັງໝົດ

[໔໓໓] ພວກທະຫານເຫຼົ່ານັ້ນຕີຮັນຟັນແທງດ້ວຍຫຼາວ
ຫອກແຫຼມ ທະນູ ກັບມາປະຊຸມກັນທັງໝົດ

[໔໓໔] ໃນຄັ້ງນັ້ນ ຂ້າພະເຈົ້າສວມເກາະແລ້ວ
ສັ່ງໃຫ້ຈັບທະຫານ ໖໐,໐໐໐ ຄົນ ພ້ອມທັງພຣະຣາຊາຜູ້ຊະນະ
ຄົນທີ່ບໍ່ເຄີຍຊະນະສຽບຫຼາວ (ປະຈານ)

[໔໓໕] ທະຫານເຫຼົ່ານັ້ນພາກັນສົ່ງສຽງຮ້ອງວ່າ
ໂອນໍ ພຣະຣາຊາບໍ່ມີທຳ ເມື່ອຖືກໄຟເຜົາໄໝ້ຢູ່ໃນນະຮົກ
ບໍ່ຮູ້ວ່າປານໃດຈັກສິ້ນສຸດກຳ

[໔໓໖] ຄັ້ງນັ້ນ ຂ້າພະເຈົ້ານອນຢູ່ເທິງບ່ອນນອນ ເຫັນໄຟນະຮົກ
ຈຶ່ງນອນບໍ່ຫຼັບຕະຫຼອດທັງວັນທັງຄືນ
ພວກນາຍນິຣະຍະບານໃຊ້ຫຼາວຂູ່ຂ້າພະເຈົ້າ

[໔໓໗] (ຂ້າພະເຈົ້າຄິດວ່າ) ຄວາມມົວເມົາຣາດຊະສົມບັດ ສັດພາຫະນະ
ແລະພົນຮົບ ຈະມີປະໂຫຍດອັນໃດ
ສິ່ງເຫຼົ່ານັ້ນ ບໍ່ສາມາດຈະຕ້ານທານເຮົາໄວ້ໄດ້
ມີແຕ່ຈະເຮັດໃຫ້ສະດຸ້ງຢູ່ທຸກເມື່ອ

[໔໓໘] ບຸດ ພັນລະຍາ ແລະຣາດຊະສົມບັດທັງໝົດ
ຈະມີປະໂຫຍດອັນໃດສຳລັບເຮົາ
ທາງທີ່ດີເຮົາຄວນອອກບວດ ຊຳຮະທາງທີ່ຈະດຳເນີນໄປໃຫ້ມົດຈົດ

[໔໓໙] ຊ້າງມາຕັງຄະ ໖໐,໐໐໐ ເຊືອກ
ຕົກແຕ່ງດ້ວຍເຄື່ອງປະດັບທຸກຢ່າງ
ມີສາຍປະໂຄນປົກໜ້າ ປົກຫຼັງ
ເຄື່ອງປະດັບຫົວຄຳ

[໔໔໐] ມີນາຍຄວານຊ້າງຖືຫອກແລະຂໍຂີ່ນຂີ່ປະຈຳ
ຂ້າພະເຈົ້າບໍ່ມີຄວາມຫ່ວງໃຍລະຖິ້ມໄວ້ໃນສະນາມຮົບ
ເດືອດຮ້ອນຍ້ອນກຳຂອງຕົນ
ຈຶ່ງອອກບວດເປັນບັນພະຊິດ

[໔໔໑] ມ້າສິນທົບຊາດອາຊາໄນ ໖໐,໐໐໐ ໂຕ
ຕົກແຕ່ງດ້ວຍເຄື່ອງປະດັບທຸກຢ່າງເປັນພາຫະນະແລ່ນໄວ

[໔໔໔] ມີທະຫານມ້າຖືທະນູສວມເກາະຂີ່ນຂີ່ປະຈຳ
ຂ້າພະເຈົ້າລະຖິ້ມມ້າເຫຼົ່ານັ້ນທັງໝົດແລ້ວ
ອອກບວດເປັນບັນພະຊິດ

[໔໔໓] ລົດ ໖໐,໐໐໐ ຄັນ ຕົກແຕ່ງດ້ວຍເຄື່ອງອະລັງການ
ເປັນລົດທີ່ຫຸ້ມໜັງເສືອເຫຼືອງດ້ວຍ
ຫຸ້ມໜັງເສືອໂຄ່ງດ້ວຍບັນທຸກອາວຸດຮົບ ປັກທຸງໄວ້ໜ້າລົດ
ຂ້າພະເຈົ້າລະຖິ້ມລົດນັ້ນທັງໝົດແລ້ວອອກບວດເປັນບັນພະຊິດ

[໔໔໔] ແມ່ງົວນົມ ໖໐,໐໐໐ ໂຕ ແລະຂັນສຳຣິດສຳລັບຮອງນ້ຳນົມ
ທັງໝົດຂ້າພະເຈົ້າລະຖິ້ມແລ້ວ ອອກບວດເປັນບັນພະຊິດ

[໔໔໕] ສະຕີ ໖໐,໐໐໐ ນາງ
ຜູ້ປະດັບດ້ວຍເຄື່ອງອະລັງການທັງປວງ
ສວມໃສ່ຜ້າອາພອນຢ່າງງົດງາມ ຫ້ອຍຕຸ້ມຫູແກ້ວມະນີ

[໔໔໖] ມີຕາມົນໃຫຍ່ ມີປີກກະຕິຮ່າເຣີງ
ຮູບຮ່າງງົດງາມ ແອວນ້ອຍແອວບາງ
ຂ້າພະເຈົ້າລະສະຕີເຫຼົ່ານັ້ນ ຜູ້ພາກັນຄ່ຳຄວນຢູ່ແລ້ວ
ອອກບວດເປັນບັນພະຊິດ

[໔໔໗] ໝູ່ບ້ານ ໖໐,໐໐໐ ເຂດ ທີ່ບໍລິບູນດ້ວຍທຸກສິ່ງທຸກຢ່າງ
ຂ້າພະເຈົ້າລະຖິ້ມຣາດຊະສົມບັດນັ້ນແລ້ວ
ອອກບວດເປັນບັນພະຊິດ

[໔໔໘] ຂ້າພະເຈົ້າອອກຈາກນະຄອນແລ້ວ ເຂົ້າໄປສູ່ພູເຂົາຫິມະພານ
ໄດ້ສ້າງອາສົມໄວ້ ໃນທີ່ໃກ້ຝັ່ງແມ່ນ້ຳພາຄີຣະຖີ

[໔໔໙] ສ້າງປັນນະສາລາສຳເລັດແລ້ວ ສ້າງໂຮງສຳລັບບູຊາໄຟ
ພຳເພັງພຽນ ມີຈິດເດັດດ່ຽວ ຢູ່ໃນອາສົມ

[໔໕໐] ເມື່ອຂ້າພະເຈົ້າເຂົ້າຊານຢູ່ໃນມົນດົບກໍດີ ທີ່ເຫງົ້າຕົ້ນໄມ້ກໍດີ
ໃນເຮືອນວ່າງກໍດີ ຄວາມສະດຸ້ງຢ້ານຍ່ອມບໍ່ມີແກ່ຂ້າພະເຈົ້າ
ຂ້າພະເຈົ້າບໍ່ເຫັນໄພທີ່ໜ້າຢ້ານກົວເລີຍ

[໔໕໑] ໃນຂະນະນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ເລີດ ປະກອບດ້ວຍພຣະກະລຸນາ ເປັນມຸນີ
ມີແສງສະຫວ່າງແຫ່ງພຣະຍານໂຊດຊ່ວງ ສະເດັດອຸບັດຂຶ້ນໃນໂລກ

[໔໕໒] ໃກ້ອາສົມຂອງຂ້າພະເຈົ້າ ມີຍັກຕົນໜຶ່ງຜູ້ມີລິດຫຼາຍ
ເມື່ອພຣະພຸດທະເຈົ້າຜູ້ປະເສີດທີ່ສຸດອຸບັດຂຶ້ນແລ້ວ
ຍັກບອກກັບຂ້າພະເຈົ້າໃນຄັ້ງນັ້ນວ່າ

[໔໕໓] ພຣະພຸດທະເຈົ້າສະເດັດອຸບັດຂຶ້ນແລ້ວໃນໂລກ
ພຣະອົງຊົງພຣະນາມວ່າ ສຸເມທະ
ຊົງມີຈັກຂຸ ຊົງຊ່ອຍໝູ່ຊົນທັງປວງໃຫ້ຂ້າມ
ແມ່ນທ່ານ ພຣະອົງກໍຈັກຊ່ອຍໃຫ້ຂ້າມ

[໔໕໔] ຂະນະນັ້ນ ຂ້າພະເຈົ້າຟັງຄຳຂອງຍັກແລ້ວມີຄວາມສະລົດໃຈ
ຄິດຢູ່ວ່າ ພຸດໂທ ພຸດໂທ ປິດອາສົມ

[໔໕໕] ຂ້າພະເຈົ້າຖິ້ມຟືນສຳລັບບູຊາໄຟ ແລະເກັບສັນຖັດ
ໄຫວ້ອາສົມແລ້ວອອກຈາກປ່າໃຫຍ່ໄປ

[໔໕໖] ຂ້າພະເຈົ້າຖືໄມ້ຈັນຈາກບ່ອນນັ້ນ ຈາກບ້ານໄປສູ່ບ້ານ
ຈາກເມືອງໄປສູ່ເມືອງ
ສະແຫວງຫາພຣະພຸດທະເຈົ້າຜູ້ເປັນເທບຍິ່ງກວ່າເທບຢູ່
ໄດ້ເຂົ້າເຝົ້າພຣະອົງ ເຊິ່ງເປັນຜູ້ນຳໂດຍວິເສດ

[໔໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກ
ຊົງປະກາດສັດຈະ ໔ ເຮັດໝູ່ຊົນຈຳນວນຫຼາຍໃຫ້ຕັດສະຣູ້

[໘໕໘]	ຂ້າພະເຈົ້າປະນົມມືໄຫວ້ເໜືອຫົວ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ
ໄດ້ກ່າວຄາຖາເຫຼົ່ານີ້ວ່າ

[໘໕໙]	ເມື່ອຕົ້ນມະລິຊ້ອນມີດອກບານສະພັ່ງ
ກິ່ນຫອມຟຸ້ງໄປໃນທີ່ໃກ້
ຂ້າແຕ່ພຣະອົງຜູ້ມີຄວາມພຽນ
ພຣະອົງມີກິ່ນຄືຄຸນຫອມຟຸ້ງໄປທົ່ວທຸກທິດ

[໘໖໐]	ເມື່ອຕົ້ນຈຳປາ ຕົ້ນກະຖິນພິມານ
ຕົ້ນລຳດວນ ຕົ້ນກາຣະເກດ ແລະຕົ້ນສາລະ
ກຳລັງມີດອກບານ ກິ່ນຫອມຟຸ້ງໄປຕາມລົມ

[໘໖໑]	ຂ້າພຣະອົງສູບກິ່ນຂອງພຣະອົງ
ຈຶ່ງຈາກພູເຂົາຫິມະພານມາຈົນເຖິງບ່ອນນີ້
ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຜູ້ຈະເລີນທີ່ສຸດໃນໂລກ ມີພຣະຍົດຍິ່ງໃຫຍ່
ຂ້າພຣະອົງຂໍບູຊາພຣະອົງ

[໘໖໒]	ຂ້າພະເຈົ້າໃຊ້ຈຸນແກນຈັນຢ່າງດີ
ລູບທາພຣະພຸດທະເຈົ້າພຣະນາມວ່າສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກກະທຳຈິດຂອງຕົນໃຫ້ເຫຼື້ອມໃສ
ແລ້ວໄດ້ຢືນນິ່ງຢູ່ໃນຂະນະນັ້ນ

[໘໖໓]	ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສຸເມທະ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ປະທັບນັ່ງໃນທ່າມກາງພິກຂຸສົງແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໘໖໔]	ເຮົາຈັກພະຍາກອນຜູ້ທີ່ສັນເສີນຄຸນຂອງເຮົາ
ແລະໄດ້ໃຊ້ຈຸນແກ່ນຈັນບູຊາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໘໖໕]	ຜູ້ນີ້ຈັກເປັນຜູ້ກ່າວຄຳເວົ້າທີ່ເຊື່ອຖືໄດ້

ເປັນພົມ ຜູ້ຊື່ຕົງ ມິຕະບະ
ມີຣັດສະໝີສະຫວ່າງສະໄຫວຕະຫຼອດ ໔໕ ກັບ

[໔໖໖] ຈັກຣື່ນຣົມໃນເທວະໂລກຕະຫຼອດ ໔,໖໐໐ ກັບ
ຈັກເກີດເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໔໖໗] ຈັກເປັນຈອມເທບຄອງເທວະສົມບັດ ໓໓ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໔໖໘] ຜູ້ນີ້ຈຸຕິຈາກເທວະໂລກນັ້ນແລ້ວ ຈັກໄປເກີດເປັນມະນຸດ
ປະກອບດ້ວຍບຸນກຳ ຈັກເປັນບຸດຂອງພາມ

[໔໖໙] ພາມຊື່ ພາວະຣີ ຜູ້ຄົງແກ່ຮຽນ
ຊົງມົນ ຈົບໄຕຣເພດ ເຖິງພ້ອມດ້ວຍລັກສະນະ ໓ ປະການ

[໔໗໐] ເຂົາເປັນສິດຂອງພາມນັ້ນເປັນຜູ້ຈົບມົນ
ຈັກໄດ້ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ
ພຣະນາມວ່າໂຄດົມສາກະຍະ ຜູ້ປະເສີດ

[໔໗໑] ຂ້າພະເຈົ້າໄດ້ທູນຖາມບັນຫາຢ່າງລະອຽດ ກະທຳໃຈໃຫ້ຣ່າເຣິງ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໔໗໒] ໄຟ ໓ ກອງຂອງຂ້າພະເຈົ້າດັບແລ້ວ
ພົບທັງປວງຂ້າພະເຈົ້າຖອນໄດ້ແລ້ວ
ຂ້າພະເຈົ້າກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໔໗໓] ກິເລດທັງຫຼາຍຂ້າພະເຈົ້າກຳເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກຳຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗໔] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂຕເທີຍຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ໂຕເທີຍຍະເຖຣາປະທານທີ ໘ ຈົບ**

# ໙. ຊະຕຸກັນນິກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະຊະຕຸກັນນິກະເຖຣະ

(ພຣະຊະຕຸກັນນິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗໖] ຄັ້ງນັ້ນ ຂ້າພະເຈົ້າເປັນບຸດເສດຖີຢູ່ໃນນະຄອນຫົງສະວະດີ
ພຽບພ້ອມຫ້ອມລ້ອມຢູ່ດ້ວຍກາມມະຄຸນທັງຫຼາຍ

[໔໗໗] ລໍາດັບນັ້ນ ຂ້າພະເຈົ້າຂຶ້ນສູ່ຜາສາດ
ໃຊ້ສອຍໂພຄະສົມບັດຫຼາຍ
ແວດລ້ອມດ້ວຍການຟ້ອນລໍາຂັບຮ້ອງຢູ່ໃນຜາສາດນັ້ນ ໃນຄັ້ງນັ້ນ
[໔໗໘] ນັກດົນຕີມີເຄື່ອງປະໂຄມຢ່າງດີມາປະໂຄມໃຫ້ຂ້າພະເຈົ້າ
ຍິງສາວທັງຫຼາຍຍົວະຍຸ ທໍາໃຈຂອງຂ້າພະເຈົ້າໃຫ້ລຸ້ມຫຼົງ
[໔໗໙] ພວກນາງເຈລາວະກາ ພວກນາງວາມະນິກາ
ພວກນາງມັດຊິຕາພ້ອມດ້ວຍນາງກຸນຊະວາສີ
ພວກນາງລັງຄິກາ ແລະພວກນາງໂສກັດຊາຍີ
ຕ່າງແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ
[໔໘໐] ຄົນຕີສິ່ງ ຄົນຕີກອງ ນັກຟ້ອນ ນັກຣໍາ
ໂຕລະຄອນແລະພວກນາຕະສົບຈໍານວນຫຼາຍ
ແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ

[໔໘໑] ຊ່າງຕັດຜົມ ຄົນຈັດແຈງເຄື່ອງອາບນໍ້າ
ພໍ່ຄົວ ຊ່າງຮ້ອຍດອກໄມ້
ຄົນຖູ້ມມູນ (ຄົນຖູ້ມອຸດຈາຣະ) ນັກກາຍຍະກໍາແລະນັກມວຍເຫຼົ່ານັ້ນ
ທັງໝົດແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ

[໔໗໔] ເມື່ອຄົນເຫຼົ່ານັ້ນຫຼີ້ນຢູ່
ເມື່ອຂ້າພະເຈົ້າຊື່ນຊົມການບຳລຸງທີ່ຄົນເຫຼົ່ານັ້ນເຮັດ
ຂ້າພະເຈົ້າຍ່ອມບໍ່ຮູ້ວັນແລະຄືນ
ປຽບເໝືອນພຣະອິນໃນເມືອງສະຫວັນຊັ້ນຕາວະຕິງສາ

[໔໗໓] ຄົນເດີນທາງ ຄົນກຳພ້າ
ຄົນຂໍທານ ນັກສືບ ຈຳນວນຫຼາຍ
ເຂົ້າມາຂໍຂ້າພະເຈົ້າຈົນເຖິງເຮືອນເປັນນິດ

[໔໗໔] ສະມະນະ ແລະພາມທັງຫຼາຍຜູ້ເປັນເນື້ອນາບຸນຢ່າງປະເສີດ
ເມື່ອຈະໃຫ້ຂ້າພະເຈົ້າຈະເລີນບຸນ ມາຈົນເຖິງເຮືອນຂ້າພະເຈົ້າ

[໔໗໕] ພວກນິຄົນນຸ່ງຜ້າ ໃຊ້ຂີ້ໄຖທາ ໃຊ້ດອກໄມ້ກອງນຸ່ງ
ຖືໄມ້ ໓ ອັນ ໄວ້ຜົມໜຶ່ງປອຍ ມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໗໖] ພວກອາຊີວະກະ ພວກໂຈນປຸ້ນ
ພວກປະພຶດຂໍ້ວັດເໝືອນງົວ
ພວກປະພຶດເທວະທຳ
ພວກຄົນຖືມຂີ້ເຫຍື້ອເຫຼົ່ານັ້ນຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໗໗] ພວກນັກສູດ ພວກຮັກສິດທິ (ເສຣີພາບ)
ພວກໂກທະປຸກຄະນິກະ ພວກພ່ຳເພັງຕະບະ
ແລະພວກລືສີທ່ຽວຢູ່ປ່າຈຳນວນຫຼາຍ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໗໗] ຊາວແຄວ້ນອັນທະກະ (ໂອດທະກະ) ຊາວທະມິ
ຊາວສາກູນະ ຊາວມະລະຍາກະ ຊາວສະວະຣະ
ແລະຊາວໂຍນົກ ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໗໙] ຊາວແຄວ້ນອັນທະກະ ພວກສະມະນະໂລ້ນທັງໝົດ
ຊາວກຸຕະຖະລະ ຊາວສານຸວິນທະກະ ຊາວອາລະວິຈິນະຣັດ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໐] ຊາວອະລະສັນທະກະ ຊາວປັນລະວະກະ ຊາວປັບພະຕະ

ຊາວມັກຄະມາຣຸທະ ຊາວພາຫິກະ ແລະຊາວແຄວ້ນເຈຕະປຸດຕະ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໑] ຊາວແຄວ້ນມະທຸຣະ ຊາວແຄວ້ນໂກສົນ ຊາວແຄວ້ນກາສີ
ຊາວຫັດຖິບຸຣີ ຊາວແຄວ້ນອິສິນທະ ຊາວແຄວ້ນມັກກະລະ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໔] ຊາວເຈລາວະກະ ຊາວອາຣໍາພະ ຊາວໂອພາສະ
ຊາວເມຄະລະ ຊາວຂຸດທະກະ ຊາວສຸດທະກະ ຈໍານວນຫຼາຍ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໓] ຊາວໂຣຫະກະຊົນນະບົດ ຊາວລຸ່ມແມ່ນໍ້າສິນທຸ ຊາວຈິຕະກາ
ຊາວເອກະກັນນິກະນິຄົມ ຊາວສຸຣັດຖາ ແລະຊາວອະປະຣັນຕະຊົນນະບົດ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໔] ຊາວສຸບປາຣະກະ ຊາວກຸມານ (ຊາວມະລະກາ) ຊາວມະໄລຊົນນະບົດ
ຊາວສຸວັນນະພູມ ແລະຊາວວັດຊີ ເຫຼົ່ານັ້ນທັງໝົດ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໕] ຊ່າງສານ ຊ່າງຫູກ ຊ່າງໜັງ
ຊ່າງຖາກ ຄົນງານ ແລະຊ່າງໝໍ້
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໖] ຊ່າງແກ້ວ ຊ່າງເຫຼັກ ຊ່າງຄໍາ ຊ່າງທຍິບຜ້າ
ແລະຊ່າງດີບຸກເຫຼົ່ານັ້ນທັງໝົດ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໗] ຊ່າງສອນ ຊ່າງຊຽນ ຄົນສົ່ງຂອງ
ຊ່າງປຸງຂອງຫອມ ຊ່າງຍ້ອມ ແລະຊ່າງຊຸນ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໘] ພວກຄົນຂາຍນໍ້າມັນ ຄົນຫາບຟືນ ຄົນຫາບນໍ້າ
ຄົນຮັບໃຊ້ ຄົນທຸງຕົ້ມ ຄົນຕັກນໍ້າ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໔໙໙] ພວກຄົນເຝົ້າປະຕູ ທະຫານ

ຊ່າງຮ້ອຍດອກໄມ້ ຄືນຖິ້ມຂີ້ເຫຍື່ອດອກໄມ້
ຄວານຊ້າງ ຄືນລ້ຽງຊ້າງ
ຕ່າງພາກັນມາຫາຂ້າພະເຈົ້າຈົນເຖິງເຮືອນ

[໓໐໐] ຂ້າພະເຈົ້າໄດ້ທູນຖວາຍຂອງທຸກຢ່າງ
ແກ່ພຣະຣາຊາພຣະນາມວ່າ ອານັນທະ ຜູ້ພ້ອມພຽງ
ຂ້າພະເຈົ້າກະທໍາຄວາມຂາດໃຫ້ເຕັມດ້ວຍຣັດຕະນະ ໗ ສີ

[໓໐໑] ຂ້າພະເຈົ້າຮູ້ຈິດຂອງຊົນຈໍານວນຫຼາຍມີວັນນະຕ່າງກັນ
ທີ່ຂ້າພະເຈົ້າຍ້ອງຍໍທັງໝົດໃຫ້ເພິ່ງພໍໃຈແມ່ນດ້ວຍຣັດຕະນະ

[໓໐໒] ເມື່ອດົນຕີມີສຽງມ່ວນບັນເລງຢູ່
ເມື່ອກອງດັ່ງກ້ອງຢູ່ ເມື່ອຫອຍສັງເຂົາເປົ່າຢູ່
ຂ້າພະເຈົ້າມ່ວນຊື່ນຢູ່ໃນເຮືອນຂອງຕົນ

[໓໐໓] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ພ້ອມດ້ວຍພິກຂຸຂີນາສົບຈໍານວນ ໑໐໐,໐໐໐ ອົງ

[໓໐໔] ພຣະອົງ ຜູ້ມີຈັກຂຸພ້ອມດ້ວຍພິກຂຸທັງຫຼາຍ
ສະເດັດດໍາເນີນໄປຕາມຖະໜົນ
ຊົງເຮັດທິດທັງປວງໃຫ້ສະຫວ່າງໂຊດຊ່ວງ
ເໝືອນຕົ້ນພຶກສາປະທີບ

[໓໐໕] ເມື່ອພຣະອົງຜູ້ຊົງເປັນຜູ້ນໍາສັດໂລກກໍາລັງສະເດັດດໍາເນີນໄປ
ກອງທັງປວງຍັງດັງກ້ອງຢູ່
ຣັດສະໝີຂອງພຣະອົງພວຍພຸ່ງເໝືອນດວງອາທິດອຸໄທ ສັນນັ້ນ

[໓໐໖] ຂະນະນັ້ນ ແສງສະຫວ່າງຈ້າສ່ອງເຂົ້າໄປພາຍໃນເຮືອນຂອງຂ້າພະເຈົ້າ
ດ້ວຍພຣະຣັດສະໝີທີ່ສ່ອງເຂົ້າໄປທາງປ່ອງໜ້າຕ່າງ

[໓໐໗] ຂ້າພະເຈົ້າເຫັນພຣະຣັດສະໝີຂອງພຣະພຸດທະເຈົ້າແລ້ວ
ໄດ້ກ່າວກັບພວກບໍລິວານວ່າ
ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດສະເດັດມາເຖິງຖະໜົນນີ້ແລ້ວ

[໓໐໘] ຂ້າພະເຈົ້າຟ້າວລົງຈາກຜາສາດແລ້ວ ໄດ້ໄປສູ່ລະຫວ່າງທາງ
ຖວາຍອະພິວາດພຣະສໍາມາສໍາພຸດທະເຈົ້າ ໄດ້ຂາບທູນຄໍານີ້ວ່າ

[໓໐໗] ຂໍພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ໂຜດຊົງອະນຸເຄາະຂ້າພຣະອົງດ້ວຍເທີ້ນ
ພຣະມຸນີພຣະອົງນັ້ນ ພ້ອມດ້ວຍພຣະອະຣະຫັນ ໑໐໐,໐໐໐ ອົງ
ຊົງຮັບນິມົນ

[໓໑໐] ເມື່ອຂ້າພະເຈົ້ານິມົນພຣະສຳມາສຳພຸດທະເຈົ້າແລ້ວ
ໄດ້ນຳສະເດັດພຣະອົງມາຍັງເຮືອນຂອງຕົນ
ອັງຄາດພຣະມະຫາມຸນີໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳໃນເຮືອນນັ້ນ

[໓໑໑] ຂ້າພະເຈົ້າຮູ້ເວລາທີ່ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຜູ້ຄົງທີ່ ກຳລັງສະເຫວີຍ
ໄດ້ບຳຣຸງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ດ້ວຍການຂັບຮ້ອງແລະດົນຕີ

[໓໑໒] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບນັ່ງຢູ່ພາຍໃນເຮືອນ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໓໑໓] ເຮົາຈັກພະຍາກອນຜູ້ທີ່ບຳຣຸງເຮົາດ້ວຍດົນຕີ
ແລະໄດ້ຖວາຍເຂົ້ານ້ຳແກ່ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໓໑໔] ຄົນຜູ້ນີ້ຈັກເປັນຜູ້ມີອາຫານຫຼາຍ ມີເງິນ ມີໂພຊະນະ
ຄອງເອກກະລາດໃນທະວີບທັງ ໔

[໓໑໕] ຈັກສະມາທານສີນ ໕ ຍິນດີໃນກຳມະບົດ ໑໐
ເມື່ອສະມາທານແລ້ວ ກໍປະພຶດ ໃຫ້ບໍລິວານສຶກສາດ້ວຍ
[໓໑໖] ເຄື່ອງດົນຕີ ໑໐໐,໐໐໐ ຢ່າງ
ກອງທີ່ປະດັບຕົກແຕ່ງສວຍງາມ
ຈັກບັນເລງໃຫ້ຜູ້ນີ້ຢູ່ເປັນນິດ
ນີ້ເປັນຜົນແຫ່ງການບຳຣຸງ
[໓໑໗] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ຈັກເປັນຈອມເທບຄອງເທວະສົມບັດຕະຫຼອດ ໖໔ ຊາດ

[໓໑໗] ຈັກເປັນພຣະເຈົ້າຈັກກະພັດ ໗໔ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໓໑໙] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດຊະສະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໓໘໐] ຜູ້ນີ້ເກີດໃນກຳເນີດໃດ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ໃນກຳເນີດນັ້ນ ເຂົາຈັກເກີດເປັນມະນຸດມີໂພຄະບໍ່ບົກຜ່ອງ

[໓໘໑] ຈັກເປັນຜູ້ຄົງແກ່ຮຽນ ຈົບໄຕຣເພດ
ທ່ຽວສະແຫວງຫາປະໂຫຍດຢ່າງສູງສຸດຢູ່ທົ່ວແຜ່ນດິນນີ້

[໓໘໘] ແລະພາຍຫຼັງ ເຂົາຖືກກຸສົນມູນຕັກເຕືອນອອກບວດແລ້ວ
ຈັກຍິນດີຍິ່ງໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂຄດົມ

[໓໘໓] ຜູ້ນີ້ຈັກໃຫ້ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ໂຄດົມສາກະຍະ
ຜູ້ປະເສີດຊຶ່ງພໍພຣະທະໄທ
ເຜົາກິເລດທັງຫຼາຍໄດ້ແລ້ວ ຈັກເປັນພຣະອະຣະຫັນ

[໓໘໔] ວັນນີ້ ຂ້າພະເຈົ້າເປັນຜູ້ບໍ່ເກງກົວຢູ່
ໃນສາດສະໜາຂອງພຣະສາກະຍະຜູ້ປະເສີດ
ເໝືອນພະຍາເສືອໂຄ່ງ ແລະຣາດຊະສີ ພະຍາເນື້ອໃນປ່າໃຫຍ່

[໓໘໕] ຂ້າພະເຈົ້າບໍ່ເຫັນການບັງເກີດຂອງຂ້າພະເຈົ້າໃນຕະກູນທີ່ຂັດສົນ
ຫຼື ຍາກຈົນໃນເທວະໂລກ ຫຼື ໃນມະນຸດໂລກ
ນີ້ເປັນຜົນແຫ່ງການບຳຣຸງ

[໓໘໖] ຂ້າພະເຈົ້າເປັນຜູ້ຂວນຂວາຍໃນວິເວກ ສະງົບຣະງັບ ບໍ່ມີອຸປະທິ
ຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໘໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໔໗] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຊະຕຸກັນນິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ຊະຕຸກັນນິກະເຖຣາປະທານທີ ໙ ຈົບ**

# ໑໐. ອຸເທນະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອຸເທນເຖຣະ

(ພຣະອຸເທນເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໕໐] ໃນບ່ອນບໍ່ໄກພູເຂົາຫິມະພານມີພູໜ່ວຍໜຶ່ງຊື່ປະທຸມ
ຂ້າພະເຈົ້າສ້າງອາສົມສ້າງປັນນະສາລາຢ່າງດີໄວ້

[໕໕໑] ທີ່ໃກ້ອາສົມຂອງຂ້າພະເຈົ້ານັ້ນ
ແມ່ນ້ຳໄຫຼຢູ່ມີທ່ານ້ຳຮາບພຽງ ເປັນຕາອອນຊອນໃຈ
ແມ່ນ້ຳມີນ້ຳໃສສະອາດ ເຢັນສະນິດ ໄຫຼຢູ່ເປັນນິດ

[໕໕໒] ຝູງປາສະຫຼາດ ຝູງປາກະບອກ
ຝູງປາສະຫວາຍ ຝູງປາເຄົ້າ
ແລະຝູງປາຕະພຽນ ຢູ່ປະຈຳໃນແມ່ນ້ຳ
ເຮັດໃຫ້ແມ່ນ້ຳງາມທຸກເມື່ອ

[໕໕໓] ດາດດື່ນໄປດ້ວຍຕົ້ນໝາກມ່ວງ ຕົ້ນຫວ້າ
ອັນໜຶ່ງ ຕົ້ນກຸ່ມ ຕົ້ນໝາກເມົ່າ

ຕົ້ນຣາຊະພຶກ ຕົ້ນແຄຝອຍ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໓໔] ຕົ້ນປູ່ ຕົ້ນໝາກກ່ຳຫຼວງ
ຕົ້ນກາຫຼົງ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໓໕] ຕົ້ນລຳດວນ ຕົ້ນຊະບາ ຕົ້ນກາກະທິງ
ແລະຕົ້ນສາລະ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໓໖] ຕົ້ນຄຳ ຕົ້ນຊ້າງນ້າວ ຕົ້ນກະທຸ່ມ ຕົ້ນໝາກເຟືອງ ມີດອກບານ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໓໗] ຕົ້ນສົ້ມມໍ ຕົ້ນໝາກຂາມປ້ອມ ຕົ້ນໝາກມ່ວງ ຕົ້ນຫວ້າ
ຕົ້ນສົ້ມມໍພິເພກ ຕົ້ນໝາກກະທັນ ຕົ້ນຮົກຟ້າ ຕົ້ນໝາກຕູມ
ມີໝາກດົກຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໓໓໘] ມັນອ້ອນ ຕົ້ນໝາກແຂ້ງ ກຳລັງແຕກດອກອອກໝາກ
ໃກ້ອາສົມຂອງຂ້າພະເຈົ້ານັ້ນ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໓໙] ຕົ້ນອະໂສກ ຕົ້ນວາຣີ ແລະຕົ້ນກະເດົາ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໔໐] ຕົ້ນບຸນນາກ ຕົ້ນບຸນນາກເຂົາ
ຕົ້ນບິໜີ ໃນທີ່ໃກ້ອາສົມນັ້ນ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘໑] ຕົ້ນຍ່ານຊາຍ ຕົ້ນຄົນທີຂະເມົາ ແລະຕົ້ນຈຳປາ
ໃນທີ່ໃກ້ອາສົມຂອງຂ້າພະເຈົ້ານັ້ນ ມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍຄືກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘໒] ໃນບ່ອນບໍ່ໄກມີສະໂບກຂະຣະນີ
ມີນົກຈັກກະພາກສົ່ງສຽງຮ້ອງຢູ່
ເດຍລະດາດດ້ວຍບົວເຜື່ອນ ບົວຫຼວງ ແລະບົວຂາບ

[໕໘໓] ມີນ້ຳເຢັນສະນິດ ມີທ່ານ້ຳຮາບພຽງເປັນຕາອອນຊອນໃຈ
ນ້ຳໃສສະອາດ ສະເໝີດ້ວຍແກ້ວຜຼຶກ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘໔] ໃນສະນັ້ນ ມີບົວຫຼວງ ບົວຂາວ
ບົວຂາບ ເດຍລະດາດດ້ວຍບົວເຜື່ອນ ມີດອກບານສະພັ່ງ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘໕] ຝູງປາສະຫຼາດ ຝູງປາກະບອກ ຝູງປາສະຫວາຍ ຝູງປາເຄົ້າ
ແລະຝູງປາຕະພຽນລອຍວຽນຢູ່ໃນສະນັ້ນ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘໖] ແຂ້ ຕະໂຂງ ເຕົ່າ ນາກ ງູຫຼາມ
ແລະງູເຫຼືອມຈຳນວນຫຼາຍ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘໗] ນົກກາງແກ ນົກເປັດນ້ຳ ນົກຈັກກະພາກ
ນົກການ້ຳ ນົກຕ້ອຍຕີວິດ ແລະນົກສາລິກາ
ຢູ່ໃນທີ່ໃກ້ອາສົມນັ້ນ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘໘] ຕົ້ນຕາເສືອ ຕົ້ນຈິງກົນນີ
ຕົ້ນກາຣະເກດ ໃນທີ່ໃກ້ອາສົມນັ້ນ
ມີດອກບານສະພັ່ງສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໘໙] ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ
ໝີ ໝາປ່າ ໝາໃນ ເສືອດາວ
ທ່ຽວສັນຈອນຢູ່ໃນປ່າໃຫຍ່
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໙໐] ລືສີທັງຫຼາຍ ພຽບພ້ອມດ້ວຍຊະດາ
ແລະບໍຣິຂານ ນຸ່ງໜັງໜັງສັດ
ທ່ຽວສັນຈອນຢູ່ໃນປ່າໃຫຍ່
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໙໑] ບາງພວກນຸ່ງໜັ່ງໜັງສັດ ມີປັນຍາຮັກສາຕົນ
ມີຄວາມປະພຶດສະງົບ ແລະບໍລິໂພກອາຫານແຕ່ໜ້ອຍເຫຼົ່ານັ້ນທັງໝົດ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໙໒] ຄັ້ງນັ້ນ ລືສີທັງຫຼາຍຫາບບໍຣິຂານເຂົ້າໄປສູ່ປ່າ
ກິນຫົວມັນ ແລະໝາກໄມ້ຢູ່ໃນອາສົມ

[໓໙໓] ຄັ້ງນັ້ນ ລືສີເຫຼົ່ານັ້ນບໍ່ຕ້ອງນຳຟືນມາ
ນ້ຳສຳລັບລ້າງຕີນກໍບໍ່ຕ້ອງນຳມາ
ດ້ວຍອານຸພາບແຫ່ງລືສີທັງປວງ ຟືນແລະນ້ຳຍ່ອມມາເອງ

[໓໙໔] ລືສີ ໘໔,໐໐໐ ຕົນ
ປະຊຸມກັນຢູ່ໃນອາສົມນັ້ນ ທັງໝົດນີ້
ເປັນຜູ້ເຂົ້າຊານ ສະແຫວງຫາປະໂຫຍດສູງສຸດ

[໓໙໕] ລືສີເຫຼົ່ານັ້ນເປັນຜູ້ມີຕະບະ ປະພຶດພົມມະຈັນ
ຕັກເຕືອນກັນແລະກັນ ເປັນຜູ້ແໜ້ນແຟ້ນ
ເຫາະໄປໃນອາກາດໄດ້ທຸກຕົນຢູ່ໃນອາສົມໃນຄັ້ງນັ້ນ

[໓໙໖] ປະຊຸມກັນທຸກ ໕ ວັນ
ບໍ່ຣະສ່ຳຣະສາຍ ມີຄວາມປະພຶດສະງົບ
ຂາບໄຫວ້ກັນແລະກັນແລ້ວ
ຈຶ່ງອວ່າຍໜ້າຫຼີກໄປຕາມທິດ (ທີ່ຕົນຢູ່)

[໓໙໗] ຄັ້ງນັ້ນ ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ

ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ພຣະອົງສະເດັດອຸບັດຂຶ້ນ ກຳຈັດຄວາມມືດມົນອົນທະການ

[໖໔໗] ໃກ້ອາສົມຂອງຂ້າພະເຈົ້າ
ມີຍັກຕົນໜຶ່ງ ຜູ້ມີລິດຫຼາຍ
ຍັກຕົນນັ້ນໄດ້ບອກຂ່າວພຣະສຳມາສຳພຸດທະເຈົ້າ
ຊົງພຣະນາມວ່າ ປະທຸມຸດຕະຣະ ແກ່ຂ້າພະເຈົ້າວ່າ

[໖໔໙] ພຣະພຸດທະເຈົ້າອົງນີ້ພຣະນາມວ່າ ປະທຸມຸດຕະຣະ
ເປັນພຣະມະຫາມຸນີ ສະເດັດອຸບັດຂຶ້ນແລ້ວ
ທ່ານຈົ່ງຟ້າວໄປເຝົ້າພຣະສຳມາສຳພຸດທະເຈົ້າເທີ້ນ ທ່ານຜູ້ມີຣະທຸກ

[໖໕໐] ຂ້າພະເຈົ້າໄດ້ຟັງຄຳຂອງຍັກແລ້ວກໍມີຈິດຜ່ອງໃສຍິ່ງນັກ
ຈຶ່ງປິດອາສົມແລ້ວອອກຈາກປ່າໃນຂະນະນັ້ນ

[໖໕໑] ເມື່ອໄຟກຳລັງໄໝ້ຜ້າຢູ່
ຂ້າພະເຈົ້າອອກຈາກອາສົມ
ພັກຢູ່ກາງທາງຄືນໜຶ່ງແລ້ວ
ເຂົ້າເຝົ້າພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳໂດຍວິເສດ

[໖໕໒] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ຊົງປະກາດສັດຈະ ໔ ສະແດງອະມະຕະບົດຢູ່

[໖໕໓] ຂ້າພະເຈົ້າຖືດອກປະທຸມເຊິ່ງບານເຕັມທີ່
ເຂົ້າເຝົ້າພຣະອົງຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ມີຈິດເຫຼື້ອມໃສ ມີໃຈຍິນດີ ຖວາຍອະພິວາດພຣະພຸດທະເຈົ້າ

[໖໕໔] ບູຊາພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງເປັນຜູ້ນຳແລ້ວຫົ່ມໜັງສັດບ່ຽງບ່າ
ສັນເສີນພຣະອົງຜູ້ຊົງເປັນຜູ້ນຳສັດໂລກວ່າ

[໖໕໕] ພຣະສຳມາສຳພຸດທະເຈົ້າຜູ້ບໍ່ມີອາສະວະ
ປະທັບຢູ່ບ່ອນນີ້ດ້ວຍພຣະຍານໃດ

ຂ້າພຣະອົງຈັກສັນເສີນພຣະຍານນັ້ນ
ຂໍພຣະອົງຈົ່ງສະດັບຂ້າພຣະອົງຂາບທູນ

[໖໖໖] ພຣະສຳມາສຳພຸດທະເຈົ້າຊົງຕັດກະແສວັດຕະສົງສານແລ້ວ
ຊົງຊ່ອຍສັບພະສັດໃຫ້ຂ້າມພົ້ນ
ສັບພະສັດນັ້ນຟັງທຳຂອງພຣະອົງແລ້ວ
ຍ່ອມຂ້າມພົ້ນກະແສຕັນຫາໄດ້

[໖໖໗] ຂ້າແຕ່ພຣະອົງຜູ້ສູງສຸດແຫ່ງເທວະດາ
ແລະມະນຸດ ພຣະອົງເປັນພຣະສາດສະດາ
ເປັນທຸງໄຊ ເປັນຫຼັກ ເປັນຈຸດມຸ້ງໝາຍ ເປັນບ່ອນເພິ່ງ
ແລະເປັນປະທີບຂອງສັດທັງຫຼາຍ

[໖໖໘] ຄະນາຈານຜູ້ນຳໝູ່ປະມານເທົ່າໃດ ທີ່ຖືກກ່າວເຖິງໃນໂລກ
ພຣະອົງເປັນສັບພັນຍູຜູ້ເລີດກວ່າຄະນາຈານເຫຼົ່ານັ້ນ
ຄະນາຈານເຫຼົ່ານັ້ນນັບວ່າຢູ່ໃນຄຳສອນຂອງພຣະອົງ

[໖໖໙] ພຣະອົງຜູ້ສັບພັນຍູຊົງຊ່ອຍໝູ່ຊົນຈຳນວນຫຼາຍ
ໃຫ້ຂ້າມພົ້ນ (ຈາກວັດຕະສົງສານ)
ດ້ວຍພຣະຍານຂອງພຣະອົງ
ໝູ່ຊົນອາໄສການໄດ້ເຝົ້າພຣະອົງແລ້ວ ຈັກເຮັດບ່ອນສຸດທຸກໄດ້

[໖໗໐] ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ຄັນທະຊາດເຫຼົ່າໃດເຫຼົ່າໜຶ່ງຫອມຟຸ້ງໄປໃນໂລກ
ຂ້າແຕ່ພຣະມະຫາມຸນີຜູ້ເປັນນາບຸນ
ກິ່ນຫອມທີ່ຈະສະເໝີດ້ວຍກິ່ນຫອມຂອງພຣະອົງບໍ່ມີ

[໖໗໑] ຂ້າແຕ່ພຣະມະຫາມຸນີຜູ້ມີພຣະຈັກຂຸ
ຂໍພຣະອົງຊົງປິດກຳເນີດດີຣັດສານ ແລະນະຮົກເທີ້ນ
ພຣະອົງຊົງສະແດງບົດທີ່ປັດໄຈປຸງແຕ່ງບໍ່ໄດ້ ສະງົບຣະງັບ

[໖໗໘] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໗໖] ເຮົາຈັກພະຍາກອນຜູ້ທີ່ເຫຼື້ອມໃສໄດ້ບູຊາຍານຂອງເຮົາ
ດ້ວຍມືຂອງຕົນ ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໖໗໔] ຜູ້ນັ້ນຈັກຮື່ນຮົມໃນເທວະໂລກຕະຫຼອດ ໖໐,໐໐໐ ກັບ
ແລະຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໖໗໕] ຂ້າພະເຈົ້າເປັນຜູ້ໄດ້ລາບຢ່າງດີແລ້ວ
ຂ້າພະເຈົ້າໃຫ້ພຣະພຸດທະເຈົ້າຜູ້ມີຂໍ້ວັດງາມຊົງພໍພຣະທະໄທ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໖໗໖] ກິເລດທັງຫຼາຍຂ້າພະເຈົ້າກຳເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກຳຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໗໗] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກຳໄດ້ກະທຳສຳເລັດແລ້ວ

[໖໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກຳໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸເທນເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການແນວນີ້

**ອຸເທນະເຖຣາປະທານທີ ໑໐ ຈົບ**

**ເມດເຕີຍຍະວັກທີ ໔໑ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຕິດສະເມດເຕີຍຍະເຖຣາປະທານ
໒. ເມດຕະຄູເຖຣາປະທານ
໓. ອຸປະສີວະເຖຣາປະທານ
໔. ໂທຕະກະເຖຣາປະທານ
໕. ຊະຕຸກັນນິກະເຖຣາປະທານ
໖. ປຸນນະກະເຖຣາປະທານ
໗. ເຫມະກະເຖຣາປະທານ
໘. ໂຕເທີຍຍະເຖຣາປະທານ
໙. ບັນທະກະເຖຣາປະທານ
໑໐. ອຸເທນະເຖຣາປະທານ

**ແລະໃນວັກນີ້ມີຄາຖາ ໓໘໓ ຄາຖາ**